# ພຣະໄຕຣປິດົກພາສາລາວ

## ເຫຼັ້ມທີ ໔

# ພຣະວິໄນ

## ເຫຼັ້ມທີ ໔

## ມະຫາວັກ ພາກ ໑



ສະບັບຄົ້ນຄ້ວວັດທາດຫຼວງເໜືອ
ພຸດທະສັກກະຣາດ ໒໕໖໕

# ຄຳປາລົບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ອຍພຣະອາຈານອົງໜຶ່ງເຮັດພຣະໄຕປິດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທຳມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໒໕໕໕-໒໕໕໗ ເປັນຈຳນວນ ໓໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກຳຄ່າໃຊ້ຈ່າຍ ຈົນສຳເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປິດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປິດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຮົບໂຮມຄວາມຮູ້ ຄຳສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາລົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລຳພັງພຽງອົງດຽວຢູ່ຫໍທຳມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບ ມ ໒ ຄຶດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໃສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົນຫາຄວາມຮູ້ເອົາເອງ ຜ່ານໄປ ໓ ປີ ກໍໄດ້ແປພຣະວິໄນປິດົກສຳເລັດໄດ້ ໘ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປິດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ໘ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໔ ປີ ກໍໄດ້ສຳເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສຳນວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນຳເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໒ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໔໕ ຫົວ ຕ່າງແຕ່ສາຣະບານ ແລະການຈັດໜ້າ ແລະບໍ່ມີຄຳນຳ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄຳຜິດ ສຳນວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນຳໃຫ້ລະມັດລະວັງໃນການນຳໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທ ຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອຳນວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນຳໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນຳເຂົ້າມາເຮັດວຽກແປພຣະໄຕຣປິດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທຳຂອງອົງສົມເດັດ ພຣະສຳມາສຳພຸດທະເຈົ້າຈົ່ງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສາລະບານ

**໔. ອຸໂປສະຖະຂັນທະກະ** ........................................................................... ໑໗໔

# ພຣະໄຕຣປິດົກ

## ເຫຼັ້ມທີ ໔

# ພຣະວິໄນ

## ເຫຼັ້ມທີ ໔

## ມະຫາວັກ ພາກ ໑

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າ ພຣະອົງນັ້ນ**

## ໑. ມະຫາຂັນທະກະ

### ໑. ໂພທິກະຖາ

### ວ່າດ້ວຍເຫດການທໍາອິດຕັດສະຮູ້ທີ່ຂ່ວງຕົ້ນໂພທິພຶກ ເລື້ອງຊົງມະນະສິການປະຕິດຈະສະມຸບບາດ

[໑] ສະໄໝນັ້ນ ພຣະຜູ້ມີພຣະພາກ ພຸດທະເຈົ້າ ເມື່ອທໍາອິດຕັດສະຮູ້ ປະທັບຢູ່ຂ່ວງຕົ້ນໂພທິພຶກ[໒] ໃກ້ຝັ່ງແມ່ນໍ້າເນຣັນຊະຣາ ເຂດອຸຣຸເວລາ ເທື່ອນັ້ນພຣະຜູ້ມີພຣະພາກເຈົ້າໄດ້ປະທັບນັ່ງໂດຍບັນລັງດຽວສະເຫວີຍວິມຸດຕິສຸກຢູ່ຂ່ວງຕົ້ນໂພທິພຶກເປັນເວລາ ໗ ວັນ ໃນທີ່ນັ້ນ ພຣະຜູ້ມີພຣະພາກເຈົ້າຊົງມະນະສິການປະຕິດຈະສະມຸບບາດໂດຍອະນຸໂລມະ ແລະ ປະຕິໂລມ ຕະຫຼອດປະຖົມຍາມແຫ່ງຣາຕີວ່າ

### ປະຕິດຈະສະມຸບບາດໂດຍອະນຸໂລມ

| | |
|---|---|
| ຍ້ອນອະວິດຊາເປັນປັດໄຈ | ສັງຂານຈຶ່ງມີ |
| ຍ້ອນສັງຂານເປັນປັດໄຈ | ວິນຍານຈຶ່ງມີ |
| ຍ້ອນວິນຍານເປັນປັດໄຈ | ນາມຣູບຈຶ່ງມີ |
| ຍ້ອນນາມຣູບເປັນປັດໄຈ | ສາລະຍະຕະນະຈຶ່ງມີ |

ຍ້ອນສາລະຍະຕະນະເປັນປັດໄຈ ຜັດສະຈຶ່ງມີ
ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ
ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງມີ
ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ
ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີ
ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ
ຍ້ອນຊາດເປັນປັດໄຈ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກຂະ ໂທມະນັດ ອຸປາຍາດຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

## ປະຕິດຈະສະມຸບບາດໂດຍປະຕິໂລມ

ອັນໜຶ່ງ ຍ້ອນອະວິດຊາດັບໄປບໍ່ເຫຼືອດ້ວຍວິຣາຄະສັງຂານຈຶ່ງດັບ
ຍ້ອນສັງຂານດັບ ວິນຍານຈຶ່ງດັບ
ຍ້ອນວິນຍານດັບ ນາມຮູບຈຶ່ງດັບ
ຍ້ອນນາມຮູບດັບ ສາລະຍະຕະນະຈຶ່ງດັບ
ຍ້ອນສາລະຍະຕະນະດັບ ຜັດສະຈຶ່ງດັບ
ຍ້ອນຜັດສະດັບ ເວທະນາຈຶ່ງດັບ
ຍ້ອນເວທະນາດັບ ຕັນຫາຈຶ່ງດັບ
ຍ້ອນຕັນຫາດັບ ອຸປາທານຈຶ່ງດັບ
ຍ້ອນອຸປາທານດັບ ພົບຈຶ່ງດັບ
ຍ້ອນພົບດັບ ຊາດຈຶ່ງດັບ
ຍ້ອນຊາດດັບ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກຂະ ໂທມະນັດ ອຸປາຍາດຈຶ່ງດັບ ກອງທຸກທັງມວນນີ້ມີການດັບດ້ວຍອາການແນວນີ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນີ້ແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

## ພຸດທະອຸທານຄາຖາທີ ໑

ເມື່ອໃດແລ ທຳທັງຫຼາຍຜາກົດແກ່ພາມ
ຜູ້ມີຄວາມພຽນ ເພ່ງຢູ່
ເມື່ອນັ້ນ ຄວາມສົງໄສທັງປວງຂອງພາມນັ້ນຍ່ອມໝົດໄປ
ຍ້ອນມາຮູ້ທຳພ້ອມທັງເຫດ

[໔] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງມະນະສິການປະຕິດຈະສະມຸບບາດໂດຍອະນຸໂລມະແລະປະຕິໂລມ ຕະຫຼອດມັດຊິມະຍາມແຫ່ງຣາຕີວ່າ

## ປະຕິດຈະສະມຸບບາດໂດຍອະນຸໂລມ

ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ
ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ
ຍ້ອນວິນຍານເປັນປັດໄຈ ນາມຮູບຈຶ່ງມີ
ຍ້ອນນາມຮູບເປັນປັດໄຈ ສາລະຍະຕະນະຈຶ່ງມີ
ຍ້ອນສາລະຍະຕະນະເປັນປັດໄຈ ຜັດສະຈຶ່ງມີ
ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ
ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງມີ
ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ
ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີ
ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ
ຍ້ອນຊາດເປັນປັດໄຈ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກຂະ ໂທມະນັດ ອຸປາຍາດຈຶ່ງມີ ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

## ປະຕິດຈະສະມຸບບາດໂດຍປະຕິໂລມ

ອັນໜຶ່ງ ຍ້ອນອະວິດຊາດັບໄປບໍ່ເຫຼືອດ້ວຍວິຣາຄະ ສັງຂານຈຶ່ງດັບ
ຍ້ອນສັງຂານດັບ ວິນຍານຈຶ່ງດັບ
ຍ້ອນວິນຍານດັບ ນາມຮູບຈຶ່ງດັບ
ຍ້ອນນາມຮູບດັບ ສາລະຍະຕະນະຈຶ່ງດັບ
ຍ້ອນສາລະຍະຕະນະດັບ ຜັດສະຈຶ່ງດັບ
ຍ້ອນຜັດສະດັບ ເວທະນາຈຶ່ງດັບ
ຍ້ອນເວທະນາດັບ ຕັນຫາຈຶ່ງດັບ
ຍ້ອນຕັນຫາດັບ ອຸປາທານຈຶ່ງດັບ
ຍ້ອນອຸປາທານດັບ ພົບຈຶ່ງດັບ
ຍ້ອນພົບດັບ ຊາດຈຶ່ງດັບ
ຍ້ອນຊາດດັບ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກຂະ ໂທມະນັດ ອຸປາຍາດຈຶ່ງດັບ ກອງທຸກທັງມວນນີ້ມີການດັບດ້ວຍອາການແນວນີ້

ລຳດັບນັ້ນ ເມື່ອພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

## ພຸດທະອຸທານຄາຖາທີ ໔

ເມື່ອໃດແລ ທຳທັງຫຼາຍຜາກົດແກ່ພາມ
ຜູ້ມີຄວາມພຽນ ເພ່ງຢູ່
ເມື່ອນັ້ນ ຄວາມສົງໄສທັງປວງຂອງພາມນັ້ນຍ່ອມສິ້ນໄປ
ຍ້ອນໄດ້ຮູ້ຄວາມສິ້ນໄປແຫ່ງປັດໄຈທັງຫຼາຍ

[໓] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງພິຈາລະນາປະຕິດຈະສະມຸບບາດໂດຍອະນຸໂລມແລະປະຕິໂລມຕະຫຼອດປັດສິມຍາມແຫ່ງຣາຕີວ່າ

## ປະຕິດຈະສະມຸບບາດໂດຍອະນຸໂລມ

| | |
|---|---|
| ຍ້ອນອະວິດຊາເປັນປັດໄຈ | ສັງຂານຈຶ່ງມີ |
| ຍ້ອນສັງຂານເປັນປັດໄຈ | ວິນຍານຈຶ່ງມີ |
| ຍ້ອນວິນຍານເປັນປັດໄຈ | ນາມຮູບຈຶ່ງມີ |
| ຍ້ອນນາມຮູບເປັນປັດໄຈ | ສາລະຍະຕະນະຈຶ່ງມີ |
| ຍ້ອນສາລະຍະຕະນະເປັນປັດໄຈ | ຜັດສະຈຶ່ງມີ |
| ຍ້ອນຜັດສະເປັນປັດໄຈ | ເວທະນາຈຶ່ງມີ |
| ຍ້ອນເວທະນາເປັນປັດໄຈ | ຕັນຫາຈຶ່ງມີ |
| ຍ້ອນຕັນຫາເປັນປັດໄຈ | ອຸປາທານຈຶ່ງມີ |
| ຍ້ອນອຸປາທານເປັນປັດໄຈ | ພົບຈຶ່ງມີ |
| ຍ້ອນພົບເປັນປັດໄຈ | ຊາດຈຶ່ງມີ |
| ຍ້ອນຊາດເປັນປັດໄຈ | ຊະຣາ ມໍລະນະ ໂສກະ ປະຣິເທວະ |

ທຸກຂະ ໂທມະນັດ ອຸປາຍາດຈຶ່ງມີ ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

## ປະຕິດຈະສະມຸບບາດໂດຍປະຕິໂລມ

ອັນໜຶ່ງ ຍ້ອນອະວິດຊາດັບໄປບໍ່ເຫຼືອດ້ວຍວິຣາຄະ ສັງຂານຈຶ່ງດັບ

| | |
|---|---|
| ຍ້ອນສັງຂານດັບ | ວິນຍານຈຶ່ງດັບ |
| ຍ້ອນວິນຍານດັບ | ນາມຮູບຈຶ່ງດັບ |
| ຍ້ອນນາມຮູບດັບ | ສາລະຍະຕະນະຈຶ່ງດັບ |

ຍ້ອນສາລະຍະຕະນະດັບ ຜັດສະຈິ່ງດັບ
ຍ້ອນຜັດສະດັບ ເວທະນາຈິ່ງດັບ
ຍ້ອນເວທະນາດັບ ຕັນຫາຈິ່ງດັບ
ຍ້ອນຕັນຫາດັບ ອຸປາທານຈິ່ງດັບ
ຍ້ອນອຸປາທານດັບ ພົບຈິ່ງດັບ
ຍ້ອນພົບດັບ ຊາດຈິ່ງດັບ
ຍ້ອນຊາດດັບ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກຂະ ໂທມະນັດ ອຸປາຍາດຈິ່ງດັບ ກອງທຸກທັງມວນນີ້ມີການດັບດ້ວຍອາການແນວນີ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈິ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

**ພຸດທະອຸທານຄາຖາທີ ໓**

ເມື່ອໃດແລ ທຳທັງຫຼາຍຜາກົດແກ່ພາມ
ຜູ້ມີຄວາມພຽນ ເພ່ງຢູ່
ເມື່ອນັ້ນ ພາມນັ້ນ ຍ່ອມກຳຈັດມານແລະເສນາ໌ອອກໄດ້
ເໝືອນພຣະອາທິດອຸໄທຂຶ້ນສາດສ່ອງທ້ອງຟ້າໃຫ້ສະຫວ່າງສະໄຫວສັນນັ້ນ

**ໂພທິກະຖາ ຈົບ**

# ໒. ອະຊະປາລະກະຖາ

## ວ່າດ້ວຍເຫດການຂະນະປະທັບຢູ່ ຂ່ວງຕົ້ນອະຊະປາລະນິໂຄດ

## ເລື້ອງຊົງສະແດງທຳເປັນເຫດໃຫ້ເປັນພາມ

[໔] ເມື່ອລ່ວງໄປ ໗ ວັນ ພຣະຜູ້ມີພຣະພາກເຈົ້າຊົງອອກຈາກສະມາທິນັ້ນ ແລ້ວສະເດັດຈາກຂ່ວງຕົ້ນໂພທິພຶກ ໄປສູ່ຂ່ວງຕົ້ນອະຊະປາລະນິໂຄດ ເມື່ອເຖິງແລ້ວ ຈິ່ງປະທັບນັ່ງໂດຍບັນລັງດຽວສະເຫວີຍວິມຸດຕິສຸກຢູ່ ຂ່ວງຕົ້ນອະຊະປາລະນິໂຄດເປັນເວລາ ໗ ວັນ

ເວລານັ້ນ ພາມຫຸຫຸກະຊາດ ຜູ້ໜຶ່ງໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວ ໄດ້ສົນທະນາປາໄສກັບພຣະຜູ້ມີພຣະພາກເຈົ້າ ພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລະກັນແລ້ວໄດ້ຢືນໃນບ່ອນສົມຄວນ ພາມນັ້ນຜູ້ຢືນ ໃນບ່ອນສົມຄວນແລ້ວແລ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ "ພຣະໂຄດົມຜູ້ຈະເລີນ ບຸກຄົນຊື່ວ່າເປັນພາມດ້ວຍເຫດພຽງໃດນໍ ກໍແລະທຳເຫຼົ່າໃດທີ່ເຮັດບຸກຄົນໃຫ້ເປັນພາມ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

ພາມໃດ ລອຍບາບທຳໄດ້ແລ້ວ ບໍ່ຫ້ອງໃສ່ຜູ້ອື່ນວ່າ ຫື ຫື
ບໍ່ມີກິເລດເໝືອນນ້ຳຝາດ ສັງລວມຕົນຮຽນຈົບພຣະເວດ ຢູ່ຈົບພົມມະຈັນ
ພາມນັ້ນ ບໍ່ມີກິເລດເຄື່ອງຟູຂຶ້ນໃນອາລົມໃດ ໆ ໃນໂລກ
ຄວນກ່າວວາທະວ່າ ເຮົາເປັນພາມໂດຍທຳ

**ອະຊະປາລະກະຖາ ຈົບ**

# ໓. ມຸຈະລິນທະກະຖາ
## ວ່າດ້ວຍເຫດການຂະນະປະທັບຢູ່ຂ່ວງຕົ້ນມຸຈະລິນ
## ເລື້ອງຊົງເປ່ງອຸທານຜາຣົບຄວາມສຸກ

[໔] ເມື່ອລ່ວງໄປ ໗ ວັນ ພຣະຜູ້ມີພຣະພາກເຈົ້າ ຊົງອອກຈາກສະມາທິນັ້ນ ແລ້ວສະເດັດຈາກຂ່ວງຕົ້ນອະຊະປາລະນິໂຄດໄປສູ່ຂ່ວງຕົ້ນມຸຈະລິນ ເມື່ອເຖິງແລ້ວ ຈຶ່ງປະທັບນັ່ງໂດຍບັນລັງດຽວສະເຫວີຍວິມຸດຕິສຸກຢູ່ ຂ່ວງຕົ້ນມຸຈະລິນເປັນເວລາ ໗ ວັນ

ໃນເວລານັ້ນ ໄດ້ບັງເກີດເມກກ້ອນໃຫຍ່ຂຶ້ນໃນສະໄໝບໍ່ແມ່ນລະດູ ເປັນເມັດຝົນມີລົມໜາວຕົກຕະຫຼອດ ໗ ວັນ ລຳດັບນັ້ນ ພະຍານາກມຸຈະລິນໄດ້ອອກຈາກທີ່ຢູ່ຂອງຕົນໄປໂອບຮອບພຣະກາຍຂອງພຣະຜູ້ມີພຣະພາກເຈົ້າ ດ້ວຍຄົດ ໗ ຮອບ ແຜ່ພັງພານໃຫຍ່ປົກຄຸມເໜືອພຣະສຽນດ້ວຍຫວັງວ່າ "ຄວາມໜາວ ຢ່າໄດ້ບຽດບຽນພຣະຜູ້ມີພຣະພາກເຈົ້າ ຄວາມຮ້ອນ ຢ່າໄດ້ບຽດບຽນພຣະຜູ້ມີພຣະພາກເຈົ້າ ສຳຜັດຈາກເຫຼືອດ ຍຸງ ລົມ ແດດ ສັດເລືອຄານຢ່າໄດ້ບຽດບຽນພຣະຜູ້ມີພຣະພາກເຈົ້າເລີຍ"

ເມື່ອ ໗ ວັນຜ່ານໄປ ພະຍານາກມຸຈະລິນຮູ້ວ່າ ຝົນຫາຍປອດເມກແລ້ວ ຈຶ່ງຄາຍຄົດອອກຈາກພຣະກາຍຂອງພຣະຜູ້ມີພຣະພາກເຈົ້າ ນິມິດຮ່າງຂອງຕົນເປັນມານົບ ຢືນປະນົມມືຖວາຍອະພິວາດຢູ່ເບື້ອງພຣະພັກ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງອຸທານນີ້ໃນເວລານັ້ນວ່າ

**ພຸດທະອຸທານຄາຖາ**

ຄວາມສະຫງັດເປັນສຸກຂອງບຸກຄົນຜູ້ສັນໂດດ
ຜູ້ມີທຳຜາກົດແລ້ວ ຜູ້ເຫັນຢູ່

ຄວາມບໍ່ບຽດບຽນຄືຄວາມສັງລວມໃນສັດທັງຫຼາຍ ເປັນສຸກໃນໂລກ
ຄວາມປາສະຈາກຣາຄະຄືຄວາມລ່ວງກາມທັງຫຼາຍໄດ້ ເປັນສຸກໃນໂລກ
ຄວາມກຳຈັດອັດສະມິມານະ (ຄວາມຖືໂຕວ່າເປັນນັ້ນເປັນນີ້) ອອກໄດ້
ເປັນສຸກຢ່າງຍິ່ງ

**ມຸຈະລິນທະກະຖາ ຈົບ**

## ໔. ຣາຊາຍະຕະນະກະຖາ

### ວ່າດ້ວຍເຫດການຂະນະປະທັບຢູ່ ຂ່ວງຕົ້ນຣາຊາຍະຕະນະ ເລື້ອງຊົງພົບກັບຕະປຸດສະແລະພັນລິກະ

[໖] ເມື່ອລ່ວງໄປ ໗ ວັນ ພຣະຜູ້ມີພຣະພາກເຈົ້າຊົງອອກຈາກສະມາທິນັ້ນ ແລ້ວສະເດັດຈາກຂ່ວງຕົ້ນມຸຈະລິນໄປສູ່ຂ່ວງຕົ້ນຣາຊາຍະຕະນະ ເມື່ອເຖິງແລ້ວຈຶ່ງປະທັບນັ່ງໂດຍບັນລັງດຽວ ສະເຫວີຍວິມຸດຕິສຸກຢູ່ ຂ່ວງຕົ້ນຣາຊາຍະຕະນະເປັນເວລາ ໗ ວັນ

ຄັ້ງນັ້ນ ພໍ່ຄ້າ ໒ ຄົນຊື່ ຕະປຸດສະແລະພັນລິກະ ເດີນທາງໄກຈາກອຸກກະລະຊົນນະບົດມາເຖິງທີ່ນັ້ນ ຂະນະນັ້ນ ເທວະດາຜູ້ເປັນຍາດຮ່ວມສາຍໂລຫິດຂອງຕະປຸດສະ ແລະພັນລິກະພໍ່ຄ້າທັງສອງ ໄດ້ກ່າວວ່າ "ທ່ານຜູນິຣະທຸກ ພຣະຜູ້ມີພຣະພາກເຈົ້າພຣະອົງນີ້ ເມື່ອທຳອິດຕັດສະຣູ້ປະທັບຢູ່ ຂ່ວງຕົ້ນຣາຊາຍະຕະນະ ທ່ານທັງສອງຈົ່ງໄປຕ້ອນຮັບພຣະອົງດ້ວຍເຂົ້າສັດຕຸຜົງແລະເຂົ້າສັດຕຸກ້ອນປຸງດ້ວຍນ້ຳເຜີ້ງເທີ້ນ ການບູຊາຂອງທ່ານທັງສອງຈັກເປັນໄປເພື່ອປະໂຫຍດສຸກສິ້ນການລະນານ"

ຕໍ່ມາ ຕະປຸດສະແລະພັນລິກະ ໄດ້ຖືເຂົ້າສັດຕຸຜົງແລະເຂົ້າສັດຕຸກ້ອນປຸງດ້ວຍນ້ຳເຜີ້ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຖວາຍອະພິວາດແລ້ວຢືນຢູ່ບ່ອນສົມຄວນ ຂາບທູນວ່າ "ພຣະອົງຜູ້ຈະເລີນ ຂໍພຣະອົງໂຜດຊົງຮັບເຂົ້າສັດຕຸຜົງ ແລະເຂົ້າສັດຕຸກ້ອນປຸງດ້ວຍນ້ຳເຜີ້ງ ເຊິ່ງຈະເປັນໄປເພື່ອປະໂຫຍດສຸກ ສິ້ນການລະນານແກ່ຂ້າພະອົງທັງສອງດ້ວຍເທີ້ນ

ຂະນະນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຊົງດຳຣິວ່າ "ພຣະຕະຖາຄົດທັງຫຼາຍ ບໍ່ຊົງຮັບພັດຕາຫານດ້ວຍພຣະຫັດ ແລ້ວເຮົາຈະເພິ່ງຮັບເຂົ້າສັດຕຸຜົງ ແລະເຂົ້າສັດຕຸກ້ອນປຸງດ້ວຍນ້ຳເຜີ້ງໄດ້ແນວໃດນໍ?

ທັນໃດນັ້ນ ທ້າວມະຫາຣາດທັງ ໔ ຮູ້ຄວາມຄິດໃນພຣະຫະໄທຂອງພຣະຜູ້ມີພຣະພາກເຈົ້າ ດ້ວຍໃຈຂອງຕົນ ໆ ຈຶ່ງນຳບາດສິລາ ໔ ໜ່ວຍມາຈາກ ໔ ທິດ ເຂົ້າໄປຖວາຍແລ້ວທູນວ່າ "ຂໍພຣະອົງໂຜດຊົງຮັບເຂົ້າສັດຕຸຜົງ ແລະເຂົ້າສັດຕຸກ້ອນປຸງນ້ຳເຜີ້ງ ດ້ວຍບາດນີ້ເທີ້ນ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າ ຊົງຮັບເຂົ້າສັດຕຸຜົງ ແລະເຂົ້າສັດຕຸກ້ອນປຸງດ້ວຍນ້ຳເຜິ້ງດ້ວຍບາດສີລາໃໝ່ອັນງາມແລ້ວສະເຫວີຍ

ຕໍ່ມາ ຕະປຸດສະແລະພັນລິກະໄດ້ຂາບທູນວ່າ "ພຣະອົງຜູ້ຈະເລີນ ຂ້າພະອົງທັງສອງນີ້ຂໍເຖິງພຣະຜູ້ມີພຣະພາກເຈົ້າ ພ້ອມທັງພຣະທຳເປັນສະຣະນະ ຂໍພຣະອົງໂຜດຊົງຈື່ ຂ້າພະອົງທັງສອງວ່າ ເປັນອຸປາສົກຜູ້ເຖິງສະຣະນະຕັ້ງແຕ່ວັນນີ້ເປັນຕົ້ນໄປ ຈົນຕະຫຼອດຊີວິດ

ຕະປຸດສະ ແລະພັນລິກະນັ້ນ ໄດ້ເປັນທະເວວາຈິກະອຸປາສົກ (ຜູ້ກ່າວວາຈາເຖິງຣັດຕະນະ ວ່າເປັນສະຣະນະ) ເປັນພວກທຳອິດໃນໂລກແລ

**ຣາຊາຍະຕະນະກະຖາ ຈົບ**

# ໕. ພົມຍາຈະນະກະຖາ

## ວ່າດ້ວຍພົມອາຣາດທະນາໃຫ້ຊົງສະແດງທຳ

## ເລື້ອງຊົງພິຈາລະນາຄວາມເລິກເຊິ່ງແຫ່ງປະຕິດຈະສະມຸບບາດ

[໗] ເມື່ອລ່ວງ ໗ ວັນ ພຣະຜູ້ມີພຣະພາກເຈົ້າຊົງອອກຈາກສະມາທິ ແລ້ວສະເດັດຈາກຂ່ວງຕົ້ນຣາຊາຍະຕະນະໄປສູ່ຕົ້ນອະຊະປາລະນິໂຄດ ຮູ້ວ່າ ພຣະອົງປະທັບຢູ່ ຂ່ວງຕົ້ນ ອະຊະປາລະນິໂຄດນັ້ນ ຂະນະເມື່ອຊົງຫຼີບຫຼີກຢູ່ໃນທີ່ສະຫງັດ ຊົງເກີດຄວາມຄິດຂຶ້ນໃນພຣະຫະໄທວ່າ "ທຳທີ່ເຮົາໄດ້ບັນລຸແລ້ວນີ້ ເລິກເຊິ່ງ ເຫັນໄດ້ຍາກ ຮູ້ຕາມໄດ້ຍາກ ສະງົບ ປະນີດ ບໍ່ເປັນວິໄສແຫ່ງຕັກກະ ລະອຽດ ບັນດິດຈຶ່ງຈະຮູ້ໄດ້ ສຳລັບໝູ່ປະຊາຜູ້ຣື່ນຣົມດ້ວຍອາໄລ ຍິນດີໃນອາໄລເພີດເພີນໃນອາໄລ ສະພາວະະອັນນີ້ຍ່ອມເປັນສິ່ງທີ່ເຫັນໄດ້ຍາກ ກ່າວຄື ຫຼັກອິທັບປັດຈະຍະຕາ ຫຼັກປະຕິດຈະສະມຸບບາດ ເຖິງແມ່ນຖານະອັນນີ້ກໍເປັນສິ່ງທີ່ເຫັນໄດ້ຍາກຫຼາຍ ຄວາມສະງົບແຫ່ງສັງຂານທັງປວງ ຄວາມສະລັດອຸປະທິທັງປວງ ຄວາມສິ້ນຕັນຫາ ວິຣາຄະ ນິໂຣດ ນິບພານ ກໍຖ້າເຮົາຈະເພິ່ງສະແດງທຳ ແລະຜູ້ອື່ນຈະບໍ່ເຂົ້າໃຈຊຶ້ງຕໍ່ເຮົາ ຂໍ້ນັ້ນກໍຈະເພິ່ງເປັນຄວາມເມື່ອຍລ້າໆແກ່ເຮົາ ຈະເພິ່ງເປັນຄວາມລຳບາກລ້າໆແກ່ເຮົາ

ອັນໜຶ່ງນັ້ນ ອະນັດສະຣິຍະຄາຖາເຫຼົ່ານີ້ ທີ່ບໍ່ເຄີຍຊົງສະດັບມາກ່ອນ ໄດ້ຜາກົດຊັດແຈ້ງແກ່ພຣະຜູ້ມີພຣະພາກເຈົ້າວ່າ

### ອະນັດສະຣິຍະຄາຖາ

ບັດນີ້ ເຮົາຍັງບໍ່ຄວນປະກາດທຳທີ່ເຮົາໄດ້ບັນລຸດ້ວຍຄວາມລຳບາກ ຍ້ອນທຳນີ້ ບໍ່ແມ່ນ

ສິ່ງທີ່ຜູ້ຖືກຣາຄະ ແລະໂທສະຄອບງຳ ຈະຮູ້ໄດ້ງ່າຍ ແຕ່ເປັນສິ່ງທີ່ທວນກະແສ ລະອຽດ ເລິກເຊິ່ງ ຮູ້ເຫັນໄດ້ຍາກ ປະນິດ ຜູ້ກຳໜັດດ້ວຍຣາຄະ ຖືກກອງໂມຫະຫຸ້ມຫໍ່ໄວ້ ຈັກຮູ້ເຫັນບໍ່ໄດ້

ເມື່ອພຣະອົງຊົງພິຈາລະນາດັ່ງນັ້ນແລ້ວ ພຣະຫະໄທກໍນ້ອມໄປເພື່ອການຂວນຂວາຍໜ້ອຍ ບໍ່ໄດ້ນ້ອມໄປເພື່ອສະແດງທຳ

[໗] ຄັ້ງນັ້ນ ທ້າວສະຫຳບໍດີພົມຮູ້ຄວາມຄິດໃນພຣະຫະໄທຂອງພຣະຜູ້ມີພຣະພາກເຈົ້າດ້ວຍໃຈຂອງຕົນ ໄດ້ມີຄວາມຄິດວ່າ "ທ່ານຜູ້ຈະເລີນເອີຍ ໂລກຈະຈິບຫາຍແລ້ວນໍ ໂລກຈະພິນາດແລ້ວນໍ ຍ້ອນພຣະຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ຈະຊົງນ້ອມພຣະຫະໄທໄປເພື່ອການຂວນຂວາຍໜ້ອຍ ບໍ່ໄດ້ນ້ອມພຣະຫະໄທໄປເພື່ອຊົງສະແດງທຳ" ຈຶ່ງຫາຍລົງມາຈາກພົມມະໂລກມາຜາກົດຢູ່ເບື້ອງພຣະພັກພຣະຜູ້ມີພຣະພາກເຈົ້າ ປຽບຄືກັບບຸຣຸດມີກຳລັງຢຽດແຂນອອກ ຫຼື ຄູ້ແຂນເຂົ້າ ສັນນັ້ນ ແລ້ວຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຄຸກເຂົ່າເບື້ອງຂວາລົງເທິງແຜ່ນດິນ ປະນົມມືໄປທາງທີ່ພຣະຜູ້ມີພຣະພາກເຈົ້າປະທັບ ພ້ອມທູນ ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າໄດ້ໂຜດສະແດງທຳ ຂໍພຣະສຸຄົດເຈົ້າໄດ້ໂຜດສະແດງທຳ ຍ້ອນສັດທັງຫຼາຍ ຜູ້ມີທຸລີໃນຕາໜ້ອຍມີຢູ່ ສັດເຫຼົ່ານັ້ນ ຍ່ອມເສື່ອມຍ້ອນບໍ່ໄດ້ສະດັບທຳ ຍ້ອນຈັກມີຜູ້ຮູ້ທຳທີ່ພຣະອົງສະແດງ

ເມື່ອທ້າວສະຫຳບໍດີພົມ ໄດ້ທູນອາຣາດທະນາດັ່ງນັ້ນແລ້ວ ໄດ້ທູນເປັນປະພັນທະຄາຖາຕໍ່ໄປອີກວ່າ

## ພົມນິຄົນຄາຖາ

ໃນການກ່ອນ ທຳທີ່ບໍ່ບໍລິສຸດ ອັນຄົນທີ່ມີມົນທິນຄິດຄົ້ນໄວ້
ຜາກົດໃນແຄວ້ນມະຄົດ
ພຣະອົງ ໂຜດຊົງ ເປີດປະຕູອະມະຕະທຳນັ້ນເທີ້ນ
ຂໍເຫຼົ່າສັດ ຈົ່ງຟັງທຳທີ່ພຣະສຳພຸດທະເຈົ້າ ຜູ້ປາສະຈາກມົນທິນ
ໄດ້ຕັດສະຮູ້ແລ້ວຕາມລຳດັບ
ຂ້າແດ່ ພຣະອົງຜູ້ມີປັນຍາດີ ມີສະມັນຕະຈັກຂຸ
ບຸຣຸດຜູ້ຍືນຢູ່ເທິງຍອດເຂົາສີລາລ້ວນ ເພິ່ງເຫັນໝູ່ຊົນໄດ້
ໂດຍຮອບໄດ້ ສັນໃດ
ພຣະອົງຜູ້ໝົດຄວາມໂສກແລ້ວ ກໍສັນນັ້ນ
ໂຜດສະເດັດຂຶ້ນສູ່ຜາສາດຄືທຳແລ້ວ
ຈັກໄດ້ເຫັນໝູ່ຊົນຜູ້ຕົກຢູ່ໃນຄວາມໂສກແລະຖືກຊາດຊະຣາ
ຄອບງຳໄດ້ຊັດເຈນ

ຂ້າແດ່ ພຣະອົງຜູ້ມີຄວາມພຽນ ຜູ້ຊະນະສົງຄາມ ຜູ້ນໍາໝູ່
ຜູ້ບໍ່ມີໜີ້ ຂໍພຣະອົງໂຜດລຸກຂຶ້ນສະເດັດຈາຣິກໄປໃນໂລກ
ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ
ຂໍພຣະອົງໂຜດຈົ່ງຊົງສະແດງທໍາ ຍ້ອນຈັກມີຜູ້ຮູ້ທໍາ

ເມື່ອທ້າວສະຫໍາບໍດີພົມໄດ້ຂາບທູນແນວນີ້ແລ້ວ ພຣະຜູ້ມີພຣະພາກເຈົ້າ ຈຶ່ງຕັດກັບທ້າວສະຫໍາບໍດີພົມວ່າ ພົມ ແມ່ນເຮົາເອງກໍມີຄວາມຄິດວ່າ ທໍາທີ່ເຮົາໄດ້ບັນລຸແລ້ວນີ້ ຯລຯ ຈະເພິ່ງເປັນຄວາມລໍາບາກລ້າໆແກ່ເຮົາ

ພົມ ອັນໜຶ່ງ ອະນັດສະຣິຍະຄາຖາເຫຼົ່ານີ້ ທີ່ບໍ່ເຄີຍສະດັບມາກ່ອນໄດ້ຜາກົດຊັດແຈ້ງແກ່ເຮົາ ວ່າ ບັດນີ້ ເຮົາຍັງ ບໍ່ຄວນປະກາດທໍາທີ່ເຮົາໄດ້ບັນລຸ ດ້ວຍຄວາມລໍາບາກ ຯລຯ ແຕ່ເປັນສິ່ງທີ່ທວນກະແສ ຯລຯ

ພົມ ເມື່ອເຮົາພິຈາລະນາແຈ້ງຊັດດັ່ງນີ້ ຈິດຍ່ອມນ້ອມໄປເພື່ອການຂວນຂວາຍໜ້ອຍ ບໍ່ນ້ອມໄປເພື່ອສະແດງທໍາ

ແມ່ນຄັ້ງທີ ໔ ທ້າວສະຫໍາບໍດີພົມກໍທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າໄດ້ໂຜດສະແດງທໍາ ຯລຯ ຍ້ອນຈັກມີຜູ້ຮູ້ທໍາ

ແມ່ນຄັ້ງທີ ໔ ພຣະຜູ້ມີພຣະພາກເຈົ້າກໍຕັດວ່າ "ພົມ ແມ່ນເຮົາເອງກໍມີຄວາມຄິດວ່າ ຯລຯ ບໍ່ນ້ອມໄປເພື່ອສະແດງທໍາ

ແມ່ນຄັ້ງທີ ໓ ທ້າວສະຫໍາບໍດີພົມກໍທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າໄດ້ໂຜດສະແດງທໍາ ຯລຯ ຍ້ອນຈັກມີຜູ້ຮູ້ທໍາ

## ເລື້ອງຊົງພິຈາລະນາເວໄນຍະສັດປຽບດ້ວຍດອກບົວ

[໙] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຮັບຄໍາທູນອາຣາດທະນາຂອງພົມ ແລະຍ້ອນອາໄສພຣະກະລຸນາໃນໝູ່ສັດ ຊົງກວດເບິ່ງໂລກດ້ວຍພຸດທະຈັກຂຸ ເມື່ອຊົງກວດເບິ່ງໂລກດ້ວຍພຸດທະຈັກຂຸ ໄດ້ເຫັນສັດທັງຫຼາຍຜູ້ມີທຸລີໃນຕາໜ້ອຍ ມີທຸລີໃນຕາຫຼາຍ ມີອິນຊີແກ່ກ້າ ມີອິນຊີອ່ອນ ມີອາການດີ ມີອາການຊາມ ສອນໃຫ້ຮູ້ໄດ້ງ່າຍ ສອນໃຫ້ຮູ້ໄດ້ຍາກ ບາງພວກມັກເຫັນປະຣະໂລກ ແລະໂທດວ່າເປັນຕາຢ້ານກໍມີ ບາງພວກມັກບໍ່ເຫັນປະຣະໂລກ ແລະໂທດວ່າເປັນຕາຢ້ານກໍມີ

ມີອຸປະມາເໝືອນໃນກໍອຸບົນ ໃນກໍປະທຸມ ຫຼື ໃນກໍບຸນທະຣິກ ດອກອຸບົນ ດອກປະທຸມ ດອກບຸນທະຣິກ ບາງດອກທີ່ເກີດໃນນໍ້າ ຈະເລີນໃນນໍ້າ ຍັງບໍ່ພົ້ນນໍ້າ ຈົມຢູ່ໃນນໍ້າ ດອກອຸ

ບົນ ດອກປະທຸມ ດອກບຸນທະຣິກ ບາງດອກທີ່ເກີດໃນນ້ຳ ຈະເລີນໃນນ້ຳຢູ່ສະເໝີນ້ຳ ດອກອຸບົນ ດອກປະທຸມ ດອກບຸນທະຣິກ ບາງດອກທີ່ເກີດໃນນ້ຳ ຈະເລີນໃນນ້ຳ ຂຶ້ນພົ້ນນ້ຳ ບໍ່ແຕະນ້ຳ ສັນໃດ

ພຣະຜູ້ມີພຣະພາກເຈົ້າ ຊົງກວດເບິ່ງໂລກດ້ວຍພຸດທະຈັກຂຸ ໄດ້ເຫັນສັດທັງຫຼາຍ ຜູ້ມີທຸລີໃນຕາໜ້ອຍ ມີທຸລີໃນຕາຫຼາຍ ມີອິນຊີແກ່ກ້າ ມີອິນຊີອ່ອນ ມີອາການດີ ມີອາການຊາມ ສອນໃຫ້ຮູ້ໄດ້ງ່າຍ ສອນໃຫ້ຮູ້ໄດ້ຍາກ ບາງພວກມັກເຫັນປະຣະໂລກ ແລະໂທດວ່າເປັນສິ່ງເປັນຕາຢ້ານກໍມີ ບາງພວກມັກບໍ່ເຫັນປະຣະໂລກ ແລະໂທດວ່າເປັນສິ່ງເປັນຕາຢ້ານກໍມີ ສັນນັ້ນ

ເມື່ອຊົງເຫັນແລ້ວ ໄດ້ຕັດຄາຖາຕອບທ້າວສະຫາໍບໍດີພົມວ່າ

ສັດທັງຫຼາຍເຫຼົ່າໃດ ຈະຟັງທຳ ຈົ່ງປ່ອຍສັດທານາເທີ້ນ
ເຮົາໄດ້ເປີດປະຕູອະມະຕະທຳແກ່ສັດທັງຫຼາຍເຫຼົ່ານັ້ນແລ້ວ
ທ່ານພົມ ຍ້ອນເຮົາສຳຄັນວ່າຈະລຳບາກ
ຈຶ່ງບໍ່ໄດ້ສະແດງທຳທີ່ປະນີດລະອຽດ ໃນໝູ່ມະນຸດ

ຂະນະນັ້ນ ທ້າວສະຫາໍບໍດີພົມໄດ້ຮູ້ວ່າ "ພຣະພຸດທະອົງໄດ້ຊົງປະທານໂອກາດເພື່ອຈະສະແດງທຳແລ້ວ" ຈຶ່ງຖວາຍອະພິວາດ ພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວອັນຕະຣະທານໄປໃນທີ່ນັ້ນແລ

**ພົມຍາຈະນະກະຖາ ຈົບ**

# ໖. ປັນຈະວັກຄິຍະກະຖາ

## ວ່າດ້ວຍພິກຂຸປັນຈະວັກຄີ

## ເລື້ອງອາລາຣະດາບົດກາລາມະໂຄດ

[໑໐] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຊົງຄິດວ່າ "ເຮົາຈະເພິ່ງສະແດງທຳແກ່ໃຜກ່ອນດີນໍ ຜູ້ໃດຈັກຮູ້ທຳນີ້ໄດ້ທັນທີ" ແລ້ວຊົງຄິດຕໍ່ໄປວ່າ "ອາລາຣະດາບົດ ກາລາມະໂຄດ ນີ້ ເປັນບັນດິດ ສະຫຼາດ ລັກແຫຼມ ມີປັນຍາ ມີທຸລີໃນຕາໜ້ອຍມາດົນແລ້ວ ຖ້າຈັ່ງໃດ ເຮົາຈະເພິ່ງສະແດງທຳແກ່ອາລາຣະດາບົດ ກາລາມະໂຄດກ່ອນ ທ່ານຈັກຮູ້ທຳນີ້ໄດ້ໃນເວລາບໍ່ດົນ

ລຳດັບນັ້ນ ເທວະດາຜູ້ບໍ່ຜາກົດກາຍມາທູນພຣະຜູ້ມີພຣະພາກເຈົ້າວ່າ "ພຣະອົງຜູ້ຈະເລີນ ອາລາຣະດາບົດ ກາລາມະໂຄດໄດ້ທຳກາລະ ໆ ວັນແລ້ວ

ແມ່ນພຣະຜູ້ມີພຣະພາກເຈົ້າ ກໍໄດ້ເກີດຍານຂຶ້ນວ່າ "ອາລາຣະດາບົດ ກາລາມະໂຄດ ໄດ້ທຳກາລະໄດ້ ໆ ວັນແລ້ວ" ຈຶ່ງຊົງຄິດວ່າ "ອາລາຣະດາບົດ ກາລາມະໂຄດ ເປັນຜູ້ມີຄວາມເສື່ອມແລ້ວ ຍ້ອນຖ້າທ່ານໄດ້ຟັງທຳນີ້ ກໍຈະເພິ່ງຮູ້ໄດ້ທັນທີ

## ເລື້ອງອຸດທະກະດາບົດຣາມະບຸດ

ຕໍ່ມາ ພຣະຜູ້ມີພຣະພາກເຈົ້າໄດ້ຊົງຄິດວ່າ "ເຮົາຈະເພິ່ງສະແດງທຳແກ່ໃຜກ່ອນນໍ ໃຜຈັກຮູ້ທົ່ວເຖິງທຳນີ້ໄດ້ທັນທີ" ຈຶ່ງຊົງຄິດຕໍ່ໄປວ່າ "ອຸດທະກະດາບົດ ຣາມະບຸດນີ້ ເປັນບັນດິດສະຫຼາດລັກແຫຼມ ມີປັນຍາ ມີທຸລີໃນຕາໜ້ອຍມາດົນ ຖ້າຈັ່ງໃດ ເຮົາຈະເພິ່ງສະແດງທຳແກ່ອຸດທະກະດາບົດ ຣາມະບຸດກ່ອນ ທ່ານຈັກຮູ້ທຳນີ້ໄດ້ທັນທີ

ລຳດັບນັ້ນ ເທວະດາຜູ້ບໍ່ຜາກົດກາຍມາທູນພຣະຜູ້ມີພຣະພາກເຈົ້າວ່າ "ພຣະອົງຜູ້ຈະເລີນອຸດທະກະດາບົດ ຣາມະບຸດ ໄດ້ທຳກາລະມື້ວານນີ້

ແມ່ນພຣະຜູ້ມີພຣະພາກເຈົ້າ ກໍໄດ້ເກີດຍານຂຶ້ນວ່າ "ອຸດທະກະດາບົດ ຣາມະບຸດ ໄດ້ທຳກາລະເມື່ອມື້ວານນີ້" ຈຶ່ງຊົງຄິດວ່າ "ອຸດທະກະດາບົດ ຣາມະບຸດ ເປັນຜູ້ມີຄວາມເສື່ອມແລ້ວ ຍ້ອນຖ້າທ່ານໄດ້ຟັງທຳນີ້ ກໍຈະເພິ່ງຮູ້ໄດ້ທັນທີ

ຕໍ່ມາ ພຣະຜູ້ມີພຣະພາກເຈົ້າໄດ້ ຊົງຄິດດັ່ງນີ້ວ່າ "ເຮົາຈະເພິ່ງສະແດງທຳແກ່ໃຜກ່ອນນໍ ໃຜຈັກຮູ້ທຳນີ້ໄດ້ທັນທີ" ຈຶ່ງຊົງຄິດວ່າ "ພິກຂຸ ປັນຈະວັກຄີ ມີອຸປະກາຣະແກ່ເຮົາຫຼາຍ ທີ່ໄດ້ເຝົ້າບົວລະບັດເຮົາຜູ້ມຸ້ງໜ້າພໍ່າເພັງພຽນຢູ່ ຖ້າຈັ່ງຊັ້ນ ເຮົາຈະເພິ່ງສະແດງທຳແກ່ພິກຂຸປັນຈະວັກຄີກ່ອນ" ແລ້ວຊົງຄິດຕໍ່ໄປວ່າ "ບັດນີ້ ພິກຂຸປັນຈະວັກຄີຢູ່ທີ່ໃດນໍ" ກໍໄດ້ຊົງເຫັນພິກຂຸປັນຈະວັກຄີຢູ່ທີ່ປ່າອິສິປະຕະນະມະລິຄະທາຍະວັນ ເຂດນະຄອນພາຣານະສີ ດ້ວຍທິບພະຍະຈັກຂຸ ອັນບໍລິສຸດລ່ວງຈັກຂຸມະນຸດ

ຕໍ່ມາ ເມື່ອພຣະຜູ້ມີພຣະພາກເຈົ້າຊົງໄດ້ປະທັບຢູ່ ເຂດອຸຣຸເວລາຕາມພຣະອັດທະຍາໄສແລ້ວ ໄດ້ສະເດັດຈາຣິກໄປທາງນະຄອນພາຣານະສີ

## ເລື້ອງອຸປະກາຊີວົກ

[໑໑] ອາຊີວົກ ຊື່ ອຸປະກະ ໄດ້ພົບພຣະຜູ້ມີພຣະພາກເຈົ້າ ສະເດັດດຳເນີນມາແຕ່ທາງໄກໃນລະຫວ່າງແມ່ນ້ຳຄະຍາກັບຕົ້ນໂພທິພຶກ ໄດ້ທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ອາວຸໂສອິນຊີຂອງທ່ານຜ່ອງໃສຍິ່ງ ຜິວພັນຂອງທ່ານບໍລິສຸດຜຸດຜ່ອງຍິ່ງ ທ່ານບວດອຸທິດຜູ້ໃດ ໃຜເປັນສາດສະດາຂອງທ່ານ ຫຼື ທ່ານພໍໃຈໃນທຳຂອງໃຜ?

ເມື່ອອຸປະກາຊີວົກທູນຖາມດັ່ງນີ້ແລ້ວ ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດຄາຖາຕອບອຸປະກາຊີວົກ ວ່າ

ເຮົາເປັນຜູ້ຄອບງຳທຳທັງປວງ ຮູ້ທຳທັງປວງ
ບໍ່ເປິເປື້ອນໃນທຳທັງປວງ ລະທຳທັງປວງໄດ້ໝົດສິ້ນແລ້ວ
ລຸດພົ້ນຍ້ອນສິ້ນຕັນຫາ ຕັດສະຮູ້ຍິ່ງເອງ
ແລ້ວຈະເພິ່ງກ່າວອ້າງຮອດຜູ້ໃດນໍ

ເຮົາບໍ່ມີອາຈານ ເຮົາບໍ່ມີຜູ້ສະເໝີເໝືອນ
ເຮົາບໍ່ມີຜູ້ທັດທຽມ ບໍ່ວ່າໃນໂລກ ຫຼື ເທວະໂລກ
ຍ້ອນເຮົາເປັນອະຣະຫັນ ເປັນສາດສະດາຜູ້ປະເສີດ
ເປັນຜູ້ຕັດສະຮູ້ຊອບເອງພຽງຜູ້ດຽວ ເປັນຜູ້ເຢືອກເຢັນ
ດັບກິເລດໄດ້ແລ້ວໃນໂລກ

ເຮົາຈະໄປເມືອງຫຼວງ ແຫ່ງຊາວກາສີ ປະກາດທຳມະຈັກ
ໄດ້ຕີກອງອະມະຕະທຳໃຫ້ດັງກ້ອງໃນໂລກ ອັນມີຄວາມມືດມົນປົກປິດໄວ້

ອຸປະກາຊີວົກທູນ ວ່າ "ອາວຸໂສ ທ່ານສົມຄວນເປັນພຣະອະນັນຕະຊິນະ ຕາມທີ່ທ່ານປະກາດນັ້ນເດີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ

ຊົນເຫຼົ່າໃດ ໄດ້ເຖິງຄວາມສິ້ນອາສະວະແລ້ວ
ຊົນເຫຼົ່ານັ້ນ ຍ່ອມເປັນພຣະຊິນະເຊັ່ນເຮົາ
ອຸປະກະ ເຮົາຊະນະຄວາມຊົ່ວໄດ້ແລ້ວ
ຍ້ອນແນວນັ້ນ ເຮົາຈຶ່ງຊື່ວ່າ ພຣະຊິນະ

ເມື່ອພຣະຜູ້ມີພຣະພາກເຈົ້າ ໄດ້ຕັດດັ່ງນີ້ແລ້ວ ອຸປະກາຊີວົກຈຶ່ງທູນວ່າ "ອາວຸໂສ ຄວນຈະເປັນແນວນັ້ນ" ງຶກຫົວແລ້ວຍ່າງສວນທາງຫຼີກໄປ

## ເລື້ອງຊົງສະແດງທຳແກ່ພິກຂຸປັນຈະວັກຄີ

[໑໘] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໂດຍລຳດັບ ເຖິງປ່າອິສິປະຕະນະມະລິຄະທາຍະວັນ ເຂດນະຄອນພາຣານະສີ ແລ້ວໄດ້ສະເດັດໄປທາງທີ່ພິກຂຸປັນຈະວັກຄີຢູ່ ພິກຂຸປັນຈະວັກຄີໄດ້ເຫັນພຣະຜູ້ມີພຣະພາກເຈົ້າ ສະເດັດມາແຕ່ໄກ ໄດ້ນັດໝາຍກັນ ແລະກັນວ່າ "ທ່ານທັງຫຼາຍ ພຣະສະມະນະໂຄດົມນີ້ ເປັນຜູ້ມັກຫຼາຍ ຄາຍຄວາມພຽນ ວຽນມາເພື່ອຄວາມເປັນຄົນມັກຫຼາຍ ກຳລັງສະເດັດມາ ພວກເຮົາບໍ່ເພິ່ງຂາບໄຫວ້ ບໍ່ເພິ່ງລຸກຮັບ ບໍ່ເພິ່ງຮັບບາດ ແລະຈີວອນຂອງພຣະອົງ ແຕ່ຈະຈັດອາສະນະໄວ້ ຖ້າພຣະອົງປາຖະໜາກໍຈັກປະທັບນັ່ງລົງເອງ

ເມື່ອສະເດັດມາເຖິງ ພິກຂຸປັນຈະວັກຄີກໍບໍ່ອາດຕັ້ງຢູ່ໃນກະຕິກາຂອງຕົນໄດ້ ຕ່າງກໍພາກັນຢືນຂຶ້ນຕ້ອນຮັບ ພຣະຜູ້ມີພຣະພາກເຈົ້າ ອົງໜຶ່ງ ຮັບບາດແລະຈີວອນ ອົງໜຶ່ງປູອາສະນະ ອົງໜຶ່ງຈັດຫານ້ຳລ້າງພຣະບາດ ອົງໜຶ່ງ ຈັດຕັ້ງຕັ່ງຮອງພຣະບາດ ອົງໜຶ່ງ ນຳກະເບື້ອງເຊັດພຣະບາດເຂົ້າໄປວາງ ພຣະຜູ້ມີພຣະພາກເຈົ້າ ໄດ້ປະທັບນັ່ງເທິງອາສະນະທີ່ພິກຂຸປັນຈະວັກຄີຈັດຖວາຍ ແລ້ວຊົງລ້າງພຣະບາດ ແຕ່ພິກຂຸປັນຈະວັກຄີກັບຮ້ອງຮຽກພຣະຜູ້ມີພຣະພາກເຈົ້າໂດຍອອກພຣະນາມແລະໃຊ້ຄຳວ່າ "ອາວຸໂສ"

ເມື່ອພິກຂຸປັນຈະວັກຄີ ກ່າວແນວນັ້ນແລ້ວ ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດຫ້າມພິກຂຸປັນຈະວັກຄີວ່າ "ພິກຂຸທັງຫຼາຍ ພວກທ່ານຢ່າຮ້ອງຮຽກຕະຖາຄົດໂດຍອອກຊື່ແລະໃຊ້ຄຳວ່າອາວຸໂສ ພິກຂຸທັງຫຼາຍ ຕະຖາຄົດເປັນອະຣະຫັນຕັດສະຣູ້ເອງໂດຍຊອບ ພວກທ່ານຈົ່ງງ່ຽງໂສດສະດັບ ເຮົາໄດ້ບັນລຸອະມະຕະທຳແລ້ວຈະສັ່ງສອນ ຈະສະແດງທຳ ພວກທ່ານເມື່ອປະຕິບັດຕາມທີ່ເຮົາສັ່ງສອນ ບໍ່ດົນຫຼາຍກໍຈັກເຮັດໃຫ້ແຈ້ງເຊິ່ງປະໂຫຍດອັນປະເສີດ ອັນເປັນທີ່ສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍຊອບຕ້ອງການດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນນີ້ໄດ້ຢ່າງແນ່ນອນ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພິກຂຸປັນຈະວັກຄີໄດ້ຂາບທູນພຣະຜູ້ມີພຣະພາກດັ່ງນີ້ວ່າ "ອາວຸໂສໂຄດົມ ແມ່ນດ້ວຍຈະຣິຍານັ້ນ ແມ່ນດ້ວຍປະຕິປະທານັ້ນ ແມ່ນດ້ວຍທຸກກະຣະກິຣິຍານັ້ນ ພຣະອົງກໍຍັງບໍ່ໄດ້ບັນລຸອຸດຕະຣິມະນຸດສະທຳ ອັນເປັນຍານທັດສະນະທີ່ປະເສີດ ອັນສາມາດ ບັດນີ້ ພຣະອົງເປັນຜູ້ມັກຫຼາຍ ຄາຍຄວາມພຽນ ວຽນມາເພື່ອຄວາມເປັນຄົນມັກຫຼາຍແລ້ວ ຈັ່ງໃດ ຈັກບັນລຸອຸດຕະຣິມະນຸດສະທຳ ອັນເປັນຍານທັດສະນະທີ່ປະເສີດ ອັນສາມາດໄດ້ບໍ?

ເມື່ອພິກຂຸປັນຈະວັກຄີ ຂາບທູນແນວນັ້ນແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບພິກຂຸປັນຈະວັກຄີດັ່ງນີ້ວ່າ "ພິກຂຸທັງຫຼາຍ ຕະຖາຄົດບໍ່ເປັນຄົນມັກຫຼາຍ ບໍ່ໄດ້ຄາຍຄວາມພຽນ ບໍ່ໄດ້ວຽນມາເພື່ອຄວາມເປັນຄົນມັກຫຼາຍ ພິກຂຸທັງຫຼາຍ ຕະຖາຄົດເປັນອະຣະຫັນ ຕັດສະຣູ້ເອງໂດຍຊອບ ພວກທ່ານຈົ່ງງ່ຽງໂສດສະດັບ ເຮົາໄດ້ບັນລຸອະມະຕະທຳແລ້ວ ຈະສັ່ງສອນ ຈະສະແດງທຳ ພວກທ່ານເມື່ອປະຕິບັດຕາມທີ່ເຮົາສັ່ງສອນແລ້ວ ບໍ່ດົນກໍຈັກເຮັດໃຫ້ແຈ້ງເຊິ່ງປະໂຫຍດອັນປະເສີດ ອັນເປັນທີ່ສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍຊອບ ຕ້ອງການດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນນີ້ໄດ້ຢ່າງແນ່ນອນ

ແມ່ນເທື່ອທີ ໒ ພິກຂຸປັນຈະວັກຄີ ກໍໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຯລຯ
ແມ່ນເທື່ອທີ ໒ ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດກັບພຣະປັນຈະວັກຄີດັ່ງນີ້ວ່າ ຯລຯ
ແມ່ນເທື່ອທີ ໓ ພິກຂຸປັນຈະວັກຄີ ກໍໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ອາວຸໂສໂຄດົມ ແມ່ນດ້ວຍຈະຣິຍານັ້ນ ແມ່ນດ້ວຍປະຕິປະທານັ້ນ ແມ່ນດ້ວຍທຸກກະຣະກິຣິຍານັ້ນ ພຣະອົງກໍຍັງບໍ່ໄດ້ບັນລຸອຸດຕະຣິມະນຸດສະທຳ ອັນເປັນຍານທັດສະນະທີ່ປະເສີດ ອັນສາມາດ ບັດນີ້ ພຣະອົງເປັນຜູ້ມັກຫຼາຍ ຄາຍຄວາມພຽນ ວຽນມາເພື່ອຄວາມເປັນຄົນມັກຫຼາຍແລ້ວຈັ່ງໃດຈັກບັນລຸອຸດຕະຣິມະນຸດສະທຳ ອັນເປັນຍານທັດສະນະທີ່ປະເສີດ ອັນສາມາດໄດ້ນໍ?

ເມື່ອພິກຂຸປັນຈະວັກຄີ ໄດ້ຂາບທູນແນວນັ້ນແລ້ວ ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດກັບພິກຂຸປັນຈະວັກຄີດັ່ງນີ້ວ່າ "ພິກຂຸທັງຫຼາຍ ພວກທ່ານຍັງຈື່ໄດ້ບໍວ່າ ຄຳເວົ້າແນວນີ້ເຮົາໄດ້ເຄີຍກ່າວມາກ່ອນໜ້ານີ້ບໍ?

ພິກຂຸປັນຈະວັກຄີຂາບທູນວ່າ "ຄຳເວົ້າແນວນີ້ ພຣະອົງບໍ່ເຄີຍກ່າວມາກ່ອນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ຕະຖາຄົດເປັນອະຣະຫັນຕັດສະຮູ້ເອງໂດຍຊອບ ພວກທ່ານຈົ່ງງ່ຽງໂສດສະດັບ ເຮົາໄດ້ບັນລຸອະມະຕະທຳແລ້ວ ຈະສັ່ງສອນ ຈະສະແດງທຳ ພວກທ່ານ ເມື່ອປະຕິບັດຕາມທີ່ເຮົາສັ່ງສອນ ບໍ່ດົນຫຼາຍກໍຈັກເຮັດໃຫ້ແຈ້ງເຊິ່ງປະໂຫຍດອັນປະເສີດ ອັນເປັນທີ່ສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍຊອບ ຕ້ອງການດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນນີ້ໄດ້ຢ່າງແນ່ນອນ

ເມື່ອພຣະຜູ້ມີພຣະພາກເຈົ້າ ຊົງສາມາດເວົ້າໃຫ້ພິກຂຸປັນຈະວັກຄີຍອມ ງ່ຽງໂສດສະດັບໄດ້ພາກັນຕັ້ງຈິດເພື່ອຮູ້ຍິ່ງໃນທຳ

## ທຳມະຈັກກັບປະວັດຕະນະສູດ

[໑໓] ຄັ້ງນັ້ນແລ ພຣະຜູ້ມີພຣະພາກເຈົ້າ ໄດ້ຮັບສັ່ງກັບພິກຂຸປັນຈະວັກຄີວ່າ "ພິກຂຸທັງຫຼາຍ ທີ່ສຸດ ໒ ຢ່າງນີ້ ບັນພະຊິດບໍ່ເພິ່ງເສບ ກ່າວຄື

໑. ກາມະສຸຂັນລິການຸໂຍກໃນກາມທັງຫຼາຍ (ການມົກມຸ້ນຢູ່ດ້ວຍການສຸກໃນການທັງຫຼາຍ) ເປັນທຳອັນຊາມ ເປັນຂອງຊາວບ້ານ ເປັນຂອງປຸຖຸຊົນ ບໍ່ແມ່ນຂອງພຣະອະຣິຍະ ບໍ່ປະກອບດ້ວຍປະໂຫຍດ

໒. ອັດຕະກິລະມະຖານຸໂຍກ (ການປະກອບຄວາມລຳບາກເດືອດຮ້ອນແກ່ຕົນ) ເປັນທຸກ ບໍ່ແມ່ນຂອງພຣະອະຣິຍະ ບໍ່ປະກອບດ້ວຍປະໂຫຍດ

ພິກຂຸທັງຫຼາຍ ມັດຊິມາປະຕິປະທາບໍ່ອຽງເຂົ້າໃກ້ທີ່ສຸດ ໒ ຢ່າງນັ້ນ ຕະຖາຄົດໄດ້ຕັດສະຮູ້ອັນເປັນປະຕິປະທາກໍ່ໃຫ້ເກີດຈັກຂຸ ກໍ່ໃຫ້ເກີດຍານ ເປັນໄປເພື່ອຄວາມສະງົບ ເພື່ອຄວາມຮູ້ຍິ່ງເພື່ອຄວາມຕັດສະຮູ້ ເພື່ອພຣະນິບພານ

ພິກຂຸທັງຫຼາຍ ກໍມັດຊິມາປະຕິປະທາທີ່ຕະຖາຄົດໄດ້ຕັດສະຣູ້ແລ້ວ ອັນເປັນປະຕິປະທາກໍ່ໃຫ້ເກີດຈັກຂຸ ກໍ່ໃຫ້ເກີດຍານ ເປັນໄປເພື່ອຄວາມສະງົບ ເພື່ອຄວາມຮູ້ຍິ່ງ ເພື່ອຄວາມຕັດສະຣູ້ເພື່ອພຣະນິບພານນັ້ນເປັນຢ່າງໃດ?

ມັດຊິມາປະຕິປະທານັ້ນ ໄດ້ແກ່ ອະຣິຍະມັກມີອົງ ໘ ນີ້ ຄື

| | | | |
|---|---|---|---|
| ໑. ສຳມາທິດຖິ | (ເຫັນຖືກ) | ໒. ສຳມາສັງກັບປະ | (ດຳຣິຖືກ) |
| ໓. ສຳມາວາຈາ | (ເຈລະຈາຖືກ) | ໔. ສຳມາກຳມັນຕະ | (ກະທຳຖືກ) |
| ໕. ສຳມາອາຊີວະ | (ລ້ຽງຊີບຖືກ) | ໖. ສຳມາວາຍາມະ | (ພະຍາຍາມຖືກ) |
| ໗. ສຳມາສະຕິ | (ຣະນຶກຖືກ) | ໘. ສຳມາສະມາທິ | (ຕັ້ງຈິດໝັ້ນຖືກ) |

ພິກຂຸທັງຫຼາຍ ນີ້ ຄື ມັດຊິມາປະຕິປະທາ ທີ່ຕະຖາຄົດໄດ້ຕັດສະຣູ້ແລ້ວ ອັນເປັນປະຕິປະທາ ກໍ່ໃຫ້ເກີດຈັກຂຸ ກໍ່ໃຫ້ເກີດຍານ ເປັນໄປເພື່ອຄວາມສະງົບ ເພື່ອຄວາມຮູ້ຍິ່ງ ເພື່ອຄວາມຕັດສະຣູ້ ເພື່ອພຣະນິບພານ

[໑໔] ພິກຂຸທັງຫຼາຍ ຂໍ້ນີ້ ເປັນທຸກຂະອະຣິຍະສັດ ຄື ແມ່ນຄວາມເກີດກໍເປັນທຸກ ແມ່ນຄວາມແກ່ກໍເປັນທຸກ ແມ່ນຄວາມເຈັບກໍເປັນທຸກ ແມ່ນຄວາມຕາຍກໍເປັນທຸກ ຄວາມປະສົບກັບສິ່ງອັນບໍ່ເປັນທີ່ຮັກກໍເປັນທຸກ ຄວາມພັດພາກຈາກສິ່ງອັນເປັນທີ່ຮັກກໍເປັນທຸກ ຄວາມບໍ່ໄດ້ສິ່ງທີ່ປາຖະໜາກໍເປັນທຸກ ໂດຍຫຍໍ້ ອຸປາທານຂັນ ໕ ເປັນທຸກ

ພິກຂຸທັງຫຼາຍ ຂໍ້ນີ້ ເປັນທຸກຂະສະມຸທະຍະອະຣິຍະສັດ ຄື ຕັນຫາອັນເຮັດໃຫ້ເກີດອີກ ປະກອບດ້ວຍຄວາມເພີດເພີນ ແລະຄວາມກຳໜັດ ມີປົກກະຕິໃຫ້ເພີດເພີນໃນອາລົມນັ້ນ ໆ ຄື ກາມະຕັນຫາ ພະວະຕັນຫາ ວິພະວະຕັນຫາ

ພິກຂຸທັງຫຼາຍ ຂໍ້ນີ້ ເປັນທຸກຂະນິໂຣທະອະຣິຍະສັດ ຄື ຄວາມດັບຕັນຫາໄດ້ໂດຍບໍ່ເຫຼືອດ້ວຍວິຣາຄະ ຄວາມສະລະ ຄວາມສະລະຖິ້ມ ຄວາມພົ້ນ ຄວາມບໍ່ອາໄລໃນຕັນຫາ

ພິກຂຸທັງຫຼາຍ ຂໍ້ນີ້ ເປັນທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ ຄື ອະຣິຍະມັກມີອົງ ໘ ນີ້ເອງ ຄື

| | |
|---|---|
| ໑. ສຳມາທິດຖິ | ໒. ສຳມາສັງກັບປະ |
| ໓. ສຳມາວາຈາ | ໔. ສຳມາກຳມັນຕະ |
| ໕. ສຳມາອາຊີວະ | ໖. ສຳມາວາຍາມະ |
| ໗. ສຳມາສະຕິ | ໘. ສຳມາສະມາທິ |

[໑໕] ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວໃນທຳທັງຫຼາຍ ທີ່ເຮົາບໍ່ເຄີຍສະດັບມາກ່ອນວ່າ ນີ້ທຸກຂະອະຣິຍະສັດ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວໃນທຳທັງຫຼາຍ ທີ່ເຮົາບໍ່ເຄີຍສະດັບມາກ່ອນວ່າ ທຸກຂະອະຣິຍະສັດນີ້ ຄວນກຳນົດຮູ້

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວໃນທຳທັງຫຼາຍ ທີ່ເຮົາບໍ່ເຄີຍສະດັບມາກ່ອນວ່າ ທຸກຂະອະຣິຍະສັດນີ້ ເຮົາໄດ້ກຳນົດຮູ້ແລ້ວ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວໃນທຳທັງຫຼາຍ ທີ່ເຮົາບໍ່ເຄີຍສະດັບມາກ່ອນວ່າ ນີ້ທຸກຂະສະມຸທະຍະອະຣິຍະສັດ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວໃນທຳທັງຫຼາຍ ທີ່ເຮົາບໍ່ເຄີຍສະດັບມາກ່ອນວ່າ ທຸກຂະສະມຸທະຍະອະຣິຍະສັດນີ້ ຄວນລະ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວໃນທຳທັງຫຼາຍ ທີ່ເຮົາບໍ່ເຄີຍສະດັບມາກ່ອນວ່າ ທຸກຂະສະມຸທະຍະອະຣິຍະສັດນີ້ ເຮົາລະໄດ້ແລ້ວ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວໃນທຳທັງຫຼາຍ ທີ່ເຮົາບໍ່ເຄີຍສະດັບມາກ່ອນວ່າ ນີ້ທຸກຂະນິໂຣທະອະຣິຍະສັດ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວໃນທຳທັງຫຼາຍ ທີ່ເຮົາບໍ່ເຄີຍສະດັບມາກ່ອນວ່າ ທຸກຂະນິໂຣທະອະຣິຍະສັດນີ້ ຄວນເຮັດໃຫ້ແຈ້ງ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວໃນທຳທັງຫຼາຍ ທີ່ເຮົາບໍ່ເຄີຍສະດັບມາກ່ອນວ່າ ທຸກຂະນິໂຣທະອະຣິຍະສັດນີ້ ເຮົາໄດ້ເຮັດໃຫ້ແຈ້ງແລ້ວ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວໃນທຳທັງຫຼາຍ ທີ່ເຮົາບໍ່ເຄີຍສະດັບມາກ່ອນວ່າ ນີ້ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວໃນທຳທັງຫຼາຍ ທີ່ເຮົາບໍ່ເຄີຍສະດັບມາກ່ອນວ່າ ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດນີ້ ຄວນໃຫ້ຈະເລີນ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວໃນທຳທັງຫຼາຍ ທີ່ເຮົາບໍ່ເຄີຍສະດັບມາກ່ອນວ່າ ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດນີ້ ເຮົາໄດ້ໃຫ້ຈະເລີນແລ້ວ

[໑໖] ພິກຂຸທັງຫຼາຍ ຍານທັດສະນະຕາມຄວາມເປັນຈິງຂອງເຮົາໃນອະຣິຍະສັດ ໔ ເຫຼົ່ານີ້ ໓ ຮອບ ໑໔ ອາການແບບນີ້ ຍັງບໍ່ບໍລິສຸດດີຕາບໃດ ເຮົາກໍຍັງບໍ່ຮັບຮອງວ່າ ເປັນຜູ້ຕັດສະຣູ້ສຳມາສຳໂພທິຍານອັນປະເສີດໃນໂລກ ກັບທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະມະນຸດຕາບນັ້ນ

ພິກຂຸທັງຫຼາຍ ເມື່ອໃດ ຄວາມຮູ້ເຫັນຕາມເປັນຈິງຂອງເຮົາໃນອະຣິຍະສັດ ໔ ເຫຼົ່ານີ້ ໓ ຮອບ ໑໔ ອາການແບບນີ້ ບໍລິສຸດດີແລ້ວ ເມື່ອນັ້ນ ເຮົາຈຶ່ງຮັບຮອງໄດ້ວ່າ ເປັນຜູ້ຕັດສະຣູ້ ສຳມາສຳໂພທິຍານອັນປະເສີດໃນໂລກ ກັບທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ ຍານທັດສະນະເກີດຂຶ້ນແກ່ເຮົາວ່າ "ຄວາມລຸດພົ້ນຂອງເຮົາບໍ່ກັບກຳເຣີບ ຊາດນີ້ເປັນຊາດສຸດທ້າຍ ບັດນີ້ ພົບໃໝ່ບໍ່ມີອີກ

ເມື່ອພຣະຜູ້ມີພຣະພາກເຈົ້າ ຕັດໄວຍາກອນນີ້ຢູ່ ທຳມະຈັກຂຸອັນປາສະຈາກທຸລີປາສະຈາກມົນທິນ ໄດ້ເກີດແກ່ທ່ານພຣະໂກນທັນຍະວ່າ "ສິ່ງໃດສິ່ງໜຶ່ງ ມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງປວງ ມີຄວາມດັບໄປເປັນທຳມະດາ"

[໑໗] ເມື່ອພຣະຜູ້ມີພຣະພາກເຈົ້າ ຊົງປະກາດພຣະທຳມະຈັກໃຫ້ເປັນໄປແລ້ວ ທວຍເທບຊັ້ນພຸມມະໄດ້ກະຈາຍຂ່າວວ່າ "ນັ້ນ ພຣະທຳມະຈັກອັນປະເສີດ ພຣະຜູ້ມີພຣະພາກເຈົ້າຊົງໃຫ້ເປັນໄປແລ້ວ ໃນປ່າອິສິປະຕະນະມະລິຄະທາຍະວັນ ເຂດນະຄອນພາຣານະສີ ອັນສະມະນະ ພາມ ເທວະດາ ມານ ພົມ ຫຼື ຜູ້ໃດ ໃນໂລກ ໃຫ້ໝຸນກັບບໍ່ໄດ້"

ທວຍເທບຊັ້ນ ຈາຕຸມະຫາຣາດ ສະດັບສຽງຂອງທວຍເທບຊັ້ນພຸມມະແລ້ວ ໄດ້ກະຈາຍຂ່າວ ຕໍ່ໄປ ฯລฯ

ທວຍເທບຊັ້ນ ຕາວະຕິງສາ ສະດັບສຽງຂອງທວຍເທບຊັ້ນຈາຕຸມະຫາຣາດແລ້ວ ໄດ້ກະຈາຍຂ່າວຕໍ່ໄປ ฯລฯ

ທວຍເທບຊັ້ນ ຍາມາ ฯລฯ

ທວຍເທບຊັ້ນ ດຸສິດ ฯລฯ

ທວຍເທບຊັ້ນ ນິມມານະຣະດີ ໗ລ໗

ທວຍເທບຊັ້ນ ປະຣະນິມມິຕະວະສະວັດດີ ໗ລ໗

ທວຍເທບທີ່ນັບເນື່ອງໃນໝູ່ພົມ ສະດັບສຽງຂອງເຫຼົ່າເທວະດາຊັ້ນ ປະຣະນິມມິຕະວະສະວັດດີ ແລ້ວກໍກະຈາຍຂ່າວວ່າ "ນັ້ນ ພຣະທຳມະຈັກອັນປະເສີດ ພຣະຜູ້ມີພຣະພາກເຈົ້າຊົງປະກາດແລ້ວ ໃນປ່າອິສິປະຕະນະມະລິຄະທາຍະວັນ ເຂດນະຄອນພາຣານະສີ ອັນສະມະນະພາມ ເທວະດາ ມານ ພົມ ຫຼື ຜູ້ໃດ ໃນໂລກຈັກເຮັດໃຫ້ໝຸນກັບບໍ່ໄດ້

ພຽງບຶດໜຶ່ງເທົ່ານັ້ນ ສຽງປ່າວປະກາດໄດ້ກະຈາຍຂຶ້ນໄປເຖິງພົມມະໂລກ ທັງໝື່ນໂລກກະທາດກໍສັ່ນສະເທືອນເລື່ອນລັ່ນ ທັງແສງສະຫວ່າງອັນເຈີດຈ້າ ຫາປະມານບໍ່ໄດ້ ກໍຜາກົດໃນໂລກ ລ່ວງເທວານຸພາບຂອງເທວະດາທັງຫຼາຍ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງເປ່ງພຣະອຸທານນີ້ວ່າ "ຜູ້ຈະເລີນທັງຫຼາຍ ໂກນທັນຍະ ໄດ້ຮູ້ແລ້ວນໍ ຜູ້ຈະເລີນທັງຫຼາຍ ໂກນທັນຍະໄດ້ຮູ້ແລ້ວນໍ" ດັ່ງນັ້ນ ຄຳວ່າ "ອັນຍາໂກນທັນຍະ" ນີ້ ຈຶ່ງໄດ້ເປັນຊື່ຂອງທ່ານພຣະໂກນທັນຍະນັ້ນແລ

## ພິກຂຸປັນຈະວັກຄີທູນຂໍບັນພະຊາອຸປະສົມບົດ

[໑໗] ຄັ້ງນັ້ນ ທ່ານພຣະອັນຍາໂກນທັນຍະໄດ້ເຫັນທຳແລ້ວ ບັນລຸທຳແລ້ວ ຮູ້ແຈ້ງທຳແລ້ວ ຢັ່ງລົງສູ່ທຳແລ້ວ ຂ້າມຄວາມສົງໄສແລ້ວ ປາສະຈາກຄວາມສົງໄສ ເຖິງຄວາມເປັນຜູ້ແກ່ກ້າ ບໍ່ຕ້ອງເຊື່ອຜູ້ອື່ນໃນຄຳສອນຂອງພຣະສາດສະດາ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພະອົງເພິ່ງໄດ້ການບັນພະຊາ ເພິ່ງໄດ້ການອຸປະສົມບົດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດວ່າ "ທ່ານຈົ່ງມາເປັນພິກຂຸເທີ້ນ' ແລ້ວຕັດຕໍ່ໄປວ່າ "ທຳອັນເຮົາກ່າວດີແລ້ວ ທ່ານຈົ່ງປະພຶດພົມມະຈັນ ເພື່ອເຮັດທີ່ສຸດທຸກໂດຍຊອບເທີ້ນ

ພຣະວາຈານັ້ນ ໄດ້ເປັນການອຸປະສົມບົດຂອງທ່ານອັນຍາໂກນທັນຍະ

[໑໘] ຕໍ່ມາ ພຣະຜູ້ມີພຣະພາກເຈົ້າຊົງໂອວາດ ສັ່ງສອນພິກຂຸທັງຫຼາຍທີ່ເຫຼືອດ້ວຍທຳມີກະຖາ ເມື່ອພຣະຜູ້ມີພຣະພາກເຈົ້າຊົງໂອວາດ ສັ່ງສອນດ້ວຍທຳມີກະຖາ ທຳມະຈັກຂຸອັນປາສະຈາກທຸລີ ປາສະຈາກມົນທິນ ໄດ້ເກີດຂຶ້ນແກ່ທ່ານພຣະວັບປະ ແລະທ່ານພຣະພັນທິຍະວ່າ "ສິ່ງໃດສິ່ງໜຶ່ງ ມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງປວງ ມີຄວາມດັບໄປເປັນທຳມະດາ"

ທ່ານທັງ ໔ ນັ້ນ ໄດ້ເຫັນທຳແລ້ວ ບັນລຸທຳແລ້ວ ຮູ້ແຈ້ງທຳແລ້ວ ຢັ່ງລົງສູ່ທຳແລ້ວ ຂ້າມຄວາມສົງໄສໄດ້ແລ້ວ ປາສະຈາກຄວາມສົງໄສ ເຖິງຄວາມເປັນຜູ້ແກ່ກ້າ ບໍ່ຕ້ອງເຊື່ອຜູ້ອື່ນໃນຄຳສອນຂອງພຣະສາດສະດາ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ພຣະອົງຜູ້

ຈະເລີນ ຂ້າພະອົງທັງ ໔ ເພິ່ງໄດ້ການບັນພະຊາ ເພິ່ງໄດ້ການອຸປະສົມບົດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ທ່ານທັງ ໔ ຈົ່ງມາເປັນພິກຂຸເທີ້ນ" ແລ້ວຕັດຕໍ່ໄປອີກວ່າ "ທຳອັນເຮົາກ່າວດີແລ້ວ ທ່ານທັງ ໔ ຈົ່ງປະພຶດພົມມະຈັນເພື່ອເຮັດທີ່ສຸດແຫ່ງທຸກໂດຍຊອບເທີ້ນ

ພຣະອາຈານັ້ນແລ ໄດ້ເປັນການອຸປະສົມບົດຂອງທ່ານທັງ ໔ ນັ້ນ

ຕໍ່ມາ ພຣະຜູ້ມີພຣະພາກເຈົ້າໄດ້ສະເຫວີຍພຣະກະຍາຫານທີ່ທ່ານທັງສາມນຳມາຖວາຍແລ້ວ ກໍຊົງໂອວາດສັ່ງສອນພິກຂຸທັງຫຼາຍທີ່ເຫຼືອດ້ວຍທຳມີກະຖາ ພິກຂຸ ໓ ອົງທ່ຽວບິນທະບາດແລ້ວນຳສິ່ງໃດມາ ທັງ ໖ ອົງ ກໍຢັ່ງອັດຕະພາບໃຫ້ເປັນໄປດ້ວຍສິ່ງນັ້ນ ເມື່ອພຣະຜູ້ມີພຣະພາກເຈົ້າຊົງໂອວາດ ສັ່ງສອນດ້ວຍທຳມີກະຖາ ທຳມະຈັກຂຸອັນປາສະຈາກທຸລີປາສະຈາກມົນທິນ ໄດ້ເກີດແກ່ທ່ານພຣະມະຫານາມະ ແລະທ່ານພຣະອັດສະຊິວ່າ "ສິ່ງໃດສິ່ງໜຶ່ງ ມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງປວງ ມີຄວາມດັບໄປເປັນທຳມະດາ

ທ່ານທັງ ໔ ນັ້ນ ໄດ້ເຫັນທຳແລ້ວ ບັນລຸທຳແລ້ວ ຮູ້ແຈ້ງທຳແລ້ວ ຢັ່ງລົງສູ່ທຳແລ້ວ ຂ້າມຄວາມສົງໄສແລ້ວ ປາສະຈາກຄວາມແຄງໃຈ ເຖິງຄວາມເປັນຜູ້ແກ່ກ້າ ບໍ່ຕ້ອງເຊື່ອຜູ້ອື່ນໃນຄຳສອນຂອງພຣະສາດສະດາ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງທັງ ໔ ເພິ່ງໄດ້ການບັນພະຊາ ເພິ່ງໄດ້ການອຸປະສົມບົດໃນສຳນັກຂອງພຣະອົງ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ທ່ານທັງ ໔ ຈົ່ງມາເປັນພິກຂຸເທີ້ນ" ແລ້ວຕັດຕໍ່ໄປວ່າ "ທຳອັນເຮົາກ່າວດີແລ້ວ ທ່ານທັງ ໔ ຈົ່ງປະພຶດພົມມະຈັນເພື່ອເຮັດທີ່ສຸດທຸກໂດຍຊອບເທີ້ນ

ພຣະອາຈານັ້ນ ໄດ້ເປັນການອຸປະສົມບົດຂອງທ່ານທັງ ໔ ນັ້ນ

## ອະນັດຕະລັກຂະນະສູດ

[໔໐] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດກັບພິກຂຸປັນຈະວັກຄີວ່າ "ພິກຂຸທັງຫຼາຍ ຮູບເປັນອະນັດຕາ ພິກຂຸທັງຫຼາຍ ຖ້າຮູບນີ້ຈັກເປັນອັດຕາແລ້ວ ຮູບນີ້ ບໍ່ເພິ່ງເປັນໄປເພື່ອອາພາດ ແລະ ບຸກຄົນເພິ່ງໄດ້ໃນຮູບວ່າ "ຮູບຂອງເຮົາຈົ່ງເປັນແນວນີ້ ຮູບຂອງເຮົາຢ່າໄດ້ເປັນແນວນັ້ນ" ພິກຂຸທັງຫຼາຍ ກໍຍ້ອນຮູບເປັນອະນັດຕາ ສະນັ້ນ ຮູບຈຶ່ງເປັນໄປເພື່ອອາພາດ ແລະບຸກຄົນຍ່ອມບໍ່ໄດ້ໃນຮູບວ່າ "ຮູບຂອງເຮົາຈົ່ງເປັນແນວນີ້ ຮູບຂອງເຮົາຢ່າໄດ້ເປັນແນວນັ້ນ"

ພິກຂຸທັງຫຼາຍ ເວທະນາເປັນອະນັດຕາ ພິກຂຸທັງຫຼາຍ ຖ້າເວທະນານີ້ຈັກເປັນອັດຕາແລ້ວ ເວທະນານີ້ບໍ່ເພິ່ງເປັນໄປເພື່ອອາພາດ ແລະບຸກຄົນເພິ່ງໄດ້ໃນເວທະນາວ່າ "ເວທະນາຂອງ ເຮົາຈົ່ງເປັນແນວນີ້ ເວທະນາຂອງເຮົາຢ່າໄດ້ເປັນແນວນັ້ນ" ພິກຂຸທັງຫຼາຍ ກໍຍ້ອນເວທະນາ ເປັນອະນັດຕາ ສະນັ້ນ ເວທະນາຈຶ່ງເປັນໄປເພື່ອອາພາດ ແລະບຸກຄົນຍ່ອມບໍ່ໄດ້ໃນເວທະນາວ່າ "ເວທະນາຂອງເຮົາຈົ່ງເປັນແນວນີ້ ເວທະນາຂອງເຮົາຢ່າໄດ້ເປັນແນວນັ້ນ"

ພິກຂຸທັງຫຼາຍ ສັນຍາເປັນອະນັດຕາ ພິກຂຸທັງຫຼາຍ ຖ້າສັນຍານີ້ຈັກເປັນອັດຕາແລ້ວ ສັນຍານີ້ບໍ່ເພິ່ງເປັນໄປເພື່ອອາພາດ ແລະບຸກຄົນເພິ່ງໄດ້ໃນສັນຍາວ່າ “ສັນຍາຂອງເຮົາຈົ່ງເປັນແນວນີ້ ສັນຍາຂອງເຮົາຢ່າໄດ້ເປັນແນວນັ້ນ” ພິກຂຸທັງຫຼາຍ ກໍຍ້ອນສັນຍາ ເປັນອະນັດຕາ ສະນັ້ນ ສັນຍາຈຶ່ງເປັນໄປເພື່ອອາພາດ ແລະບຸກຄົນຍ່ອມບໍ່ໄດ້ໃນສັນຍາວ່າ “ສັນຍາຂອງເຮົາຈົ່ງເປັນແນວນີ້ ສັນຍາຂອງເຮົາຢ່າໄດ້ເປັນແນວນັ້ນ”

ພິກຂຸທັງຫຼາຍ ສັງຂານທັງຫຼາຍເປັນອະນັດຕາ ພິກຂຸທັງຫຼາຍ ຖ້າສັງຂານເຫຼົ່ານີ້ຈັກເປັນອັດຕາແລ້ວ ສັງຂານເຫຼົ່ານີ້ບໍ່ເພິ່ງເປັນໄປເພື່ອອາພາດ ແລະບຸກຄົນເພິ່ງໄດ້ໃນສັງຂານທັງຫຼາຍວ່າ “ສັງຂານທັງຫຼາຍຂອງເຮົາຈົ່ງເປັນແນວນີ້ ສັງຂານທັງຫຼາຍຂອງເຮົາຢ່າໄດ້ເປັນແນວນັ້ນ” ພິກຂຸທັງຫຼາຍ ກໍຍ້ອນສັງຂານທັງຫຼາຍເປັນອະນັດຕາ ສະນັ້ນ ສັງຂານທັງຫຼາຍຈຶ່ງເປັນໄປເພື່ອອາພາດ ແລະບຸກຄົນຍ່ອມບໍ່ໄດ້ໃນສັງຂານທັງຫຼາຍວ່າ “ສັງຂານທັງຫຼາຍ ຂອງເຮົາຈົ່ງເປັນແນວນີ້ ສັງຂານທັງຫຼາຍຂອງເຮົາຢ່າໄດ້ເປັນແນວນັ້ນ”

ພິກຂຸທັງຫຼາຍ ວິນຍານເປັນອະນັດຕາ ພິກຂຸທັງຫຼາຍ ຖ້າວິນຍານນີ້ຈັກເປັນອັດຕາແລ້ວ ວິນຍານນີ້ ບໍ່ເພິ່ງເປັນໄປເພື່ອອາພາດ ແລະບຸກຄົນເພິ່ງໄດ້ໃນວິນຍານວ່າ “ວິນຍານຂອງເຮົາຈົ່ງເປັນແນວນີ້ ວິນຍານຂອງເຮົາຢ່າໄດ້ເປັນແນວນັ້ນ” ພິກຂຸທັງຫຼາຍ ກໍຍ້ອນວິນຍານເປັນອະນັດຕາ ສະນັ້ນ ວິນຍານຈຶ່ງເປັນໄປເພື່ອອາພາດ ແລະບຸກຄົນຍ່ອມບໍ່ໄດ້ໃນວິນຍານວ່າ “ວິນຍານຂອງເຮົາຈົ່ງເປັນແນວນີ້ ວິນຍານຂອງເຮົາຢ່າໄດ້ເປັນແນວນັ້ນ

[໔໑] ເມື່ອແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມວ່າ “ພິກຂຸທັງຫຼາຍ ພວກທ່ານເຂົ້າໃຈຂໍ້ນັ້ນແນວໃດ ຮູບທ່ຽງ ຫຼື ບໍ່ທ່ຽງ?”

ພິກຂຸປັນຈະວັກຄີ ທູນວ່າ “ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ຫຼື ເປັນສຸກ
ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມແປຜັນເປັນທຳມະດາ ຄວນບໍທີ່ຈະເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ
ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ

ເວທະນາທ່ຽງ ຫຼື ບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ຫຼື ເປັນສຸກ?
ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມແປຜັນເປັນທໍາມະດາ ຄວນບໍທີ່ຈະເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ

ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ

ສັນຍາທ່ຽງ ຫຼື ບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນ ເປັນທຸກ ຫຼື ເປັນສຸກ?

ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມແປຜັນເປັນທໍາມະດາ ຄວນບໍທີ່ຈະເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ?

ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ

ສັງຂານທັງຫຼາຍທ່ຽງ ຫຼື ບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ຫຼື ເປັນສຸກ?

ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມແປຜັນເປັນທໍາມະດາ ຄວນບໍທີ່ຈະເຫັນ ສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ?

ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ

ວິນຍານທ່ຽງ ຫຼື ບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ຫຼື ເປັນສຸກ?

ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມແປຜັນເປັນທໍາມະດາ ຄວນບໍທີ່ຈະເຫັນ ສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ?

ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ

[໔໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ຍ້ອນແນວນັ້ນ ຮູບແນວໃດແນວໜຶ່ງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ພາຍໃນ ຫຼື ພາຍນອກ ຫຍາບ ຫຼື ລະອຽດ ຊົ່ວ ຫຼື ປະນີດ ໄກ ຫຼື ໃກ້ ທັງໝົດນັ້ນ ທ່ານທັງຫຼາຍ ເພິ່ງເຫັນດ້ວຍປັນຍາອັນຊອບຕາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ເວທະນາແນວໃດແນວໜຶ່ງ ທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ພາຍໃນຫຼືພາຍ

ນອກ ຫຍາບ ຫຼື ລະອຽດ ຊົ່ວ ຫຼື ປະນີດ ໄກ ຫຼື ໃກ້ ທັງໝົດນັ້ນ ທ່ານທັງຫຼາຍເພິ່ງເຫັນດ້ວຍປັນຍາອັນຊອບຕາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ສັນຍາແນວໃດແນວໜຶ່ງ ທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ພາຍໃນ ຫຼື ພາຍນອກ ຫຍາບ ຫຼື ລະອຽດ ຊົ່ວ ຫຼື ປະນີດ ໄກ ຫຼື ໃກ້ ທັງໝົດນັ້ນ ທ່ານທັງຫຼາຍເພິ່ງເຫັນດ້ວຍປັນຍາອັນຊອບຕາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນ ອັດຕາຂອງເຮົາ

ສັງຂານທັງຫຼາຍແນວໃດແນວໜຶ່ງ ທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ພາຍໃນ ຫຼື ພາຍນອກ ຫຍາບ ຫຼື ລະອຽດ ຊົ່ວ ຫຼື ປະນີດ ໄກ ຫຼື ໃກ້ ທັງໝົດນັ້ນ ທ່ານທັງຫຼາຍ ເພິ່ງເຫັນດ້ວຍປັນຍາອັນຊອບຕາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ວິນຍານແນວໃດແນວໜຶ່ງ ທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ພາຍໃນ ຫຼື ພາຍນອກ ຫຍາບ ຫຼື ລະອຽດ ຊົ່ວ ຫຼື ປະນີດ ໄກ ຫຼື ໃກ້ ທັງໝົດນັ້ນ ທ່ານທັງຫຼາຍ ເພິ່ງເຫັນດ້ວຍປັນຍາອັນຊອບຕາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

[໔໑] ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບ ເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຮູບ ຍ່ອມເບື່ອໜ່າຍແມ່ນໃນເວທະນາ ຍ່ອມເບື່ອໜ່າຍແມ່ນໃນສັນຍາ ຍ່ອມເບື່ອໜ່າຍແມ່ນໃນສັງຂານທັງຫຼາຍ ຍ່ອມເບື່ອໜ່າຍແມ່ນໃນວິນຍານ ເມື່ອເບື່ອໜ່າຍ ຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ຍ່ອມມີຍານວ່າ ລຸດພົ້ນແລ້ວ ອະຣິຍະສາວົກຍ່ອມຮູ້ຊັດແຈ້ງວ່າ ຊາດສິ້ນແລ້ວ ພົມມະຈັນໄດ້ຢູ່ຈົບແລ້ວ ກິດທີ່ຄວນເຮັດໄດ້ເຮັດສຳເລັດແລ້ວ ກິດອື່ນເພື່ອຄວາມເປັນແນວນີ້ ບໍ່ມີອີກ

[໔໔] ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດອະນັດຕະລັກຂະນະສູດນີ້ແລ້ວ ພິກຂຸປັນຈະວັກຄີກໍມີໃຈຍິນດີ ຊື່ນຊົມພາສິດຂອງພຣະຜູ້ມີພຣະພາກເຈົ້າ ເມື່ອພຣະພຸດທະອົງຕັດໄວຍາກອນນີ້ຢູ່ຈິດຂອງພິກຂຸປັນຈະວັກຄີ ກໍລຸດພົ້ນຈາກອາສະວະທັງຫຼາຍ ຍ້ອນບໍ່ຖືໝັ້ນ

ຄັ້ງນັ້ນ ໄດ້ມີພຣະອະຣະຫັນເກີດຂຶ້ນແລ້ວໃນໂລກ ໖ ອົງ

**ປັນຈະວັກຄີຍະກະຖາ ຈົບ**

**ພານະວານທີ ໑ ຈົບ**

# ກ. ປັບພັດຊາກະຖາ

## ວ່າດ້ວຍການບັນພະຊາ

## ເລື້ອງຍະສະກຸນລະບຸດ

[໔໕] ສະໄໝນັ້ນ ໃນນະຄອນພາຣານະສີ ມີກຸນລະບຸດຊື່ ຍະສະ ເປັນລູກເສດຖີເປັນຜູ້ສຸຂຸມາລະຊາດ ຍະສະກຸນລະບຸດນັ້ນ ມີຜາສາດ ໓ ຫຼັງ ຄື ຫຼັງໜຶ່ງ ສຳລັບລະດູໜາວ ຫຼັງໜຶ່ງສຳລັບລະດູຮ້ອນ ຫຼັງໜຶ່ງສຳລັບລະດູຝົນ ຍະສະກຸນລະບຸດໄດ້ຮັບການບຳເລີດ້ວຍດົນຕີ ບໍ່ມີບຸຣຸດຊາຍປົນ ຕະຫຼອດ ໔ ເດືອນ ຢູ່ເທິງຜາສາດລະດູຝົນ ບໍ່ລົງມາຜາສາດຊັ້ນລຸ່ມ ຄືນວັນໜຶ່ງເມື່ອຍະສະກຸນລະບຸດໄດ້ຮັບການບຳເລີຈົນອີ່ມເອມ ພຽບພ້ອມດ້ວຍກາມມະຄຸນ ໕ ແລ້ວໄດ້ຫຼັບໄປກ່ອນ ຝ່າຍບໍລິວານໄດ້ຫຼັບພາຍຫຼັງ ຕະກຽງນ້ຳມັນຖືກໄຕ້ໄວ້ໃຫ້ສະຫວ່າງເບິດຄືນ

ໃນຄືນນັ້ນ ຍະສະກຸນລະບຸດໄດ້ຕື່ນຂຶ້ນມາກ່ອນ ເຫັນບໍລິວານຂອງຕົນກຳລັງຫຼັບຢູ່ ບາງນາງມີພິນຢູ່ໃກ້ຂີ້ແຮ້ ບາງນາງມີຕະໂພນຢູ່ຂ້າງຄໍ ບາງນາງມີໂປງມາງຢູ່ທີ່ເອິກ ບາງນາງສະຫຍາຍຜົມ ບາງນາງມີນ້ຳລາຍໄຫຼ ບາງນາງລະເມີເພີ້ໄປຕ່າງ ໆ ຜາກົດເໝືອນປ່າຊ້າຜີດິບ ຍ້ອນໄດ້ເຫັນໂທດ ຈຶ່ງຜາກົດແກ່ຍະສະກຸນລະບຸດ ຈິດຕັ້ງຢູ່ໃນຄວາມເບື່ອໜ່າຍ ຍະສະກຸນລະບຸດຈຶ່ງເປ່ງອຸທານ ຂຶ້ນໃນຂະນະນັ້ນວ່າ "ທ່ານຜູ້ຈະເລີນ ບ່ອນນີ້ວຸ່ນວາຍແທ້ນໍ ທ່ານຜູ້ຈະເລີນ ບ່ອນນີ້ຂັດຂ້ອງແທ້ນໍ"

ຄັ້ງນັ້ນ ຍະສະກຸນລະບຸດຈຶ່ງສຸບເກີບຄຳຍ່າງກົງໄປສູ່ປະຕູນິເວດ ພວກອະມະນຸດເປີດປະຕູໃຫ້ດ້ວຍຄິດວ່າ "ຜູ້ໃດ ຢ່າໄດ້ເຮັດອັນຕະລາຍຕໍ່ການອອກຈາກເຮືອນບວດເປັນບັນພະຊິດຂອງຍະສະກຸນລະບຸດ

ລຳດັບນັ້ນ ຍະສະກຸນລະບຸດໄດ້ຍ່າງຕໍ່ໄປສູ່ປະຕູເມືອງ ພວກອະມະນຸດກໍເປີດປະຕູໃຫ້ດ້ວຍຄິດວ່າ "ຜູ້ໃດ ຢ່າໄດ້ເຮັດອັນຕະລາຍຕໍ່ການອອກຈາກເຮືອນບວດເປັນບັນພະຊິດຂອງຍະສະກຸນລະບຸດ" ຫຼັງຈາກນັ້ນ ຍະສະກຸນລະບຸດ ຈຶ່ງຍ່າງຕໍ່ໄປສູ່ປ່າອິສິປະຕະນະມະລິຄະທາຍະວັນ

[໔໖] ເມື່ອຣາຕີໃກ້ຮຸ່ງ ພຣະຜູ້ມີພຣະພາກເຈົ້າສະເດັດລຸກຂຶ້ນຈົງກົມຢູ່ທີ່ແຈ້ງ ໄດ້ທອດພຣະເນດເຫັນຍະສະກຸນລະບຸດຍ່າງມາແຕ່ໄກ ເມື່ອເຫັນແລ້ວ ຈຶ່ງສະເດັດລົງຈາກທີ່ຈົງກົມປະທັບນັ່ງເທິງອາສະນະທີ່ເຂົາຈັດໄວ້ ຂະນະນັ້ນ ຍະສະກຸນລະບຸດໄດ້ເປ່ງອຸທານຂຶ້ນໃນທີ່ບໍ່ໄກພຣະຜູ້ມີພຣະພາກເຈົ້າວ່າ "ທ່ານຜູ້ຈະເລີນ ບ່ອນນີ້ວຸ່ນວາຍນໍ ທ່ານຜູ້ຈະເລີນ ບ່ອນນີ້ຂັດຂ້ອງນໍ

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດກັບຍະສະກຸນລະບຸດນັ້ນດັ່ງນີ້ວ່າ "ຍະສະ ບ່ອນນີ້ ບໍ່ວຸ່ນວາຍ ບ່ອນນີ້ບໍ່ຂັດຂ້ອງ ມາເທີ້ນ ຍະສະ ຈົ່ງນັ່ງລົງ ເຮົາຈັກສະແດງທຳແກ່ທ່ານ

ລຳດັບນັ້ນ ຍະສະກຸນລະບຸດລ່າເລີງເບີກບານໃຈວ່າ "ໄດ້ຍິນວ່າ ບ່ອນນີ້ບໍ່ວຸ່ນວາຍ ບ່ອນນີ້ ບໍ່ຂັດຂ້ອງ" ຈຶ່ງປົດເກີບຄຳເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວໄດ້ຖວາຍອະພິວາດ ພຣະຜູ້ມີພຣະພາກເຈົ້າແລ້ວນັ່ງໃນບ່ອນສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດອະນຸປຸບພິກະຖາ ຄື ຊົງປະກາດ

໑. ທານະກະຖາ (ເລື້ອງທານ)
໒. ສີລະກະຖາ (ເລື້ອງສີນ)
໓. ສັກຄະກະຖາ (ເລື້ອງສະຫວັນ)
໔. ກາມາທີນະວະກະຖາ (ເລື້ອງໂທດຄວາມຕໍ່າຊາມຄວາມເສົ້າໝອງແຫ່ງກາມ)
໕. ເນກຂຳມານິສັງສະກະຖາ (ເລື້ອງອານິສົງແຫ່ງການອອກຈາກກາມ)

ແກ່ຍະສະກຸນລະບຸດ ຜູ້ນັ່ງຢູ່ບ່ອນສົມຄວນ

ເມື່ອຊົງຮູ້ວ່າ ຍະສະກຸນລະບຸດມີຈິດອັນຄວນ ອ່ອນໂຍນ ປາສະຈາກນິວອນ ເບີກບານຜ່ອງໃສ ຈຶ່ງຊົງປະກາດສາມຸກກັງສິກະທຳມະເທດສະໜາຂອງພຣະພຸດທະເຈົ້າທັງຫຼາຍ ຄື ທຸກາສະມຸໄທ ນິໂຣດ ມັກ ທຳມະຈັກຂຸອັນປາສະຈາກທຸລີປາສະຈາກມົນທິນ ໄດ້ເກີດແກ່ຍະສະກຸນລະບຸດໃນອາສະນະນັ້ນແລ ວ່າ "ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງປວງມີຄວາມດັບໄປເປັນທຳມະດາ" ປຽບເໝືອນ ຜ້າຂາວສະອາດປາສະຈາກມົນທິນ ຄວນຮັບນ້ຳຍ້ອມໄດ້ເປັນຢ່າງດີ

## ບິດາຕາມຫາຍະສະກຸນລະບຸດ

[໔໗] ເມື່ອຮຸ່ງເຊົ້າ ມານດາຂຶ້ນໄປເທິງຜາສາດບໍ່ພົບຍະສະກຸນລະບຸດ ຈຶ່ງເຂົ້າໄປຫາເສດຖີຄະຫະບໍດີເຖິງທີ່ຢູ່ ເມື່ອເຖິງແລ້ວໄດ້ກ່າວກັບເສດຖີຄະຫະບໍດີ ດັ່ງນີ້ວ່າ "ທ່ານຄະຫະບໍດີ ຂ້ານ້ອຍ ຍະສະບຸດຂອງທ່ານຫາຍໄປໄສແລ້ວ

ຝ່າຍເສດຖີຄະຫະບໍດີໄດ້ສັ່ງທູດຂີ່ມ້າໄປຕາມຫາທັງ ໔ ທິດແລ້ວ ສ່ວນຕົນເອງໄປສູ່ປ່າອິສິປະຕະນະມະລິຄະທາຍະວັນ ໄດ້ພົບເກີບຄຳວາງຢູ່ ຈຶ່ງຕາມໄປສູ່ທີ່ນັ້ນ ພຣະຜູ້ມີພຣະພາກເຈົ້າທອດພຣະເນດເຫັນເສດຖີຄະຫະບໍດີຍ່າງມາແຕ່ໄກ ເມື່ອທອດພຣະເນດເຫັນແລ້ວຊົງມີພຣະດຳຣິວ່າ "ຖ້າຈັ່ງໃດ ເຮົາເພິ່ງບັນດານອິດທາພິສັງຂານ (ການບັນດານທາງລິດ) ໃຫ້ເສດຖີຄະຫະບໍດີ ຜູ້ນັ່ງບ່ອນນີ້ບໍ່ເຫັນຍະສະກຸນລະບຸດນັ່ງຢູ່ບ່ອນນັ້ນ" ຈຶ່ງຊົງບັນດານອິດທາພິສັງຂານແນວນັ້ນ

ລຳດັບນັ້ນ ເສດຖີຄະຫະບໍດີເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວໄດ້ ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າຊົງພົບຍະສະກຸນລະບຸດແດ່ບໍ? ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຄະຫະບໍດີ ເຊີນທ່ານນັ່ງລົງກ່ອນເທີ້ນ ບາງເທື່ອທ່ານນັ່ງບ່ອນນີ້ແລ້ວ ຈະເພິ່ງພົບຍະສະກຸນລະບຸດນັ່ງຢູ່ບ່ອນນີ້ກໍໄດ້

ເສດຖີຄະຫະບໍດີລ່າເລີງເບີກບານໃຈວ່າ "ໄດ້ຍິນວ່າ ເຮົານັ່ງບ່ອນນີ້ຈັກພົບຍະສະກຸນລະບຸດຜູ້ນັ່ງຢູ່ບ່ອນນີ້" ຈຶ່ງຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງໃນບ່ອນສົມຄວນພຣະຜູ້ມີພຣະພາກເຈົ້າໄດ້ຕັດອະນຸປຸບພິກຖາ ຄື ຊົງປະກາດ

໑. ທານະກະຖາ
໒. ສີລະກະຖາ
໓. ສັກຄະກະຖາ
໔. ກາມາທີ່ນະວະກະຖາ
໕. ເນກຂໍາມານິສັງສະກະຖາ

ແກ່ເສດຖີຄະຫະບໍດີຜູ້ນັ່ງໃນບ່ອນສົມຄວນແລ້ວ

ເມື່ອຊົງຊາບວ່າ ເສດຖີຄະຫະບໍດີມີຈິດສົມຄວນ ອ່ອນໂຍນ ປາສະຈາກນິວອນ ເບີກບານ ຜ່ອງໃສ ຈຶ່ງຊົງປະກາດສາມຸກກັງສິກະທໍາມະເທດສະໜາຂອງພຣະພຸດທະເຈົ້າທັງຫຼາຍ ຄືທຸກ ສະມຸໄທ ນິໂຣດ ມັກ ທໍາມະຈັກຊຸອັນປາສະຈາກທຸລີ ປາສະຈາກມົນທິນ ໄດ້ເກີດແກ່ເສດຖີຜູ້ຄະຫະບໍດີ ເທິງອາສະນະນັ້ນແລ ວ່າ "ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທໍາມະດາ ສິ່ງນັ້ນທັງປວງ ມີຄວາມດັບໄປເປັນທໍາມະດາ" ປຽບເໝືອນ ຜ້າຂາວສະອາດປາສະຈາກມົນທິນ ຄວນຮັບນໍ້າຍ້ອມໄດ້ເປັນຢ່າງດີ

ເສດຖີຄະຫະບໍດີໄດ້ເຫັນທໍາແລ້ວ ບັນລຸທໍາແລ້ວ ຮູ້ແຈ້ງທໍາແລ້ວ ຢັ່ງລົງສູ່ທໍາແລ້ວ ຂ້າມຄວາມສົງໄສແລ້ວ ປາສະຈາກຄວາມແຄງໃຈ ເຖິງຄວາມເປັນຜູ້ແກ່ກ້າ ບໍ່ຕ້ອງເຊື່ອຜູ້ອື່ນໃນຄໍາສອນຂອງພຣະສາດສະດາ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ພຣະອົງຜູ້ຈະເລີນ ພາສິດຂອງພຣະອົງຊັດແຈ້ງໄພເລາະມ່ວນຫຼາຍ ພຣະອົງຜູ້ຈະເລີນ ພາສິດຂອງພຣະອົງຊັດແຈ້ງໄພເລາະມ່ວນຫຼາຍ ພຣະອົງຊົງປະກາດທໍາຊັດແຈ້ງໂດຍປະການຕ່າງ ໆ ປຽບເໝືອນ ບຸກຄົນຫງາຍຂອງທີ່ຂວໍ້າ ເປີດຂອງທີ່ປິດ ບອກທາງແກ່ຜູ້ຫຼົງທາງ ຫຼື ເຍືອງປະທີບໃນທີ່ມືດດ້ວຍຕັ້ງໃຈວ່າ ຄົນມີຕາດີຈັກເຫັນອົງ ພຣະອົງຜູ້ຈະເລີນ ຂ້າພະອົງນີ້ ຂໍເຖິງພຣະຜູ້ມີພຣະພາກເຈົ້າ ພ້ອມທັງພຣະທໍາ ແລະພຣະສົງເປັນສະຣະນະ ຂໍພຣະຜູ້ມີພຣະພາກເຈົ້າ ຈົ່ງຊົງຈື່ຂ້າພະອົງວ່າເປັນອຸປາສົກຜູ້ເຖິງສະຣະນະຕັ້ງແຕ່ວັນນີ້ເປັນຕົ້ນໄປ ຈົນຕະຫຼອດຊີວິດ

ເສດຖີຄະຫະບໍດີນີ້ແລ ໄດ້ເປັນເຕວາຈິກະອຸປາສົກ (ຜູ້ກ່າວເຖິງຣັດຕະນະທັງ ໒ ວ່າເປັນສະຣະນະ) ເປັນຄົນທໍາອິດ ໃນໂລກ

## ຍະສະກຸນລະບຸດສຳເລັດພຣະອະຣະຫັດຕະຜົນ

[໔໘] ຂະນະທີ່ພຣະຜູ້ມີພຣະພາກເຈົ້າ ຊົງສະແດງທຳໂຜດບິດາຂອງຍະສະກຸນລະບຸດຢູ່ ຈິດຂອງຍະສະກຸນລະບຸດຜູ້ພິຈາລະນາພູມທຳຕາມທີ່ໄດ້ເຫັນ ຕາມທີ່ໄດ້ຮູ້ ກໍລຸດພົ້ນຈາກອາສະວະທັງຫຼາຍ ຍ້ອນບໍ່ຖືໝັ້ນ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຄິດດັ່ງນີ້ວ່າ "ເມື່ອເຮົາສະແດງທຳແກ່ບິດາຂອງຍະສະກຸນລະບຸດຢູ່ ຈິດຂອງຍະສະກຸນລະບຸດ ຜູ້ພິຈາລະນາພູມທຳຕາມທີ່ໄດ້ເຫັນຕາມທີ່ໄດ້ຮູ້ ກໍລຸດພົ້ນຈາກອາສະວະທັງຫຼາຍ ຍ້ອນບໍ່ຖືໝັ້ນ ຍະສະກຸນລະບຸດບໍ່ຄວນຈະກັບໄປເປັນຄະລືຫັດບໍຣິໂພກການ ເໝືອນເປັນຄະລືຫັດຄັ້ງກ່ອນ ຖ້າຈັ່ງໃດ ເຮົາເພິ່ງຄາຍອິດທາພິສັງຂານ" ກໍຊົງຄາຍອິດທາພິສັງຂານແລ້ວ

ເສດຖີຄະຫະບໍດີໄດ້ເຫັນຍະສະກຸນລະບຸດນັ່ງຢູ່ ເມື່ອເຫັນແລ້ວຈຶ່ງກ່າວກັບຍະສະກຸນລະບຸດວ່າ "ຍະສະ ມານດາຂອງເຈົ້າໂສກເສົ້າຄ່ຳຄວນເຖິງ ເຈົ້າຈົ່ງໃຫ້ຊີວິດແກ່ມານດາກັບມາເທີ້ນ"

ຍະສະກຸນລະບຸດໄດ້ເງີຍໜ້າແນມເບິ່ງພຣະຜູ້ມີພຣະພາກເຈົ້າ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບເສດຖີຄະຫະບໍດີ ດັ່ງນີ້ວ່າ "ຄະຫະບໍດີ ທ່ານຈະເຂົ້າໃຈຂໍ້ນັ້ນແນວໃດ ຍະສະກຸນລະບຸດໄດ້ເຫັນໄດ້ຮູ້ທຳດ້ວຍຍານອັນເປັນເສຂະ ດ້ວຍທັດສະນະອັນເປັນເສຂະເໝືອນທ່ານ ເມື່ອທ່ານພິຈາລະນາພູມທຳຕາມທີ່ໄດ້ເຫັນຕາມທີ່ໄດ້ຮູ້ຢູ່ ຈິດກໍລຸດພົ້ນຈາກອາສະວະທັງຫຼາຍ ຍ້ອນບໍ່ຖືໝັ້ນ ຄະຫະບໍດີ ຍະສະກຸນລະບຸດຄວນບໍທີ່ຈະກັບໄປເປັນຄະລືຫັດ ບໍຣິໂພກການຄືຕອນເປັນຄະລືຫັດ

ເສດຖີຄະຫະບໍດີຂາບທູນວ່າ "ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຮັບຮອງວ່າ "ຄະຫະບໍດີ ຍະສະກຸນລະບຸດໄດ້ເຫັນໄດ້ຮູ້ທຳດ້ວຍຍານອັນເປັນເສຂະ ດ້ວຍທັດສະນະອັນເປັນເສຂະເໝືອນທ່ານ ເມື່ອເຂົາພິຈາລະນາພູມທຳຕາມທີ່ໄດ້ເຫັນຕາມທີ່ໄດ້ຮູ້ຢູ່ ຈິດກໍລຸດພົ້ນຈາກອາສະວະທັງຫຼາຍ ຍ້ອນບໍ່ຖືໝັ້ນ ຄະຫະບໍດີ ຍະສະກຸນລະບຸດບໍ່ຄວນຈະກັບໄປເປັນຄະລືຫັດບໍຣິໂພກການ ຄືຕອນເປັນຄະລືຫັດ

ເສດຖີຄະຫະບໍດີຂາບທູນວ່າ "ພຣະອົງຜູ້ຈະເລີນ ການທີ່ຈິດຂອງຍະສະກຸນລະບຸດລຸດພົ້ນຈາກອາສະວະທັງຫຼາຍຍ້ອນບໍ່ຖືໝັ້ນ ເປັນລາບຂອງຍະສະກຸນລະບຸດ ຍະສະກຸນລະບຸດໄດ້ດີແລ້ວ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າ ມີຍະສະກຸນລະບຸດເປັນປັດສາສະມະນະໂຜດຊົງຮັບພັດຕາຫານຂອງຂ້າພະອົງ ເພື່ອຈະເລີນກຸສົນໃນວັນນີ້ເທີ້ນ

ພຣະຜູ້ມີພຣະພາກເຈົ້າ ຊົງຮັບນິມົນໂດຍດຸດສະນີພາບ ເສດຖີຄະຫະບໍດີຮູ້ການທີ່ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນແລ້ວ ຈຶ່ງລຸກຈາກອາສະນະຖວາຍອະພິວາດ ກະທຳປະທັກຂິນກັບໄປ

ເມື່ອເສດຖີຄະຫະບໍດີກັບໄປແລ້ວບໍ່ດົນ ຍະສະກຸນລະບຸດໄດ້ຂາບທູນວ່າ "ພຣະອົງຜູ້ຈະເລີນ ຂ້າພະອົງເພິ່ງໄດ້ການບັນພະຊາ ເພິ່ງໄດ້ການອຸປະສົມບົດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ທ່ານຈົ່ງມາເປັນພິກຂຸ ເທີ້ນ" ແລ້ວຕັດຕໍ່ໄປວ່າ "ທຳອັນເຮົາກ່າວດີແລ້ວ ທ່ານຈົ່ງປະພຶດພົມມະຈັນນັ້ນ ເທີ້ນ"

ພຣະວາຈານັ້ນແລ ໄດ້ເປັນການອຸປະສົມບົດຂອງທ່ານຍະສະນັ້ນ

ຄັ້ງນັ້ນ ມີພຣະອະຣະຫັນເກີດຂຶ້ນໃນໂລກ ໗ ອົງ

## ມານດາແລະພັນລະຍາເກົ່າຂອງພຣະຍະສະໄດ້ທຳມະຈັກຂຸ

[໔໙] ເມື່ອເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າ ຊົງອັນຕະຣະວາສົກຖືບາດແລະຈີວອນ ມີທ່ານພຣະຍະສະເປັນປັດສາສະມະນະ ສະເດັດໄປສູ່ນິເວດຂອງເສດຖີຄະຫະບໍດີ ເມື່ອເຖິງແລ້ວຈຶ່ງປະທັບນັ່ງເທິງອາສະນະທີ່ເຂົາຈັດຖວາຍ

ລຳດັບນັ້ນ ມານດາແລະພັນລະຍາເກົ່າຂອງທ່ານພຣະຍະສະກໍພາກັນເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງທີ່ປະທັບ ເມື່ອເຖິງແລ້ວ ໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງໃນບ່ອນສົມຄວນ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດອະນຸປຸບພິກຖາ ຄື ຊົງປະກາດ

໑. ທານະກະຖາ ໒. ສີລະກະຖາ

໓. ສັກຄະກະຖາ ໔. ກາມາທີນະວະກະຖາ

໕. ເນກຂຳມານິສັງສະກະຖາ ແກ່ມານດາແລະພັນລະຍາເກົ່າ

ເມື່ອຊົງຊາບວ່າທັງສອງມີຈິດສົມຄວນ ອ່ອນໂຍນ ປາສະຈາກນິວອນ ເບີກບານ ຜ່ອງໃສ ຈຶ່ງຊົງປະກາດສາມຸກກັງສິກະທຳມະເທດສະໜາຂອງພຣະພຸດທະເຈົ້າທັງຫຼາຍ ຄື ທຸກ ສະມຸໄທ ນິໂຣດ ມັກ ທຳມະຈັກຂຸອັນປາສະຈາກທຸລີປາສະຈາກມົນທິນໄດ້ເກີດແກ່ມານດາ ແລະພັນລະຍາເກົ່າ ໃນອາສະນະນັ້ນແລວ່າ "ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງປວງ ມີຄວາມດັບໄປເປັນທຳມະດາ" ປຽບເໝືອນ ຜ້າຂາວສະອາດປາສະຈາກມົນທິນ ຄວນຮັບນ້ຳຍ້ອມໄດ້ເປັນຢ່າງດີ

ມານດາ ແລະພັນລະຍາເກົ່າຂອງພຣະຍະສະໄດ້ເຫັນທຳແລ້ວ ບັນລຸທຳແລ້ວ ຮູ້ແຈ້ງທຳແລ້ວ ຢັ່ງລົງສູ່ທຳແລ້ວ ຂ້າມຄວາມສົງໄສແລ້ວ ປາສະຈາກຄວາມແຄງໃຈ ເຖິງຄວາມເປັນຜູ້ແກ່ກ້າ ບໍ່ຕ້ອງເຊື່ອຜູ້ອື່ນໃນຄຳສອນຂອງພຣະສາດສະດາ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້

ວ່າ "ພຣະອົງຜູ້ຈະເລີນ ພາສິດຂອງພຣະອົງຊັດແຈ້ງໄພເລາະມ່ວນຫຼາຍ ພຣະອົງຜູ້ຈະເລີນ ພາສິດຂອງພຣະອົງຊັດແຈ້ງໄພເລາະມ່ວນຫຼາຍ ພຣະອົງຊົງປະກາດທຳຊັດແຈ້ງ ໂດຍປະການຕ່າງ ໆ ປຽບເໝືອນ ບຸກຄົນຫງາຍຂອງທີ່ຂວ້ຳ ເປີດຂອງທີ່ປິດ ບອກທາງແກ່ ຜູ້ຫຼົງທາງ ຫຼື ເຍືອງປະທີບໃນທີ່ມືດດ້ວຍຕັ້ງໃຈວ່າ ຄົນມີຕາດີຈັກເຫັນຮູບ ພຣະອົງຜູ້ຈະເລີນ ຂ້ານ້ອຍທັງສອງນີ້ຂໍເຖິງພຣະຜູ້ມີພຣະພາກເຈົ້າ ພ້ອມທັງພຣະທຳ ແລະພຣະສົງເປັນສະຣະນະ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງຈື່ຂ້ານ້ອຍທັງສອງ ວ່າເປັນອຸປາສິກາຜູ້ເຖິງສະຣະນະ ຕັ້ງແຕ່ວັນນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

ມານດາ ແລະພັນລະຍາເກົ່າຂອງທ່ານພຣະຍະສະທັງສອງນີ້ ໄດ້ເປັນເຕວາຈິກະອຸປາສິກາ (ຜູ້ກ່າວເຖິງຣັດຕະນະທັງ ໓ ວ່າເປັນສະຣະນະ) ເປັນຄູ່ທຳອິດໃນໂລກ

ເມື່ອແລ້ວ ມານດາບິດາ ແລະພັນລະຍາເກົ່າຂອງທ່ານພຣະຍະສະໄດ້ນຳຂອງຫຍ້ຳຂອງສັນອັນປະນີດ ປະເຄນພຣະຜູ້ມີພຣະພາກເຈົ້າກັບທ່ານພຣະຍະສະດ້ວຍຕົນເອງ ຈົນພຣະຜູ້ມີພຣະພາກເຈົ້າສະເຫວີຍສຳເລັດແລ້ວ ຊົງຫ້າມພັດຕາຫານແລ້ວລະພຣະຫັດຈາກບາດ ຈຶ່ງນັ່ງໃນບ່ອນສົມຄວນ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຊີ້ແຈ່ງໃຫ້ມານດາບິດາ ແລະພັນລະຍາເກົ່າຂອງທ່ານພຣະຍະສະເຫັນຊັດແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ ສົດຊື່ນລ່າເລີງດ້ວຍທຳມີກະຖາແລ້ວ ສະເດັດລຸກຈາກອາສະນະຈາກໄປ

## ເລື້ອງການບັນພະຊາຂອງສະຫາຍ ໔ ຄົນຂອງພຣະຍະສະ

[໓໐] ສະຫາຍຄະລິຫັດຂອງທ່ານພຣະຍະສະ ໔ ຄົນ ຄື ວິມະລະ ສຸພາຫຸ ປຸນນະຊິ ຄະວຳປະຕິ ເປັນບຸດຂອງຕະກູນເສດຖີໃຫຍ່ນ້ອຍໃນນະຄອນພາຣານະສີໄດ້ຮູ້ຂ່າວວ່າ "ຍະສະກຸນລະບຸດແຖຜົມ ແລະໜວດນຸ່ງຫົ່ມຜ້າກາສາຍະອອກຈາກເຮືອນບວດເປັນບັນພະຊິດແລ້ວ"

ເມື່ອສະຫາຍຄະລິຫັດໄດ້ຮູ້ຂ່າວແລ້ວ ຈຶ່ງໄດ້ມີຄວາມຄິດດັ່ງນີ້ວ່າ "ທຳວິໄນແລະບັນພະຊາທີ່ຍະສະກຸນລະບຸດແຖຜົມ ແລະໜວດນຸ່ງຫົ່ມຜ້າກາສາຍະອອກຈາກເຮືອນບວດເປັນບັນພະຊິດ ນັ້ນ ຄົງຈະບໍ່ຕ່ຳຊາມແນ່ນອນ" ເມື່ອແລ້ວສະຫາຍຄະລິຫັດເຫຼົ່ານັ້ນ ໄດ້ພາກັນເຂົ້າໄປຫາທ່ານພຣະຍະສະເຖິງທີ່ຢູ່ ເມື່ອເຖິງແລ້ວ ໄດ້ໄຫວ້ທ່ານພຣະຍະສະແລ້ວໄດ້ຢືນຢູ່ໃນບ່ອນສົມຄວນ

ຄັ້ງນັ້ນ ທ່ານພຣະຍະສະໄດ້ພາສະຫາຍຄະລິຫັດ ໔ ຄົນໄປເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວ ໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງໃນບ່ອນສົມຄວນ ທ່ານພຣະຍະສະຜູ້ນັ່ງໃນບ່ອນສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ສະຫາຍຄະລິຫັດຂອງຂ້າພະອົງ ໔ ຄົນເຫຼົ່ານີ້ ຄື ວິມະລະ ສຸພາຫຸ

ປຸນນະຊິ ຄະວໍາປະຕິ ເປັນບຸດຂອງຕະກູນເສດຖີໃຫຍ່ນ້ອຍໃນນະຄອນພາຣານະສີ ຂໍພຣະອົງໂຜດປະທານໂອວາດສັ່ງສອນສະຫາຍຂອງຂ້າພະອົງເຫຼົ່ານີ້ດ້ວຍເທີ້ນ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດອະນຸປຸບພິກຖາ ຄື ຊົງປະກາດ

໑. ທານະກະຖາ
໒. ສີລະກະຖາ
໓. ສັກຄະກະຖາ
໔. ກາມາທີນະວະກະຖາ
໕. ເນກຂໍາມານິສັງສະກະຖາ ແກ່ສະຫາຍເຫຼົ່ານັ້ນ

ເມື່ອຊົງຊາບວ່າພວກເຂົາມີຈິດສົມຄວນ ອ່ອນໂຍນ ປາສະຈາກນິວອນ ເບີກບານ ຜ່ອງໃສ ຈຶ່ງຊົງປະກາດສາມຸກກັງສິກະທໍາມະເທດສະໜາຂອງພຣະພຸດທະເຈົ້າທັງຫຼາຍ ຄື ທຸກ ສະມຸໄທ ນິໂຣດ ມັກ ທໍາມະຈັກຂຸອັນປາສະຈາກທຸລີປາສະຈາກມົນທິນໄດ້ເກີດແກ່ພວກເຂົາເທິງບ່ອນນັ່ງນັ້ນແລວ່າ "ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທໍາມະດາ ສິ່ງນັ້ນທັງປວງມີຄວາມດັບໄປເປັນທໍາມະດາ" ປຽບ ເໝືອນຜ້າຂາວສະອາດປາສະຈາກມົນທິນຄວນຮັບນໍ້າຍ້ອມໄດ້ເປັນຢ່າງດີ

ພວກເຂົາໄດ້ເຫັນທໍາແລ້ວ ບັນລຸທໍາແລ້ວ ຮູ້ແຈ້ງທໍາແລ້ວ ຢັ່ງລົງສູ່ທໍາແລ້ວ ຂ້າມຄວາມສົງໄສແລ້ວ ປາສະຈາກຄວາມແຄງໃຈ ເຖິງຄວາມເປັນຜູ້ແກ່ກ້າ ບໍ່ຕ້ອງເຊື່ອຜູ້ອື່ນໃນຄໍາຂອງພຣະສາດສະດາ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ພວກຂ້າພະອົງເພິ່ງໄດ້ການບັນພະຊາ ເພິ່ງໄດ້ການອຸປະສົມບົດໃນສໍານັກຂອງພຣະອົງດ້ວຍເທີ້ນ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດວ່າ "ພວກທ່ານຈົ່ງມາເປັນພິກຂຸເທີ້ນ" ແລ້ວຕັດຕໍ່ໄປວ່າ "ທໍາອັນເຮົາກ່າວດີແລ້ວ ພວກທ່ານຈົ່ງປະພຶດພົມມະຈັນເພື່ອເຮັດທີ່ສຸດແຫ່ງທຸກໂດຍຊອບເທີ້ນ" ພຣະວາຈານັ້ນ ໄດ້ເປັນການອຸປະສົມບົດຂອງທ່ານເຫຼົ່ານັ້ນ

ຫຼັງຈາກນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຊົງປະທານໂອວາດສັ່ງສອນພິກຂຸເຫຼົ່ານັ້ນ ດ້ວຍທໍາມີກະຖາ ເມື່ອຊົງປະທານໂອວາດສັ່ງສອນດ້ວຍທໍາມີກະຖາຢູ່ ຈິດຂອງພິກຂຸເຫຼົ່ານັ້ນກໍລຸດພົ້ນຈາກອາສະວະທັງຫຼາຍຍ້ອນບໍ່ຖືໝັ້ນ

ຄັ້ງນັ້ນ ມີພຣະອະຣະຫັນເກີດຂຶ້ນໃນໂລກ ໑໑ ອົງ

**ເລື້ອງການບັນພະຊາຂອງສະຫາຍ ໔ ຄົນຂອງພຣະຍະສະ ຈົບ**

## ເລື້ອງການບັນພະຊາຂອງສະຫາຍ ໕໐ ຄົນຂອງພຣະຍະສະ

[໒໑] ສະຫາຍຄະລຶຫັດຂອງທ່ານພຣະຍະສະຈໍານວນ ໕໐ ຄົນ ເປັນຊາວຊົນນະບົດເປັນບຸດຂອງຕະກູນເສດຖີໃຫຍ່ນ້ອຍໄດ້ຮູ້ຂ່າວວ່າ "ຍະສະກຸນລະບຸດແຖຜົມ ແລະໜວດນຸ່ງຫົ່ມຜ້າກາສາຍະ ອອກຈາກເຮືອນບວດເປັນບັນພະຊິດແລ້ວ" ເມື່ອສະຫາຍຄະລຶຫັດໄດ້ຮູ້ຂ່າວແລ້ວ

ຈຶ່ງໄດ້ມີຄວາມຄິດ ດັ່ງນີ້ວ່າ "ທຳວິໄນ ແລະບັນພະຊາທີ່ຍະສະກຸນລະບຸດແຖຜິມ ແລະໜວດນຸ່ງຫົ່ມຜ້າກາສາຍະ ອອກຈາກເຮືອນບວດເປັນບັນພະຊິດນັ້ນ ຄົງຈະບໍ່ຕ່ຳຊາມແນ່ນອນ" ເມື່ອແລ້ວສະຫາຍຄະລິຫັດເຫຼົ່ານັ້ນ ໄດ້ພາກັນເຂົ້າໄປຫາທ່ານພຣະຍະສະເຖິງທີ່ຢູ່ ເມື່ອເຖິງແລ້ວ ໄດ້ໄຫວ້ທ່ານພຣະຍະສະ ຢືນຢູ່ບ່ອນສົມຄວນ

ຄັ້ງນັ້ນ ທ່ານພຣະຍະສະຈຶ່ງພາສະຫາຍຄະລິຫັດ ໕໐ ຄົນ ໄປເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວ ໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງໃນບ່ອນສົມຄວນ

ທ່ານພຣະຍະສະຜູ້ນັ່ງໃນບ່ອນສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ສະຫາຍຄະລິຫັດຂອງຂ້າພະອົງ ໕໐ ຄົນເຫຼົ່ານີ້ ເປັນຊາວຊົນນະບົດເປັນບຸດຂອງຕະກູນເສດຖີໃຫຍ່ນ້ອຍ ຂໍພຣະອົງໂຜດປະທານໂອວາດສັ່ງສອນສະຫາຍຂອງຂ້າພະອົງເຫຼົ່ານີ້ດ້ວຍເທີ້ນ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດອະນຸປຸບພິກຖາ ຄື ຊົງປະກາດ

໑. ທານະກະຖາ
໒. ສີລະກະຖາ
໓. ສັກຄະກະຖາ
໔. ກາມາທີນະວະກະຖາ
໕. ເນກຂຳມານິສັງສະກະຖາ ແກ່ສະຫາຍເຫຼົ່ານັ້ນ

ເມື່ອຊົງຊາບວ່າພວກເຂົາມີຈິດສົມຄວນ ອ່ອນໂຍນ ປາສະຈາກນິວອນ ເບີກບານ ຜ່ອງໃສຈຶ່ງຊົງປະກາດສາມຸກກັງສິກະທຳມະເທດສະໜາຂອງພຣະພຸດທະເຈົ້າທັງຫຼາຍ ຄື ທຸກ ສະມຸໄທ ນິໂຣດ ມັກ ທຳມະຈັກຂຸອັນປາສະຈາກທຸລີ ປາສະຈາກມົນທິນໄດ້ເກີດແກ່ພວກເຂົາ ໃນບ່ອນນັ່ງນັ້ນແລ ວ່າ "ສິ່ງໃດສິ່ງໜຶ່ງ ມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງປວງມີຄວາມດັບໄປເປັນທຳມະດາ" ປຽບເໝືອນຜ້າຂາວສະອາດ ປາສະຈາກມົນທິນ ຄວນຮັບນ້ຳຍ້ອມໄດ້ເປັນຢ່າງດີ

ພວກເຂົາໄດ້ເຫັນທຳແລ້ວ ບັນລຸທຳແລ້ວ ຮູ້ແຈ້ງທຳແລ້ວ ຢັ່ງລົງສູ່ທຳແລ້ວ ຂ້າມຄວາມສົງໄສແລ້ວ ປາສະຈາກຄວາມແຄງໃຈ ເຖິງຄວາມເປັນຜູ້ແກ່ກ້າ ບໍ່ຕ້ອງເຊື່ອຜູ້ອື່ນ ໃນຄຳສອນຂອງພຣະສາດສະດາ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນພວກຂ້າພະອົງເພິ່ງໄດ້ການບັນພະຊາ ເພິ່ງໄດ້ການອຸປະສົມບົດໃນສຳນັກຂອງພຣະອົງ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພວກທ່ານຈົ່ງມາເປັນພິກຂຸເທີ້ນ" ແລ້ວຕັດຕໍ່ໄປວ່າ "ທຳອັນເຮົາກ່າວດີແລ້ວ ພວກທ່ານຈົ່ງປະພຶດພົມມະຈັນເພື່ອເຮັດທີ່ສຸດທຸກໂດຍຊອບເທີ້ນ

ພຣະວາຈານັ້ນ ໄດ້ເປັນການອຸປະສົມບົດຂອງທ່ານເຫຼົ່ານັ້ນ ຫຼັງຈາກນັ້ນ ພຣະຜູ້ມີພຣະ

พาภเจ้าได้ຊົງປະທານໂອວາດສັ່ງສອນພິກຂຸເຫຼົ່ານັ້ນ ດ້ວຍທຳມີກະຖາ ເມື່ອຊົງປະທານໂອວາດ ສັ່ງສອນດ້ວຍທຳມີກະຖາຢູ່ ຈິດຂອງພິກຂຸເຫຼົ່ານັ້ນ ກໍລຸດພົ້ນຈາກອາສະວະທັງຫຼາຍຍ້ອນບໍ່ຖືໝັ້ນ

ຄັ້ງນັ້ນ ມີພຣະອະຣະຫັນເກີດຂຶ້ນໃນໂລກ ໖໑ ອົງ

**ບັນພະຊາກະຖາ ຈົບ**

## ๓. ມາຣະກະຖາ

## ວ່າດ້ວຍມານ

## ເລື້ອງສົ່ງພຣະອະຣະຫັນ ໖໐ ອົງ ໄປປະກາດສາດສະໜາ

[໒໘] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງກັບພິກຂຸເຫຼົ່ານັ້ນວ່າ "ພິກຂຸທັງຫຼາຍ ເຮົາພົ້ນແລ້ວຈາກບ່ວງ[๑]ທັງປວງ ທັງທີ່ເປັນຂອງທິບ ທັງທີ່ເປັນຂອງມະນຸດ ແມ່ນພວກທ່ານກໍພົ້ນແລ້ວຈາກບ່ວງທັງປວງ ທັງທີ່ເປັນຂອງທິບ ທັງທີ່ເປັນຂອງມະນຸດ ພິກຂຸທັງຫຼາຍ ພວກທ່ານຈົ່ງຈາຣິກໄປ ເພື່ອປະໂຫຍດສຸກແກ່ຊົນຈຳນວນຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດເກື້ອກູນ ແລະຄວາມສຸກແກ່ທວຍເທບແລະມະນຸດ ຢ່າໄປໂດຍທາງດຽວກັນສອງອົງ ຈົ່ງສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນທີ່ສຸດ ຈົ່ງປະກາດພົມມະຈັນ ພ້ອມທັງອັດຖະ ແລະພະຍັນຊະນະບໍລິສຸດບໍລິບູນຄົບຖ້ວນ ສັດທັງຫຼາຍທີ່ມີທຸລີໃນຕາໜ້ອຍມີຢູ່ ຈັກເສື່ອມຍ້ອນບໍ່ໄດ້ຟັງທຳ ຈັກມີຜູ້ຮູ້ທຳ ພິກຂຸທັງຫຼາຍ ແມ່ນເຮົາກໍຈັກໄປສູ່ເຂດອຸຣຸເວລາເສນານິຄົມເພື່ອສະແດງທຳ

## ເລື້ອງມານ

[໒໙] ຄັ້ງນັ້ນ ມານຜູ້ມີບາບໄດ້ເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າເປັນຄາຖາຄວາມ ວ່າ

ທ່ານໄດ້ຖືກບ່ວງທັງປວງ ທັງທີ່ເປັນຂອງທິບ
ທັງທີ່ເປັນຂອງມະນຸດຄ້ອງໄວ້ແລ້ວ
ທ່ານໄດ້ຖືກຜູກດ້ວຍເຄື່ອງພັນທະນາການທັງຫຼາຍ
ແນ່ະ ທ່ານສະມະນະ ທ່ານບໍ່ພົ້ນຈາກເຮົາໄດ້

ພຣະຜູ້ມີພຣະພາກເຈົ້າໄດ້ຕັດວ່າ

"ເຮົາໄດ້ພົ້ນແລ້ວຈາກບ່ວງທັງປວງ ທັງທີ່ເປັນຂອງທິບ
ທັງທີ່ເປັນຂອງມະນຸດ ເຮົາໄດ້ພົ້ນແລ້ວຈາກເຄື່ອງພັນທະນາການທັງຫຼາຍ

ແນ່ະ ມານຜູ້ກະທຳເຊິ່ງທີ່ສຸດ ເຮົາກຳຈັດທ່ານໄດ້ແລ້ວ

ມານຂາບທູນວ່າ

ບ່ວງ ນີ້ທ່ຽວໄປໃນອາກາດ ມີໃນໃຈ ສັນຈອນໄປຢູ່
ເຮົາຈັກຄ້ອງທ່ານດ້ວຍບ່ວງນັ້ນ
ສະມະນະ ທ່ານບໍ່ພົ້ນຈາກເຮົາໄດ້

ພຣະຜູ້ມີພຣະພາກເຈົ້າຕັດວ່າ

ເຮົາປາສະຈາກຄວາມພໍໃຈໃນອາລົມເຫຼົ່ານີ້
ຄື ຮູບ ສຽງ ກິ່ນ ຣົດ ໂຜດຖັບພະ ເຊິ່ງເປັນທີ່ຣື່ນຣົມໃຈ
ມານຜູ້ກະທຳເຊິ່ງທີ່ສຸດ ເຮົາກຳຈັດທ່ານໄດ້ແລ້ວ

ຂະນະນັ້ນ ມານຜູ້ມີບາບຮູ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງຮູ້ຈັກເຮົາ ພຣະສຸຄົດຊົງຮູ້ຈັກເຮົາ" ມີທຸກ ເສຍໃຈ ໄດ້ຫາຍໄປໃນທີ່ນັ້ນ

**ມາຣະກະຖາ ຈົບ**

# ໗. ປັບພັດຊູປະສຳປະທາກະຖາ

## ວ່າດ້ວຍການບັນພະຊາແລະອຸປະສົມບົດດ້ວຍໄຕຣສະຣະນະຄົມ

## ເລື້ອງຊົງອະນຸຍາດພິກຂຸບັນພະຊາອຸປະສົມບົດໃຫ້ກຸນລະບຸດ

[໓໔] ສະໄໝນັ້ນ ພິກຂຸທັງຫຼາຍພາເຫຼົ່າກຸນລະບຸດ ຜູ້ມຸ້ງບັນພະຊາແລະມຸ້ງອຸປະສົມບົດມາຈາກທິດຕ່າງ ໆ ຈາກຊົນນະບົດຕ່າງ ໆ ດ້ວຍຕັ້ງໃຈວ່າ "ພຣະຜູ້ມີພຣະພາກເຈົ້າຈັກຊົງໃຫ້ພວກເຂົາບັນພະຊາອຸປະສົມບົດ" ໃນການທີ່ພິກຂຸທັງຫຼາຍ ພາກັນນຳກຸນລະບຸດມາຫຼາຍ ເພື່ອມຸ້ງບັນພະຊາ ແລະມຸ້ງອຸປະສົມບົດ ຍ່ອມເປັນການລຳບາກ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຫຼີບຫຼີກຢູ່ໃນທີ່ສະຫງັດ ຊົງເກີດຄວາມຄຳນຶງຂຶ້ນໃນພຣະຫະໄທແນວນີ້ວ່າ "ບັດນີ້ ພິກຂຸທັງຫຼາຍ ພາເຫຼົ່າກຸນລະບຸດຜູ້ມຸ້ງບັນພະຊາ ແລະມຸ້ງອຸປະສົມບົດມາຈາກທິດນັ້ນ ໆ ຈາກຊົນນະບົດຕ່າງ ໆ ດ້ວຍຕັ້ງໃຈວ່າ ພຣະຜູ້ມີພຣະພາກເຈົ້າຈັກຊົງໃຫ້ພວກເຂົາບັນພະຊາອຸປະສົມບົດ ໃນການທີ່ພິກຂຸທັງຫຼາຍ ພາກັນນຳກຸນລະບຸດມາຫຼາຍ ເພື່ອມຸ້ງບັນພະຊາ ແລະມຸ້ງອຸປະສົມບົດ ຍ່ອມເປັນການລຳບາກ ຢ່າຈັ່ງຊັ້ນເລີຍ ເຮົາເພິ່ງອະນຸຍາດ

ພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ບັດນີ້ທ່ານທັງຫຼາຍນັ້ນເອງ ຈົ່ງໃຫ້ບັນພະຊາ ຈົ່ງໃຫ້ອຸປະສົມບົດໃນທິດນັ້ນ ໆ ໃນຊົນນະບົດນັ້ນ ໆ ເທີ້ນ

ເມື່ອເວລາເຢັນ ພຣະຜູ້ມີພຣະພາກເຈົ້າສະເດັດອອກຈາກທີ່ພັກ ຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຣັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາຢູ່ໃນທີ່ສະຫງັດ ຫຼີບຫຼີກຢູ່ທີ່ນີ້ ໄດ້ເກີດຄວາມຄິດຄຳນຶງຂຶ້ນໃນໃຈວ່າ ບັດນີ້ ພິກຂຸທັງຫຼາຍພາເຫຼົ່າກຸນລະບຸດຜູ້ມຸ້ງບັນພະຊາ ແລະມຸ້ງອຸປະສົມບົດມາຈາກທິດຕ່າງ ໆ ຈາກຊົນນະບົດຕ່າງ ໆ ດ້ວຍຕັ້ງໃຈວ່າ ພຣະຜູ້ມີພຣະພາກເຈົ້າ ຈັກຊົງໃຫ້ພວກເຂົາບັນພະຊາອຸປະສົມບົດ ໃນການທີ່ພິກຂຸທັງຫຼາຍພາກັນນຳກຸນລະບຸດມາຫຼາຍ ເພື່ອມຸ້ງບັນພະຊາ ແລະມຸ້ງອຸປະສົມບົດ ຍ່ອມເປັນການລຳບາກຢ່າຈັ່ງຊັ້ນເລີຍ ເຮົາຄວນອະນຸຍາດພິກຂຸທັງຫຼາຍວ່າ ພິກຂຸທັງຫຼາຍ ບັດນີ້ ທ່ານທັງຫຼາຍນັ້ນ ຈົ່ງໃຫ້ບັນພະຊາ ຈົ່ງໃຫ້ອຸປະສົມບົດໃນທິດນັ້ນ ໆ ໃນຊົນນະບົດນັ້ນ ໆ ເທີ້ນ ພິກຂຸທັງຫຼາຍ ເພິ່ງໃຫ້ບັນພະຊາເພິ່ງໃຫ້ອຸປະສົມບົດແບວນີ້

ໃນເບື້ອງຕົ້ນ ເພິ່ງໃຫ້ກຸນລະບຸດຜູ້ມຸ້ງບັນພະຊາແລະມຸ້ງອຸປະສົມບົດ ແຖຜົມແລະໜວດໃຫ້ຄອງຜ້າກາສາຍະ ໃຫ້ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ໃຫ້ຂາບຕີນພິກຂຸທັງຫຼາຍ ໃຫ້ນັ່ງຢ່ອງຍໍ້ ໃຫ້ປະນົມມືແລ້ວສັ່ງວ່າ ທ່ານຈົ່ງກ່າວແບວນີ້ ແລ້ວໃຫ້ວ່າສະຣະນະຄົມດັ່ງນີ້

## ໄຕຣສະຣະນະຄົມ
## ວ່າດ້ວຍການເຖິງພຣະຣັດຕະນະໄຕຣເປັນສະຣະນະ

| | | | | | |
|---|---|---|---|---|---|
| ພຸດທັງ | ສະຣະນັງ ຄັດສາມິ | ຂ້າພະເຈົ້າຂໍເຖິງພຣະພຸດທະເຈົ້າເປັນສະຣະນະ | | | |
| ທຳມັງ | ສະຣະນັງ ຄັດສາມິ | ຂ້າພະເຈົ້າຂໍເຖິງພຣະທຳເປັນສະຣະນະ | | | |
| ສັງຄັງ | ສະຣະນັງ ຄັດສາມິ | ຂ້າພະເຈົ້າຂໍເຖິງພຣະສົງເປັນສະຣະນະ | | | |
| ທຸຕິຍຳປິ | ພຸດທັງ ສະຣະນັງ ຄັດສາມິ | ฯลฯ | ພຣະພຸດທະເຈົ້າ | ฯลฯ | ແມ່ນຄັ້ງທີ ໒ |
| ທຸຕິຍຳປິ | ທຳມັງ ສະຣະນັງ ຄັດສາມິ | ฯลฯ | ພຣະທຳ | ฯลฯ | ແມ່ນຄັ້ງທີ ໒ |
| ທຸຕິຍຳປິ | ສັງຄັງ ສະຣະນັງ ຄັດສາມິ | ฯลฯ | ພຣະສົງ | ฯลฯ | ແມ່ນຄັ້ງທີ ໒ |
| ຕະຕິຍຳປິ | ພຸດທັງ ສະຣະນັງ ຄັດສາມິ | ฯลฯ | ພຣະພຸດທະເຈົ້າ | ฯลฯ | ແມ່ນຄັ້ງທີ ໓ |
| ຕະຕິຍຳປິ | ທຳມັງ ສະຣະນັງ ຄັດສາມິ | ฯลฯ | ພຣະທຳ | ฯลฯ | ແມ່ນຄັ້ງທີ ໓ |
| ຕະຕິຍຳປິ | ສັງຄັງ ສະຣະນັງ ຄັດສາມິ | ฯลฯ | ພຣະສົງ | ฯลฯ | ແມ່ນຄັ້ງທີ ໓ |

ພິກຂຸທັງຫຼາຍ ເຮົາອະນຸຍາດບັນພະຊາອຸປະສົມບົດດ້ວຍໄຕຣສະຣະນະຄົມເຫຼົ່ານີ້

**ປັບພັດຊູບສຳປະທາກະຖາ ຈົບ**

# ໑໐. ທຸຕິຍະມາຣະກະຖາ

## ວ່າດ້ວຍມານ ເລື່ອງທີ ໔

## ເລື່ອງຊົງແນະວິທີໃຫ້ໄດ້ອະນຸດຕະຣະວິມຸດຕິ

[໓໕] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຈຳພັນສາແລ້ວ ໄດ້ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ຍ້ອນມະນະສິການໂດຍແຍບຄາຍ ຍ້ອນຕັ້ງຄວາມພຽນຊອບໂດຍແຍບຄາຍ ເຮົາຈຶ່ງໄດ້ບັນລຸອະນຸດຕະຣະວິມຸດຕິ ໄດ້ເຮັດອະນຸດຕະຣະວິມຸດຕິໃຫ້ແຈ້ງ ພິກຂຸທັງຫຼາຍ ຍ້ອນເຮັດໄວ້ໃນໃຈໂດຍແຍບຄາຍ ຍ້ອນຕັ້ງຄວາມພຽນຊອບໂດຍແຍບຄາຍ ແມ່ນທ່ານ ທັງຫຼາຍຍ່ອມບັນລຸອະນຸດຕະຣະວິມຸດຕິໄດ້ ຍ່ອມເຮັດອະນຸດຕະຣະວິມຸດຕິໃຫ້ແຈ້ງໄດ້

ລຳດັບນັ້ນ ມານຜູ້ມີບາບໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າເປັນຄາຖາຄວາມ ວ່າ

"ທ່ານໄດ້ຖືກຜູກດ້ວຍບ່ວງມານ ທັງທີ່ເປັນຂອງທິບ
ທັງທີ່ເປັນຂອງມະນຸດ
ທ່ານໄດ້ຖືກເຄື່ອງຜູກຫຼາຍປະການຮັດກຸ້ງວໄວ້ແລ້ວ
ສະມະນະ ທ່ານບໍ່ພົ້ນຈາກເຮົາໄດ້ດອກ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດວ່າ

"ເຮົາໄດ້ພົ້ນແລ້ວຈາກບ່ວງມານ ທັງທີ່ເປັນຂອງທິບ
ທັງທີ່ເປັນຂອງມະນຸດ ເຮົາໄດ້ພົ້ນແລ້ວຈາກເຄື່ອງຜູກຫຼາຍປະການ
ມານຜູ້ກະທຳເຊິ່ງທີ່ສຸດ ເຮົາກຳຈັດທ່ານໄດ້ແລ້ວ

ຂະນະນັ້ນ ມານຜູ້ມີບາບຮູ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງຮູ້ຈັກເຮົາ ພຣະສຸຄົດຊົງຮູ້ ຈັກເຮົາ" ມີທຸກ ເສຍໃຈ ໄດ້ຫາຍໂຕໄປຈາກທີ່ນັ້ນ

**ທຸຕິຍະມາຣະກະຖາ ຈົບ**

# ໑໑. ພັດທະວັກຄີຍະວັດຖຸ

## ວ່າດ້ວຍພິກຂຸພັດທະວັກຄີ

## ເລື່ອງຊົງສະແດງທຳໂຜດພັດທະວັກຄີ ໓໐ ຄົນ

[໓໖] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນນະຄອນພາຣານະສີ ຕາມພຣະອັດທະ

ຍາໄສ ແລ້ວໄດ້ສະເດັດຈາຣິກໄປທາງເຂດອຸຣຸເວລາ ສະເດັດຫຼີກຈາກທາງ ເຂົ້າໄປສູ່ເຂດປ່າແຫ່ງໜຶ່ງ ເມື່ອສະເດັດເຖິງເຂດປ່າແຫ່ງນັ້ນແລ້ວ ໄດ້ປະທັບນັ່ງຢູ່ ຂ່ວງໄມ້ຕົ້ນໜຶ່ງ

ສະໄໝນັ້ນ ສະຫາຍພັດທະວັກຄີປະມານ ໓໐ ຄົນພ້ອມພັນລະຍາບຳເລີກັນໃນເຂດປ່າແຫ່ງນັ້ນ ສະຫາຍຄົນໜຶ່ງບໍ່ມີພັນລະຍາ ພວກສະຫາຍ ຈຶ່ງນຳຍິງແພດສະຫຍາມາເພື່ອປະໂຫຍດແກ່ເຂົາ ຕໍ່ມາ ຍິງແພດສະຫຍາໄດ້ລັກຂອງໜີໄປ ຂະນະທີ່ພວກເຂົາເພີເຣີມົວບຳເລີກັນ ສະຫາຍເຫຼົ່ານັ້ນເມື່ອຈະຊ່ວຍເຫຼືອເຂົາ ຈຶ່ງທ່ຽວຕາມຫາຍິງແພດສະຫຍາຈົນໄປເຖິງເຂດປ່າແຫ່ງນັ້ນ ໄດ້ເຫັນພຣະຜູ້ມີພຣະພາກເຈົ້າປະທັບນັ່ງຢູ່ ຂ່ວງໄມ້ຕົ້ນໜຶ່ງ ເມື່ອເຫັນແລ້ວຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ພຣະອົງຊົງເຫັນຍິງຄົນໜຶ່ງແດ່ບໍ? ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າ ຊົງຍ້ອນຖາມວ່າ "ກຸມານທັງຫຼາຍ ພວກທ່ານມີຄວາມຕ້ອງການຍິງສາວໄປເຮັດຫຍັງ?"

ສະຫາຍພັດທະວັກຄີຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ພວກຂ້າພະອົງເປັນສະຫາຍພັດທະວັກຄີມີປະມານ ໓໐ ຄົນໃນເຂດນີ້ ພ້ອມພັນລະຍາບຳເລີກັນໃນເຂດປ່າ ແຫ່ງນີ້ ສະຫາຍຄົນໜຶ່ງບໍ່ມີພັນລະຍາ ພວກຂ້າພະອົງຈຶ່ງໄດ້ນຳຍິງແພດສະຫຍາມາເພື່ອປະໂຫຍດແກ່ເຂົາ ຕໍ່ມາຍິງແພດສະຫຍາໄດ້ລັກຂອງໜີໄປ ຂະນະພວກຂ້າພະອົງເພີເຣີມົວບຳເລີກັນຢູ່ ຍ້ອນເຫດນັ້ນພວກຂ້າພະອົງເປັນສະຫາຍກັນ ເມື່ອຈະຊ່ວຍເຫຼືອເຂົາ ຈຶ່ງທ່ຽວຕາມຫາຍິງແພດສະຫຍາຈົນໄດ້ມາເຖິງເຂດປ່າແຫ່ງນີ້ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດວ່າ "ກຸມານທັງຫຼາຍ ພວກທ່ານຈະສຳຄັນຄວາມຂໍ້ນີ້ວ່າແນວໃດ ການທີ່ພວກທ່ານຈະສະແຫວງຫາຍິງ ຫຼື ສະແຫວງຫາຕົນ ຢ່າງໃດຈະປະເສີດກວ່າກັນ

ການທີ່ພວກຂ້າພະອົງ ສະແຫວງຫາຕົນ ປະເສີດກວ່າ ຂ້ານ້ອຍ

ກຸມານທັງຫຼາຍ ຖ້າແນວນັ້ນ ພວກທ່ານຈົ່ງນັ່ງລົງ ເຮົາຈັກສະແດງທຳແກ່ພວກທ່ານ

ສະຫາຍພັດທະວັກຄີເຫຼົ່ານັ້ນ ທູນຮັບວ່າ "ດີແລ້ວ ຂ້ານ້ອຍ" ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງໃນບ່ອນສົມຄວນ

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດອະນຸປຸບພີກຖາ ຄື ຊົງປະກາດ

໑. ທານະກະຖາ ໒. ສີລະກະຖາ
໓. ສັກຄະກະຖາ ໔. ກາມາທີນະວະກະຖາ
໕. ເນກຂຳມານີສັງສະກະຖາ ແກ່ພວກເຂົາ

ເມື່ອຊົງຊາບວ່າພວກເຂົາມີຈິດສົມຄວນ ອ່ອນໂຍນ ປາສະຈາກນິວອນ ເບີກບານ ຜ່ອງໃສ ຈຶ່ງຊົງປະກາດສາມຸກກັງສິກະທຳມະເທດສະໜາຂອງພຣະພຸດທະເຈົ້າທັງຫຼາຍ ຄື ທຸກ ສະມຸໄທ ນິໂຣດ ມັກ ທຳມະຈັກຂຸອັນປາສະຈາກທຸລີປາສະຈາກມົນທິນ ໄດ້ເກີດແກ່ພວກເຂົາ ເທິງບ່ອນນັ່ງນັ້ນ ວ່າ "ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນ ທັງປວງມີຄວາມດັບໄປ ເປັນທຳມະດາ" ປຽບເໝືອນ ຜ້າຂາວສະອາດຄວນຮັບນ້ຳຍ້ອມໄດ້ເປັນຢ່າງດີ

ພວກເຂົາໄດ້ເຫັນທຳແລ້ວ໌ ບັນລຸທຳແລ້ວ ຮູ້ແຈ້ງທຳແລ້ວ ຢັ່ງລົງສູ່ທຳແລ້ວ ຂ້າມຄວາມສົງໄສແລ້ວ ປາສະຈາກຄວາມແຄງໃຈ ເຖິງຄວາມເປັນຜູ້ແກ່ກ້າ ບໍ່ຕ້ອງເຊື່ອຜູ້ອື່ນໃນຄຳສອນຂອງພຣະສາດສະດາ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ພວກຂ້າພະອົງເພິ່ງໄດ້ການບັນພະຊາ ເພິ່ງໄດ້ການອຸປະສົມບົດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພວກທ່ານຈົ່ງມາເປັນພິກຂຸເທີ້ນ" ແລ້ວຕັດຕໍ່ໄປວ່າ "ທຳອັນເຮົາກ່າວດີແລ້ວ ພວກທ່ານຈົ່ງປະພຶດພົມມະຈັນເພື່ອເຮັດທີ່ສຸດທຸກໂດຍຊອບເທີ້ນ

ພຣະວາຈານັ້ນ ໄດ້ເປັນການອຸປະສົມບົດຂອງທ່ານເຫຼົ່ານັ້ນ

**ພັດທະວັກຄິຍະວັດຖຸ ຈົບ**

**ພານະວານທີ ໔ ຈົບ**

# ໑໔. ອຸຣຸເວລະປາຕິຫາຣິຍະກະຖາ

## ວ່າດ້ວຍປາຕິຫານທີ່ເຂດອຸຣຸເວລາ

## ເລື້ອງຊະດິນ ໓ ພີ່ນ້ອງ

[໓໗] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໂດຍລຳດັບ ລຸເຖິງເຂດອຸຣຸເວລາ ສະໄໝນັ້ນ ຊະດິນ ໓ ຄົນ ຄື ອຸເວລະກັດສະປະ ນະທີກັດສະປະ ຄະຍາກັດສະປະ ອາໄສຢູ່ທີ່ເຂດອຸຣຸເວລາ ໃນຊະດິນ ໓ ຄົນນັ້ນ ຊະດິນອຸເວລະກັດສະປະເປັນຜູ້ນຳ ເປັນຜູ້ຝຶກ ເປັນເລີດ ເປັນຫົວໜ້າ ເປັນປະທານຂອງຊະດິນ ໕໐໐ ຄົນ ຊະດິນນະທີກັດສະປະເປັນຜູ້ນຳ ເປັນຜູ້ຝຶກ ເປັນເລີດ ເປັນຫົວໜ້າ ເປັນປະທານ ຂອງຊະດິນ ໓໐໐ ຄົນ ຊະດິນຄະຍາກັດສະປະເປັນຜູ້ນຳ ເປັນຜູ້ຝຶກ ເປັນເລີດ ເປັນຫົວໜ້າ ເປັນປະທານ ຂອງຊະດິນ ໔໐໐ ຄົນ

ຕໍ່ມາ ພຣະຜູ້ມີພຣະພາກເຈົ້າ ໄດ້ສະເດັດໄປສູ່ອາສົມຂອງຊະດິນອຸເວລະກັດສະປະ ເມື່ອ

ເຖິງແລ້ວ ໄດ້ຕັດກັບຊະດິນອຸເວລະກັດສະປະດັ່ງນີ້ວ່າ "ກັດສະປະ ຖ້າທ່ານບໍ່ໜັກໃຈ ເຮົາຈະຂໍພັກຢູ່ໃນໂຮງໄຟຄືນໜຶ່ງ

ຊະດິນອຸເວລະກັດສະປະຂາບທູນວ່າ "ທ່ານມະຫາສະມະນະ ຂ້າພະເຈົ້າບໍ່ໜັກໃຈເລີຍ ຫາກແຕ່ວ່າ ໃນໂຮງໄຟນັ້ນ ມີພະຍານາກທີ່ດຸຮ້າຍ ມີລິດ ເປັນອະສໍຣະພິດ ມີພິດຮ້າຍ ຂໍມັນຢ່າໄດ້ທຳຮ້າຍທ່ານເລີຍ

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດກັບຊະດິນອຸເວລະກັດສະປະ ແມ່ນຄັ້ງທີ ໒ ວ່າ "ກັດສະປະ ຖ້າທ່ານບໍ່ໜັກໃຈ ຄືນນີ້ ເຮົາຈະຂໍພັກໃນໂຮງໄຟ

ຊະດິນອຸເວລະກັດສະປະກໍຂາບທູນວ່າ "ທ່ານມະຫາສະມະນະ ຂ້າພະເຈົ້າບໍ່ໜັກໃຈເລີຍ ຫາກແຕ່ວ່າ ໃນໂຮງໄຟນັ້ນ ມີພະຍານາກທີ່ດຸຮ້າຍ ມີລິດ ເປັນອະສໍຣະພິດ ມີພິດຮ້າຍ ຂໍມັນຢ່າໄດ້ທຳຮ້າຍທ່ານເລີຍ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບຊະດິນອຸເວລະກັດສະປະ ແມ່ນຄັ້ງທີ ໓ ວ່າ "ກັດສະປະ ຖ້າທ່ານບໍ່ໜັກໃຈ ຄືນນີ້ ເຮົາຈະຂໍພັກໃນໂຮງໄຟ

ຊະດິນອຸເວລະກັດສະປະກໍຂາບທູນວ່າ "ຂ້າແດ່ມະຫາສະມະນະ ຂ້າພະເຈົ້າບໍ່ໜັກໃຈເລີຍ ຫາກແຕ່ວ່າໃນໂຮງໄຟນັ້ນ ມີພະຍານາກທີ່ດຸຮ້າຍ ມີລິດ ເປັນອະສໍຣະພິດ ມີພິດຮ້າຍ ມັນຢ່າໄດ້ທຳຮ້າຍທ່ານເລີຍ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຕໍ່ໄປວ່າ "ພະຍານາກບໍ່ທຳຮ້າຍເຮົາ ທ່ານກັດສະປະ ທ່ານໂຜດອະນຸຍາດໂຮງໄຟແກ່ເຮົາເທີ້ນ

ຊະດິນອຸເວລະກັດສະປະກໍຂາບທູນວ່າ "ຂ້າແດ່ມະຫາສະມະນະ ນິມົນທ່ານຢູ່ຕາມສະບາຍເທີ້ນ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ໄດ້ສະເດັດເຂົ້າໄປສູ່ໂຮງໄຟ ຊົງປູເຄື່ອງປູລາດຫຍ້າ ປະທັບນັ່ງຄູ້ບັນລັງ ຕັ້ງພຣະກາຍກົງ ດຳລົງສະຕິໄວ້ສະເພາະໜ້າ

## ປາຕິຫານທີ ໑

## ເລື້ອງໂຮງບູຊາໄຟ

[໕໗] ຄັ້ງນັ້ນ ພະຍານາກນັ້ນ ໄດ້ເຫັນພຣະຜູ້ມີພຣະພາກເຈົ້າສະເດັດເຂົ້າໄປ ກໍໂກດເຄືອງ ບໍ່ພໍໃຈ ບັງຫວນຄວັນໃຫ້ມີຂຶ້ນ

ທັນໃດນັ້ນ ພຣະຜູ້ມີພຣະພາກເຈົ້າຊົງພຣະດຳຣິວ່າ "ຖ້າຈັ່ງໃດ ເຮົາເພິ່ງຄອບງຳອຳນາດຂອງພະຍານາກນີ້ດ້ວຍອຳນາດຂອງເຮົາ ບໍ່ໃຫ້ຣະຄາຍຜິວ ໜັງ ຊີ້ນ ເອັນ ກະດູກ ແລະ ເຍື່ອກະດູກ" ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງອິດທາພິສັງຂານແນວນັ້ນ ບັງຫວນຄວັນອອກມາຄືກັນ

ພະຍານາກທົນການລົບຫຼູ່ບໍ່ໄດ້ ຈຶ່ງພົ່ນໄຟໃສ່ທັນທີ

ຝ່າຍພຣະຜູ້ມີພຣະພາກເຈົ້າກໍຊົງເຂົ້າເຕໂຊກະສິນ ໃຫ້ມີແສງສະຫວ່າງລຸກເປັນໄຟສູ້

ເມື່ອທັງສອງຝ່າຍບັນດານໃຫ້ເກີດໄຟຂຶ້ນ ເຮືອນໄຟໄດ້ລຸກຮຸ່ງແຈ້ງເໝືອນທະເລເພີງ

ລຳດັບນັ້ນ ຊະດິນທັງຫຼາຍທີ່ກຳລັງພາກັນອ້ອມເຮືອນໄຟກ່າວກັນວ່າ "ທ່ານຜູ້ຈະເລີນທັງຫຼາຍ ມະຫາສະມະນະອົງງາມນັ້ນ ຄົງຈະຖືກພະຍານາກຂ້າໄປແລ້ວ

ເມື່ອຣາຕີນັ້ນຜ່ານໄປ ພຣະຜູ້ມີພຣະພາກເຈົ້າ ກໍຊົງຄອບງຳອຳນາດຂອງພະຍານາກນັ້ນດ້ວຍອຳນາດຂອງພຣະອົງ ບໍ່ໃຫ້ຣະຄາຍຜິວ ໜັງ ຊີ້ນ ເອັນ ກະດູກ ແລະເຍື່ອກະດູກໄດ້ ຊົງຈັບພະຍານາກຂົດເປັນວົງມົນແລ້ວຈັບຍັດລົງໃນບາດ ແລ້ວນຳໄປສະແດງແກ່ຊະດິນອຸເວລະກັດສະປະວ່າ "ທ່ານກັດສະປະ ນີ້ພະຍານາກຂອງທ່ານ ເຮົາຄອບງຳອຳນາດຂອງມັນດ້ວຍອຳນາດຂອງເຮົາໄດ້ແລ້ວ

ຂະນະນັ້ນ ຊະດິນອຸເວລະກັດສະປະຄິດວ່າ "ມະຫາສະມະນະມີລິດຫຼາຍ ມີອານຸພາບຫຼາຍແທ້ນໍ ສາມາດຄອບງຳອຳນາດຂອງພະຍານາກທີ່ດຸຮ້າຍ ມີລິດ ເປັນອະສໍຣະພິດ ມີພິດຮ້າຍໄດ້ດ້ວຍອຳນາດຂອງພຣະອົງ ແຕ່ຄົງບໍ່ໄດ້ເປັນພຣະອະຣະຫັນຄືເຮົາດອກ

## ຄາຖາສະຫຼຸບ

[໓໙] ຢູ່ແມ່ນ້ຳເນຣັນຊະຣາ ພຣະຜູ້ມີພຣະພາກເຈົ້າ
ໄດ້ຕັດກັບຊະດິນອຸເວລະກັດສະປະວ່າ "ກັດສະປະ ຖ້າທ່ານບໍ່ໜັກໃຈ
ຄືນນີ້ເຮົາຈະຂໍພັກໃນໂຮງໄຟ
ຊະດິນອຸເວລະກັດສະປະຂາບທູນວ່າ

ຂ້າແດ່ມະຫາສະມະນະ ຂ້າພະເຈົ້າບໍ່ໜັກໃຈເລີຍ
ຂ້າພະເຈົ້າຫວັງຄວາມຜາສຸກ ຈຶ່ງຫ້າມທ່ານວ່າ ຢູ່ໂຮງໄຟນີ້
ມີພະຍານາກ ເປັນສັດດຸຮ້າຍ ມີລິດ ເປັນອະສໍຣະພິດ ມີພິດຮ້າຍ
ມັນຢ່າໄດ້ທຳຮ້າຍທ່ານເລີຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ

ມັນຄົງບໍ່ທຳຮ້າຍເຮົາດອກ ກັດສະປະ ທ່ານໂຜດອະນຸຍາດໂຮງໄຟເທີ້ນ"
ພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ ຊະດິນອຸເວລະກັດສະປະໄດ້ອະນຸຍາດໃຫ້ແລ້ວ
ບໍ່ຊົງເກງກົວ ຊົງປາສະຈາກຄວາມຢ້ານ ສະເດັດເຂົ້າໄປຢູ່ອາໄສ
ພະຍານາກເຫັນພຣະຜູ້ມີພຣະພາກເຈົ້າ ຜູ້ສະແຫວງຫາຄຸນສະເດັດເຂົ້າໄປ
ກໍບໍ່ພໍໃຈ ໄດ້ບັງຫວນຄວັນອອກມາ
ຝ່າຍພຣະຜູ້ມີພຣະພາກເຈົ້າ ຊົງເປັນມະນຸດຊະນະມານ ມີພຣະທະໄທຊື່ນບານ
ມີພຣະທະໄທບໍ່ຂັດເຄືອງ ກໍຊົງບັງຫວນຄວັນໃນໂຮງໄຟນັ້ນ
ສ່ວນພະຍານາກທົນການລົບຫຼູ່ບໍ່ໄຫວ ຈຶ່ງພົ່ນໄຟປານກັບໄຟໄໝ້ປ່າສູ້
ຝ່າຍພຣະຜູ້ມີພຣະພາກເຈົ້າ ຊົງເປັນມະນຸດນາຄະຊົງສະຫຼາດໃນເຕໂຊກະສິນ ຊົງບັນດານໃຫ້ມີແສງສະຫວ່າງມີໄຟລຸກສູ້

ເມື່ອທັງສອງຝ່າຍຕ່າງບັນດານໄຟໃຫ້ລຸກຂຶ້ນ ເຮືອນໄຟກໍຮຸ່ງແຈ້ງ
ເໝືອນທະເລເພີງ ພວກຊະດິນກ່າວກັນວ່າ
ຜູ້ຈະເລີນ ມະຫາສະມະນະອົງງາມນັ້ນຄົງຈະຖືກພະຍານາກຂ້າໄປແລ້ວ
ເມື່ອຣາຕີນັ້ນຜ່ານໄປ ໄຟຂອງພະຍານາກຖືກທຳລາຍ
ສ່ວນໄຟຫຼາຍສີຂອງພຣະຜູ້ມີພຣະພາກເຈົ້າຜູ້ຊົງລິດຍັງຢູ່
ພຣະຣັດສະໝີຫຼາຍສີ ຄື ສີຂຽວ ສີແດງ ສີແສດ ສີເຫຼືອງ
ສີແກ້ວຜຼຶກ ຜາກົດທີ່ພຣະກາຍຂອງພຣະອັງຄີຣະສະ
ພຣະຜູ້ມີພຣະພາກເຈົ້າ ຊົງຈັບພະຍານາກຂົດລົງໃນບາດແລ້ວ
ຊົງສະແດງແກ່ຊະດິນອຸເວລະກັດສະປະວ່າ "ທ່ານກັດສະປະ ນີ້ພະຍານາກ
ຂອງທ່ານ ເຮົາຄອບງຳອຳນາດຂອງມັນດ້ວຍອຳນາດຂອງເຮົາໄດ້ແລ້ວ

ຂະນະນັ້ນ ຊະດິນອຸເວລະກັດສະປະເຫຼື້ອມໃສໃນອິດທິປາຕິຫານຂອງພຣະຜູ້ມີພຣະພາກເຈົ້າຍິ່ງແລ້ວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ມະຫາສະມະນະ ໂຜດປະທັບຢູ່ບ່ອນນີ້ຢ່າໜີໄປໄສ ຂ້າພະເຈົ້າຈັກບຳລຸງພຣະອົງດ້ວຍພັດຕາຫານເປັນປະຈຳ

**ປາຕິຫາຣິທີ ໑ ຈົບ**

## ປາຕິຫານທີ ໒

## ເລື້ອງທ້າວມະຫາຣາດທັງ ໔

[໔໐] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ເຂດປ່າແຫ່ງໜຶ່ງ ບໍ່ໄກຈາກອາສົມຂອງຊະດິນອຸເວລະກັດສະປະ

ເມື່ອຣາຕີຜ່ານໄປແລ້ວ ທ້າວມະຫາຣາດທັງ ໔ ເປັ່ງຣັດສະໝີງາມໃນເຂດປ່າທັງໝົດໃຫ້ສະຫວ່າງສະໄຫວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວໄດ້ຢືນເຝົ້າທັງ ໔ ທິດ ເໝືອນກອງໄຟໃຫຍ່ສັນນັ້ນ

ເມື່ອຣາຕີນັ້ນຜ່ານໄປ ຊະດິນອຸເວລະກັດສະປະໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ມະຫາສະມະນະ ໄດ້ເວລາແລ້ວ ພັດຕາຫານ ສຳເລັດແລ້ວ ທ່ານພຣະມະຫາສະມະນະ ເມື່ອຣາຕີຜ່ານໄປແລ້ວ ພວກນັ້ນຄືໃຜກັນນໍ ເປັ່ງຣັດສະໝີງາມຍັງເຂດປ່າທັງໝົດໃຫ້ສະຫວ່າງສະໄຫວ ເຂົ້າມາເຝົ້າພຣະອົງຖວາຍອະພິວາດແລ້ວໄດ້ຢືນເຝົ້າທັງ ໔ ທິດ ເໝືອນກອງໄຟໃຫຍ່ສັນນັ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ກັດສະປະ ພວກນັ້ນ ຄື ທ້າວມະຫາຣາດທັງ ໔ ເຂົ້າມາຫາເຮົາເພື່ອຟັງທຳ"

ຂະນະນັ້ນ ຊະດິນອຸເວລະກັດສະປະໄດ້ມີຄວາມຄິດດັ່ງນີ້ວ່າ "ພຣະມະຫາສະມະນະມີລິດຫຼາຍ ມີອານຸພາບຫຼາຍແທ້ນໍ ຈົນວ່າທ້າວມະຫາຣາດທັງ ໔ ເຂົ້າມາເຝົ້າເພື່ອຟັງທຳ ແຕ່ບໍ່ເປັນພຣະອະຣະຫັນຄືກັນກັບເຮົາດອກ

ພຣະຜູ້ມີພຣະພາກເຈົ້າ ສະເຫວີຍພັດຕາຫານຂອງຊະດິນອຸເວລະກັດສະປະ ແລ້ວປະທັບຢູ່ໃນເຂດປ່າແຫ່ງນັ້ນ

### ປາຕິຫາຣິທີ ໔ ຈົບ

## ປາຕິຫານທີ ໕

## ເລື້ອງທ້າວສັກກະ

[໔໑] ຄັ້ງນັ້ນ ເມື່ອຣາຕີຜ່ານໄປແລ້ວ ທ້າວສັກກະຈອມເທບ ເປັ່ງຣັດສະໝີງາມໃນເຂດປ່າທັງໝົດໃຫ້ສະຫວ່າງສະໄຫວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວປະທັບຢືນ ໃນບ່ອນສົມຄວນ ເໝືອນກອງໄຟໃຫຍ່ທີ່ງາມ ແລະປະນີດກວ່າຣັດສະໝີກ່ອນ ໆ

ເມື່ອຣາຕີນັ້ນຜ່ານໄປ ຊະດິນອຸເວລະກັດສະປະໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ມະຫາສະມະນະ ໄດ້ເວລາແລ້ວ ພັດຕາຫານສຳເລັດແລ້ວ ຂ້າແດ່ພຣະມະຫາສະມະນະ ຜູ້ນັ້ນ ຄືໃຜກັນນໍ ເມື່ອຣາຕີຜ່ານໄປແລ້ວ ໄດ້ເປັ່ງຣັດສະໝີງາມໃນເຂດປ່າທັງໝົດໃຫ້ສະຫວ່າງສະໄຫວ ເຂົ້າມາເຝົ້າພຣະອົງຖວາຍອະພິວາດແລ້ວໄດ້ຢືນໃນບ່ອນສົມຄວນ ເໝືອນກອງໄຟໃຫຍ່ທີ່ງາມແລະປະນີດກວ່າຣັດສະໝີກ່ອນ ໆ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ກັດສະປະ ຜູ້ນັ້ນ ຄືທ້າວສັກກະຈອມເທບ ເຂົ້າມາຫາເຮົາ ເພື່ອຟັງທຳ

ຂະນະນັ້ນ ຊະດິນອຸເວລະກັດສະປະໄດ້ມີຄວາມຄິດດັ່ງນີ້ວ່າ "ພຣະມະຫາສະມະນະມີລິດຫຼາຍ ມີອານຸພາບຫຼາຍແທ້ນໍ ຈົນວ່າທ້າວສັກກະຈອມເທບເຂົ້າມາຫາເພື່ອຟັງທຳ ແຕ່ບໍ່ເປັນພຣະອະຣະຫັນຄືກັນກັບເຮົາດອກ

ພຣະຜູ້ມີພຣະພາກເຈົ້າ ສະເຫວີຍພັດຕາຫານຂອງຊະດິນອຸເວລະກັດສະປະ ແລ້ວປະທັບຢູ່ໃນເຂດປ່າແຫ່ງນັ້ນ

**ປາຕິຫານທີ ໓ ຈົບ**

## ປາຕິຫານທີ ໔

# ເລື່ອງທ້າວສະຫຳບໍດີພົມ

[໔໘] ຄັ້ງນັ້ນ ເມື່ອຣາຕີຜ່ານໄປແລ້ວ ທ້າວສະຫຳບໍດີພົມ ເປ່ງຣັດສະໝີງາມຍັງເຂດປ່າທັງໝົດໃຫ້ສະຫວ່າງສະໄຫວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວປະທັບຢືນໃນທີ່ຄວນ ເໝືອນກອງໄຟໃຫຍ່ທີ່ງາມແລະປະນີດກວ່າຣັດສະໝີກ່ອນ ໆ

ເມື່ອຣາຕີນັ້ນຜ່ານໄປ ຊະດິນອຸເວລະກັດສະປະໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ມະຫາສະມະນະ ໄດ້ເວລາແລ້ວ ພັດຕາຫານສຳເລັດແລ້ວ ຂ້າແດ່ມະຫາສະມະນະ ຜູ້ນັ້ນຄືໃຜກັນນໍ ເມື່ອຣາຕີຜ່ານໄປແລ້ວ ເປ່ງຣັດສະໝີງາມຍັງເຂດປ່າທັງໝົດໃຫ້ສະຫວ່າງສະໄຫວ ເຂົ້າມາເຝົ້າພຣະອົງ ຖວາຍອະພິວາດແລ້ວໄດ້ຢືນ ໃນບ່ອນສົມຄວນ ເໝືອນກອງໄຟໃຫຍ່ທີ່ງາມແລະປະນີດກວ່າຣັດສະໝີກ່ອນ ໆ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ກັດສະປະ ຜູ້ນັ້ນ ຄືທ້າວສະຫຳບໍດີພົມ ເຂົ້າມາຫາເຮົາເພື່ອຟັງທຳ

ຂະນະນັ້ນ ຊະດິນອຸເວລະກັດສະປະໄດ້ມີຄວາມຄິດດັ່ງນີ້ວ່າ "ພຣະມະຫາສະມະນະມີລິດຫຼາຍ ມີອານຸພາບຫຼາຍແທ້ນໍ ຈົນວ່າທ້າວສະຫຳບໍດີພົມເຂົ້າມາຫາເພື່ອຟັງທຳ ແຕ່ບໍ່ເປັນພຣະອະຣະຫັນຄືກັນກັບເຮົາດອກ

ພຣະຜູ້ມີພຣະພາກເຈົ້າສະເຫວີຍພັດຕາຫານຂອງຊະດິນອຸເວລະກັດສະປະ ແລ້ວປະທັບຢູ່ໃນເຂດປ່າແຫ່ງນັ້ນ

**ປາຕິຫານທີ ໔ ຈົບ**

## ປາຕິຫານທີ ໕

## ເລື້ອງຊາວອັງຄະແລະມະຄົດ

[໔໓] ສະໄໝນັ້ນ ຊະດິນອຸເວລະກັດສະປະໄດ້ກະກຽມການບູຊາຍັນອັນຍິ່ງໃຫຍ່ ປະຊາຊົນຊາວອັງຄະ ແລະຊາວມະຄົດທັງໝົດ ຕ່າງຖືຂອງຫຍ້ຳຂອງບໍຣິໂພກເປັນຈຳນວນຫຼາຍ ມຸ້ງໜ້າໄປຫາຊະດິນອຸເວລະກັດສະປະຄິດວ່າ "ບັດນີ້ ເຮົາໄດ້ກະກຽມການບູຊາຍັນອັນຍິ່ງໃຫຍ່ ປະຊາຊົນຊາວອັງຄະ ແລະມະຄົດທັງໝົດຈັກຖືຂອງຫຍ້ຳຂອງບໍຣິໂພກເປັນຈຳນວນຫຼາຍມຸ້ງໜ້າ ມາຫາ ຖ້າພຣະມະຫາສະມະນະຈັກເຮັດອິດທິປາຕິຫານໃນໝູ່ມະຫາຊົນແລ້ວ ລາບສັກກາຣະຈັກຈະເລີນຍິ່ງແກ່ພຣະມະຫາສະມະນະ ລາບສັກກາຣະຂອງເຮົາຈັກເສື່ອມ ເຮັດຈັ່ງໃດນໍ ມື້ອື່ນນີ້ ພຣະມະຫາສະມະນະ ຈຶ່ງຈະບໍ່ສະເດັດມາສັນ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຊາບຄວາມຮ່ຳເພິງໃນໃຈຂອງຊະດິນອຸເວລະກັດສະປະດ້ວຍພຣະຫະໄທ ຈຶ່ງສະເດັດໄປສູ່ອຸດຕະຣະກຸຣຸທະວີບ ຊົງນຳບິນທະບາດຈາກທະວີບນັ້ນມາສະເຫວີຍທີ່ຝັ່ງສະອະໂນດາດ[១] ປະທັບພັກກາງເວັນ ໃນບ່ອນນັ້ນ

ເມື່ອຣາຕີນັ້ນຜ່ານໄປ ຊະດິນອຸເວລະກັດສະປະໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຊາບທູນວ່າ "ຂ້າແດ່ມະຫາສະມະນະ ໄດ້ເວລາແລ້ວ ພັດຕາຫານສຳເລັດແລ້ວ ຂ້າແດ່ມະຫາສະມະນະ ເປັນຫຍັງນໍ ມື້ວານນີ້ພຣະອົງບໍ່ສະເດັດມາ ອີກຢ່າງໜຶ່ງ ພວກຂ້າພະເຈົ້າຣະນຶກເຖິງພຣະອົງວ່າ ເປັນຫຍັງນໍ ພຣະມະຫາສະມະນະຈຶ່ງບໍ່ສະເດັດມາ ແຕ່ສ່ວນແຫ່ງຂອງຫຍ້ຳຂອງສັນ ຂ້າພະເຈົ້າໄດ້ຈັດໄວ້ເພື່ອພຣະອົງແລ້ວ

ພຣະຜູ້ມີພຣະພາກເຈົ້າ ຊົງຍ້ອນຖາມວ່າ "ກັດສະປະ ທ່ານໄດ້ຄິດໄວ້ໃນໃຈບໍ່ແມ່ນບໍວ່າ ບັດນີ້ເຮົາໄດ້ກະກຽມການບູຊາຍັນອັນຍິ່ງໃຫຍ່ ປະຊາຊົນຊາວອັງຄະ ແລະມະຄົດທັງໝົດຈັກຖືຂອງຫຍ້ຳຂອງສັນເປັນຈຳນວນຫຼາຍມຸ້ງໜ້າມາຫາ ຖ້າພຣະມະຫາສະມະນະຈັກເຮັດອິດທິປາຕິຫານໃນໝູ່ມະຫາຊົນໃຫ້ເຫັນແລ້ວ ລາບສັກກາຣະຈັກຈະເລີນຍິ່ງແກ່ພຣະມະຫາສະມະນະ ລາບສັກກາຣະຂອງເຮົາຈັກເສື່ອມ ເຮັດຈັ່ງໃດນໍ ມື້ອື່ນນີ້ ພຣະມະຫາສະມະນະຈຶ່ງຈະບໍ່ສະເດັດມາສັນ ກັດສະປະ ເຮົາໄດ້ຮູ້ ດ້ວຍໃຈເຖິງຄວາມຮ່ຳເພິງໃນໃຈຂອງທ່ານ ຈຶ່ງໄປສູ່ອຸດຕະຣະກຸຣຸທະວີບ ນຳບິນທະບາດຈາກທະວີບນັ້ນ ມາສັນທີ່ຝັ່ງສະອະໂນດາດ ພັກກາງເວັນໃນບ່ອນນັ້ນຢູ່"

ຂະນະນັ້ນ ຊະດິນອຸເວລະກັດສະປະຄິດວ່າ "ພຣະມະຫາສະມະນະມີລິດຫຼາຍ ມີອານຸພາບຫຼາຍແທ້ນໍ ສາມາດຊົງຮູ້ຄວາມນຶກຄິດດ້ວຍໃຈໄດ້ ແຕ່ຍັງບໍ່ເປັນພຣະອະຣະຫັນຄືກັນກັບເຮົາດອກ

ພຣະຜູ້ມີພຣະພາກເຈົ້າ ສະເຫວີຍພັດຕາຫານຂອງຊະດິນອຸເວລະກັດສະປະ ແລ້ວປະທັບຢູ່ໃນເຂດປ່າແຫ່ງນັ້ນ

**ປາຕິຫານຄັ້ງທີ ໔ ຈົບ**

## ເລື້ອງຜ້າບັງສຸກຸນ

[໔໔] ສະໄໝນັ້ນ ຜ້າບັງສຸກຸນເກີດຂື້ນແກ່ພຣະຜູ້ມີພຣະພາກເຈົ້າ ພຣະອົງໄດ້ຊົງພຣະດຳຣິດັ່ງນີ້ວ່າ "ເຮົາຈະເພິ່ງຊັກຜ້າບັງສຸກຸນຢູ່ໄສໄດ້ນໍ"

ລຳດັບນັ້ນ ທ້າວສັກກະຈອມເທບຊົງຊາບພຣະດຳຣິໃນພຣະຫະໄທຂອງພຣະຜູ້ມີພຣະພາກເຈົ້າ ດ້ວຍພຣະຫະໄທ ຈຶ່ງຊົງໃຊ້ຝ່າພຣະຫັດຂຸດສະໂບກຂະຣະນີແລ້ວທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂໍພຣະອົງໂຜດຊົງຊັກຜ້າບັງສຸກຸນໃນສະນີ້ເທີ້ນ"

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງພຣະດຳຣິດັ່ງນີ້ວ່າ "ເຮົາຈະເພິ່ງທຸບຜ້າບັງສຸກຸນຢູ່ໄສນໍ"

ລຳດັບນັ້ນ ທ້າວສັກກະຈອມເທບຊົງຊາບພຣະດຳຣິໃນພຣະຫະໄທຂອງພຣະຜູ້ມີພຣະພາກເຈົ້າ ດ້ວຍພຣະຫະໄທ ຈຶ່ງຊົງຍົກສິລາແຜ່ນໃຫຍ່ມາວາງໄວ້ທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂໍພຣະອົງໂຜດຊົງທຸບຜ້າບັງສຸກຸນເທິງສິລານີ້ເທີ້ນ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງພຣະດຳຣິດັ່ງນີ້ວ່າ "ເຮົາຈະເພິ່ງຕາກຜ້າບັງສຸກຸນໄວ້ຢູ່ໄສໄດ້ນໍ?"

ລຳດັບນັ້ນ ເທວະດາຜູ້ສິງສະຖິດຢູ່ທີ່ຕົ້ນໄມ້ ຮູ້ພຣະດຳຣິໃນພຣະຫະໄທຂອງພຣະຜູ້ມີພຣະພາກເຈົ້າດ້ວຍໃຈ ຈຶ່ງໄດ້ນ້ອມງ່າລົງມາ ຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂໍພຣະອົງ ໂຜດຊົງຕາກຜ້າບັງສຸກຸນໃສ່ງ່ານີ້ເທີ້ນ

ເມື່ອຣາຕີນັ້ນຜ່ານໄປ ຊະດິນອຸເວລະກັດສະປະໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ພຣະມະຫາສະມະນະ ໄດ້ເວລາແລ້ວ ພັດຕາຫານສຳເລັດແລ້ວ ຂ້າແດ່ພຣະມະຫາສະມະນະ ເມື່ອກ່ອນສະໂບກຂະຣະນີນີ້ບໍ່ມີໃນບ່ອນນີ້ ແລ້ວເປັນຫຍັງ ເວລານີ້ຈຶ່ງມີສະໂບກຂະຣະນີ ນີ້ຢູ່ ເມື່ອກ່ອນສິລາເຫຼົ່ານີ້ບໍ່ມີ ສິລາເຫຼົ່ານີ້ໃຜຍົກມາວາງໄວ້ ເມື່ອກ່ອນງ່າຕົ້ນນີ້ບໍ່ນ້ອມລົງມາ ແຕ່ດຽວນີ້ງ່າຕົ້ນນີ້ກັບນ້ອມລົງ

## ເລື້ອງສະໂບກຂະຣະນີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ກັດສະປະ ຜ້າບັງສຸກຸນເກີດຂື້ນແກ່ເຮົາບ່ອນນີ້ ເຮົາໄດ້

ຄິດດັ່ງນີ້ວ່າ ຈະເພິ່ງຊັກຜ້າບັງສຸກຸນຢູ່ໄສນໍ ລຳດັບນັ້ນ ທ້າວສັກກະຈອມເທບຊົງຊາບຄວາມ ຮ່ຳເພິງໃນໃຈຂອງເຮົາດ້ວຍພຣະທະໄທ ຈຶ່ງຊົງໃຊ້ພຣະຫັດຂຸດສະໂບກຂະຣະນີແລ້ວທູນວ່າ ຂ້າ ແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າໂຜດຊົງຊັກຜ້າບັງສຸກຸນໃນສະນີ້ເທີ້ນ ສະໂບກ ຂະຣະນີນີ້ອັນຜູ້ທີ່ບໍ່ແມ່ນມະນຸດໃຊ້ມືຂຸດ

## ເລື້ອງທຸບຜ້າບັງສຸກຸນເທິງແຜ່ນສິລາ

ກັດສະປະ ເຮົາໄດ້ດຳຣິ (ຕໍ່ໄປ) ວ່າ ຈະເພິ່ງທຸບຜ້າບັງສຸກຸນຢູ່ໄສນໍ ລຳດັບນັ້ນ ທ້າວ ສັກກະຈອມເທບຊົງຊາບຄວາມຄິດໃນໃຈຂອງເຮົາດ້ວຍພຣະທະໄທ ຈຶ່ງຍົກສິລາແຜ່ນໃຫຍ່ມາ ວາງໄວ້ທູນວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂໍພຣະອົງໂຜດຊົງທຸບຜ້າບັງສຸກຸນເທິງແຜ່ນສິລານີ້ເທີ້ນ ສິລານີ້ອັນຜູ້ທີ່ບໍ່ແມ່ນມະນຸດໄດ້ຍົກມາວາງໄວ້

## ເລື້ອງພາດຜ້າບັງສຸກຸນເທິງຕົ້ນກຸ່ມ

ກັດສະປະ ເຮົາໄດ້ດຳຣິ (ຕໍ່ໄປ) ວ່າ ຈະເພິ່ງຕາກຜ້າບັງສຸກຸນໄວ້ຢູ່ໄສນໍ ລຳດັບນັ້ນ ເທວະດາຜູ້ສິງສະຖິດຢູ່ທີ່ຕົ້ນກຸ່ມຮູ້ຄວາມຄິດໃນໃຈຂອງເຮົາດ້ວຍໃຈ ຈຶ່ງໄດ້ນ້ອມງ່າກຸ່ມລົງມາ ຂາບທູນວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າໂຜດຊົງພາດຜ້າບັງສຸກຸນໄວ້ທີ່ງ່າ ກຸ່ມນີ້ເທີ້ນ ຕົ້ນກຸ່ມນີ້ໄດ້ນ້ອມລົງເໝືອນຈະຂາບທູນວ່າ ໂຜດຊົງເອື້ອມພຣະຫັດມາເທີ້ນ

ຂະນະນັ້ນ ຊະດິນອຸເວລະກັດສະປະຄິດວ່າ "ພຣະມະຫາສະມະນະມີລິດຫຼາຍ ມີອານຸ ພາບຫຼາຍແທ້ນໍ ຈົນວ່າທ້າວສັກກະຈອມເທບໄດ້ຊົງກະທຳການຊ່ວຍເຫຼືອ ແຕ່ບໍ່ເປັນພຣະອະຣະ ຫັນຄືກັນກັບເຮົາດອກ

ພຣະຜູ້ມີພຣະພາກເຈົ້າສະເຫວີຍພັດຕາຫານຂອງຊະດິນອຸເວລະກັດສະປະ ແລ້ວປະທັບ ຢູ່ໃນເຂດປ່າແຫ່ງນັ້ນ

## ປາຕິຫານເກັບໝາກຫວ້າ

ເມື່ອຣາຕີນັ້ນຜ່ານໄປ ຊະດິນອຸເວລະກັດສະປະໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເມື່ອເຖິງແລ້ວ ຈຶ່ງຂາບທູນບອກພັດຕະການວ່າ "ຂ້າແດ່ພຣະມະຫາສະມະນະ ໄດ້ເວລາແລ້ວ ພັດຕາຫານສຳເລັດແລ້ວ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໄປເທີ້ນ ກັດສະປະ ເຮົາຈະຕາມໄປ" ຊົງສົ່ງຊະດິນອຸຣຸ ເວລະກັດສະປະໄປກ່ອນ ຊົງເກັບໝາກຫວ້າຈາກຕົ້ນຫວ້າທີ່ມີຢູ່ໃນຊົມພູທະວີບ ແລ້ວສະເດັດມາ ປະທັບນັ່ງໃນໂຮງໄຟກ່ອນ

ເມື່ອຊະດິນອຸເວລະກັດສະປະເຫັນພຣະຜູ້ມີພຣະພາກເຈົ້າປະທັບນັ່ງໃນໂຮງໄຟ ເມື່ອເຫັນແລ້ວໄດ້ຂາບທູນ ພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ມະຫາສະມະນະ ພຣະອົງສະເດັດມາທາງໃດ ຂ້າພະເຈົ້າກັບມາກ່ອນພຣະອົງ ແຕ່ພຣະອົງສະເດັດມາປະທັບນັ່ງໃນໂຮງໄຟນີ້ກ່ອນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ກັດສະປະ ເຮົາສົ່ງທ່ານໄປແລ້ວກໍເກັບໝາກຫວ້າຈາກຕົ້ນຫວ້າທີ່ມີຢູ່ໃນຊົມພູທະວີບ ແລ້ວມານັ່ງໃນໂຮງໄຟນີ້ກ່ອນ ກັດສະປະ ໝາກຫວ້ານີ້ສົມບູນດ້ວຍສີ ກິ່ນແລະຣົດ ຖ້າທ່ານຕ້ອງການ ກໍເຊີນບໍຣິໂພກໝາກຫວ້າເທີ້ນ

ຊະດິນອຸເວລະກັດສະປະທູນວ່າ "ຢ່າເລີຍ ມະຫາສະມະນະ, ພຣະອົງຄວນກັບໝາກຫວ້ານັ້ນ ໂຜດສະເຫວີຍໝາກຫວ້ານັ້ນເທີ້ນ

ຂະນະນັ້ນ ຊະດິນອຸເວລະກັດສະປະຄິດວ່າ "ພຣະມະຫາສະມະນະມີລິດຫຼາຍ ມີອານຸພາບຫຼາຍແທ້ນໍ ບອກໃຫ້ເຮົາກັບມາກ່ອນ ແຕ່ສາມາດແວ່ເກັບໝາກຫວ້າຈາກຕົ້ນຫວ້າທີ່ມີຢູ່ໃນຊົມພູທະວີບແລ້ວສະເດັດມາປະທັບນັ່ງໃນໂຮງໄຟກ່ອນ ແຕ່ບໍ່ເປັນພຣະອະຣະຫັນຄືກັນກັບເຮົາດອກ

ພຣະຜູ້ມີພຣະພາກເຈົ້າສະເຫວີຍພັດຕາຫານຂອງຊະດິນອຸເວລະກັດສະປະ ແລ້ວປະທັບຢູ່ໃນເຂດປ່າແຫ່ງນັ້ນ

## ປາຕິຫານເກັບໝາກມ່ວງ ໝາກຂາມປ້ອມ ດອກປາຣິສັດ

[໔໕] ເມື່ອຣາຕີນັ້ນຜ່ານໄປ ຊະດິນອຸເວລະກັດສະປະໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວຈຶ່ງຂາບທູນບອກພັດຕະການວ່າ "ຂ້າແດ່ມະຫາສະມະນະ ໄດ້ເວລາແລ້ວ ພັດຕາຫານສຳເລັດແລ້ວ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໄປເທີ້ນ ກັດສະປະ ເຮົາຈະຕາມໄປ" ຊົງສົ່ງຊະດິນອຸຣຸເວລະກັດສະປະໄປກ່ອນ ຊົງເກັບໝາກມ່ວງ ຯລຯ ໝາກຂາມປ້ອມ ຯລຯ ໝາກສົ້ມມໍໃນທີ່ອັນບໍ່ໄກຈາກຕົ້ນຫວ້າທີ່ມີຢູ່ໃນຊົມພູທະວີບ ຯລຯ ສະເດັດໄປສູ່ພິບຕາວະຕິງສາ ຊົງເກັບດອກປາຣິສັດແລ້ວ ສະເດັດລົງມາປະທັບນັ່ງໃນໂຮງໄຟກ່ອນ

ຊະດິນອຸເວລະກັດສະປະເຫັນພຣະຜູ້ມີພຣະພາກເຈົ້າປະທັບນັ່ງໃນໂຮງໄຟ ຈຶ່ງທູນຖາມວ່າ ຂ້າແດ່ມະຫາສະມະນະ ພຣະອົງສະເດັດມາທາງໃດ ຂ້າພະເຈົ້າກັບມາກ່ອນພຣະອົງ ແຕ່ພຣະອົງສະເດັດມາປະທັບນັ່ງໃນໂຮງໄຟກ່ອນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ກັດສະປະ ເຮົາສົ່ງທ່ານໄປແລ້ວກໍໄປສູ່ພິບຕາວະຕິງສາເກັບດອກປາຣິສັດ ແລ້ວລົງມານັ່ງໃນໂຮງໄຟກ່ອນ ກັດສະປະ ດອກປາຣິສັດນີ້ສົມບູນດ້ວຍສີແລະກິ່ນ ຂະນະນັ້ນ ຊະດິນອຸເວລະກັດສະປະຄິດວ່າ "ພຣະມະຫາສະມະນະມີລິດຫຼາຍ ມີ

ອານຸພາບຫຼາຍແທ້ນໍ ຈົນວ່າສິ່ງເຮົາກັບມາກ່ອນ ສະເດັດໄປສູ່ພົບຕາວະຕິງສາຊົງເກັບດອກປາຣິສັດ ແລ້ວສະເດັດລົງມາປະທັບນັ່ງໃນໂຮງໄຟກ່ອນ ແຕ່ບໍ່ເປັນພຣະອະຣະຫັນຄືກັນກັບເຮົາດອກ

## ເລື້ອງພວກຊະດິນຜ່າຟືນ

[໔໖] ສະໄໝນັ້ນ ຊະດິນເຫຼົ່ານັ້ນ ຕ້ອງການຈະບຳເລີໄຟ ແຕ່ບໍ່ອາດຈະຜ່າຟືນໄດ້ ຄັ້ງນັ້ນ ຊະດິນເຫຼົ່ານັ້ນ ໄດ້ມີຄວາມຄິດດັ່ງນີ້ວ່າ "ການທີ່ພວກເຮົາບໍ່ອາດຈະຜ່າຟືນໄດ້ ຄົງເປັນອິດທານຸພາບຂອງພຣະມະຫາສະມະນະໂດຍບໍ່ຕ້ອງສົງໄສເລີຍ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດກັບຊະດິນອຸເວລະກັດສະປະວ່າ "ກັດສະປະພວກຊະດິນຈົ່ງຜ່າຟືນເທີ້ນ

ຊະດິນອຸເວລະກັດສະປະທູນຮັບພຣະດຳຣັດວ່າ "ຂ້າແດ່ມະຫາສະມະນະ ພວກຊະດິນຈົ່ງຜ່າຟືນ ຊະດິນທັງຫຼາຍໄດ້ຜ່າຟືນ ໕໐໐ ທ່ອນ ໂດຍການຜ່າຄັ້ງດຽວເທົ່ານັ້ນ

ຂະນະນັ້ນ ຊະດິນອຸເວລະກັດສະປະຄິດວ່າ "ພຣະມະຫາສະມະນະມີລິດຫຼາຍ ມີອານຸພາບຫຼາຍແທ້ນໍ ຈົນວ່າໃຫ້ພວກຊະດິນຜ່າຟືນໄດ້ ແຕ່ບໍ່ເປັນພຣະອະຣະຫັນຄືກັນກັບເຮົາດອກ

## ເລື້ອງພວກຊະດິນດັງໄຟ

[໔໗] ສະໄໝນັ້ນ ຊະດິນເຫຼົ່ານັ້ນ ຕ້ອງການຈະບູຊາໄຟ ແຕ່ບໍ່ອາດຈະດັງໄຟໃຫ້ລຸກໄດ້ ຄັ້ງນັ້ນ ຊະດິນເຫຼົ່ານັ້ນໄດ້ມີຄວາມຄິດດັ່ງນີ້ວ່າ "ການທີ່ພວກເຮົາບໍ່ອາດຈະດັງໄຟໃຫ້ລຸກໄດ້ ຄົງເປັນອິດທານຸພາບຂອງພຣະມະຫາສະມະນະໂດຍບໍ່ຕ້ອງສົງໄສເລີຍ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບຊະດິນອຸເວລະກັດສະປະວ່າ "ກັດສະປະພວກຊະດິນ ຈົ່ງດັງໄຟໃຫ້ລຸກຂຶ້ນເທີ້ນ

ຊະດິນອຸເວລະກັດສະປະທູນຮັບພຣະດຳຣັດວ່າ "ຂ້າແດ່ມະຫາສະມະນະ ພວກຊະດິນຈົ່ງດັງໄຟໃຫ້ລຸກຂຶ້ນ ໄຟທັງ ໕໐໐ ກອງ ໄດ້ລຸກຂຶ້ນພ້ອມກັນ

ຂະນະນັ້ນ ຊະດິນອຸເວລະກັດສະປະຄິດວ່າ "ພຣະມະຫາສະມະນະມີລິດຫຼາຍ ມີອານຸພາບຫຼາຍຈິງ ຈົນວ່າໃຫ້ໄຟລຸກຂຶ້ນໄດ້ ແຕ່ບໍ່ເປັນພຣະອະຣະຫັນຄືກັນກັບເຮົາດອກ

## ເລື້ອງພວກຊະດິນດັບໄຟ

[໔໘] ສະໄໝນັ້ນ ຊະດິນເຫຼົ່ານັ້ນ ບູຊາໄຟກັນແລ້ວ ແຕ່ບໍ່ອາດຈະດັບໄຟໄດ້ ລຳດັບນັ້ນ ຊະດິນເຫຼົ່ານັ້ນໄດ້ມີຄວາມຄິດດັ່ງນີ້ວ່າ "ການທີ່ພວກເຮົາບໍ່ອາດຈະດັບໄຟໄດ້ ຄົງເປັນອິດທານຸ

ພາບຂອງພຣະມະຫາສະມະນະໂດຍບໍ່ຕ້ອງສົງໄສເລີຍ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບຊະດິນອຸເວລະກັດສະປະວ່າ "ກັດສະປະ ພວກຊະດິນ ຈົ່ງດັບໄຟເທີ້ນ

ຊະດິນອຸເວລະກັດສະປະທູນຮັບພຣະດຳຣັດວ່າ "ຂ້າແດ່ມະຫາສະມະນະ ພວກຊະດິນຈົ່ງ ດັບໄຟ ໄຟທັງ ໕໐໐ ກອງ ໄດ້ດັບພ້ອມກັນທັນທີ

ຂະນະນັ້ນ ຊະດິນອຸເວລະກັດສະປະຄິດວ່າ "ພຣະມະຫາສະມະນະມີລິດຫຼາຍ ມີອານຸ ພາບຫຼາຍຈິງ ຈົນວ່າໃຫ້ພວກຊະດິນດັບໄຟໄດ້ ແຕ່ບໍ່ເປັນພຣະອະຣະຫັນຄືກັນກັບເຮົາດອກ

## ເລື້ອງພວກຊະດິນດຳນ້ຳ

[໔໙] ສະໄໝນັ້ນ ຊະດິນເຫຼົ່ານັ້ນພາກັນດຳລົງແດ່ ຜຸດຂຶ້ນແດ່ ທັງດຳທັງຜຸດແດ່ ໃນ ແມ່ນ້ຳເນຣັນຊະຣາ ໃນຣາຕີເຫມັນຕະລະດູອັນໜາວເຢັນເວລາຫິມະຕົກ ຢູ່ໃນລະຫວ່າງປາຍ ເດືອນ ໓ ກັບຕົ້ນເດືອນ ໔

## ເລື້ອງພາຊະນະໃສ່ໄຟ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຊົງເນຣະມິດພາຊະນະໃສ່ໄຟໄວ້ ໕໐໐ ຊຸດ ສຳລັບໃຫ້ ຊະດິນເຫຼົ່ານັ້ນ ຂຶ້ນຈາກນ້ຳຈະໄດ້ຜີງ

ລຳດັບນັ້ນ ຊະດິນເຫຼົ່ານັ້ນມີຄວາມຄິດດັ່ງນີ້ວ່າ "ການທີ່ພາຊະນະໃສ່ໄຟເຫຼົ່ານີ້ໄດ້ຖືກເນ ຣະມິດໄວ້ ຄົງເປັນຍ້ອນອິດທານຸພາບຂອງພຣະມະຫາສະມະນະໂດຍບໍ່ຕ້ອງສົງໄສເລີຍ

ຂະນະນັ້ນ ຊະດິນອຸເວລະກັດສະປະຄິດດັ່ງນີ້ວ່າ "ພຣະມະຫາສະມະນະມີລິດຫຼາຍ ມີ ອານຸພາບຫຼາຍແທ້ນໍ ຈົນວ່າເນຣະມິດພາຊະນະໃສ່ໄຟໄວ້ຫຼວງຫຼາຍເຖິງພຽງນັ້ນ ແຕ່ບໍ່ເປັນພຣະ ອະຣະຫັນຄືກັນກັບເຮົາດອກ

## ເລື້ອງຝົນຕົກນ້ຳຖ້ວມ

[໕໐] ສະໄໝນັ້ນ ຝົນໃຫຍ່ນອກລະດູຕົກລົງ ເກີດຫ້ວງນ້ຳໃຫຍ່ ສະຖານທີ່ທີ່ພຣະຜູ້ມີ ພຣະພາກເຈົ້າປະທັບຢູ່ກໍຖືກນ້ຳຖ້ວມ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງພຣະດຳຣິວ່າ "ຖ້າຈັ່ງໃດ ເຮົາເພິ່ງຂັບນ້ຳໃຫ້ອອກໄປ ໂດຍຮອບ ແລ້ວຈົງກົມເທິງພື້ນດິນທີ່ມີຝຸ່ນຟຸ້ງຂຶ້ນສູນກາງ" ຊົງຂັບນ້ຳໃຫ້ອອກໄປໂດຍຮອບສະ ເດັດຈົງກົມເທິງພື້ນດິນທີ່ມີຝຸ່ນຟຸ້ງຂຶ້ນສູນກາງ

ລຳດັບນັ້ນ ຊະດິນອຸເວລະກັດສະປະກ່າວວ່າ "ພຣະມະຫາສະມະນະຢ່າໄດ້ຖືກນ້ຳພັດໄປ ເລີຍ" ພ້ອມດ້ວຍຊະດິນເປັນຈຳນວນຫຼາຍ ລົງເຮືອໄປສູ່ສະຖານທີ່ທີ່ພຣະຜູ້ມີພຣະພາກເຈົ້າປະ ທັບຢູ່ໄດ້ເຫັນ ພຣະຜູ້ມີພຣະພາກເຈົ້າຊົງຂັບນ້ຳໃຫ້ອອກໄປໂດຍຮອບ ສະເດັດຈົງກົມເທິງພື້ນທີ່ມີ ຝຸ່ນຟຸ້ງຂຶ້ນກົງກາງຈຶ່ງທູນຖາມວ່າ "ຂ້າແດ່ພຣະມະຫາສະມະນະ ພຣະອົງຍັງປະທັບຢູ່ບ່ອນນີ້ບໍ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ຖືກແລ້ວ ກັດສະປະ ເຮົາຍັງຢູ່ບ່ອນນີ້" ແລ້ວ ສະເດັດເຫາະຂຶ້ນໄປຜາກົດຢູ່ເທິງເຮືອ

ຂະນະນັ້ນ ຊະດິນອຸເວລະກັດສະປະຄິດວ່າ "ພຣະມະຫາສະມະນະມີລິດຫຼາຍ ມີອານຸພາບ ຫຼາຍແທ້ນໍ ຈົນວ່າຊົງບັນດານບໍ່ໃຫ້ນ້ຳໄຫຼໄປໄດ້ ແຕ່ບໍ່ເປັນພຣະອະຣະຫັນຄືກັນກັບເຮົາດອກ

## ຊະດິນ ໓ ພີ່ນ້ອງທູນຂໍການບັນພະຊາອຸປະສົມບົດ

[໕໑] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຄິດດັ່ງນີ້ວ່າ "ໂມຄະບຸຣຸດນີ້ຄົງຈັກມີຄວາມຄິດ ແນວນີ້ໄປອີກດົນວ່າ ພຣະມະຫາສະມະນະມີລິດຫຼາຍ ມີອານຸພາບຫຼາຍແທ້ນໍ ແຕ່ບໍ່ເປັນພຣະອະ ຣະຫັນຄືກັນກັບເຮົາດອກ ຢ່າຈັ່ງຊັ້ນເລີຍ ເຮົາເພິ່ງໃຫ້ຊະດິນນີ້ສະຫຼົດໃຈ" ຈຶ່ງໄດ້ຕັດກັບຊະດິນອຸ ເວລະກັດສະປະວ່າ "ກັດສະປະ ທ່ານບໍ່ແມ່ນພຣະອະຣະຫັນດອກ ແລະຍັງບໍ່ເຖິງອະຣະຫັດຕະ ມັກ ແມ່ນປະຕິປະທາຂອງທ່ານ ອັນຈະເປັນເຫດໃຫ້ເປັນພຣະອະຣະຫັນ ຫຼື ເຖິງອະຣະຫັດຕະ ມັກກໍຍັງບໍ່ມີ

ລຳດັບນັ້ນ ຊະດິນອຸເວລະກັດສະປະໄດ້ຊົບຫົວລົງແທບພຣະບາດພຣະຜູ້ມີພຣະພາກເຈົ້າ ຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພະເຈົ້າເພິ່ງໄດ້ການບັນພະຊາ ເພິ່ງໄດ້ການອຸປະສົມ ບົດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ກັດສະປະ ທ່ານເປັນຜູ້ນຳ ເປັນຜູ້ຝຶກ ເປັນເລີດ ເປັນຫົວ ໜ້າ ເປັນປະທານຂອງຊະດິນ ໕໐໐ ຄົນ ທ່ານຈົ່ງບອກລາພວກເຂົາກ່ອນ ໃຫ້ພວກເຂົາເຮັດຕາມ ທີ່ພວກເຂົາເຂົ້າໃຈ

ຕໍ່ມາ ຊະດິນອຸເວລະກັດສະປະໄດ້ເຂົ້າໄປຫາຊະດິນເຫຼົ່ານັ້ນ ເຖິງທີ່ຢູ່ແລ້ວກ່າວວ່າ ຜູ້ ຈະເລີນທັງຫຼາຍ ເຮົາຕ້ອງການຈະປະພຶດພົມມະຈັນໃນສຳນັກພຣະມະຫາສະມະນະ ທ່ານ ທັງຫຼາຍ ຈົ່ງເຮັດຕາມທີ່ພວກທ່ານເຂົ້າໃຈ

ຊະດິນເຫຼົ່ານັ້ນ ຂາບຮຽນວ່າ "ພວກຂ້າພະເຈົ້າ ເຫຼື້ອມໃສຍິ່ງໃນສຳນັກພຣະມະຫາສະມະ ນະມາດົນແລ້ວ ຂ້ານ້ອຍ ຖ້າທ່ານຈັກປະພຶດພົມມະຈັນໃນສຳນັກພຣະມະຫາສະມະນະ ພວກ ຂ້າພະເຈົ້າທັງໝົດ ກໍຈັກປະພຶດພົມມະຈັນໃນສຳນັກພຣະມະຫາສະມະນະຄືກັນ" ຈຶ່ງເອົາຜົມ ຊະ

ດາ ເຄື່ອງບໍຣິຂານ ແລະເຄື່ອງບູຊາໄຟລອຍນ້ຳ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ແລ້ວຊົບຫົວແທບພຣະບາດຂອງພຣະຜູ້ມີພຣະພາກເຈົ້າ ຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ພວກຂ້າພະອົງເພິ່ງໄດ້ການບັນພະຊາ ເພິ່ງໄດ້ການອຸປະສົມບົດໃນສຳນັກຂອງພຣະຜູ້ມີພຣະພາກ ເຈົ້າດ້ວຍເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພວກທ່ານຈົ່ງມາເປັນພິກຂຸເທີ້ນ" ແລ້ວຕັດຕໍ່ໄປວ່າ ທຳ ອັນເຮົາກ່າວດີແລ້ວ ພວກທ່ານຈົ່ງປະພຶດພົມມະຈັນເພື່ອເຮັດທີ່ສຸດທຸກໂດຍຊອບເທີ້ນ

ພຣະອາຈານັ້ນແລ ໄດ້ເປັນການອຸປະສົມບົດຂອງທ່ານເຫຼົ່ານັ້ນ

[໕໘] ຊະດີນນະທີກັດສະປະໄດ້ເຫັນຜົມ ຊະດາ ເຄື່ອງບໍຣິຂານ ແລະເຄື່ອງບູຊາໄຟ ລອຍນ້ຳມາແລ້ວຄິດວ່າ "ອຸປະສັກຢ່າໄດ້ມີແກ່ອ້າຍຂອງເຮົາເລີຍ" ຈຶ່ງສົ່ງຊະດີນທັງຫຼາຍໄປດ້ວຍ ສັ່ງວ່າ "ພວກທ່ານຈົ່ງໄປ ຈົ່ງຮູ້ຄວາມເປັນໄປຂອງອ້າຍຂອງເຮົາ" ແລະຕົນເອງພ້ອມຊະດີນ ໓໐໐ ຄົນ ໄດ້ເຂົ້າໄປຫາທ່ານພຣະອຸເວລະກັດສະປະເຖິງທີ່ຢູ່ແລ້ວຮຽນຖາມວ່າ

ຂ້າແດ່ ອ້າຍກັດສະປະ ພົມມະຈັນນີ້ປະເສີດກວ່າແມ່ນບໍ?

ທ່ານພຣະອຸເວລະກັດສະປະຕອບວ່າ "ຖືກແລ້ວ ຜູ້ມີອາຍຸ ພົມມະຈັນນີ້ປະເສີດກວ່າ"

ຫຼັງຈາກນັ້ນ ຊະດີນເຫຼົ່ານັ້ນ ຈຶ່ງເອົາຜົມ ຊະດາ ເຄື່ອງບໍຣິຂານ ແລະເຄື່ອງບູຊາໄຟ ລອຍນ້ຳ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຊົບຫົວແທບພຣະບາດຂອງພຣະຜູ້ມີພຣະພາກເຈົ້າ ຂາບທູນ ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ພວກຂ້າພະອົງເພິ່ງໄດ້ການບັນພະຊາ ເພິ່ງໄດ້ການອຸ ປະສົມບົດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າດ້ວຍເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພວກທ່ານຈົ່ງມາເປັນພິກຂຸເທີ້ນ" ແລ້ວຕັດຕໍ່ໄປວ່າ ທຳ ອັນເຮົາກ່າວດີແລ້ວ ພວກທ່ານຈົ່ງປະພຶດພົມມະຈັນເພື່ອເຮັດທີ່ສຸດທຸກໂດຍຊອບເທີ້ນ

ພຣະອາຈານັ້ນແລ ໄດ້ເປັນການອຸປະສົມບົດຂອງທ່ານເຫຼົ່ານັ້ນ

[໕໙] ຊະດີນຄະຍາກັດສະປະໄດ້ເຫັນຜົມ ຊະດາ ເຄື່ອງບໍຣິຂານ ແລະເຄື່ອງບູຊາໄຟ ລອຍນ້ຳມາແລ້ວຄິດວ່າ "ອຸປະສັກຢ່າໄດ້ມີແກ່ອ້າຍທັງສອງຂອງເຮົາເລີຍ" ຈຶ່ງສົ່ງຊະດີນທັງຫຼາຍ ໄປດ້ວຍສັ່ງວ່າ "ພວກທ່ານຈົ່ງໄປ ຈົ່ງຮູ້ຄວາມເປັນໄປຂອງອ້າຍທັງສອງຂອງເຮົາ" ແລະຕົນເອງ ພ້ອມຊະດີນ ໒໐໐ ຄົນ ໄດ້ເຂົ້າໄປຫາທ່ານ "ພຣະອຸເວລະກັດສະປະເຖິງທີ່ຢູ່ ແລ້ວຮຽນຖາມວ່າ "ຂ້າແດ່ ອ້າຍກັດສະປະ ພົມມະຈັນນີ້ປະເສີດກວ່າແມ່ນບໍ?"

ທ່ານພຣະອຸເວລະກັດສະປະຕອບວ່າ "ຖືກແລ້ວ ຜູ້ມີອາຍຸ ພົມມະຈັນນີ້ປະເສີດກວ່າຫຼັງ ຈາກນັ້ນ ຊະດີນເຫຼົ່ານັ້ນຈຶ່ງເອົາຜົມ ຊະດາ ເຄື່ອງບໍຣິຂານ ແລະເຄື່ອງບູຊາໄຟລອຍນ້ຳ ເຂົ້າໄປ

ເຝົ້າພຣະຜູ້ມີພຣະພາກເຈົ້າ ຊົບຫົວແທບພຣະບາດຂອງພຣະຜູ້ມີພຣະພາກເຈົ້າ ຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ພວກຂ້າພະອົງ ເພິ່ງໄດ້ການບັນພະຊາ ເພິ່ງໄດ້ການອຸປະສົມບົດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າດ້ວຍເທີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພວກທ່ານຈົ່ງມາເປັນພິກຂຸເທີ້ນ" ແລ້ວຕັດຕໍ່ໄປວ່າ "ທຳອັນເຮົາກ່າວດີແລ້ວ ພວກທ່ານຈົ່ງປະພຶດພົມມະຈັນເພື່ອເຮັດທີ່ສຸດທຸກໂດຍຊອບເທີ້ນ

ພຣະວາຈານັ້ນ ໄດ້ເປັນການອຸປະສົມບົດຂອງທ່ານເຫຼົ່ານັ້ນ

ຊະດິນເຫຼົ່ານັ້ນ ເຄີຍຜ່າຟືນ ໕໐໐ ທ່ອນ ບໍ່ໄດ້ ກັບຜ່າໄດ້ ດັງໄຟບໍ່ຕິດ ກັບດັງໄຟຕິດ ດັບໄຟບໍ່ໄດ້ ກັບດັບໄດ້ ດ້ວຍການອະທິຖານຂອງພຣະຜູ້ມີພຣະພາກເຈົ້າ

ພຣະຜູ້ມີພຣະພາກເຈົ້າ ຊົງເນຣະມິດພາຊະນະໃສ່ໄຟໄວ້ ໕໐໐ ຊຸດ ປາຕິຫານ ໓,໕໐໐ ວິທີ ຍ່ອມມີໂດຍໄນນີ້

## ອາທິດຕະປະຣິຍາຍະສູດ

[໕໔] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ເຂດອຸຣຸເວລາເສນານິຄົມຕາມພຣະອັດທະຍາໄສໄດ້ສະເດັດຈາຣິກໄປສູ່ເຂດຄະຍາສີສະ ພ້ອມດ້ວຍພິກຂຸໝູ່ໃຫຍ່ ມີປະມານ ໑,໐໐໐ ອົງ ລ້ວນເຄີຍເປັນຊະດິນມາກ່ອນ ໄດ້ຂ່າວວ່າ ພຣະອົງປະທັບຢູ່ ເຂດຄະຍາສີສະ ໃກ້ແມ່ນ້ຳຄະຍານັ້ນ ພ້ອມດ້ວຍພິກຂຸ ໑,໐໐໐ ອົງ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງກັບພິກຂຸທັງຫຼາຍວ່າ

ພິກຂຸທັງຫຼາຍ ສິ່ງທັງປວງເປັນຂອງຮ້ອນ ກໍອັນໃດນໍ? ຊື່ວ່າ ສິ່ງທັງປວງເປັນຂອງຮ້ອນ
ພິກຂຸທັງຫຼາຍ ຈັກຂຸ ເປັນຂອງຮ້ອນ
ພິກຂຸທັງຫຼາຍ ຮູບ ເປັນຂອງຮ້ອນ
ພິກຂຸທັງຫຼາຍ ຈັກຂຸວິນຍານ ເປັນຂອງຮ້ອນ
ພິກຂຸທັງຫຼາຍ ຈັກຂຸສຳຜັດ ເປັນຂອງຮ້ອນ

ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກ ຫຼື ທຸກ ຫຼື ທີ່ບໍ່ແມ່ນສຸກບໍ່ແມ່ນທຸກ ທີ່ເກີດຂື້ນຍ້ອນຈັກຂຸສຳຜັດເປັນປັດໄຈກໍເປັນຂອງຮ້ອນ ຮ້ອນຍ້ອນອັນໃດ ເຮົາກ່າວວ່າ ຮ້ອນຍ້ອນໄຟຄືຣາຄະ ຍ້ອນໄຟຄືໂທສະ ຍ້ອນໄຟຄືໂມຫະ ຮ້ອນຍ້ອນຄວາມເກີດ ຍ້ອນຄວາມແກ່ ຍ້ອນຄວາມຕາຍ ຍ້ອນຄວາມໂສກ ຍ້ອນຄວາມຄ່ຳຄວນ ຍ້ອນທຸກ ຍ້ອນໂທມະນັດ ຍ້ອນຄວາມຄັບແຄ້ນໃຈ

ໂສຕະ (ຫູ) ເປັນຂອງຮ້ອນ ສຽງ ທັງຫຼາຍເປັນຂອງຮ້ອນ ฯລฯ
ຄານະ (ດັງ) ເປັນຂອງຮ້ອນ ກິ່ນ ທັງຫຼາຍເປັນຂອງຮ້ອນ ฯລฯ
ຊິວຫາ (ລີ້ນ) ເປັນຂອງຮ້ອນ ຣົດ ທັງຫຼາຍເປັນຂອງຮ້ອນ ฯລฯ
ກາຍະ ເປັນຂອງຮ້ອນ ໂຜດຖັບບພະ ທັງຫຼາຍເປັນຂອງຮ້ອນ ฯລฯ

ມະນະ (ໃຈ) ເປັນຂອງຮ້ອນ ທຳ (ອາລົມ) ທັງຫຼາຍເປັນຂອງຮ້ອນ ມະໂນວິນຍານ (ຄວາມຮູ້ທາງໃຈ) ເປັນຂອງຮ້ອນ ມະໂນສຳຜັດ (ການກະທົບທາງໃຈ) ເປັນຂອງຮ້ອນ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ທີ່ບໍ່ແມ່ນສຸກບໍ່ແມ່ນທຸກ ທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈ ກໍເປັນຂອງຮ້ອນ ຮ້ອນຍ້ອນອັນໃດ ເຮົາກ່າວວ່າ ຮ້ອນຍ້ອນໄຟຄືຣາຄະ ຍ້ອນໄຟຄືໂທສະ ຍ້ອນໄຟຄືໂມຫະ ຮ້ອນຍ້ອນຄວາມເກີດ ຍ້ອນຄວາມແກ່ ຍ້ອນຄວາມຕາຍ ຍ້ອນຄວາມໂສກ ຍ້ອນຄວາມຄ່ຳຄວນ ຍ້ອນທຸກ ຍ້ອນໂທມະນັດ ຍ້ອນຄວາມຄັບແຄ້ນໃຈ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸ ຍ່ອມເບື່ອໜ່າຍແມ່ນໃນຮູບທັງຫຼາຍ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸວິນຍານ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸສຳຜັດ ຍ່ອມເບື່ອໜ່າຍແມ່ນໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ທີ່ມິແມ່ນສຸກບໍ່ແມ່ນທຸກ ທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈ

ຍ່ອມເບື່ອໜ່າຍແມ່ນໃນ ໂສຕະ ຍ່ອມເບື່ອໜ່າຍແມ່ນໃນສຽງທັງຫຼາຍ ฯລฯ
ຍ່ອມເບື່ອໜ່າຍແມ່ນໃນ ຄານະ ຍ່ອມເບື່ອໜ່າຍແມ່ນໃນກິ່ນທັງຫຼາຍ ฯລฯ
ຍ່ອມເບື່ອໜ່າຍແມ່ນໃນ ຊິວຫາ ຍ່ອມເບື່ອໜ່າຍແມ່ນໃນຣົດທັງຫຼາຍ ฯລฯ
ຍ່ອມເບື່ອໜ່າຍແມ່ນໃນ ກາຍ ຍ່ອມເບື່ອໜ່າຍແມ່ນໃນໂຜດຖັບບພະທັງຫຼາຍ ฯລฯ

ຍ່ອມເບື່ອໜ່າຍແມ່ນໃນ ມະນະ ຍ່ອມເບື່ອໜ່າຍແມ່ນໃນທຳທັງຫຼາຍ ຍ່ອມເບື່ອໜ່າຍແມ່ນໃນມະໂນວິນຍານ ຍ່ອມເບື່ອໜ່າຍແມ່ນໃນມະໂນສຳຜັດ ຍ່ອມເບື່ອໜ່າຍແມ່ນໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ທີ່ບໍ່ແມ່ນສຸກບໍ່ແມ່ນທຸກ ທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈ

ເມື່ອເບື່ອໜ່າຍ ຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ຍ່ອມມີຍານຮູ້ວ່າ ລຸດພົ້ນແລ້ວ ອະຣິຍະສາວົກຍ່ອມຮູ້ແຈ້ງວ່າ ຊາດສິ້ນແລ້ວ ພົມມະຈັນໄດ້ຢູ່ຈົບແລ້ວ ກິດທີ່ຄວນເຮັດໄດ້ເຮັດສຳເລັດແລ້ວ ກິດອື່ນເພື່ອຄວາມເປັນແນວນີ້ບໍ່ມີອີກ

ເມື່ອພຣະຜູ້ມີພຣະພາກເຈົ້າ ຕັດໄວຍາກອນນີ້ຢູ່ ຈິດຂອງພິກຂຸ ໑,໐໐໐ ອົງນັ້ນ ລຸດພົ້ນຈາກອາສະວະທັງຫຼາຍ ຍ້ອນບໍ່ຖືໝັ້ນ

**ອາທິດຕະປະຣິຍາຍະສູດ ຈົບ**

**ອຸຣຸເວລະປາຕິຫາຣິຍະກະຖາ ຈົບ**

**ພານະວານທີ ໖ ຈົບ**

# ໑໓. ພິມພິສາຣະສະມາຄົມກະຖາ

## ວ່າດ້ວຍສະມາຄົມຂອງພຣະເຈົ້າພິມພິສານ

### ເລື້ອງສວນຕານໜຸ່ມ

[໕໕] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ເຂດຄະຍາສີສະຕາມພຣະອັດທະຍາໄສ ແລ້ວໄດ້ສະເດັດຈາຣິກໄປທາງນະຄອນຣາຊະຄືພ້ອມດ້ວຍພິກຂຸໝູ່ໃຫຍ່ ໑,໐໐໐ ອົງ ລ້ວນເຄີຍເປັນຊະດິນທັ້ງຫຼາຍມາກ່ອນ ສະເດັດຈາຣິກໄປຕາມລຳດັບ ຈົນເຖິງນະຄອນຣາຊະຄື ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ຕົ້ນໄຮຕົ້ນໜຶ່ງ ຊື່ວ່າ ສຸປະຕິດຖະເຈດີໃນສວນຕານໜຸ່ມ ເຂດນະຄອນຣາຊະຄືນັ້ນ

ພຣະເຈົ້າພິມພິສານຈອມທັບມະຄົດຣັດໄດ້ຊົງສະດັບຂ່າວວ່າ "ທ່ານພຣະສະມະນະໂຄດົມເປັນສາກະຍະບຸດ ສະເດັດອອກບວດຈາກສາກະຍະຕະກູນ ສະເດັດເຖິງນະຄອນຣາຊະຄືໂດຍລຳດັບ ປະທັບຢູ່ຊ່ວງຕົ້ນໄຮຕົ້ນໜຶ່ງຊື່ ສຸປະຕິດຖະເຈດີໃນສວນຕານໜຸ່ມ ເຂດນະຄອນຣາຊະຄື ທ່ານພຣະໂຄດົມຜູ້ຈະເລີນນັ້ນ ມີກິດຕິສັບອັນງາມຂະຈອນໄປແນວນີ້ວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຊອບ ພຽບພ້ອມດ້ວຍ ວິດຊາແລະຈະຣະນະ ສະເດັດໄປດີ ຣູ້ແຈ້ງໂລກ ເປັນສາຣະຖີຝຶກຜູ້ທີ່ຄວນຝຶກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາ ແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ

ພຣະອົງຊົງຣູ້ແຈ້ງໂລກນີ້ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດດ້ວຍພຣະອົງເອງແລ້ວ ຈຶ່ງຊົງປະກາດໃຫ້ຜູ້ອື່ນຣູ້ຕາມ ຊົງສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນທີ່ສຸດ ຊົງປະກາດພົມມະຈັນ ພ້ອມທັງອັດຖະ ແລະພະຍັນຊະນະບໍລິບູນບໍລິສຸດຄົບຖ້ວນ ການໄດ້ພົບພຣະອະຣະຫັນທັງຫຼາຍແນວນີ້ ເປັນຄວາມດີຢ່າງແທ້ຈິງ

### ເລື້ອງພຣະເຈົ້າພິມພິສານຈອມທັບມະຄົດຣັດ

ຄັ້ງນັ້ນ ພຣະເຈົ້າພິມພິສານຈອມທັບມະຄົດຣັດ ຊົງແວດລ້ອມດ້ວຍພາມຄະຫະບໍດີຊາວມະຄົດ ໑໒ ນະຫຸດ[໑] ສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວ ປະທັບນັ່ງໃນບ່ອນສົມຄວນ

ຝ່າຍພາມຄະຫະບໍດີຊາວມະຄົດ ໑໒ ນະຫຸດເຫຼົ່ານັ້ນ ບາງພວກຖວາຍອະພິວາດພຣະຜູ້ມີ

ພຣະພາກເຈົ້າແລ້ວນັ່ງໃນບ່ອນສົມຄວນ ບາງພວກກໍໄດ້ສົນທະນາປາໄສກັບພຣະຜູ້ມີພຣະພາກພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລະກັນ ແລ້ວນັ່ງໃນບ່ອນສົມຄວນ ບາງພວກກໍປະຄອງອັນຊະລີໄປທາງທີ່ພຣະຜູ້ມີພຣະພາກເຈົ້າປະທັບ ແລ້ວນັ່ງໃນບ່ອນສົມຄວນ ບາງພວກກໍປະກາດນາມ ແລະໂຄດໃນສຳນັກພຣະຜູ້ມີພຣະພາກເຈົ້າ ແລ້ວນັ່ງໃນບ່ອນສົມຄວນ ບາງພວກກໍນັ່ງນິ່ງໃນບ່ອນສົມຄວນ

ຂະນະນັ້ນ ພາມຄະຫະບໍດີຊາວມະຄົດ ໑໘ ນະຫຸດເຫຼົ່ານັ້ນໄດ້ມີຄວາມຄິດດັ່ງນີ້ວ່າ "ພຣະມະຫາສະມະນະປະພຶດພົມມະຈັນໃນສຳນັກພຣະອຸເວລະກັດສະປະ ຫຼື ພຣະອຸເວລະກັດສະປະປະພຶດພົມມະຈັນໃນສຳນັກພຣະມະຫາສະມະນະນໍ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ຄວາມຮ່ຳເພິງໃນໃຈຂອງພາມຄະຫະບໍດີຊາວມະຄົດ ໑໘ ນະຫຸດເຫຼົ່ານັ້ນດ້ວຍພຣະຫະໄທ ຈຶ່ງຕັດເຊື້ອເຊີນທ່ານພຣະອຸເວລະກັດສະປະດ້ວຍຄາຖາວ່າ

ທ່ານຢູ່ອຸຣຸເວລາມາດົນ ເຄີຍເປັນອາຈານສັ່ງສອນໝູ່ຊະດິນຜູ້ຈ່ອຍ ທ່ານເຫັນອຸບາຍອັນໃດ ຈຶ່ງໄດ້ລະໄຟສາ?

ກັດສະປະ ເຮົາຖາມຂໍ້ຄວາມນີ້ກັບທ່ານ
ເປັນຫຍັງ ທ່ານຈຶ່ງລະການບູຊາໄຟຂອງທ່ານສານໍ?

ພຣະອຸເວລະກັດສະປະທູນຕອບວ່າ

"ຍັນທັງຫຼາຍກ່າວສັນເສີນການທັງຫຼາຍ
ຄື ຮູບ ສຽງ ຣົດ ແລະສະຕີທັງຫຼາຍ
ຂ້າພະອົງໄດ້ຮູ້ໃນອຸປະທິ°ວ່າ ນັ້ນເປັນມົນທິນ
ຍ້ອນແນວນັ້ນ ຈຶ່ງບໍ່ໄດ້ຍິນດີໃນການບວງສວງ ບໍ່ໄດ້ຍິນດີໃນການບູຊາ
ກັດສະປະ ໃຈຂອງທ່ານບໍ່ຍິນດີໃນ ຮູບ ສຽງແລະຣົດເຫຼົ່ານັ້ນແລ້ວ
ເມື່ອເປັນແນວນັ້ນ ໃຈຂອງທ່ານຍິນດີໃນສິ່ງໃດນໍ?
ໃນເທວະໂລກ ຫຼື ມະນຸດໂລກ ກັດສະປະ ທ່ານຈົ່ງບອກສິ່ງນັ້ນແກ່ເຮົາ
"ຂ້າພະອົງໄດ້ເຫັນບົດອັນສະງົບ ບໍ່ມີອຸປະທິ ບໍ່ມີກັງວົນ
ບໍ່ຂ້ອງຢູ່ໃນກາມະພົບ ມີອັນບໍ່ປ່ຽນເປັນຢ່າງອື່ນ
ບໍ່ແມ່ນທຳທີ່ຜູ້ອື່ນຈະເພິ່ງແນະນຳໃຫ້ໄດ້
ຍ້ອນແນວນັ້ນ ຂ້າພະອົງຈຶ່ງບໍ່ໄດ້ຍິນດີໃນການບວງສວງບໍ່ໄດ້ຍິນດີໃນການບູຊາ

[໕໖] ລຳດັບນັ້ນ ທ່ານພຣະອຸເວລະກັດສະປະລຸກຂຶ້ນຈາກອາສະນະ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຊົບຫົວແທບພຣະບາດພຣະຜູ້ມີພຣະພາກເຈົ້າ ຂາບທູນວ່າ "ຂ້າແດ່ພຣະອົງຜູ້

ຈະເລີນ ພຣະຜູ້ມີພຣະພາກເຈົ້າເປັນສາດສະດາຂອງຂ້າພະອົງ ຂ້າພະອົງເປັນສາວົກ ຂ້າແດ່ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າເປັນສາດສະດາຂອງຂ້າພະອົງ ຂ້າພະອົງເປັນສາວົກ

ຂະນະນັ້ນ ພາມຄະຫະບໍດີຊາວມະຄົດທັງ ໑໘ ນະຫຸດເຫຼົ່ານັ້ນກໍຮູ້ວ່າ "ພຣະອຸເວລະກັດສະປະປະພຶດພົມມະຈັນໃນສຳນັກພຣະມະຫາສະມະນະແລ້ວ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ຄວາມຮ່ຳເພິງໃນໃຈຂອງພາມຄະຫະບໍດີຊາວມະຄົດ ໑໘ ນະຫຸດເຫຼົ່ານັ້ນ ດ້ວຍພຣະຫະໄທ ຈຶ່ງໄດ້ຕັດອະນຸປຸບພີກະຖາ ຄື ຊົງປະກາດ

໑. ທານະກະຖາ — ໒. ສີລະກະຖາ
໓. ສັກຄະກະຖາ — ໔. ກາມາທີນະວະກະຖາ
໕. ເນກຂຳມານິສັງສະກະຖາ

ເມື່ອພຣະພຸດທະອົງຊົງຊາບວ່າພວກເຂົາມີຈິດສົມຄວນ ອ່ອນໂຍນ ປາສະຈາກນິວອນເບີກບານ ຜ່ອງໃສ ຈຶ່ງຊົງປະກາດສາມຸກກັງສິກະທຳມະເທດສະໜາຂອງພຣະພຸດທະເຈົ້າທັງຫຼາຍ ຄື ທຸກ ສະມຸໄທ ນິໂຣດ ມັກ ທຳມະຈັກຂຸອັນປາສະຈາກທຸລີປາສະຈາກມົນທິນໄດ້ເກີດແກ່ພາມຄະຫະບໍດີຊາວມະຄົດ ໑໑ ນະຫຸດ ເຊິ່ງມີພຣະເຈົ້າພິມພິສານເປັນປະມຸກ ເທິງບ່ອນນັ່ງນັ້ນວ່າ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງປວງ ມີຄວາມດັບໄປເປັນທຳມະດາ" ປຽບ ເໝືອນຜ້າຂາວສະອາດປາສະຈາກມົນທິນຄວນຮັບນ້ຳຍ້ອມໄດ້ເປັນຢ່າງດີ

ພາມຄະຫະບໍດີອີກ ໑ ນະຫຸດ ໄດ້ສະແດງຕົນເປັນອຸປາສົກ

## ເລື້ອງຄວາມປາຖະໜາ ໕ ປະການຂອງພຣະເຈົ້າພິມພິສານ

[໕໗] ຂະນະນັ້ນ ພຣະເຈົ້າພິມພິສານຈອມທັບມະຄົດຮັດໄດ້ເຫັນທຳແລ້ວ ບັນລຸທຳແລ້ວຮູ້ແຈ້ງທຳແລ້ວ ຢັ່ງລົງສູ່ທຳແລ້ວ ຂ້າມຄວາມສົງໄສແລ້ວ ປາສະຈາກຄວາມແຄງໃຈ ເຖິງຄວາມເປັນຜູ້ແກ່ກ້າ ບໍ່ຕ້ອງເຊື່ອຜູ້ອື່ນໃນຄຳສອນຂອງພຣະສາດສະດາ ໄດ້ທູນພຣະຜູ້ມີພຣະພາກເຈົ້າວ່າ "ເມື່ອກ່ອນຂ້ານ້ອຍຍັງເປັນພຣະກຸມານ ໄດ້ມີຄວາມປາຖະໜາ ໕ ປະການ ບັດນີ້ຄວາມປາຖະໜາ ໕ ປະການເຫຼົ່ານັ້ນຂອງຂ້ານ້ອຍສຳເລັດແລ້ວ ຄື

໑. ເມື່ອກ່ອນຂ້ານ້ອຍ ຍັງເປັນພຣະກຸມານໄດ້ມີຄວາມປາຖະໜາວ່າ ເຮັດຈັ່ງໃດນໍ ພະສົກນິກອນເພິ່ງອະພິເສກເຮົາໃນຣາດຊະສົມບັດ ນີ້ເປັນຄວາມປາຖະໜາຂອງຂ້ານ້ອຍປະການທີ ໑ ບັດນີ້ຄວາມປາຖະໜານັ້ນຂອງຂ້ານ້ອຍສຳເລັດແລ້ວ

໒. ຂໍພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ເພິ່ງສະເດັດມາສູ່ແວ່ນແຄວັນຂອງ

ຂ້ານ້ອຍແດ່ ນີ້ເປັນຄວາມປາຖະໜາຂອງຂ້ານ້ອຍປະການທີ ໒ ບັດນີ້ຄວາມປາຖະໜານັ້ນ ຂອງຂ້ານ້ອຍສຳເລັດແລ້ວ

໓. ຂໍຂ້ານ້ອຍເພິ່ງເຂົ້າໄປນັ່ງໃກ້ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ນີ້ເປັນຄວາມປາຖະໜາຂອງຂ້ານ້ອຍປະການທີ ໓ ບັດນີ້ຄວາມປາຖະໜານັ້ນ ຂອງຂ້ານ້ອຍສຳເລັດແລ້ວ

໔. ຂໍພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເພິ່ງສະແດງທຳແກ່ຂ້ານ້ອຍ ນີ້ເປັນຄວາມປາຖະໜາຂອງຂ້ານ້ອຍປະການທີ ໔ ບັດນີ້ຄວາມປາຖະໜານັ້ນ ຂອງຂ້ານ້ອຍສຳເລັດແລ້ວ

໕. ຂໍຂ້ານ້ອຍເພິ່ງຮູ້ທົ່ວເຖິງທຳຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ນີ້ເປັນຄວາມປາຖະໜາຂອງຂ້ານ້ອຍປະການທີ ໕ ບັດນີ້ຄວາມປາຖະໜານັ້ນຂອງຂ້ານ້ອຍສຳເລັດແລ້ວ

ເມື່ອກ່ອນຂ້ານ້ອຍ ຍັງເປັນພຣະກຸມານ ໄດ້ມີຄວາມປາຖະໜາ ໕ ປະການເຫຼົ່ານີ້ ຂ້ານ້ອຍ ບັດນີ້ຄວາມປາຖະໜາ ໕ ປະການເຫຼົ່ານັ້ນຂອງຂ້ານ້ອຍສຳເລັດແລ້ວ ພຣະອົງຜູ້ຈະເລີນ ພາສິດຂອງພຣະອົງຊັດແຈ້ງໄພເລາະມ່ວນຫຼາຍ ພຣະອົງຜູ້ຈະເລີນ ພາສິດຂອງ ພຣະອົງຊັດແຈ້ງໄພເລາະມ່ວນຫຼາຍ ພຣະອົງຊົງປະກາດທຳຊັດແຈ້ງໂດຍປະການຕ່າງ ໆ ປຽບເໝືອນບຸກຄົນຫງາຍຂອງທີ່ຂວ້ຳ ເປີດຂອງທີ່ປິດ ບອກທາງແກ່ຜູ້ຫຼົງທາງ ຫຼື ເຍືອງປະທີບໃນທີ່ມືດ ດ້ວຍຕັ້ງໃຈວ່າ ຄົນມີຕາດີຈັກເຫັນຮູບ ພຣະອົງຜູ້ຈະເລີນຂ້ານ້ອຍນີ້ ຂໍເຖິງພຣະຜູ້ມີພຣະພາກເຈົ້າພ້ອມທັງພຣະທຳ ແລະພຣະສົງເປັນສະຣະນະ ຂໍພຣະຜູ້ມີພຣະພາກເຈົ້າ ຈົ່ງຊົງຈື່ຂ້ານ້ອຍວ່າເປັນອຸປາສົກ ຜູ້ເຖິງສະຣະນະ ຕັ້ງແຕ່ວັນນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ ແລະຂໍພຣະຜູ້ມີພຣະພາກເຈົ້າພ້ອມກັບພິກຂຸສົງ ຊົງຮັບຄຳອາຣາດທະນາຂອງຂ້ານ້ອຍເພື່ອຈະເລີນກຸສົນໃນມື້ອື່ນນີ້ດ້ວຍເທີ້ນ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າ ຊົງຮັບນິມົນໂດຍດຸດສະນີພາບແລ້ວ

ເມື່ອພຣະເຈົ້າພິມພິສານຈອມທັບມະຄົດຣັດ ຊົງຊາບວ່າພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນແລ້ວ ຈຶ່ງສະເດັດລຸກຂຶ້ນຈາກທີ່ປະທັບ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ຊົງກະທຳປະທັກຂິນແລ້ວສະເດັດກັບ ຜ່ານຣາຕີນັ້ນໄປ ຮັບສັ່ງໃຫ້ກະກຽມຂອງຫຍ້ຳຂອງສັນອັນປະນີດໄວ້ແລ້ວໃຫ້ເຈົ້າພະນັກງານໄປຂາບທູນພັດຕະການວ່າ "ໄດ້ເວລາແລ້ວ ຂ້ານ້ອຍ ພັດຕາຫານສຳເລັດແລ້ວ

[໕໗] ເມື່ອເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າ ຊົງອັນຕະຣະວາສົກແລ້ວຖືບາດແລະຈີວອນ ສະເດັດເຂົ້າໄປໃນເມືອງຣາຊະຄືພ້ອມດ້ວຍພິກຂຸສົງໝູ່ໃຫຍ່ມີປະມານ ໑,໐໐໐ ອົງ ລ້ວນເຄີຍເປັນຊະດິນທັ້ງຫຼາຍມາກ່ອນ

ຂະນະນັ້ນ ທ້າວສັກກະຈອມເທບ ຊົງເນຣະມິດເພດເປັນມານົບສະເດັດພຣະດຳເນີນນຳຢູ່ເບື້ອງໜ້າພິກຂຸສົງ ເຊິ່ງມີພຣະພຸດທະເຈົ້າເປັນປະມຸກ ຊົງຂັບຄາຖາເຫຼົ່ານີ້ໄປພ້ອມ ວ່າ

## ຄາຖາສະດຸດີພຣະພຸດທະເຈົ້າ

ພຣະຜູ້ມີພຣະພາກເຈົ້າຊົງມີພຣະສະຫວີວັນສະເໝີດ້ວຍສີຫຼິ້ມຄຳສິງຄີ
ຊົງຝຶກອິນຊີແລ້ວຊົງພົ້ນວິເສດແລ້ວ
ໄດ້ສະເດັດເຂົ້າໄປໃນເມືອງຣາຊະຄືພ້ອມດ້ວຍເຫຼົ່າພິກຂຸທີ່ເຄີຍເປັນຊະດິນ
ຜູ້ຝຶກອິນຊີແລ້ວ ພົ້ນວິເສດແລ້ວ

ພຣະຜູ້ມີພຣະພາກເຈົ້າ ຊົງມີພຣະສະຫວີວັນສະເໝີດ້ວຍສີຫຼິ້ມຄຳສິງຄີ
ຊົງພົ້ນແລ້ວ ຊົງພົ້ນວິເສດແລ້ວ ໄດ້ສະເດັດເຂົ້າໄປໃນເມືອງຣາຊະຄື
ພ້ອມດ້ວຍເຫຼົ່າພິກຂຸທີ່ເຄີຍເປັນຊະດິນຜູ້ພົ້ນແລ້ວ ພົ້ນວິເສດແລ້ວ

ພຣະຜູ້ມີພຣະພາກເຈົ້າ ຊົງມີພຣະສະຫວີວັນສະເໝີດ້ວຍສີຫຼິ້ມຄຳສິງຄີ
ຊົງຂ້າມແລ້ວ ຊົງພົ້ນວິເສດແລ້ວ ໄດ້ສະເດັດເຂົ້າໄປໃນເມືອງຣາຊະຄື
ພ້ອມດ້ວຍເຫຼົ່າພິກຂຸທີ່ເຄີຍເປັນຊະດິນຜູ້ຂ້າມໄດ້ແລ້ວ ພົ້ນວິເສດແລ້ວ

ພຣະຜູ້ມີພຣະພາກເຈົ້າ ຊົງມີພຣະສະຫວີວັນສະເໝີດ້ວຍສີຫຼິ້ມຄຳສິງຄີ
ຊົງສະງົບແລ້ວ ຊົງພົ້ນວິເສດແລ້ວ ໄດ້ສະເດັດເຂົ້າໄປໃນເມືອງຣາຊະຄື
ພ້ອມດ້ວຍເຫຼົ່າພິກຂຸທີ່ເຄີຍເປັນຊະດິນຜູ້ສະງົບແລ້ວ ພົ້ນວິເສດແລ້ວ

ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງຢູ່ຈົບທຳ ໑໐ ປະການ
ຊົງມີທະສະພະລະຍານ ຊົງຮູ້ທຳ ໑໐ ປະການ ແລະຊົງປະກອບ
ດ້ວຍທຳ ໑໐ ປະການ ມີພິກຂຸ ໑,໐໐໐ ອົງເປັນບໍລິວານ
ໄດ້ສະເດັດເຂົ້າໄປໃນເມືອງຣາຊະຄື

ຄົນທັງຫຼາຍ ໄດ້ເຫັນທ້າວສັກກະຈອມເທບແລ້ວພາກັນກ່າວວ່າ "ມານົບນີ້ມີຮູບງາມແທ້ນໍ ມານົບນີ້ເປັນຕາເບິ່ງແທ້ນໍ ມານົບນີ້ໜ້າແທ້ຊົມນໍ ມານົບນີ້ເປັນຜູ້ຮັບໃຊ້ຂອງໃຜນໍ?

ເມື່ອຄົນທັງຫຼາຍກ່າວແນວນັ້ນແລ້ວ ທ້າວສັກກະຈອມເທບໄດ້ຕັດຕອບຄົນເຫຼົ່ານັ້ນ ເປັນຄາຖາ ວ່າ

ພຣະຜູ້ມີພຣະພາກເຈົ້າພຣະອົງໃດ ຊົງເປັນນັກປາດ
ຊົງຝຶກໃນອິນຊີທັງປວງ ເປັນຜູ້ສຸດຜ່ອງ ບໍ່ມີຜູ້ໃດປຽບ
ຊົງໄກຈາກກິເລດ ສະເດັດໄປດີໃນໂລກ
ຂ້າພະເຈົ້າ ເປັນຜູ້ຮັບໃຊ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ

## ເລື້ອງຊົງຮັບພຣະເວລຸວັນໃຫ້ເປັນວັດແຫ່ງທຳອິດ

[໕໙] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ໄດ້ສະເດັດໄປສູ່ພຣະຣາຊະນິເວດຂອງພຣະເຈົ້າພິມພິສານ ຈອມທັບມະຄົດຣັດ ເມື່ອເຖິງແລ້ວຈຶ່ງປະທັບນັ່ງເທິງອາສະນະທີ່ເຂົາຈັດຖວາຍພ້ອມດ້ວຍພິກຂຸສົງ ຂະນະນັ້ນ ພຣະເຈົ້າພິມພິສານຈອມທັບມະຄົດຣັດ ຊົງນຳຂອງຫຍ້ຳຂອງສັນອັນປະນີດປະເຄນພິກຂຸສົງມີພຣະພຸດທະເຈົ້າເປັນປະມຸກດ້ວຍພຣະອົງເອງ ຈົນພຣະຜູ້ມີພຣະພາກເຈົ້າສະເຫວີຍສຳເລັດແລ້ວ ຊົງຫ້າມພັດຕາຫານແລ້ວ ລະພຣະຫັດຈາກບາດ ຈຶ່ງປະທັບນັ່ງໃນບ່ອນສົມຄວນ ພຣະອົງຊົງຄິດວ່າ "ພຣະຜູ້ມີພຣະພາກເຈົ້າຄວນປະທັບຢູ່ໄສນໍ ບ່ອນໃດທີ່ຢູ່ບໍ່ໄກແລະບໍ່ໃກ້ຈາກໝູ່ບ້ານຫຼາຍ ຄົມນາຄົມສະດວກ ຜູ້ປະສົງເພິ່ງເຂົ້າເຝົ້າໄດ້ ກາງເວັນ ບໍ່ສາລະວົນກາງຄືນສະຫງັດ ສຽງບໍ່ອຶກກະທຶກ ເວັ້ນຈາກຄົນສັນຈອນໄປມາ ເປັນສະຖານທີ່ປິດລັບຈາກໝູ່ມະນຸດ ຄວນແກ່ການຫຼີບຫຼີກ ຈຶ່ງມີພຣະຣາຊະດຳຣິວ່າ "ອຸທະຍານເວລຸວັນຂອງເຮົານີ້ບໍ່ໄກແລະບໍ່ໃກ້ຈາກໝູ່ບ້ານຫຼາຍ ຄົມນາຄົມສະດວກ ຜູ້ປະສົງເພິ່ງເຂົ້າເຝົ້າໄດ້ ກາງເວັນບໍ່ສາລະວົນກາງຄືນສະຫງັດ ສຽງບໍ່ອຶກກະທຶກ ເວັ້ນຈາກຄົນສັນຈອນໄປມາ ເປັນສະຖານທີ່ປິດລັບຈາກໝູ່ມະນຸດ ຄວນແກ່ການຫຼີບຫຼີກ ຖ້າຈັ່ງຊັ້ນ ເຮົາເພິ່ງຖວາຍອຸທະຍານເວລຸວັນແດ່ພິກຂຸສົງມີພຣະພຸດທະເຈົ້າເປັນປະມຸກ" ແລ້ວຊົງຈັບພຣະສຸວັນນະພິງຄານ ຫລັ່ງນ້ຳນ້ອມຖວາຍແດ່ ພຣະຜູ້ມີພຣະພາກເຈົ້າດ້ວຍພຣະຣາຊະດຳຣັດວ່າ "ຂ້ານ້ອຍ ຂໍຖວາຍອຸທະຍານເວລຸວັນນີ້ແດ່ ພິກຂຸສົງມີພຣະພຸດທະເຈົ້າເປັນປະມຸກ"

ເມື່ອແລ້ວ ພຣະຜູ້ມີພຣະພາກເຈົ້າ ຊົງຮັບອາຣາມແລ້ວ ຊົງຊີ້ແຈ່ງໃຫ້ພຣະເຈົ້າພິມພິສານຈອມທັບມະຄົດຣັດເຫັນຊັດແຈ້ງ ຊວນໃຫ້ຍາກຮັບໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າປອບປະໂລມໃຈໃຫ້ສົດຊື່ນລ່າເລີງດ້ວຍທຳມີກະຖາ ແລ້ວສະເດັດລຸກຂຶ້ນຈາກທີ່ປະທັບສະເດັດກັບ ຕໍ່ມາ ພຣະພຸດທະອົງ ໄດ້ຊົງສະແດງທຳມີກະຖາຍ້ອນເລື້ອງນັ້ນເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດອາຣາມ"

**ພິມພິສາຣະສະມາຄົມກະຖາ ຈົບ**

# ໑໔. ສາຣິປຸດຕະໂມກຄັນລານະປັບພັດຊາກະຖາ

## ວ່າດ້ວຍສາຣີບຸດແລະໂມກຄັນລານະບັນພະຊາ

[໒໐] ສະໄໝນັ້ນ ສັນໄຊປະຣິພາຊົກອາໄສຢູ່ໃນນະຄອນຣາຊະຄຶພ້ອມດ້ວຍບໍລິສັດປະຣິພາຊົກໝູ່ໃຫຍ່ຈຳນວນ ໒໕໐ ທ່ານ ຄັ້ງນັ້ນ ສາຣີບຸດ ແລະໂມກຄັນລານະປະພຶດພົມມະຈັນຢູ່ໃນສຳນັກສັນໄຊປະຣິພາຊົກ ໄດ້ຕັ້ງກະຕິກາກັນໄວ້ວ່າ "ຜູ້ໃດບັນລຸອະມະຕະທຳກ່ອນ ຜູ້ນັ້ນຈົ່ງບອກແກ່ອີກຝ່າຍໜຶ່ງ

ຂະນະນັ້ນເວລາເຊົ້າ ທ່ານພຣະອັດສະຊິຄອງອັນຕະຣະວາສົກຖືບາດແລະຈີວອນ ເຂົ້າໄປບິນທະບາດໃນເມືອງຣາຊະຄຶ ມີກິຣິຍາທີ່ກ້າວໄປ ຖອຍກັບ ແນມເບິ່ງ ຫຼຽວເບິ່ງ ຄູ້ເຂົ້າ ຢຽດອອກ ດ້ວຍອາການທີ່ໜ້າເຫຼື້ອມໃສ ມີຈັກຂຸທອດລົງ ເຖິງພ້ອມດ້ວຍອິລິຍາບົດອັນງົດງາມ

ສາຣີບຸດປະຣິພາຊົກໄດ້ເຫັນທ່ານພຣະອັດສະຊິ ກຳລັງທ່ຽວບິນທະບາດຢູ່ໃນນະຄອນຣາຊະຄຶ ມີກິຣິຍາກ້າວໄປ ຖອຍກັບ ແນມເບິ່ງ ຫຼຽວເບິ່ງ ຄູ້ເຂົ້າ ຢຽດອອກ ໜ້າເຫຼື້ອມໃສ ມີຈັກຂຸທອດລົງ ເຖິງພ້ອມດ້ວຍອິລິຍາບົດອັນງົດງາມແລ້ວຄິດວ່າ "ພິກຂຸອົງນີ້ ຄົງເປັນອົງໃດອົງໜຶ່ງໃນບັນດາພຣະອະຣະຫັນ ຫຼື ທ່ານຜູ້ດຳເນີນສູ່ຫົນທາງແຫ່ງຄວາມເປັນພຣະອະຣະຫັນໃນໂລກແນ່ນອນ ຖ້າຈັ່ງໃດ ເຮົາເພິ່ງເຂົ້າໄປຫາພິກຂຸນີ້ຖາມວ່າ ຜູ້ມີອາຍຸ ທ່ານບວດອຸທິດຜູ້ໃດ ໃຜເປັນສາດສະດາຂອງທ່ານ ຫຼື ທ່ານພໍໃຈທຳຂອງໃຜ" ແລ້ວຄິດວ່າ "ບັດນີ້ ຍັງເປັນການບໍ່ສົມຄວນທີ່ຈະຖາມພິກຂຸນີ້ ຍ້ອນທ່ານກຳລັງເຂົ້າໃນບໍລິເວນບ້ານທ່ຽວບິນທະບາດຢູ່ ຖ້າຈັ່ງໃດ ເຮົາຄວນຕິດຕາມ ພິກຂຸນີ້ໄປຂ້າງຫຼັງ ຍ້ອນການຕິດຕາມໄປຂ້າງຫຼັງນີ້ ເປັນຫົນທາງທີ່ຜູ້ມີຄວາມຕ້ອງການຮູ້ຄວນເຮັດ ຕໍ່ມາ ທ່ານພຣະອັດສະຊິໄດ້ທ່ຽວບິນທະບາດໃນນະຄອນຣາຊະຄຶ ຮັບບິນທະບາດແລ້ວກັບ

ລຳດັບນັ້ນ ສາຣີບຸດປະຣິພາຊົກ ຈຶ່ງເຂົ້າໄປຫາທ່ານພຣະອັດສະຊິ ແລ້ວໄດ້ສົນທະນາປາໄສ ພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ຢືນຢູ່ບ່ອນສົມຄວນ ຮຽນຖາມ ວ່າ ຜູ້ມີອາຍຸອິນຊີຂອງທ່ານຜ່ອງໃສ ຜິວພັນບໍລິສຸດຜຸດຜ່ອງ ຜູ້ມີອາຍຸ ທ່ານບວດອຸທິດຜູ້ໃດ ໃຜເປັນສາດສະດາຂອງທ່ານ ຫຼື ທ່ານພໍໃຈທຳຂອງໃຜ?

ພຣະອັດສະຊິກ່າວຕອບວ່າ "ເຮົາ ມີພຣະມະຫາສະມະນະຜູ້ເປັນສາກະຍະບຸດ ສະເດັດອອກບວດຈາກສາກະຍະຕະກູນ ເຮົາບວດອຸທິດພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນສາດສະດາຂອງເຮົາ ແລະເຮົາພໍໃຈທຳຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ

ກໍພຣະສາດສະດາຂອງທ່ານຕັດໄວ້ແນວໃດ? ມີປົກກະຕິສອນແນວໃດ?

ທ່ານ ເຮົາເປັນຜູ້ໃໝ່ ບວດບໍ່ດົນ ເພິ່ງມາສູ່ພຣະທຳວິໄນນີ້ ບໍ່ສາມາດສະແດງທຳໂດຍພິສະດານແກ່ທ່ານໄດ້ ແຕ່ຈັກກ່າວແຕ່ໃຈຄວາມໂດຍຫຍໍ້ແກ່ທ່ານ

ໃນບັດນັ້ນ ສາຣີບຸດປະຣິພາຊົກຂາບຮຽນທ່ານພຣະອັດສະຊິວ່າ

ຖ້າຈັ່ງຊັ້ນແລ້ວ ຜູ້ມີອາຍຸ ຈະໜ້ອຍຍ ຫຼື ຫຼາຍກໍຕາມ ຈົ່ງກ່າວມາເທີ້ນ
ຈົ່ງກ່າວແຕ່ໃຈຄວາມແກ່ຂ້າພະເຈົ້າ
ຂ້າພະເຈົ້າຕ້ອງການແຕ່ໃຈຄວາມເທົ່ານັ້ນ
ທ່ານຈັກສະແດງພະຍັນຊະນະໃຫ້ຫຼາຍໄປເຮັດຫຍັງ

## ພຣະອັດສະຊິສະແດງທຳ

ລຳດັບນັ້ນ ທ່ານພຣະອັດສະຊິໄດ້ກ່າວທຳປະຣິຍາຍນີ້ແກ່ສາຣີບຸດປະຣິພາຊົກ ວ່າ

ທຳເຫຼົ່າໃດ ເກີດແຕ່ເຫດ
ພຣະຕະຖາຄົດເຈົ້າຕັດເຫດແຫ່ງທຳເຫຼົ່ານັ້ນ
ແລະຄວາມດັບແຫ່ງທຳເຫຼົ່ານັ້ນ
ພຣະມະຫາສະມະນະ ມີປົກກະຕິຕັດແນວນີ້"

## ສາຣີບຸດປະຣິພາຊົກໄດ້ທຳມະຈັກຂຸ

ຍ້ອນໄດ້ຟັງທຳປະຣິຍາຍນີ້ ທຳມະຈັກຂຸ ອັນປາສະຈາກທຸລີ ປາສະຈາກມົນທິນໄດ້ເກີດຂຶ້ນແກ່ສາຣີບຸດປະຣິພາຊົກວ່າ "ສິ່ງໃດສິ່ງໜຶ່ງ ມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງປວງມີຄວາມດັບໄປເປັນທຳມະດາ" ສາຣີບຸດປະຣິພາຊົກກ່າວ ວ່າ

ຖ້າທຳນີ້ ມີພຽງເທົ່ານີ້
ທ່ານກໍໄດ້ຮູ້ແຈ້ງແທງຕະຫຼອດທາງອັນຫາຄວາມໂສກບໍ່ໄດ້ແລ້ວ
ອັນເປັນທາງທີ່ພວກຂ້າພະເຈົ້າຍັງບໍ່ເຄີຍໄດ້ເຫັນ
ລ່ວງເລີຍມາແລ້ວຫຼາຍໝື່ນກັບ

## ສາຣີບຸດປະຣິພາຊົກເຮັດຕາມຄຳສັນຍາ

[໒໑] ຄັ້ງນັ້ນ ສາຣີບຸດປະຣິພາຊົກໄດ້ກັບໄປຫາໂມກຄັນລານະປະຣິພາຊົກເຖິງທີ່ພັກ ໂມກຄັນລານະປະຣິພາຊົກ ໄດ້ເຫັນສາຣີບຸດປະຣິພາຊົກຍ່າງມາແຕ່ໄກ ເມື່ອເຫັນແລ້ວຈຶ່ງໄດ້

ກ່າວກັບສາຣີບຸດປະຣິພາຊົກ ດັ່ງນີ້ວ່າ "ທ່ານ ອິນຊີຂອງທ່ານຜ່ອງໃສ ຜິວພັນບໍລິສຸດຜຸດຜ່ອງ ຫຼາຍ ທ່ານໄດ້ບັນລຸອະມະຕະທຳແລ້ວແມ່ນບໍ?"

ສາຣີບຸດປະຣິພາຊົກຕອບວ່າ "ແມ່ນແລ້ວທ່ານ ເຮົາໄດ້ບັນລຸອະມະຕະທຳແລ້ວ"

ທ່ານ ທ່ານໄດ້ບັນລຸອະມະຕະທຳໄດ້ແນວໃດ?

ທ່ານ ເຮົາໄດ້ເຫັນທ່ານພຣະອັດສະຊິກຳລັງທ່ຽວບິນທະບາດຢູ່ໃນນະຄອນຣາຊະຄຶ ມີກິຣິຍາກ້າວໄປ ຖອຍກັບ ແນມເບິ່ງ ຫຼຽວເບິ່ງ ຄູ້ເຂົ້າ ຢຽດອອກ ໜ້າເຫຼື້ອມໃສ ມີຈັກຂຸທອດລົງ ເຖິງພ້ອມດ້ວຍອິລິຍາບົດອັນງົດງາມແລ້ວຄິດວ່າ ພິກຂຸອົງນີ້ ຄົງເປັນອົງໃດອົງໜຶ່ງໃນບັນດາພຣະອະຣະຫັນ ຫຼື ທ່ານຜູ້ດຳເນີນສູ່ຫົນທາງແຫ່ງຄວາມເປັນພຣະອະຣະຫັນໃນໂລກແນ່ນອນ ຖ້າຈັ່ງໃດ ເຮົາເພິ່ງເຂົ້າໄປຫາພິກຂຸນີ້ຖາມວ່າ ຜູ້ມີອາຍຸ ທ່ານບວດອຸທິດຜູ້ໃດ ໃຜເປັນສາດສະດາຂອງທ່ານ ຫຼື ທ່ານຊອບທຳຂອງໃຜ ແລ້ວຄິດວ່າ ບັດນີ້ ຍັງເປັນການບໍ່ສົມຄວນທີ່ຈະຖາມພິກຂຸນີ້ ຍ້ອນທ່ານກຳລັງເຂົ້າໃນບໍລິເວນບ້ານທ່ຽວບິນທະບາດຢູ່ ຖ້າຈັ່ງໃດ ເຮົາຄວນຕິດຕາມພິກຂຸນີ້ໄປຂ້າງຫຼັງ ຍ້ອນການຕິດຕາມໄປຂ້າງຫຼັງນີ້ ເປັນຫົນທາງທີ່ຜູ້ມີຄວາມຕ້ອງການຮູ້ຄວນເຮັດ ຕໍ່ມາ ເມື່ອທ່ານພຣະອັດສະຊິໄດ້ທ່ຽວບິນທະບາດໃນນະຄອນຣາຊະຄຶ ຮັບບິນທະບາດແລ້ວກັບ

ລຳດັບນັ້ນ ເຮົາຈຶ່ງເຂົ້າໄປຫາທ່ານພຣະອັດສະຊິ ແລ້ວໄດ້ສົນທະນາປາໄສພໍເປັນທີ່ບັນເທິງໃຈ ພໍເປັນທີ່ຣະນຶກເຖິງກັນແລະກັນແລ້ວ ຢືນຢູ່ບ່ອນສົມຄວນ ຮຽນຖາມ ວ່າ ຜູ້ມີອາຍຸ ອິນຊີຂອງທ່ານຜ່ອງໃສ ຜິວພັນບໍລິສຸດຜຸດຜ່ອງ ຜູ້ມີອາຍຸ ທ່ານບວດອຸທິດຜູ້ໃດ ໃຜເປັນສາດສະດາຂອງທ່ານ ຫຼື ທ່ານພໍໃຈທຳຂອງໃຜນໍ?

ພຣະອັດສະຊິກ່າວຕອບວ່າ "ເຮົາ ມີພຣະມະຫາສະມະນະຜູ້ເປັນສາກະຍະບຸດ ສະເດັດອອກຜະນວດຈາກສາກະຍະຕະກູນ ເຮົາບວດອຸທິດພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນສາດສະດາຂອງເຮົາ ແລະເຮົາພໍໃຈທຳຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ

ເຮົາຈຶ່ງຖາມວ່າ ກໍພຣະສາດສະດາຂອງທ່ານຕັດແນວໃດ? ມີປົກກະຕິສອນແນວໃດ?

ທ່ານພຣະອັດສະຊິກ່າວວ່າ ທ່ານ ເຮົາເປັນຜູ້ໃໝ່ ບວດບໍ່ດົນ ຫາກໍມາສູ່ພຣະທຳວິໄນນີ້ ບໍ່ສາມາດສະແດງທຳໂດຍພິສະດານແກ່ທ່ານໄດ້ ແຕ່ຈັກກ່າວແຕ່ໃຈຄວາມໂດຍຫຍໍ້ແກ່ທ່ານ

ໃນບັດນັ້ນ ເຮົາຈຶ່ງຂາບຮຽນທ່ານພຣະອັດສະຊິວ່າ

ຖ້າຈັ່ງຊັ້ນແລ້ວ ຜູ້ມີອາຍຸຈະໜ້ອຍ ຫຼື ຫຼາຍກໍຕາມ ຈົ່ງກ່າວເທີ້ນ
ຈົ່ງກ່າວແຕ່ໃຈຄວາມແກ່ຂ້າພະເຈົ້າ
ຂ້າພະເຈົ້າຕ້ອງການແຕ່ໃຈຄວາມເທົ່ານັ້ນ
ທ່ານຈັກສະແດງພະຍັນຊະນະໃຫ້ຫຼາຍໄປເຮັດຫຍັງ

ລຳດັບນັ້ນ ທ່ານພຣະອັດສະຊິໄດ້ກ່າວທຳປະຣິຍາຍນີ້ວ່າ

ທຳເຫຼົ່າໃດເກີດແຕ່ເຫດ
ພຣະຕະຖາຄົດເຈົ້າຕັດເຫດແຫ່ງທຳເຫຼົ່ານັ້ນ
ແລະຄວາມດັບແຫ່ງທຳເຫຼົ່ານັ້ນ
ພຣະມະຫາສະມະນະມີປົກກະຕິຕັດແນວນີ້

## ໂມກຄັນລານະປະຣິພາຊົກໄດ້ທຳມະຈັກຂຸ

ຍ້ອນໄດ້ຟັງທຳປະຣິຍາຍນີ້ ທຳມະຈັກຂຸ ອັນປາສະຈາກທຸລີ ປາສະຈາກມົນທິນໄດ້ເກີດຂຶ້ນແກ່ໂມກຄັນລານະປະຣິພາຊົກວ່າ "ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງປວງມີຄວາມດັບໄປເປັນທຳມະດາ" ໂມກຄັນລານະປະຣິພາຊົກກ່າວ ວ່າ

ຖ້າທຳນີ້ ມີພຽງເທົ່ານີ້
ທ່ານກໍໄດ້ຮູ້ແຈ້ງແທງຕະຫຼອດທາງອັນຫາຄວາມໂສກບໍ່ໄດ້ແລ້ວ
ອັນເປັນທາງທີ່ພວກເຮົາຍັງບໍ່ເຄີຍໄດ້ເຫັນ
ລ່ວງເລີຍມາແລ້ວຫຼາຍໝື່ນກັບ

## ສອງສະຫາຍໄປອຳລາອາຈານ

[໗໘] ຄັ້ງນັ້ນ ໂມກຄັນລານະປະຣິພາຊົກໄດ້ກ່າວກັບສາຣີບຸດປະຣິພາຊົກວ່າ "ທ່ານ ເຮົາໄປສຳນັກພຣະຜູ້ມີພຣະພາກເຈົ້າກັນເທີ້ນ ຍ້ອນພຣະອົງເປັນສາດສະດາຂອງເຮົາ

ສາຣີບຸດປະຣິພາຊົກກ່າວວ່າ "ທ່ານ ປະຣິພາຊົກ ໒໕໐ ຄົນເຫຼົ່ານີ້ ອາໄສເຮົາ ເຫັນແກ່ເຮົາ ຈຶ່ງຢູ່ໃນສຳນັກນີ້ ເຮົາຄວນບອກລາປະຣິພາຊົກເຫຼົ່ານັ້ນກ່ອນ ພວກເຂົາຈັກເຮັດຕາມທີ່ເຂົາເຂົ້າໃຈ

ຕໍ່ມາ ສາຣີບຸດ ແລະໂມກຄັນລານະພາກັນເຂົ້າໄປຫາປະຣິພາຊົກເຫຼົ່ານັ້ນເຖິງທີ່ຢູ່ ໄດ້ກ່າວດັ່ງນີ້ວ່າ "ທ່ານທັງຫຼາຍ ພວກເຮົາຈະໄປສຳນັກພຣະຜູ້ມີພຣະພາກເຈົ້າ ຍ້ອນພຣະອົງເປັນສາດສະດາຂອງພວກເຮົາ

ພວກປະຣິພາຊົກກ່າວວ່າ "ຂ້າພະເຈົ້າທັງຫຼາຍອາໄສພວກທ່ານ ເຫັນແກ່ພວກທ່ານ ຈຶ່ງຢູ່ໃນສຳນັກນີ້ ຖ້າທ່ານທັງສອງຈັກປະພຶດພົມມະຈັນໃນສຳນັກພຣະມະຫາສະມະນະ ຂ້າພະເຈົ້າທັງໝົດ ກໍຈັກປະພຶດພົມມະຈັນໃນສຳນັກພຣະມະຫາສະມະນະດ້ວຍ

ຕໍ່ມາ ສາຣີບຸດ ແລະໂມກຄັນລານະພາກັນເຂົ້າໄປຫາສັນໄຊປະຣິພາຊົກຂາບຮຽນວ່າ "ທ່ານ

ຂ້ານ້ອຍ ພວກຂ້າພະເຈົ້າຈະໄປສຳນັກພຣະຜູ້ມີພຣະພາກເຈົ້າ ຍ້ອນພຣະອົງເປັນສາດສະດາຂອງພວກຂ້າພະເຈົ້າ

ສັນໄຊປະຣິພາຊົກກ່າວຫ້າມວ່າ "ຢ່າເລີຍ ທ່ານທັງຫຼາຍຢ່າໄປ ເຮົາທັງໝົດ ໓ ຄົນ ຈັກຊ່ອຍກັນບໍລິຫານຄະນະນີ້"

ແມ່ນຄັ້ງທີ ໔ ໆລໆ

ແມ່ນຄັ້ງທີ ໓ ສາຣີບຸດແລະໂມກຄັນລານະ ກໍຂາບຮຽນສັນໄຊປະຣິພາຊົກດັ່ງນີ້ວ່າ "ທ່ານ ຂ້ານ້ອຍ ພວກຂ້າພະເຈົ້າຈະໄປສຳນັກພຣະຜູ້ມີພຣະພາກເຈົ້າ ຍ້ອນພຣະອົງເປັນສາດສະດາຂອງພວກຂ້າພະເຈົ້າ

ສັນໄຊປະຣິພາຊົກກໍຍັງກ່າວຫ້າມວ່າ "ຢ່າເລີຍ ທ່ານທັງຫຼາຍຢ່າໄປ ເຮົາທັງໝົດ ໓ ຄົນຈັກຊ່ອຍກັນບໍລິຫານຄະນະນີ້"

ຫຼັງຈາກນັ້ນ ສາຣີບຸດ ແລະໂມກຄັນລານະໄດ້ພາປະຣິພາຊົກ ໔໕໐ ຄົນນັ້ນ ມຸ້ງໜ້າໄປທາງພຣະເວລຸວັນ ໂລຫິດຮ້ອນກໍພຸ່ງອອກຈາກປາກຂອງສັນໄຊປະຣິພາຊົກ ໃນບ່ອນນັ້ນເອງ

## ຊົງພະຍາກອນພຣະອັກຄະຣະສາວົກ

ພຣະຜູ້ມີພຣະພາກເຈົ້າ ເມື່ອຮູ້ວ່າ ສາຣີບຸດແລະໂມກຄັນລານະກຳລັງມາ ໄດ້ມີຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ສະຫາຍທັງ ໒ ຄົນນັ້ນ ຄືໂກລິຕະ ແລະອຸປະຕິດສະຈັກເປັນຄູ່ສາວົກຊັ້ນຍອດ ເປັນຄູ່ທີ່ຈະເລີນຂອງເຮົາ

ທ່ານສາຣີບຸດ ແລະທ່ານໂມກຄັນລານະ ຜູ້ນ້ອມຈິດໄປໃນທຳ
ອັນປະເສີດ ເລິກເຊິ່ງ ເປັນວິໄສແຫ່ງຍານ ເປັນທີ່ສິ້ນອຸປະທິ
ຍັງມາບໍ່ເຖິງພຣະເວລຸວັນ ພຣະສາດສະດາກໍຊົງພະຍາກອນແລ້ວວ່າ
ສະຫາຍທັງ ໒ ຄົນນັ້ນ ຄືໂກລິຕະແລະອຸປະຕິດສະ
ຈັກເປັນຄູ່ສາວົກຊັ້ນຍອດ ເປັນຄູ່ທີ່ຈະເລີນຂອງເຮົາ

## ທູນຂໍການບັນພະຊາອຸປະສົມບົດ

ຕໍ່ມາ ສາຣີບຸດ ແລະໂມກຄັນລານະໄດ້ພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ແລ້ວຊົບຫົວແທບພຣະບາດຂອງພຣະຜູ້ມີພຣະພາກເຈົ້າ ຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ພວກຂ້າພະອົງເພິ່ງໄດ້ການບັນພະຊາ ເພິ່ງໄດ້ການອຸປະສົມບົດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພວກທ່ານຈົ່ງມາເປັນພິກຂຸເທີ້ນ" ແລ້ວຕັດຕໍ່ໄປວ່າ "ທຳອັນເຮົາກ່າວດີແລ້ວ ພວກທ່ານຈົ່ງປະພຶດພົມມະຈັນເພື່ອເຮັດທີ່ສຸດທຸກໂດຍຊອບເທີ້ນ

ພຣະວາຈານັ້ນແລ ໄດ້ເປັນການອຸປະສົມບົດຂອງທ່ານເຫຼົ່ານັ້ນ໑

## ເລື້ອງກຸນລະບຸດຊາວມະຄົດຜູ້ມີຊື່ສຽງບັນພະຊາ

[໗໓] ສະໄໝນັ້ນ ພວກກຸນລະບຸດຊາວມະຄົດທີ່ມີຊື່ສຽງ ພາກັນປະພຶດພົມມະຈັນໃນສຳນັກພຣະຜູ້ມີພຣະພາກເຈົ້າ ຄົນທັງຫຼາຍຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ "ພຣະສະມະນະໂຄດົມປະຕິບັດເພື່ອໃຫ້ຊາຍບໍ່ມີບຸດ ເພື່ອໃຫ້ຍິງເປັນໝ້າຍ ແລະເພື່ອຄວາມຂາດສູນແຫ່ງຕະກູນ ບັດນີ້ ພຣະສະມະນະໂຄດົມບວດຊະດິນ ໑,໐໐໐ ຄົນໄປແລ້ວ ແລະບວດປະຣິພາຊົກຜູ້ເປັນສິດຂອງສັນຊັຍ ໒໕໐ ຄົນໄປແລ້ວ ແລະພວກກຸນລະບຸດຊາວມະຄົດເຫຼົ່ານີ້ທີ່ມີຊື່ສຽງ ກໍພາກັນປະພຶດພົມມະຈັນໃນສຳນັກພຣະສະມະນະໂຄດົມອີກ

ອັນໜຶ່ງ ຄົນທັງຫຼາຍເຫັນພວກພິກຂຸກໍພາກັນໂຈດດ້ວຍຄາຖານີ້ວ່າ

ພຣະມະຫາສະມະນະ ສະເດັດມາສູ່
ພຣະນະຄອນທີ່ມີພູເປັນຮົ້ວອ້ອມຂອງຊາວມະຄົດ
ຊົງນຳປະຣິພາຊົກຜູ້ເປັນສິດຂອງສັນໄຊໄປໝົດແລ້ວ
ບັດນີ້ຍັງຈັກຊົງນຳໃຜໄປອີກນໍ

ພິກຂຸທັງຫຼາຍ ໄດ້ຍິນຄົນພວກນັ້ນຕຳໜິ ປະນາມ ໂພນທະນາ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ສຽງນັ້ນ ຢູ່ບໍ່ດົນຈັກມີພຽງ ໗ ວັນເທົ່ານັ້ນ ພົ້ນ ໗ ວັນນັ້ນໄປແລ້ວ ຈັກຫາຍໄປເອງ ພິກຂຸທັງຫຼາຍ ຖ້າແນວນັ້ນ ຊົນເຫຼົ່າໃດໂຈດພວກທ່ານດ້ວຍຄາຖານີ້ວ່າ

ພຣະມະຫາສະມະນະສະເດັດມາສູ່ພຣະນະຄອນທີ່ມີພູເປັນຮົ້ວອ້ອມຂອງ
ຊາວມະຄົດ
ຊົງນຳປະຣິພາຊົກຜູ້ເປັນສິດຂອງສັນໄຊໄປໝົດແລ້ວ
ບັດນີ້ຈັກຊົງນຳໃຜໄປອີກນໍ

ພວກທ່ານຈົ່ງໂຈດຕອບພວກນັ້ນດ້ວຍຄາຖານີ້ ວ່າ

ພຣະຕະຖາຄົດເຈົ້າທັງຫຼາຍ ຊົງມີຄວາມພຽນຫຼາຍ

ຊົງແນະນຳດ້ວຍພຣະສັດທຳ ເມື່ອຮູ້ຊັດແຈ້ງ (ແນວນີ້)
ຈະຕ້ອງຢ້ານລື່ນພຣະຕະຖາຄົດເຈົ້າຜູ້ຊົງແນະນຳໂດຍທຳໄປເຮັດຫຍັງນໍ

ສະໄໝນັ້ນ ຄົນທັງຫຼາຍເຫັນພວກພິກຂຸກໍພາກັນໂຈດດ້ວຍຄາຖານີ້ວ່າ

ພຣະມະຫາສະມະນະສະເດັດມາສູ່ພຣະນະຄອນທີ່ມີພູເປັນຮົ້ວອ້ອມຂອງ
ຊາວມະຄົດ
ຊົງນຳປະຣິພາຊົກຜູ້ເປັນສິດຂອງສັນໄຊໄປໝົດແລ້ວ
ບັດນີ້ຈັກຊົງນຳໃຜໄປອີກນໍ

ພິກຂຸທັງຫຼາຍກໍໂຈດຕອບຄົນພວກນັ້ນດ້ວຍຄາຖານີ້ວ່າ

ພຣະຕະຖາຄົດເຈົ້າທັງຫຼາຍຊົງມີຄວາມພຽນຫຼາຍ
ຊົງແນະນຳດ້ວຍພຣະສັດທຳ ເມື່ອຮູ້ແຈ້ງ (ແນວນີ້)
ຈະຕ້ອງຢ້ານລື່ນພຣະຕະຖາຄົດເຈົ້າຜູ້ຊົງແນະນຳໂດຍທຳໄປເຮັດຫຍັງນໍ

ຄົນທັງຫຼາຍກ່າວກັນແນວນີ້ວ່າ "ໄດ້ຍິນວ່າ ພຣະສະມະນະຜູ້ເປັນເຊື້ອສາຍສາກະຍະບຸດທັງຫຼາຍ ຍ່ອມແນະນຳໂດຍທຳ ຍ່ອມບໍ່ແນະນຳໂດຍອະທຳ ສຽງນັ້ນມີຢູ່ພຽງ ໗ ວັນເທົ່ານັ້ນ ພົ້ນ ໗ ວັນ ກໍຫາຍໄປເອງ

**ສາຣີປຸດຕະໂມກຄັນລານະປັບພັດຊາກະຖາ ຈົບ**

**ພານະວານທີ ໔ ຈົບ**

# ໑໕. ອຸປັດຊາຍະວັດຕະກະຖາ

## ວ່າດ້ວຍອຸປັດຊາຍະວັດ

## ເລື້ອງພິກຂຸນຸ່ງຫົ່ມບໍ່ຮຽບຮ້ອຍ

[໖໔] ສະໄໝນັ້ນ ພິກຂຸທັງຫຼາຍ ຍັງບໍ່ມີພຣະອຸປັດຊາ ບໍ່ມີຜູ້ຖ້າຕັກເຕືອນ ສັ່ງສອນ ຈຶ່ງພາກັນນຸ່ງຫົ່ມບໍ່ຮຽບຮ້ອຍ ມີມາຣະຍາດບໍ່ສົມຄວນ ທ່ຽວບິນທະບາດຢູ່ ເມື່ອຄົນທັງຫຼາຍກຳລັງບໍຣິໂພກຢູ່ ກໍເດ່ບາດສຳລັບບິນທະບາດ ໄປເທິງຂອງຫຍ້ຳແດ່ ເທິງຂອງສັນແດ່ ເທິງນ້ຳດື່ມແດ່ ອອກປາກຂໍແກງແດ່ ເຂົ້າສຸກແດ່ ດ້ວຍຕົນເອງມາສັນ ສົ່ງສຽງດັງໃນໂຮງສັນແດ່

ຄົນທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ສະມະນະເຊື້ອສາຍສາ

ກະຍະບຸດທັງຫຼາຍ ຈຶ່ງນຸ່ງຫົ່ມບໍ່ຮຽບຮ້ອຍ ມີມາຣະຍາດບໍ່ສົມຄວນ ທ່ຽວບິນທະບາດ ເມື່ອຄົນທັງຫຼາຍກຳລັງບໍຣິໂພກຢູ່ ກໍເດ່ບາດສຳລັບບິນທະບາດ ໄປເທິງຂອງຫຍ້ຳແດ່ ເທິງຂອງສັນແດ່ ເທິງນ້ຳດື່ມແດ່ ອອກປາກຂໍແກງແດ່ ເຂົ້າສຸກແດ່ ດ້ວຍຕົນເອງມາສັນ ສົ່ງສຽງດັງໃນໂຮງສັນແດ່ ເໝືອນພວກພາມໃນສະຖານທີ່ລ້ຽງພາມສັນນັ້ນບໍ"

ພິກຂຸທັງຫຼາຍໄດ້ຍິນຄົນເຫຼົ່ານັ້ນກ່າວຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍສັນໂດດ ມີຄວາມລະອາຍ ມີຄວາມລະມັດລະວັງ ໃຝ່ການສຶກສາ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸທັງຫຼາຍ ຈຶ່ງນຸ່ງຫົ່ມບໍ່ຮຽບຮ້ອຍ ມີມາຣະຍາດບໍ່ສົມຄວນ ທ່ຽວບິນທະບາດ ເມື່ອຄົນທັງຫຼາຍກຳລັງບໍຣິໂພກຢູ່ ກໍເດ່ບາດສຳລັບບິນທະບາດ ໄປເທິງຂອງຫຍ້ຳແດ່ ເທິງຂອງສັນແດ່ ເທິງນ້ຳດື່ມແດ່ ອອກປາກຂໍແກງແດ່ ເຂົ້າສຸກແດ່ ດ້ວຍຕົນເອງມາສັນ ສົ່ງສຽງດັ່ງໃນໂຮງສັນແນວນັ້ນບໍ" ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງປະຊຸມສົງສອບຖາມ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງໃຫ້ປະຊຸມພິກຂຸສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າພວກພິກຂຸນຸ່ງຫົ່ມບໍ່ຮຽບຮ້ອຍ ມີມາຣະຍາດບໍ່ສົມຄວນ ທ່ຽວບິນທະບາດ ເມື່ອຄົນທັງຫຼາຍກຳລັງບໍຣິໂພກຢູ່ ກໍເດ່ບາດສຳລັບບິນທະບາດ ໄປເທິງຂອງຫຍ້ຳແດ່ ເທິງຂອງສັນແດ່ ເທິງນ້ຳດື່ມແດ່ ອອກປາກຂໍແກງແດ່ ເຂົ້າສຸກແດ່ ດ້ວຍຕົນເອງມາສັນ ແມ່ນໃນໂຮງສັນກໍສົ່ງສຽງດັງພືດສະນັ້ນຢູ່ ແມ່ນບໍ?"

ພິກຂຸທັງຫຼາຍ ທູນຮັບວ່າ "ແມ່ນແລ້ວ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ພິກຂຸທັງຫຼາຍ ການກະທຳຂອງໂມຄະບຸຣຸດເຫຼົ່ານັ້ນ ບໍ່ສົມຄວນ ບໍ່ຄ້ອຍຕາມ ບໍ່ເໝາະສົມ ບໍ່ແມ່ນກິດຂອງສະມະນະ ໃຊ້ບໍ່ໄດ້ ບໍ່ຄວນເຮັດເລີຍ ເປັນຫຍັງ ໂມຄະບຸຣຸດເຫຼົ່ານັ້ນ ຈຶ່ງໄດ້ນຸ່ງຫົ່ມບໍ່ຮຽບຮ້ອຍ ມີມາຣະຍາດບໍ່ສົມຄວນ ທ່ຽວບິນທະບາດ ເມື່ອຄົນທັງຫຼາຍກຳລັງບໍຣິໂພກຢູ່ ກໍເດ່ບາດສຳລັບບິນທະບາດ ໄປເທິງຂອງຫຍ້ຳແດ່ ເທິງຂອງສັນແດ່ ເທິງນ້ຳດື່ມແດ່ ອອກປາກຂໍແກງແດ່ ເຂົ້າສຸກແດ່ ດ້ວຍຕົນເອງມາສັນ ສົ່ງສຽງດັງແມ່ນໃນໂຮງສັນແດ່ແນວນັ້ນບໍ ພິກຂຸທັງຫຼາຍ ການກະທຳຂອງພວກໂມຄະບຸຣຸດນັ້ນ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ແທ້ຈິງ ກັບຈະເຮັດໃຫ້ຄົນທີ່ບໍ່ເຫຼື້ອມໃສໃຫ້ບໍ່ເຫຼື້ອມໃສໄປເລີຍ ຄົນທີ່ເຫຼື້ອມໃສຢູ່ແລ້ວບາງພວກກໍຈະກາຍເປັນອື່ນໄປ

## ຊົງອະນຸຍາດອຸປັດຊາ

ເມື່ອພຣະຜູ້ມີພຣະພາກເຈົ້າ ຊົງຕຳໜິພິກຂຸເຫຼົ່ານັ້ນໂດຍປະການຕ່າງ ໆ ແລ້ວ ໄດ້ຕັດ

ໂທດແຫ່ງຄວາມເປັນຄົນລ້ຽງຍາກ ບຳລຸງຍາກ ມັກຫຼາຍ ບໍ່ສັນໂດດ ຄວາມຄຸກຄີ ຄວາມຂີ້ຄ້ານ ຕັດຄຸນແຫ່ງຄວາມເປັນຄົນລ້ຽງງ່າຍ ບຳລຸງງ່າຍ ມັກໜ້ອຍ ສັນໂດດ ຄວາມຂັດເກົາ ຄວາມກຳຈັດກິເລດ ອາການທີ່ໜ້າເຫຼື້ອມໃສ ການບໍ່ສະສົມ ການພາອັບຄວາມພຽນ ໂດຍປະການຕ່າງໆ ຊົງສະແດງທຳມີກະຖາໃຫ້ເໝາະສົມ ໃຫ້ຄ້ອຍຕາມກັບເລື້ອງນັ້ນແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ

[໓໕] ພິກຂຸທັງຫຼາຍ ເຮົາອະນຸຍາດອຸປັດຊາ ອຸປັດຊາຈັກເຂົ້າໄປຕັ້ງຈິດສະນິດສະໜົມໃນສັດທິວິຫາຣິກຄືກັນກັບບຸດຕົນ ສັດທິວິຫາຣິກຈັກເຂົ້າໄປຕັ້ງຈິດສະນິດສະໜົມໃນອຸປັດຊາຄືກັນກັບບິດາຕົນ ເມື່ອເປັນແນວນີ້ ອຸປັດຊາແລະສັດທິວິຫາຣິກຈັກມີຄວາມເຄົາລົບ ຢຳເກງປະພຶດກົມກຽວກັນ ຈັກເຖິງຄວາມຈະເລີນງອກງາມໄພບູນໃນທຳວິໄນນີ້ໄດ້

## ວິທີຖືອຸປັດຊາ

ພິກຂຸທັງຫຼາຍ ສັດທິວິຫາຣິກເພິ່ງຖືອຸປັດຊາແນວນີ້

ສັດທິວິຫາຣິກເພິ່ງຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນ ນັ່ງຢ່ອງຢໍ້ ປະນົມມືກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ທ່ານຈົ່ງເປັນອຸປັດຊາຂອງຂ້ານ້ອຍເທີ້ນ ທ່ານຜູ້ຈະເລີນ ທ່ານຈົ່ງເປັນອຸປັດຊາຂອງຂ້ານ້ອຍເທີ້ນ ທ່ານຜູ້ຈະເລີນ ທ່ານຈົ່ງເປັນອຸປັດຊາຂອງຂ້ານ້ອຍເທີ້ນ

ອຸປັດຊາໃຫ້ສັດທິວິຫາຣິກຮູ້ດ້ວຍກາຍ ໃຫ້ຮູ້ດ້ວຍວາຈາ ຫຼື ໃຫ້ຮູ້ດ້ວຍກາຍແລະວາຈາ ວ່າ "ດີແລ້ວ" ວ່າ "ເບົາໃຈໄດ້" ວ່າ "ສົມຄວນດ້ວຍອຸບາຍແລ້ວ" ວ່າ "ສົມຄວນແລ້ວ" ຫຼື ວ່າ ຈົ່ງປະພຶດປະຕິບັດໃຫ້ໜ້າເຫຼື້ອມໃສ" ອຸປັດຊາຊື່ວ່າ ເປັນຜູ້ທີ່ສັດທິວິຫາຣິກຖືແລ້ວ

ຖ້າອຸປັດຊາບໍ່ໃຫ້ສັດທິວິຫາຣິກຮູ້ດ້ວຍກາຍ ບໍ່ໃຫ້ຮູ້ດ້ວຍວາຈາ ຫຼື ບໍ່ໃຫ້ຮູ້ດ້ວຍກາຍແລະວາຈາ ອຸປັດຊາຊື່ວ່າ ເປັນຜູ້ທີ່ສັດທິວິຫາຣິກຍັງບໍ່ໄດ້ຖື

## ອຸປັດຊາຍະວັດ

[໓໖] ພິກຂຸທັງຫຼາຍ ສັດທິວິຫາຣິກເພິ່ງປະພຶດໂດຍຊອບໃນອຸປັດຊາ ວິທີປະພຶດໂດຍຊອບໃນອຸປັດຊານັ້ນ ມີດັ່ງນີ້

ສັດທິວິຫາຣິກເພິ່ງລຸກຂຶ້ນແຕ່ເຊົ້າມືດ ປົດເກີບ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຖວາຍໄມ້ຖູແຂ້ວ ນ້ຳລ້າງໜ້າ ປູອາສະນະ

ຖ້າເຂົ້າຕົ້ມມີ ເພິ່ງລ້າງພາຊະນະໃສ່ເຂົ້າຕົ້ມເຂົ້າໄປຖວາຍ ເມື່ອອຸປັດຊາສັນເຂົ້າຕົ້ມສຳເລັດແລ້ວ ເພິ່ງຖວາຍນ້ຳຮັບພາຊະນະມາ ຖືດ້ວຍຄວາມລະມັດລະວັງ ບໍ່ໃຫ້ຄູດ ລ້າງແລ້ວມ້ຽນໄວ້

ເມື່ອອຸປັດຊາລຸກຂຶ້ນແລ້ວ ເພິ່ງຍົກອາສະນະເກັບ ຖ້າທີ່ນັ້ນຮົກ ເພິ່ງປັດກວາດ ຖ້າອຸປັດຊາຕ້ອງການຈະເຂົ້າໝູ່ບ້ານ ເພິ່ງຖວາຍຜ້ານຸ່ງ ຮັບຜ້ານຸ່ງ ຜ້າອາໄສ ຖວາຍປະຄົດແອວ ຖວາຍສັງຄາຕິທີ່ພັບຊ້ອນກັນ ລ້າງບາດແລ້ວຖວາຍພ້ອມທັງນໍ້າ

ຖ້າອຸປັດຊາຫວັງຈະໃຫ້ເປັນປັດສາສະມະນະ ເພິ່ງນຸ່ງໃຫ້ຮຽບຮ້ອຍປົກປິດໄດ້ມົນທົນ ໓ ຄາດປະຄົດແອວ ຫົ່ມສັງຄາຕິທີ່ພັບຊ້ອນກັນ ໃສ່ລູກດຸມ ລ້າງບາດຖືໄປ ເປັນປັດສາສະມະນະຂອງອຸປັດຊາ ເພິ່ງຍ່າງບໍ່ໃຫ້ຫ່າງຫຼາຍ ບໍ່ໃຫ້ໃກ້ຫຼາຍ ເພິ່ງຮັບບາດທີ່ມີຂອງບັນຈຸຢູ່

ເມື່ອອຸປັດຊາກຳລັງກ່າວ ບໍ່ເພິ່ງກ່າວສອດຂຶ້ນໃນລະຫວ່າງ ອຸປັດຊາກ່າວຄຳເວົ້າໃກ້ຕໍ່ອາບັດ ເພິ່ງຫ້າມໄວ້

ເມື່ອອຸປັດຊາຈະກັບ ເພິ່ງມາກ່ອນແລ້ວປູອາສະນະໄວ້ ເພິ່ງກຽມນໍ້າລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນໄວ້ ເພິ່ງລຸກຂຶ້ນຮັບບາດແລະຈີວອນ ເພິ່ງຖວາຍຜ້ານຸ່ງອາໄສ ຮັບຜ້ານຸ່ງມາ

ຖ້າຈີວອນຊຸ່ມເຫື່ອ ເພິ່ງຕາກແດດບຶດໜຶ່ງ ບໍ່ເພິ່ງຕາກຖິ້ມໄວ້ກາງແດງເຫິງໂພດ ເພິ່ງພັບຈີວອນເກັບໄວ້

ເມື່ອຈະພັບຈີວອນ ເພິ່ງພັບຈີວອນໃຫ້ເຫຼື່ອມແຈກັນ ໔ ນີ້ວ ຕັ້ງໃຈວ່າ ສູນກາງຈະໄດ້ບໍ່ມີຮອຍພັບ ເພິ່ງມ້ວນປະຄົດແອວໃສ່ຂົດຈີວອນ

ຖ້າບິນທະບາດມີ ແລະອຸປັດຊາຕ້ອງການຈະສັນ ເພິ່ງຖວາຍນໍ້າແລ້ວນ້ອມບິນທະບາດເຂົ້າໄປຖວາຍ ນຳນໍ້າສັນມາຖວາຍ ເມື່ອອຸປັດຊາສັນສຳເລັດແລ້ວ ເພິ່ງຖວາຍນໍ້າ ຮັບບາດມາ ຖືຢ່າງລະມັດລະວັງ ບໍ່ໃຫ້ຄູດ ລ້າງແລ້ວເຊັດໃຫ້ສະເດັດນໍ້າຕາກແດດບຶດໜຶ່ງ ບໍ່ເພິ່ງຕາກຖິ້ມໄວ້ກາງແດງເຫິງໂພດ

ເພິ່ງເກັບບາດແລະຈີວອນ ເມື່ອຈະເກັບບາດ ເພິ່ງໃຊ້ມືຂ້າງໜຶ່ງຖືບາດ ໃຊ້ມືຂ້າງໜຶ່ງລູບໃຕ້ຕຽງ ຫຼື ໃຕ້ຕັ່ງ ຈຶ່ງເກັບບາດ ບໍ່ເພິ່ງເກັບບາດໄວ້ເທິງພື້ນທີ່ບໍ່ມີສິ່ງໃດຮອງ ເມື່ອຈະເກັບຈີວອນ ເພິ່ງໃຊ້ມືຂ້າງໜຶ່ງຖືຈີວອນ ໃຊ້ມືຂ້າງໜຶ່ງລູບຮາວຈີວອນ ຫຼື ສາຍຟຽກ ເອົາຊາຍໄວ້ນອກເອົາຂົດໄວ້ໃນ ຈຶ່ງເກັບຈີວອນ

ເມື່ອອຸປັດຊາລຸກຂຶ້ນແລ້ວ ເພິ່ງຍົກອາສະນະເກັບ ເພິ່ງເກັບນໍ້າລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນ ຖ້າທີ່ນັ້ນຮົກ ເພິ່ງປັດກວາດ

ຖ້າອຸປັດຊາຕ້ອງການຈະອາບນໍ້າ ເພິ່ງຈັດນໍ້າອາບຖວາຍ ຖ້າທ່ານຕ້ອງການນໍ້າເຢັນເພິ່ງຈັດນໍ້າເຢັນຖວາຍ ຖ້າທ່ານຕ້ອງການນໍ້າອຸ່ນ ເພິ່ງຈັດນໍ້າອຸ່ນຖວາຍ

ຖ້າອຸປັດຊາຕ້ອງການຈະເຂົ້າເຮືອນໄຟ ເພິ່ງບົດຜົງແປ້ງ ເພິ່ງແຊ່ດິນ ຖືຕັ່ງສຳລັບເຮືອນໄຟຍ່າງຕາມຫຼັງອຸປັດຊາໄປ ຖວາຍຕັ່ງສຳລັບເຮືອນໄຟແລ້ວຮັບຈີວອນມາວາງໃນທີ່ສົມຄວນເພິ່ງຖວາຍຜົງແປ້ງແລະດິນ

ຖ້າສາມາດ ເພິ່ງເຂົ້າເຮືອນໄຟ ເມື່ອຈະເຂົ້າເຮືອນໄຟ ເພິ່ງເອົາດິນທາໜ້າປິດໜ້າແລະຫຼັງ ຈຶ່ງເຂົ້າເຮືອນໄຟ ບໍ່ເພິ່ງນັ່ງບຽດພຣະເຖຣະ ບໍ່ເພິ່ງກີດກັນອາສະນະພຣະນະວະກະ

ເພິ່ງເຮັດບໍວລະບັດແກ່ອຸປັດຊາໃນເຮືອນໄຟ ເມື່ອຈະອອກຈາກເຮືອນໄຟ ເພິ່ງຖືຕັ່ງສຳລັບເຮືອນໄຟປິດໜ້າແລະຫຼັງ ຈຶ່ງອອກຈາກເຮືອນໄຟ

ເພິ່ງທຳການບໍວລະບັດອຸປັດຊາແມ່ນໃນນ້ຳ ຕົນອາບນ້ຳສຳເລັດແລ້ວ ເພິ່ງຂຶ້ນກ່ອນເຊັດໂຕໃຫ້ແຫ້ງແລ້ວພັບຜ້າ ເພິ່ງເຊັດນ້ຳຈາກໂຕອຸປັດຊາ ຖວາຍຜ້ານຸ່ງ ສັງຄາຕິ ຖືຕັ່ງສຳລັບເຮືອນໄຟມາກ່ອນ ປູອາສະນະ ກຽມນ້ຳລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນໄວ້ ນຳນ້ຳສັນມາຖວາຍອຸປັດຊາ

ຖ້າອຸປັດຊາຕ້ອງການຈະໃຫ້ຮຽນ ເພິ່ງຮຽນ

ຖ້າອຸປັດຊາຕ້ອງການຈະໃຫ້ສອບຖາມອັດຖະ ເພິ່ງສອບຖາມ

ອຸປັດຊາຢູ່ໃນວິຫານໃດ ຖ້າວິຫານນັ້ນສົກກະປົກ ຖ້າສາມາດ ເພິ່ງທຳຄວາມສະອາດ ເມື່ອຈະທຳຄວາມສະອາດວິຫານໃຫ້ສະອາດ ເພິ່ງຂົນບາດ ແລະຈີວອນອອກກ່ອນ ວາງໄວ້ ໃນບ່ອນສົມຄວນ ເພິ່ງຂົນຜ້າປູນັ່ງ ຜ້າປູນອນ ຟູກ ໝອນ ອອກມາວາງໄວ້ ໃນບ່ອນສົມຄວນ ຕຽງຕັ່ງ ສັດທິວິຫາຣິກເພິ່ງຍົກຢ່າງລະມັດລະວັງ ບໍ່ໃຫ້ຄູດ ບໍ່ໃຫ້ກະທົບ ບານປະຕູແລະຂອບປະຕູ ຂົນອອກໄປຕັ້ງໄວ້ ໃນບ່ອນສົມຄວນ ຊຽງຮອງຕຽງ ງ່ຽງ ພະນັກອີງ ເພິ່ງຂົນອອກມາວາງໄວ້ ໃນບ່ອນສົມຄວນ ພົມປູພື້ນ ເພິ່ງສັງເກດບ່ອນທີ່ປູໄວ້ເກົ່າ ຄ່ອຍຂົນອອກມາວາງ ໃນບ່ອນສົມຄວນ

ຖ້າໃນວິຫານມີຝຸ່ນ ເພິ່ງປັດກວາດເພດານລົງມາກ່ອນ ຂອບໜ້າຕ່າງ ແລະແຈຫ້ອງ ເພິ່ງເຊັດໃຫ້ສະອາດ

ຖ້າຝາທີ່ທານ້ຳມັນ ຫຼື ພື້ນທາສີດຳຂຶ້ນຣາ ເພິ່ງໃຊ້ຜ້າຊຸບນ້ຳບິດແລ້ວເຊັດ

ຖ້າເປັນພື້ນບໍ່ໄດ້ທາ ເພິ່ງໃຊ້ນ້ຳປະພົມເຊັດ ຢ່າໃຫ້ວິຫານເປິເປື້ອນດ້ວຍຝຸ່ນລະອອງ ເພິ່ງເກັບຂີ້ເຫຍື້ອໄປຖິ້ມ ໃນບ່ອນສົມຄວນ

ພົມປູພື້ນ ເພິ່ງຕາກແດດ ຊຳຣະ ຕົບ ຂົນກັບປູໄວ້ຄືເກົ່າ ຊຽງຮອງຕຽງ ເພິ່ງຕາກແດດ ເຊັດ ຂົນກັບວາງໄວ້ຄືເກົ່າ

ຕຽງ ຕັ່ງ ເພິ່ງຕາກແດດ ຊຳຣະ ປັດ ຍົກຢ່າງລະມັດລະວັງ ບໍ່ໃຫ້ຄູດ ບໍ່ໃຫ້ກະທົບ ບານປະຕູ ແລະຂອບປະຕູ ຂົນກັບຕັ້ງໄວ້ຄືເກົ່າ ຟູກ ໝອນ ຜ້າປູນັ່ງ ຜ້າປູນອນ ເພິ່ງຕາກແດດ ຊຳຣະ ຕົບ ຂົນກັບວາງປູໄວ້ຄືເກົ່າ ງ່ຽງ ພະນັກອີງ ເພິ່ງຕາກແດດ ເຊັດຖູ ຂົນກັບວາງໄວ້ຄືເກົ່າ

ເພິ່ງເກັບບາດແລະຈີວອນ ເມື່ອຈະເກັບບາດ ເພິ່ງໃຊ້ມືຂ້າງໜຶ່ງຖືບາດ ໃຊ້ມືຂ້າງໜຶ່ງລູບໃຕ້ຕຽງຫຼືໃຕ້ຕັ່ງ ຈຶ່ງເກັບບາດ ບໍ່ເພິ່ງເກັບບາດໄວ້ເທິງພື້ນທີ່ບໍ່ມີສິ່ງໃດຮອງ ເມື່ອຈະເກັບຈີວອນເພິ່ງໃຊ້ມືຂ້າງໜຶ່ງຖືຈີວອນ ໃຊ້ມືຂ້າງໜຶ່ງລູບຮາວຈີວອນຫຼືສາຍຟຽກ ເອົາຊາຍໄວ້ນອກ ເອົາຂົດໄວ້ໃນ ຈຶ່ງເກັບຈີວອນ

ຖ້າລົມມີຝຸ່ນລະອອງພັດມາທາງທິດຕາເວັນອອກ ເພິ່ງປິດໜ້າຕ່າງທິດຕາເວັນອອກ

ຖ້າພັດມາທາງທິດຕາເວັນຕົກ ເພິ່ງປິດໜ້າຕ່າງທິດຕາເວັນຕົກ

ຖ້າພັດມາທາງທິດເໜືອ ເພິ່ງປິດໜ້າຕ່າງທິດເໜືອ

ຖ້າພັດມາທາງທິດໃຕ້ ເພິ່ງປິດໜ້າຕ່າງທິດໃຕ້

ຖ້າເປັນລະດູໜາວ ເພິ່ງເປີດໜ້າຕ່າງກາງເວັນ ປິດກາງຄືນ

ຖ້າເປັນລະດູຮ້ອນ ເພິ່ງປິດໜ້າຕ່າງກາງເວັນ ເປີດກາງຄືນ

ຖ້າບໍລິເວນໂຮງສັນ ໂຮງໄຟ ວັດຈະກຸຕິ ຮົກ ເພິ່ງປັດກວາດ ຖ້ານ້ຳສັນນ້ຳໃຊ້ບໍ່ມີ ເພິ່ງຈັດກຽມໄວ້ ຖ້າໝໍ້ນ້ຳລ້າງບໍ່ມີນ້ຳ ເພິ່ງຕັກນ້ຳໃສ່ໝໍ້ລ້າງນັ້ນ

ຖ້າອຸປັດຊາເກີດຄວາມບໍ່ຍິນດີ ສັດທິວິຫາຣິກເພິ່ງຊ່ອຍລະງັບ ຫຼື ເພິ່ງບອກພິກຂຸອື່ນໃຫ້ຊ່ອຍລະງັບ ຫຼື ເພິ່ງສະແດງທຳມະກະຖາແກ່ອຸປັດຊາ

ຖ້າອຸປັດຊາເກີດຄວາມລຳຄານ ສັດທິວິຫາຣິກເພິ່ງຊ່ອຍບັນເທົາ ຫຼື ເພິ່ງບອກພິກຂຸອື່ນໃຫ້ຊ່ອຍບັນເທົາ ຫຼື ເພິ່ງສະແດງທຳມະກະຖາແກ່ອຸປັດຊາ

ຖ້າອຸປັດຊາເກີດຄວາມເຫັນຜິດ ສັດທິວິຫາຣິກເພິ່ງໃຫ້ສະລະສາ ຫຼື ເພິ່ງບອກພິກຂຸອື່ນໃຫ້ຊ່ອຍໃຫ້ສະລະສາ ຫຼື ເພິ່ງສະແດງທຳມະກະຖາແກ່ອຸປັດຊາ

ຖ້າອຸປັດຊາຕ້ອງອາບັດໜັກ ຄວນແກ່ປະຣິວາດ ສັດທິວິຫາຣິກເພິ່ງກະທຳການຂວນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ສົງເພິ່ງໃຫ້ປະຣິວາດແກ່ອຸປັດຊາ"

ຖ້າອຸປັດຊາຄວນແກ່ການດຶງເຂົ້າຫາອາບັດເກົ່າ ສັດທິວິຫາຣິກເພິ່ງກະທຳການຂວນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ສົງເພິ່ງດຶງອຸປັດຊາເຂົ້າຫາອາບັດເກົ່າ"

ຖ້າອຸປັດຊາຄວນແກ່ມານັດ໑ ສັດທິວິຫາຣິກເພິ່ງກະທຳການຂວນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ສົງເພິ່ງໃຫ້ມານັດແກ່ອຸປັດຊາ"

ຖ້າອຸປັດຊາຄວນແກ່ອັບພານ ສັດທິວິຫາຣິກເພິ່ງກະທຳການຂວນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ສົງເພິ່ງອັບພານອຸປັດຊາ

ຖ້າສົງຕ້ອງການຈະເຮັດກຳ ຄື ຕັດຊະນີຍະກຳ ນິຍະສະກຳ ປັບພາຊະນີຍະກຳ ປະຕິສາຣະນີຍະກຳ ຫຼື ອຸກເຂປະນີຍະກຳແກ່ອຸປັດຊາ ສັດທິວິຫາຣິກເພິ່ງກະທຳການຂວນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ສົງບໍ່ເພິ່ງເຮັດກຳແກ່ອຸປັດຊາ ຫຼື ເພິ່ງປ່ຽນໄປເປັນໂທດເບົາ" ຫຼື ວ່າອຸປັດຊາໄດ້ຖືກສົງລົງຕັດຊະນີຍະກຳ ນິຍະສະກຳ ປັບພາຊະນີຍະກຳ ປະຕິສາຣະນີຍະກຳ ຫຼື ອຸກ

ເຂປະນີຍະກຳແລ້ວ ສັດທິວິຫາຣິກເພິ່ງກະທຳການຂວນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ອຸປັດຊາເພິ່ງກັບປະພຶດສົມຄວນ ເພິ່ງຫາຍຈອງຫອງ ເພິ່ງກັບໂຕໄດ້ ສົງເພິ່ງລະງັບກຳນັ້ນສາ

ຖ້າຈີວອນຂອງອຸປັດຊາຈະຕ້ອງຊັກ ສັດທິວິຫາຣິກເພິ່ງຊັກ ຫຼື ເພິ່ງທຳການຂວນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ຜູ້ໃດເພິ່ງຊັກຈີວອນຂອງອຸປັດຊາ"

ຖ້າຈີວອນຂອງອຸປັດຊາຈະຕ້ອງຕັດຫຍິບ ສັດທິວິຫາຣິກເພິ່ງຕັດຫຍິບ ຫຼືເພິ່ງກະທຳການຂວນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ຜູ້ໃດເພິ່ງຕັດຫຍິບຈີວອນຂອງອຸປັດຊາ"

ຖ້ານ້ຳຍ້ອມຂອງອຸປັດຊາຈະຕ້ອງຕົ້ມ ສັດທິວິຫາຣິກເພິ່ງຕົ້ມ ຫຼື ເພິ່ງກະທຳການຂວນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ຜູ້ໃດ ເພິ່ງຕົ້ມນ້ຳຍ້ອມຂອງອຸປັດຊາ"

ຖ້າຈີວອນຂອງອຸປັດຊາຈະຕ້ອງຍ້ອມ ສັດທິວິຫາຣິກເພິ່ງຍ້ອມ ຫຼື ເພິ່ງກະທຳການຂວນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ຜູ້ໃດ ເພິ່ງຍ້ອມຈີວອນຂອງອຸປັດຊາ" ເມື່ອຈະຍ້ອມຈີວອນເພິ່ງຍ້ອມ ພີກກັບໄປກັບມາດີ ໆ ເມື່ອຢາດນ້ຳຍ້ອມຍັງຍ້ອຍບໍ່ຂາດສາຍ ບໍ່ເພິ່ງຫຼີກໄປ

ສັດທິວິຫາຣິກບໍ່ບອກອຸປັດຊາ ບໍ່ເພິ່ງໃຫ້ບາດແກ່ພິກຂຸບາງອົງ ບໍ່ເພິ່ງຮັບບາດຂອງພິກຂຸບາງອົງ ບໍ່ເພິ່ງໃຫ້ຈີວອນແກ່ພິກຂຸບາງອົງ ບໍ່ເພິ່ງຮັບຈີວອນຂອງພິກຂຸບາງອົງ ບໍ່ເພິ່ງໃຫ້ບໍຣິຂານແກ່ພິກຂຸບາງອົງ ບໍ່ເພິ່ງຮັບບໍຣິຂານຂອງພິກຂຸບາງອົງ ບໍ່ເພິ່ງແຖຜົມໃຫ້ພິກຂຸບາງອົງ ບໍ່ເພິ່ງໃຫ້ພິກຂຸບາງອົງແຖຜົມໃຫ້ ບໍ່ເພິ່ງກະທຳການບົວລະບັດແກ່ພິກຂຸບາງອົງ ບໍ່ເພິ່ງໃຫ້ພິກຂຸບາງອົງກະທຳການບົວລະບັດໃຫ້ ບໍ່ເພິ່ງກະທຳການຂວນຂວາຍແກ່ພິກຂຸບາງອົງ ບໍ່ເພິ່ງສັ່ງພິກຂຸບາງອົງໃຫ້ກະທຳການຂວນຂວາຍ ບໍ່ເພິ່ງເປັນປັດສາສະມະນະຂອງພິກຂຸບາງອົງ ບໍ່ເພິ່ງພາພິກຂຸບາງອົງໄປເປັນປັດສາສະມະນະ ບໍ່ເພິ່ງນຳບິນທະບາດໄປຖວາຍພິກຂຸບາງອົງ ບໍ່ເພິ່ງສັ່ງພິກຂຸບາງອົງໃຫ້ນຳບິນທະບາດໄປຖວາຍ

ສັດທິວິຫາຣິກບໍ່ບອກລາອຸປັດຊາ ບໍ່ເພິ່ງເຂົ້າໝູ່ບ້ານ ບໍ່ເພິ່ງໄປປ່າຊ້າ ບໍ່ເພິ່ງອອກໄປຕ່າງຖິ່ນ ຖ້າອຸປັດຊາເປັນໄຂ້ ເພິ່ງພະຍາບານຈົນຕະຫຼອດຊີວິດ ເພິ່ງຖ້າຈົນກວ່າອຸປັດຊານັ້ນຈະຫາຍດີ

**ອຸປັດຊາຍະວັດຕະກະຖາ ຈົບ**

# ໑໖. ສັດທິວິຫາຣິກະວັດຕະກະຖາ

## ວ່າດ້ວຍສັດທິວິຫາຣິກະວັດ

[໖໗] ພິກຂຸທັງຫຼາຍ ອຸປັດຊາເພິ່ງປະພຶດສົມຄວນໃນສັດທິວິຫາຣິກ ວິທີປະພຶດສົມຄວນໃນສັດທິວິຫາຣິກນັ້ນ ມີດັ່ງຕໍ່ນີ້

ພິກຂຸທັງຫຼາຍ ອຸປັດຊາເພິ່ງສົງເຄາະອະນຸເຄາະສັດທິວິຫາຣິກ ດ້ວຍອຸດເທດ ປະຣິປຸດສາ ໂອວາດແລະອະນຸສາດ

ຖ້າອຸປັດຊາມີບາດ ສັດທິວິຫາຣິກບໍ່ມີບາດ ອຸປັດຊາເພິ່ງຖວາຍບາດແກ່ສັດທິວິຫາຣິກ ຫຼືເພິ່ງກະທຳການຂວນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ບາດເພິ່ງເກີດຂຶ້ນແກ່ສັດທິວິຫາຣິກ"

ຖ້າອຸປັດຊາມີຈີວອນ ສັດທິວິຫາຣິກບໍ່ມີຈີວອນ ອຸປັດຊາເພິ່ງຖວາຍຈີວອນແກ່ສັດທິວິຫາຣິກຫຼືເພິ່ງກະທຳການຂວນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ຈີວອນເພິ່ງເກີດຂຶ້ນແກ່ສັດທິວິຫາຣິກ

ຖ້າອຸປັດຊາມີບໍຣິຂານ ສັດທິວິຫາຣິກບໍ່ມີບໍຣິຂານ ອຸປັດຊາເພິ່ງຖວາຍບໍຣິຂານແກ່ສັດທິວິຫາຣິກ ຫຼື ເພິ່ງທຳການຂວນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ບໍຣິຂານເພິ່ງເກີດຂຶ້ນແກ່ສັດທິວິຫາຣິກ"

ຖ້າສັດທິວິຫາຣິກເປັນໄຂ້ ອຸປັດຊາເພິ່ງລຸກຂຶ້ນ ແຕ່ເຊົ້າມືດຖວາຍໄມ້ຖູແຂ້ວ ນ້ຳລ້າງໜ້າ ປູອາສະນະ

ຖ້າເຂົ້າຕົ້ມມີ ເພິ່ງລ້າງພາຊະນະໃສ່ເຂົ້າຕົ້ມເຂົ້າໄປຖວາຍ ເມື່ອສັດທິວິຫາຣິກສັນເຂົ້າຕົ້ມສຳເລັດແລ້ວ ເພິ່ງຖວາຍນ້ຳ ຮັບພາຊະນະມາຖືຢ່າງລະມັດລະວັງ ບໍ່ໃຫ້ຄູດ ລ້າງແລ້ວມ້ຽນໄວ້

ເມື່ອສັດທິວິຫາຣິກລຸກຂຶ້ນແລ້ວ ເພິ່ງຍົກອາສະນະເກັບ ຖ້າທີ່ນັ້ນຮົກ ເພິ່ງປັດກວາດຖ້າສັດທິວິຫາຣິກ ຕ້ອງການຈະເຂົ້າໝູ່ບ້ານ ເພິ່ງຖວາຍຜ້ານຸ່ງ ຮັບຜ້ານຸ່ງ ຜ້າອາໄສ ຖວາຍ ປະຄົດແອວ ຖວາຍສັງຄາຕິທີ່ພັບຊ້ອນກັນ ລ້າງບາດແລ້ວຖວາຍພ້ອມທັງນ້ຳ ປູອາສະນະໄວ້ໂດຍກຳນົດວ່າ "ເວລາພຽງເທົ່ານີ້ ສັດທິວິຫາຣິກຈັກກັບມາ" ເພິ່ງກຽມນ້ຳລ້າງຕີນຕັ່ງເກີບ ກະເບື້ອງເຊັດຕີນໄວ້ ເພິ່ງລຸກຂຶ້ນຮັບບາດແລະຈີວອນ ເພິ່ງຖວາຍຜ້ານຸ່ງ ຜ້າອາໄສ ຮັບຜ້ານຸ່ງມາ

ຖ້າຈີວອນຊຸ່ມເຫື່ອ ເພິ່ງຕາກແດດບຶດໜຶ່ງ ບໍ່ເພິ່ງຕາກຖິ້ມໄວ້ກາງແດງເທິງໂພດ ເພິ່ງພັບຈີວອນ ເມື່ອຈະພັບຈີວອນ ເພິ່ງພັບຈີວອນໃຫ້ເຫຼື່ອມແຈກັນ ໔ ນິ້ວ ຕັ້ງໃຈວ່າ ສູນກາງຈະໄດ້ບໍ່ມີຮອຍພັບ ເພິ່ງມ້ວນ ປະຄົດແອວໃສ່ຂົດຈີວອນ

ຖ້າບິນທະບາດມີ ແລະສັດທິວິຫາຣິກຕ້ອງການຈະສັນ ເພິ່ງຖວາຍນ້ຳແລ້ວນຳບິນທະບາດ

ເຂົ້າໄປຖວາຍ ນຳນ້ຳສັນມາຖວາຍ ເມື່ອສັດທິວິຫາຣິກສັນສຳເລັດແລ້ວ ເພິ່ງຖວາຍນ້ຳ ຮັບບາດມາ ຖືຢ່າງລະມັດລະວັງ ບໍ່ໃຫ້ຄູດ ລ້າງແລ້ວເຊັດໃຫ້ສະເດັດນ້ຳຕາກແດດບຶດໜຶ່ງ ບໍ່ເພິ່ງຕາກຖິ້ມໄວ້ ກາງແດງເທິງໂພດ

ເພິ່ງເກັບບາດແລະຈີວອນ ເມື່ອຈະເກັບບາດ ເພິ່ງໃຊ້ມືຂ້າງໜຶ່ງຖືບາດ ໃຊ້ມືຂ້າງໜຶ່ງລູບ ໃຕ້ຕຽງຫຼືໃຕ້ຕັ່ງ ຈຶ່ງເກັບບາດ ບໍ່ເພິ່ງເກັບບາດໄວ້ເທິງພື້ນທີ່ບໍ່ມີສິ່ງໃດຮອງ ເມື່ອຈະເກັບຈີວອນ ເພິ່ງໃຊ້ມືຂ້າງໜຶ່ງຖືຈີວອນ ໃຊ້ມືຂ້າງໜຶ່ງລູບຮາວຈີວອນຫຼືສາຍຟຽກ ເອົາຊາຍໄວ້ນອກ ເອົາຂົດ ໄວ້ໃນ ຈຶ່ງເກັບຈີວອນ

ເມື່ອສັດທິວິຫາຣິກລຸກຂຶ້ນແລ້ວ ເພິ່ງຍົກອາສະນະເກັບ ເພິ່ງເກັບນ້ຳລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນ ຖ້າທີ່ນັ້ນຮົກ ເພິ່ງປັດກວາດ

ຖ້າສັດທິວິຫາຣິກຕ້ອງການຈະອາບນ້ຳ ເພິ່ງຈັດນ້ຳອາບຖວາຍ ຖ້າທ່ານຕ້ອງການນ້ຳ ເຢັນເພິ່ງຈັດນ້ຳເຢັນໃຫ້ ຖ້າທ່ານຕ້ອງການນ້ຳອຸ່ນ ເພິ່ງຈັດນ້ຳອຸ່ນຖວາຍ

ຖ້າສັດທິວິຫາຣິກຕ້ອງການຈະເຂົ້າເຮືອນໄຟ ເພິ່ງບົດຜົງແປ້ງ ເພິ່ງແຊ່ດິນ ຖືຕັ່ງສຳລັບ ເຮືອນໄຟຍ່າງໄປ ຖວາຍຕັ່ງສຳລັບເຮືອນໄຟແລ້ວຮັບຈີວອນມາວາງ ໃນບ່ອນສົມຄວນ ເພິ່ງ ຖວາຍຜົງແປ້ງແລະດິນ

ຖ້າສາມາດ ເພິ່ງເຂົ້າເຮືອນໄຟ ເມື່ອຈະເຂົ້າເຮືອນໄຟ ເພິ່ງເອົາດິນທາໜ້າປິດໜ້າແລະ ຫຼັງ ຈຶ່ງເຂົ້າເຮືອນໄຟ ບໍ່ເພິ່ງນັ່ງບຽດພຣະເຖຣະ ບໍ່ເພິ່ງກີດກັນອາສະນະພຣະນະວະກະ ເພິ່ງ ເຮັດ ບໍຣິກຳແກ່ສັດທິວິຫາຣິກໃນເຮືອນໄຟ ເມື່ອຈະອອກຈາກເຮືອນໄຟ ເພິ່ງຖືຕັ່ງສຳລັບເຮືອນ ໄຟປິດໜ້າແລະຫຼັງ ຈຶ່ງອອກຈາກເຮືອນໄຟ

ເພິ່ງກະທຳການບໍວລະບັດແກ່ສັດທິວິຫາຣິກແມ່ນໃນນ້ຳ ຕົນອາບສຳເລັດແລ້ວ ເພິ່ງຂຶ້ນ ກ່ອນເຊັດໂຕໃຫ້ແຫ້ງແລ້ວປຸ່ງຜ້າ ເພິ່ງເຊັດນ້ຳຈາກໂຕສັດທິວິຫາຣິກ ຖວາຍຜ້ານຸ່ງ ສັງຄາຕິ ຖື ຕັ່ງສຳລັບເຮືອນໄຟມາກ່ອນ ປູອາສະນະ ກຽມນ້ຳລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນໄວ້ ນຳນ້ຳ ສັນ ມາຖວາຍສັດທິວິຫາຣິກ

ສັດທິວິຫາຣິກຢູ່ໃນວິຫານໃດ ຖ້າວິຫານນັ້ນສົກກະປົກ ຖ້າສາມາດ ເພິ່ງອານາໄມໃຫ້ ສະອາດ ເມື່ອຈະອານາໄມວິຫານໃຫ້ສະອາດ ເພິ່ງຂົນບາດແລະຈີວອນອອກກ່ອນ ວາງໄວ້ ໃນບ່ອນ ສົມຄວນ ເພິ່ງຂົນຜ້າປູນັ່ງ ຜ້າປູນອນ ຟູກ ໝອນ ອອກມາວາງໄວ້ ໃນບ່ອນສົມຄວນ

ຕຽງ ຕັ່ງ ອຸປັດຊາເພິ່ງຍົກຢ່າງລະມັດລະວັງ ບໍ່ໃຫ້ຄູດ ບໍ່ໃຫ້ກະທົບບານປະຕູແລະຂອບ ປະຕູ ຂົນອອກໄປຕັ້ງໄວ້ ໃນບ່ອນສົມຄວນ ຊຽງຮອງຕຽງ ງົ່ງ ພະນັກອີງ ເພິ່ງຂົນອອກມາວາງ

ໄວ້ ໃນບ່ອນສົມຄວນ ພົມປູພື້ນ ເພິ່ງສັງເກດທີ່ປູໄວ້ເດີມ ຄ່ອຍຂົນອອກມາວາງໄວ້ ໃນບ່ອນສົມຄວນ

ຖ້າໃນວິຫານມີຝຸ່ນ ເພິ່ງປັດກວາດເພດານລົງມາກ່ອນ ຂອບໜ້າຕ່າງແລະແຈຫ້ອງ ເພິ່ງເຊັດ

ຖ້າຝາທີ່ທານ້ຳມັນ ຫຼື ພື້ນທາສີດຳຂຶ້ນຣາ ເພິ່ງໃຊ້ຜ້າຊຸບນ້ຳບິດແລ້ວເຊັດ

ຖ້າເປັນພື້ນບໍ່ໄດ້ທາ ເພິ່ງໃຊ້ນ້ຳປະພົມເຊັດ ຢ່າໃຫ້ວິຫານເຕັມໄປດ້ວຍຝຸ່ນລະອອງ ເພິ່ງເກັບຂີ້ເຫຍື້ອໄປຖິ້ມ ໃນບ່ອນສົມຄວນ ພົມປູພື້ນ ເພິ່ງຕາກແດດ ຊຳຮະ ຕົບ ຂົນກັບປູໄວ້ຄືເກົ່າ ຊຽງຮອງຕຽງ ເພິ່ງຕາກແດດ ເຊັດ ຂົນກັບວາງໄວ້ຄືເກົ່າ

ຕຽງ ຕັ່ງ ເພິ່ງຕາກແດດ ຊຳຮະ ປັດ ຍົກຢ່າງລະມັດລະວັງ ບໍ່ໃຫ້ຄູດ ບໍ່ໃຫ້ກະທົບບານປະຕູ ແລະຂອບປະຕູ ຂົນກັບຕັ້ງໄວ້ຄືເກົ່າ ຟູກ ໝອນ ຜ້າປູນັ່ງ ຜ້າປູນອນ ເພິ່ງຕາກແດດ ເຮັດຄວາມສະອາດ ຕົບ ຂົນກັບວາງປູໄວ້ຄືເກົ່າ ງົ້ງ ພະນັກອີງ ເພິ່ງຕາກແດດ ເຊັດຖູ ຂົນກັບວາງໄວ້ຄືເກົ່າ

ເພິ່ງເກັບບາດແລະຈີວອນ ເມື່ອຈະເກັບບາດ ເພິ່ງໃຊ້ມືຂ້າງໜຶ່ງຖືບາດ ໃຊ້ມືຂ້າງໜຶ່ງລູບໃຕ້ຕຽງຫຼືໃຕ້ຕັ່ງ ຈຶ່ງເກັບບາດ ບໍ່ເພິ່ງເກັບບາດໄວ້ເທິງພື້ນທີ່ບໍ່ມີສິ່ງໃດຮອງ ເມື່ອຈະເກັບຈີວອນ ເພິ່ງໃຊ້ມືຂ້າງໜຶ່ງຖືຈີວອນ ໃຊ້ມືຂ້າງໜຶ່ງລູບຮາວຈີວອນຫຼືສາຍຫຽກ ເອົາຊາຍໄວ້ນອກ ເອົາຂົດໄວ້ໃນ ຈຶ່ງເກັບຈີວອນ

ຖ້າລົມເຈືອຝຸ່ນລະອອງພັດມາທາງທິດຕາເວັນອອກ ເພິ່ງປິດໜ້າຕ່າງທິດຕາເວັນອອກ

ຖ້າພັດມາທາງທິດຕາເວັນຕົກ ເພິ່ງປິດໜ້າຕ່າງທິດຕາເວັນຕົກ

ຖ້າພັດມາທາງທິດເໜືອ ເພິ່ງປິດໜ້າຕ່າງທິດເໜືອ

ຖ້າພັດມາທາງທິດໃຕ້ ເພິ່ງປິດໜ້າຕ່າງທິດໃຕ້

ຖ້າເປັນລະດູໜາວ ເພິ່ງເປີດໜ້າຕ່າງກາງເວັນ ປິດກາງຄືນ

ຖ້າເປັນລະດູຮ້ອນ ເພິ່ງປິດໜ້າຕ່າງກາງເວັນ ເປີດກາງຄືນ

ຖ້າບໍລິເວນ ຊຸ້ມ ໂຮງສັນ ໂຮງໄຟ ວັດກຸຕິ ຮົກ ເພິ່ງປັດກວາດ ຖ້ານ້ຳສັນນ້ຳໃຊ້ບໍ່ມີ ເພິ່ງຈັດກຽມໄວ້ ຖ້າໝໍ້ນ້ຳຊຳຮະບໍ່ມີນ້ຳ ເພິ່ງຕັກນ້ຳໃສ່ໝໍ້ນ້ຳລ້າງ

ຖ້າສັດທິວິຫາຣິກເກີດຄວາມບໍ່ຍິນດີ ອຸປັດຊາເພິ່ງຊ່ອຍລະງັບ ຫຼືເພິ່ງບອກພິກຂຸອື່ນໃຫ້ຊ່ອຍລະງັບ ຫຼືເພິ່ງສະແດງທຳມະກະຖາແກ່ສັດທິວິຫາຣິກ

ຖ້າສັດທິວິຫາຣິກເກີດຄວາມລຳຄານ ອຸປັດຊາເພິ່ງຊ່ອຍບັນເທົາ ຫຼືເພິ່ງບອກພິກຂຸອື່ນໃຫ້ຊ່ອຍບັນເທົາ ຫຼື ເພິ່ງສະແດງທຳມະກະຖາແກ່ສັດທິວິຫາຣິກ

ຖ້າສັດທິວິຫາຣິກເກີດຄວາມເຫັນຜິດ ອຸປັດຊາເພິ່ງໃຫ້ສະລະສາ ຫຼືເພິ່ງບອກພິກຂຸອື່ນໃຫ້ຊ່ອຍໃຫ້ສະລະສາ ຫຼືເພິ່ງສະແດງທຳມະກະຖາແກ່ສັດທິວິຫາຣິກ

ຖ້າສັດທິວິຫາຣິກຕ້ອງອາບັດໜັກ ຄວນແກ່ປະຣິວາດ ອຸປັດຊາເພິ່ງກະທຳການຂວນຂວາຍວ່າ “ດ້ວຍອຸບາຍແນວໃດນໍ ສົງເພິ່ງໃຫ້ປະຣິວາດແກ່ສັດທິວິຫາຣິກ”

ຖ້າສັດທິວິຫາຣິກຄວນແກ່ການດຶງເຂົ້າຫາອາບັດເກົ່າ ອຸປັດຊາເພິ່ງກະທຳການຂວນຂວາຍວ່າ “ດ້ວຍອຸບາຍແນວໃດນໍ ສົງເພິ່ງດຶງສັດທິວິຫາຣິກເຂົ້າຫາອາບັດເກົ່າ”

ຖ້າສັດທິວິຫາຣິກຄວນແກ່ມານັດ ອຸປັດຊາເພິ່ງກະທຳການຂວນຂວາຍວ່າ “ດ້ວຍອຸບາຍແນວໃດນໍ ສົງເພິ່ງໃຫ້ມານັດແກ່ສັດທິວິຫາຣິກ”

ຖ້າສັດທິວິຫາຣິກຄວນແກ່ອັບພານ ອຸປັດຊາເພິ່ງກະທຳການຂວນຂວາຍວ່າ “ດ້ວຍອຸບາຍແນວໃດນໍ ສົງເພິ່ງອັບພານສັດທິວິຫາຣິກ

ຖ້າສົງຕ້ອງການຈະເຮັດກຳ ຄື ຕັດຊະນີຍະກຳ ນິຍະສະກຳ ປັບພາຊະນີຍະກຳ ປະຕິສາຣະນີຍະກຳ ຫຼືອຸກເຂປະນີຍະກຳແກ່ສັດທິວິຫາຣິກ ອຸປັດຊາເພິ່ງກະທຳການຂວນຂວາຍວ່າ “ດ້ວຍອຸບາຍແນວໃດນໍ ສົງບໍ່ເພິ່ງເຮັດກຳແກ່ສັດທິວິຫາຣິກຫຼືເພິ່ງປ່ຽນໄປເປັນໂທດເບົາ” ຫຼືວ່າສັດທິວິຫາຣິກໄດ້ຖືກສົງລົງຕັດຊະນີຍະກຳ ນິຍະສະກຳ ປັບພາຊະນີຍະກຳ ປະຕິສາຣະນີຍະກຳ ຫຼືອຸກເຂປະນີຍະກຳແລ້ວ ອຸປັດຊາເພິ່ງກະທຳການຂວນຂວາຍວ່າ “ດ້ວຍອຸບາຍແນວໃດນໍ ສັດທິວິຫາຣິກເພິ່ງກັບປະພຶດສົມຄວນ ເພິ່ງຫາຍຈອງຫອງ ເພິ່ງກັບໂຕໄດ້ ສົງເພິ່ງລະງັບກຳນັ້ນສາ

ຖ້າຈີວອນຂອງສັດທິວິຫາຣິກຈະຕ້ອງຊັກ ອຸປັດຊາເພິ່ງບອກວ່າ “ເພິ່ງຊັກແນວນີ້” ຫຼືເພິ່ງກະທຳການຂວນຂວາຍວ່າ “ດ້ວຍອຸບາຍແນວໃດນໍ ຜູ້ໃດ ເພິ່ງຊັກຈີວອນຂອງສັດທິວິຫາຣິກ”

ຖ້າຈີວອນຂອງສັດທິວິຫາຣິກຈະຕ້ອງຕັດຫຍິບ ອຸປັດຊາເພິ່ງບອກວ່າ “ເພິ່ງຕັດຫຍິບແນວນີ້” ຫຼື ເພິ່ງກະທຳການຂວນຂວາຍວ່າ “ດ້ວຍອຸບາຍແນວໃດນໍ ຜູ້ໃດ ເພິ່ງຕັດຫຍິບຈີວອນຂອງສັດທິວິຫາຣິກ”

ຖ້ານໍ້າຍ້ອມຂອງສັດທິວິຫາຣິກຈະຕ້ອງຕົ້ມ ອຸປັດຊາເພິ່ງບອກວ່າ “ເພິ່ງຕົ້ມແນວນີ້” ຫຼືເພິ່ງກະທຳການຂວນຂວາຍວ່າ “ດ້ວຍອຸບາຍແນວໃດນໍ ຜູ້ໃດ ເພິ່ງຕົ້ມນໍ້າຍ້ອມຂອງສັດທິວິຫາຣິກ”

ຖ້າຈີວອນຂອງສັດທິວິຫາຣິກຈະຕ້ອງຍ້ອມ ອຸປັດຊາເພິ່ງບອກວ່າ “ເພິ່ງຍ້ອມແນວນີ້” ຫຼືເພິ່ງກະທຳການຂວນຂວາຍວ່າ “ດ້ວຍອຸບາຍແນວໃດນໍ ຜູ້ໃດ ເພິ່ງຍ້ອມຈີວອນຂອງສັດທິວິຫາຣິກ” ເມື່ອຈະຍ້ອມຈີວອນ ເພິ່ງຍ້ອມພິກກັບໄປກັບມາດີ ໆ ເມື່ອຢາດນໍ້າຍ້ອມຍັງຍ້ອຍ ບໍ່ຂາດສາຍ ບໍ່ເພິ່ງຫຼີກໄປ

ຖ້າສັດທິວິຫາຣິກເປັນໄຂ້ ເພິ່ງພະຍາບານຈົນຕະຫຼອດຊີວິດ ເພິ່ງຖ້າຈົນກວ່າສັດທິວິຫາຣິກນັ້ນຈະຫາຍ

**ສັດທິວິຫາຣິກະວັດຕະກະຖາ ຈົບ**

# ໑໗. ປະນາມິຕະກະຖາ

## ວ່າດ້ວຍການປະນາມ

[໖໗] ສະໄໝນັ້ນ ພວກສັດທິວິຫາຣິກບໍ່ປະພຶດສົມຄວນໃນອຸປັດຊາທັງຫຼາຍ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກສັດທິວິຫາຣິກຈຶ່ງໄດ້ບໍ່ປະພຶດສົມຄວນໃນພຣະອຸປັດຊາທັງຫຼາຍນໍ" ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ຊົງສອບຖາມ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກສັດທິວິຫາຣິກບໍ່ປະພຶດສົມຄວນໃນອຸປັດຊາທັງຫຼາຍ ແມ່ນບໍ?

ພິກຂຸທັງຫຼາຍທູນຮັບວ່າ "ແມ່ນແລ້ວ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າ ຊົງຕຳໜິວ່າ "ພິກຂຸທັງຫຼາຍ ຯລຯ ເປັນຫຍັງ ພວກສັດທິວິຫາຣິກຈຶ່ງບໍ່ປະພຶດສົມຄວນໃນອຸປັດຊາທັງຫຼາຍນໍ" ເມື່ອຊົງຕຳໜິແລ້ວ ຊົງສະແດງທຳມີກະຖາ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ສັດທິວິຫາຣິກຈະບໍ່ປະພຶດສົມຄວນໃນອຸປັດຊາ ບໍ່ໄດ້ ອົງໃດບໍ່ປະພຶດສົມຄວນ ຕ້ອງອາບັດທຸກກົດ"

## ເລື້ອງຊົງອະນຸຍາດໃຫ້ປະນາມ

ສັດທິວິຫາຣິກທັງຫຼາຍ ກໍຍັງບໍ່ປະພຶດສົມຄວນຢູ່ຄືເກົ່າ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ປະນາມສັດທິວິຫາຣິກຜູ້ບໍ່ປະພຶດສົມຄວນ

## ວິທີປະນາມ

ພິກຂຸທັງຫຼາຍ ກໍອຸປັດຊາເພິ່ງປະນາມສັດທິວິຫາຣິກແບບນີ້ວ່າ "ເຮົາປະນາມທ່ານ" ຫຼື "ທ່ານຢ່າເຂົ້າມາທີ່ນີ້ອີກ" "ທ່ານຈົ່ງຂົນບາດ ແລະຈີວອນຂອງທ່ານໄປສາ" ຫຼື "ທ່ານບໍ່ ຕ້ອງອຸປັດຖາກເຮົາອີກ

ອຸປັດຊາໃຫ້ສັດທິວິຫາຣິກຮູ້ດ້ວຍກາຍ ໃຫ້ຮູ້ດ້ວຍວາຈາ ຫຼື ໃຫ້ຮູ້ດ້ວຍກາຍແລະວາຈາ ເປັນອັນໄດ້ປະນາມສັດທິວິຫາຣິກແລ້ວ ອຸປັດຊາບໍ່ໃຫ້ສັດທິວິຫາຣິກຮູ້ດ້ວຍກາຍ ບໍ່ໃຫ້ຮູ້ດ້ວຍວາຈາ ຫຼື ບໍ່ໃຫ້ຮູ້ດ້ວຍກາຍແລະວາຈາ ເປັນອັນຍັງບໍ່ໄດ້ປະນາມສັດທິວິຫາຣິກ

## ສັດທິວິຫາຣິກບໍ່ຂໍຂະມາ

ສະໄໝນັ້ນ ສັດທິວິຫາຣິກທັງຫຼາຍຖືກປະນາມແລ້ວ ກໍຍັງບໍ່ຍອມຂໍຂະມາອຸປັດຊາ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສັດທິວິຫາຣິກຂໍຂະມາອຸປັດຊາ

ສັດທິວິຫາຣິກທັງຫຼາຍ ກໍຍັງບໍ່ຍອມຂໍຂະມາອຸປັດຊາຢູ່ຄືເກົ່າ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ສັດທິວິຫາຣິກຖືກປະນາມແລ້ວ ຈະບໍ່ຂໍຂະມາອຸປັດຊາບໍ່ໄດ້ ອົງໃດບໍ່ຂໍຂະມາ ຕ້ອງອາບັດທຸກກົດ

## ອຸປັດຊາບໍ່ຮັບການຂໍຂະມາ

ສະໄໝນັ້ນ ອຸປັດຊາທັງຫຼາຍ ຖືກສັດທິວິຫາຣິກຂໍຂະມາ ກໍຍັງບໍ່ຍອມໃຫ້ຂະມາ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ອຸປັດຊາຮັບການຂໍຂະມາ"

ອຸປັດຊາທັງຫຼາຍກໍຍັງບໍ່ຍອມໃຫ້ຂະມາຢູ່ຄືເກົ່າ ພວກສັດທິວິຫາຣິກພາກັນຫຼີກໄປແດ່ ສິກໄປແດ່ ໄປເຂົ້າຣີດເດຍຣະຖີແດ່ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ອຸປັດຊາຜູ້ທີ່ສັດທິວິຫາຣິກຂໍຂະມາແລ້ວຈະບໍ່ຮັບການຂໍຂະມາບໍ່ໄດ້ ອົງໃດບໍ່ຮັບການຂໍຂະມາ ຕ້ອງອາບັດທຸກກົດ"

## ຊົງປັບທຸກກົດເມື່ອປະນາມບໍ່ຖືກຕ້ອງ

ສະໄໝນັ້ນ ອຸປັດຊາທັງຫຼາຍປະນາມສັດທິວິຫາຣິກຜູ້ປະພຶດສົມຄວນ ບໍ່ປະນາມສັດທິວິຫາຣິກຜູ້ປະພຶດບໍ່ສົມຄວນ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ສັດທິວິຫາຣິກຜູ້ປະພຶດສົມຄວນ ອຸປັດຊາບໍ່ເພິ່ງປະນາມ ອົງໃດປະນາມ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ສັດທິວິຫາຣິກ ຜູ້ປະພຶດບໍ່ສົມຄວນ ອຸປັດຊາຈະບໍ່ປະນາມບໍ່ໄດ້ ອົງໃດບໍ່ປະນາມ ຕ້ອງອາບັດທຸກກົດ

## ອົງແຫ່ງການປະນາມ

ພິກຂຸທັງຫຼາຍ ອຸປັດຊາເພິ່ງປະນາມສັດທິວິຫາຣິກຜູ້ປະກອບດ້ວຍອົງ ໕ ຄື

໑. ບໍ່ມີຄວາມ ຮັກ ຢ່າງຍິ່ງໃນອຸປັດຊາ
໒. ບໍ່ມີຄວາມ ເຫຼື້ອມໃສ ຢ່າງຍິ່ງໃນອຸປັດຊາ
໓. ບໍ່ມີຄວາມ ລະອາຍ ຢ່າງຍິ່ງໃນອຸປັດຊາ
໔. ບໍ່ມີຄວາມ ເຄົາລົບ ຢ່າງຍິ່ງໃນອຸປັດຊາ
໕. ບໍ່ມີຄວາມ ຫວັງດີ ຢ່າງຍິ່ງໃນອຸປັດຊາ

ພິກຂຸທັງຫຼາຍ ອຸປັດຊາເພິ່ງປະນາມສັດທິວິຫາຣິກຜູ້ປະກອບດ້ວຍອົງ ໕ ແນວນີ້

ພິກຂຸທັງຫຼາຍ ອຸປັດຊາບໍ່ເພິ່ງປະນາມສັດທິວິຫາຣິກຜູ້ປະກອບດ້ວຍອົງ ໕ ຄື

໑. ມີຄວາມ ຮັກ ຢ່າງຍິ່ງໃນອຸປັດຊາ
໒. ມີຄວາມ ເຫຼື້ອມໃສ ຢ່າງຍິ່ງໃນອຸປັດຊາ
໓. ມີຄວາມ ລະອາຍ ຢ່າງຍິ່ງໃນອຸປັດຊາ
໔. ມີຄວາມ ເຄົາລົບ ຢ່າງຍິ່ງໃນອຸປັດຊາ
໕. ມີຄວາມ ຫວັງດີ ຢ່າງຍິ່ງໃນອຸປັດຊາ

ພິກຂຸທັງຫຼາຍ ອຸປັດຊາບໍ່ເພິ່ງປະນາມສັດທິວິຫາຣິກຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້
ພິກຂຸທັງຫຼາຍ ສັດທິວິຫາຣິກຜູ້ປະກອບດ້ວຍອົງ ໕ ຄວນທີ່ຈະຖືກປະນາມ ຄື

໑. ບໍ່ມີຄວາມ ຮັກ ຢ່າງຍິ່ງໃນອຸປັດຊາ
໒. ບໍ່ມີຄວາມ ເຫຼື້ອມໃສ ຢ່າງຍິ່ງໃນອຸປັດຊາ
໓. ບໍ່ມີຄວາມ ລະອາຍ ຢ່າງຍິ່ງໃນອຸປັດຊາ
໔. ບໍ່ມີຄວາມ ເຄົາລົບ ຢ່າງຍິ່ງໃນອຸປັດຊາ
໕. ບໍ່ມີຄວາມ ຫວັງດີ ຢ່າງຍິ່ງໃນອຸປັດຊາ

ພິກຂຸທັງຫຼາຍ ສັດທິວິຫາຣິກຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ ຄວນທີ່ຈະຖືກປະນາມ
ພິກຂຸທັງຫຼາຍ ສັດທິວິຫາຣິກຜູ້ປະກອບດ້ວຍອົງ ໕ ບໍ່ຄວນທີ່ຈະຖືກປະນາມ ຄື

໑. ມີຄວາມ ຮັກຢ່າງຍິ່ງໃນອຸປັດຊາ
໒. ມີຄວາມ ເຫຼື້ອມໃສ ຢ່າງຍິ່ງໃນອຸປັດຊາ
໓. ມີຄວາມ ລະອາຍ ຢ່າງຍິ່ງໃນອຸປັດຊາ

໔. ມີຄວາມ ເຄົາລົບ ຢ່າງຍິ່ງໃນອຸປັດຊາ
໕. ມີຄວາມ ຫວັງດີ ຢ່າງຍິ່ງໃນອຸປັດຊາ

ພິກຂຸທັງຫຼາຍ ສັດທິວິຫາຣິກຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ ບໍ່ຄວນທີ່ຈະຖືກປະນາມ

ພິກຂຸທັງຫຼາຍ ສັດທິວິຫາຣິກຜູ້ປະກອບດ້ວຍອົງ ໕ ເມື່ອອຸປັດຊາບໍ່ປະນາມ ຍ່ອມມີໂທດ ເມື່ອປະນາມ ຍ່ອມບໍ່ມີໂທດ ຄື

໑. ບໍ່ມີຄວາມ ຮັກ ຢ່າງຍິ່ງໃນອຸປັດຊາ
໒. ບໍ່ມີຄວາມ ເຫຼື້ອມໃສ ຢ່າງຍິ່ງໃນອຸປັດຊາ
໓. ບໍ່ມີຄວາມ ລະອາຍ ຢ່າງຍິ່ງໃນອຸປັດຊາ
໔. ບໍ່ມີຄວາມ ເຄົາລົບ ຢ່າງຍິ່ງໃນອຸປັດຊາ
໕. ບໍ່ມີຄວາມ ຫວັງດີ ຢ່າງຍິ່ງໃນອຸປັດຊາ

ພິກຂຸທັງຫຼາຍ ສັດທິວິຫາຣິກຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ ເມື່ອອຸປັດຊາບໍ່ປະນາມ ຍ່ອມມີໂທດ ເມື່ອປະນາມ ຍ່ອມບໍ່ມີໂທດ

ພິກຂຸທັງຫຼາຍ ສັດທິວິຫາຣິກຜູ້ປະກອບດ້ວຍອົງ ໕ ເມື່ອອຸປັດຊາປະນາມ ຍ່ອມມີໂທດ ເມື່ອບໍ່ປະນາມ ຍ່ອມບໍ່ມີໂທດ ຄື

໑. ມີຄວາມ ຮັກ ຢ່າງຍິ່ງໃນອຸປັດຊາ
໒. ມີຄວາມ ເຫຼື້ອມໃສ ຢ່າງຍິ່ງໃນອຸປັດຊາ
໓. ມີຄວາມ ລະອາຍ ຢ່າງຍິ່ງໃນອຸປັດຊາ
໔. ມີຄວາມ ເຄົາລົບ ຢ່າງຍິ່ງໃນອຸປັດຊາ
໕. ມີຄວາມ ຫວັງດີ ຢ່າງຍິ່ງໃນອຸປັດຊາ

ພິກຂຸທັງຫຼາຍ ສັດທິວິຫາຣິກຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ ເມື່ອອຸປັດຊາປະນາມ ຍ່ອມມີໂທດ ເມື່ອບໍ່ປະນາມ ຍ່ອມບໍ່ມີໂທດ

## ມູນເຫດໃຫ້ເກີດການອຸປະສົມບົດດ້ວຍຍັດຕິຈະຕຸດຖະກຳ

## ເລື້ອງພາມຈ່ອຍຜອມຍ້ອນບໍ່ໄດ້ບວດ

[໖໙] ສະໄໝນັ້ນ ພາມຄົນໜຶ່ງ ເຂົ້າໄປຫາພິກຂຸທັງຫຼາຍ ຂໍການບັນພະຊາ ພິກຂຸທັງຫຼາຍ ບໍ່ປະສົງຈະໃຫ້ເຂົາບັນພະຊາ ເຂົາເມື່ອບໍ່ໄດ້ການບັນພະຊາໃນໝູ່ພິກຂຸ ຈຶ່ງຈ່ອຍຜອມ ໝອງຄ້ຳ ຫູ່າເຫຼືອງ ເສັ້ນເອັນຂຶ້ນສະພັ່ງ

ພຣະຜູ້ມີພຣະພາກເຈົ້າ ທອດພຣະເນດເຫັນພາມນັ້ນ ຈ່ອຍຜອມ ໝອງຄ້ຳ ຫຼ່າເຫຼືອງ ເສັ້ນເອັນຂຶ້ນສະພັ່ງ ຈຶ່ງຕັດຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເປັນຫຍັງ ພາມຜູ້ນັ້ນຈຶ່ງໄດ້ ຈ່ອຍຜອມ ໝອງຄ້ຳ ຫຼ່າເຫຼືອງ ເສັ້ນເອັນຂຶ້ນສະພັ່ງນໍ

ພິກຂຸທັງຫຼາຍ ຂາບທູນວ່າ "ພາມນັ້ນ ໄດ້ເຂົ້າໄປຫາພິກຂຸທັງຫຼາຍຂໍການບັນພະຊາ ພິກຂຸທັງຫຼາຍ ບໍ່ປະສົງຈະໃຫ້ເຂົາບັນພະຊາ ເຂົາເມື່ອບໍ່ໄດ້ການບັນພະຊາໃນໝູ່ພິກຂຸ ຈຶ່ງຈ່ອຍຜອມ ໝອງຄ້ຳ ຫຼ່າເຫຼືອງ ເສັ້ນເອັນຂຶ້ນສະພັ່ງ ຂ້ານ້ອຍ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຕັດກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໃຜຣະນຶກຄວາມດີຂອງພາມນັ້ນໄດ້ແດ່?

ເມື່ອຕັດຖາມແນວນີ້ແລ້ວ ທ່ານພຣະສາຣີບຸດໄດ້ຂາບທູນພຣະຜູ້ມີພາກດັ່ງນີ້ວ່າ "ຂ້າພຣະອົງຣະນຶກຄວາມດີຂອງພາມນັ້ນໄດ້ ຂ້ານ້ອຍ

ສາຣີບຸດ ທ່ານຣະນຶກຄວາມດີອັນໃດຂອງພາມນັ້ນໄດ້ແດ່?

ພຣະອົງຜູ້ຈະເລີນ ເມື່ອຂ້າພະອົງທ່ຽວບິນທະບາດໃນນະຄອນຣາຊະຄຶນີ້ ພາມນັ້ນໄດ້ຖວາຍເຂົ້າຈອງໜຶ່ງ ຂ້າພະອົງຣະນຶກຄວາມດີນີ້ຂອງພາມນັ້ນໄດ້ ຂ້ານ້ອຍ

ດີແລ້ວ ໆ ສາຣີບຸດ ຈິງຢູ່ ສັດຕະບຸຣຸດທັງຫຼາຍ ເປັນຜູ້ກະຕັນຍູກະຕະເວທີ ສາຣີບຸດ ຖ້າແນວນັ້ນ ທ່ານຈົ່ງໃຫ້ພາມນັ້ນບັນພະຊາອຸປະສົມບົດເທີ້ນ

ຂ້າພະອົງຈະໃຫ້ພາມນັ້ນ ບັນພະຊາອຸປະສົມບົດແນວໃດ ຂ້ານ້ອຍ

## ອຸປະສົມບົດດ້ວຍຍັດຕິຈະຕຸດຖະກຳ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ໄດ້ຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດແລ້ວ ຮັບສັ່ງພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ນັບແຕ່ວັນນີ້ເປັນຕົ້ນໄປ ເຮົາຫ້າມການອຸປະສົມບົດດ້ວຍໄຕຣສະຣະນະຄົມທີ່ເຮົາໄດ້ອະນຸຍາດໄວ້ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ອຸປະສົມບົດດ້ວຍຍັດຕິຈະຕຸດຖະກຳ

## ວິທີໃຫ້ອຸປະສົມບົດແລະກຳວາຈາໃຫ້ອຸປະສົມບົດ

ພິກຂຸທັງຫຼາຍ ສົງເພິ່ງໃຫ້ອຸປະສົມບົດແນວນີ້ ພິກຂຸຜູ້ສະຫຼາດ ສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳວາຈາ ວ່າ

[໗໐] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຜູ້ນີ້ມີຊື່ນີ້ ເປັນອຸປະສຳປະທາເປກຂະ (ຜູ້ຂໍ

ບວດເປັນພິກຂຸ) ຂອງທ່ານຜູ້ມີຊື່ນີ້ ຖ້າສົງພ້ອມກັນແລ້ວ ເພິ່ງໃຫ້ຜູ້ມີຊື່ນີ້ອຸປະສົມບົດ ມີທ່ານຜູ້ມີຊື່ນີ້ເປັນອຸປັດຊາ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຜູ້ນີ້ມີຊື່ນີ້ ເປັນອຸປະສຳປະທາເປກຂະຂອງທ່ານຜູ້ມີຊື່ນີ້ ສົງໃຫ້ຜູ້ມີຊື່ນີ້ອຸປະສົມບົດ ມີທ່ານຜູ້ມີຊື່ນີ້ເປັນອຸປັດຊາ ທ່ານອົງໃດເຫັນດ້ວຍກັບການໃຫ້ຜູ້ມີຊື່ນີ້ອຸປະສົມບົດ ມີທ່ານຜູ້ມີຊື່ນີ້ເປັນອຸປັດຊາ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດ ບໍ່ເຫັນດ້ວຍ ທ່ານອົງນັ້ນ ເພິ່ງທັກທ້ວງ

ແມ່ນຄັ້ງທີ ໒ ຂ້າພະເຈົ້າກໍກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຜູ້ນີ້ມີຊື່ນີ້ ເປັນອຸປະສຳປະທາເປກຂະຂອງທ່ານຜູ້ມີຊື່ນີ້ ສົງໃຫ້ຜູ້ມີຊື່ນີ້ອຸປະສົມບົດ ມີທ່ານຜູ້ມີຊື່ນີ້ເປັນອຸປັດຊາ ທ່ານອົງໃດ ເຫັນດ້ວຍກັບການໃຫ້ຜູ້ມີຊື່ນີ້ອຸປະສົມບົດ ມີທ່ານຜູ້ມີຊື່ນີ້ເປັນອຸປັດຊາ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນ ເພິ່ງທັກທ້ວງ

ແມ່ນຄັ້ງທີ ໓ ຂ້າພະເຈົ້າກໍກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຜູ້ນີ້ມີຊື່ນີ້ ເປັນອຸປະສຳປະທາເປກຂະຂອງທ່ານຜູ້ມີຊື່ນີ້ ສົງໃຫ້ຜູ້ມີຊື່ນີ້ອຸປະສົມບົດມີທ່ານ ຜູ້ມີຊື່ນີ້ເປັນອຸປັດຊາ ທ່ານອົງໃດເຫັນດ້ວຍກັບການໃຫ້ຜູ້ມີຊື່ນີ້ອຸປະສົມບົດ ມີທ່ານຜູ້ມີຊື່ນີ້ ເປັນອຸປັດຊາ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນ ເພິ່ງທັກທ້ວງ

ຜູ້ມີຊື່ນີ້ສົງໃຫ້ອຸປະສົມບົດແລ້ວ ມີທ່ານຜູ້ມີຊື່ນີ້ເປັນອຸປັດຊາ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

## ເລື້ອງພິກຂຸປະພຶດບໍ່ສົມຄວນ

[໗໑] ສະໄໝນັ້ນ ພິກຂຸອົງໜຶ່ງ ເມື່ອອຸປະສົມບົດແລ້ວໄດ້ປະພຶດບໍ່ສົມຄວນ ພິກຂຸທັງຫຼາຍ ພາກັນກ່າວຫ້າມວ່າ "ອາວຸໂສ ທ່ານຢ່າໄດ້ເຮັດແນວນັ້ນ ຍ້ອນການ ເຮັດແນວນັ້ນບໍ່ຄວນ

ພິກຂຸນັ້ນ ກ່າວແນວນີ້ວ່າ "ຂ້າພະເຈົ້າບໍ່ໄດ້ຂໍຮ້ອງທ່ານຜູ້ມີອາຍຸທັງຫຼາຍວ່າ ຈົ່ງໃຫ້ຂ້າພະເຈົ້າ ອຸປະສົມບົດ ທ່ານທັງຫຼາຍ ບໍ່ໄດ້ຮັບການຂໍຮ້ອງຈາກຂ້າພະເຈົ້າ ແລ້ວໃຫ້ຂ້າພະເຈົ້າອຸປະສົມບົດເຮັດຫຍັງ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ພຣະພາກໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ໄດ້ຮັບການຂໍຮ້ອງ ບໍ່ເພິ່ງໃຫ້ກຸນລະບຸດອຸປະສົມບົດ ອົງໃດໃຫ້ອຸປະສົມບົດ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ ພິກຂຸຜູ້ໄດ້ຮັບການຂໍຮ້ອງໃຫ້ກຸນລະບຸດອຸປະສົມບົດໄດ້

## ວິທີຂໍການອຸປະສົມບົດ

ພິກຂຸທັງຫຼາຍ ກໍອຸປະສຳປະທາເປກຂະເພິ່ງຂໍແນວນີ້

ອຸປະສຳປະທາເປກຂະ ເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸທັງຫຼາຍ ນັ່ງຢ່ອງຍໍ້ ປະນົມມື ກ່າວຄຳຂໍການອຸປະສົມບົດແນວນີ້ວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍ ຂໍການອຸປະສົມບົດຕໍ່ສົງ ຂໍສົງໂຜດອະນຸເຄາະຍົກຂ້ານ້ອຍຂຶ້ນດ້ວຍເທີ້ນ ຂ້ານ້ອຍ

ເພິ່ງຂໍແມ່ນ ຄັ້ງທີ ໒ ຯລຯ
ເພິ່ງຂໍແມ່ນ ຄັ້ງທີ ໓ ຯລຯ
ພິກຂຸຜູ້ສະຫຼາດ ຜູ້ສາມາດ ເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳວາຈາ ວ່າ

## ກຳວາຈາໃຫ້ອຸປະສົມບົດ

[໑໒] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຜູ້ນີ້ມີຊື່ນີ້ເປັນອຸປະສຳປະທາເປກຂະຂອງທ່ານຜູ້ມີຊື່ນີ້ ຜູ້ມີຊື່ນີ້ຂໍອຸປະສົມບົດຕໍ່ສົງ ຖ້າສົງພ້ອມກັນແລ້ວ ເພິ່ງໃຫ້ຜູ້ມີຊື່ນີ້ ອຸປະສົມບົດ ມີທ່ານຜູ້ມີຊື່ນີ້ເປັນອຸປັດຊາ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຜູ້ນີ້ມີຊື່ນີ້ ເປັນອຸປະສຳປະທາເປກຂະຂອງທ່ານຜູ້ມີຊື່ນີ້ ຜູ້ມີຊື່ນີ້ຂໍອຸປະສົມບົດຕໍ່ສົງ ມີທ່ານຜູ້ມີຊື່ນີ້ເປັນອຸປັດຊາ ສົງໃຫ້ຜູ້ມີຊື່ນີ້ອຸປະສົມບົດ ມີທ່ານຜູ້ມີຊື່ນີ້ເປັນອຸປັດຊາ ທ່ານອົງໃດ ເຫັນດ້ວຍກັບການໃຫ້ຜູ້ມີຊື່ນີ້ອຸປະສົມບົດ ມີທ່ານຜູ້ມີຊື່ນີ້ເປັນອຸປັດຊາ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນ ເພິ່ງທັກທ້ວງ

ແມ່ນ ຄັ້ງທີ ໒ ຂ້າພະເຈົ້າກ່າວຄວາມນີ້ ຯລຯ
ແມ່ນ ຄັ້ງທີ ໓ ຂ້າພະເຈົ້າກ່າວຄວາມນີ້ ຯລຯ

ຜູ້ມີຊື່ນີ້ ສົງໃຫ້ອຸປະສົມບົດແລ້ວ ມີທ່ານຜູ້ມີຊື່ນີ້ເປັນອຸປັດຊາ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

## ເລື້ອງພາມບວດຍ້ອນເຫັນແກ່ປາກທ້ອງ

[໑໓] ສະໄໝນັ້ນ ປະຊາຊົນໃນນະຄອນຣາຊະຄຶໄດ້ຈັດລຳດັບພັດຕາຫານອັນປະນີດໄວ້ ພາມຄົນໜຶ່ງມີຄວາມຄິດວ່າ "ພຣະສະມະນະເຊື້ອສາຍສາກະຍະບຸດເຫຼົ່ານີ້ມີລັກສະນະນິໄສດີ ປະພຶດຮຽບຮ້ອຍ ບໍຣິໂພກອາຫານດີ ນອນໃນຫ້ອງທີ່ດີ ຖ້າຈັ່ງໃດ ເຮົາເພິ່ງບວດໃນພວກສະມະນະເຊື້ອສາຍສາກະຍະບຸດ" ຕໍ່ມາ ຈຶ່ງເຂົ້າໄປຫາພິກຂຸທັງຫຼາຍ ຂໍບັນພະຊາ ພິກຂຸທັງຫຼາຍໄດ້ໃຫ້

ບັນພະຊາອຸປະສົມບົດ ເມື່ອເຂົາບວດແລ້ວ ລຳດັບພັດຕາຫານໄດ້ຍົກເລີກໄປ ພິກຂຸທັງຫຼາຍກ່າວວ່າ "ທ່ານ ມາເທີ້ນ ບັດນີ້ ພວກເຮົາຈັກໄປບິນທະບາດກັນ"

ພິກຂຸນັ້ນ ກ່າວແນວນີ້ວ່າ "ເຮົາບໍ່ໄດ້ບວດຍ້ອນເຫດນີ້ວ່າ ຈັກທ່ຽວບິນທະບາດ" ຖ້າທ່ານທັງຫຼາຍ ຖວາຍເຮົາ ເຮົາຈັກສັນ ຖ້າບໍ່ຖວາຍເຮົາ ເຮົາຈັກສິກ

ພິກຂຸທັງຫຼາຍ ຈຶ່ງຖາມວ່າ "ອາວຸໂສ ກໍທ່ານບວດຍ້ອນເຫດແຫ່ງປາກທ້ອງແມ່ນບໍ?"
ທ່ານຕອບວ່າ "ແມ່ນ ຂ້ານ້ອຍ"

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸຈຶ່ງໄດ້ບວດໃນພຣະທຳວິໄນ ອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແນວນີ້ ຍ້ອນເຫດແຫ່ງປາກທ້ອງນໍ" ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນໃຫ້ພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງສອບຖາມ

ພຣະຜູ້ມີພຣະພາກເຈົ້າ ຊົງສອບຖາມພິກຂຸນັ້ນວ່າ "ພິກຂຸ ໄດ້ຂ່າວວ່າທ່ານບວດຍ້ອນເຫດແຫ່ງປາກທ້ອງ ແມ່ນບໍ?
ພິກຂຸນັ້ນ ທູນຮັບວ່າ "ແມ່ນແລ້ວ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມະຄະບຸຣຸດ ເປັນຫຍັງ ທ່ານຈຶ່ງໄດ້ບວດໃນທຳວິໄນທີ່ເຮົາກ່າວໄວ້ດີແນວນີ້ ຍ້ອນເຫດແຫ່ງປາກທ້ອງນໍ ໂມຄະບຸຣຸດ ການເຮັດແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສ ຍິ່ງຂຶ້ນໄດ້ເລີຍ ຯລຯ" ເມື່ອຊົງຕຳໜິແລ້ວ ຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ໃຫ້ອຸປະສົມບົດບອກນິດໄສ ໔ ຄື

## ນິດໄສ ໔

໑. ບັນພະຊາອາໄສໂພຊະນະ ຄື ຄຳເຂົ້າທີ່ເພິ່ງຫາໄດ້ດ້ວຍບີແຄ່ງ ທ່ານເພິ່ງກະທຳຄວາມອຸດສາຫະໃນໂພຊະນະ ຄື ຄຳເຂົ້າທີ່ເພິ່ງຫາໄດ້ດ້ວຍບີແຄ່ງນັ້ນຈົນຕະຫຼອດຊີວິດ ອະຕິເຣກລາບ ຄື ສັງຄະພັດ ອຸດເທສະພັດ ນິມັນຕະນະພັດ ສະລາກະພັດ ປັກຂິກະພັດ ອຸໂປສະຖິກະພັດ ປາຕິປະທິກະພັດ

໒. ບັນພະຊາອາໄສຜ້າບັງສຸກຸນ ທ່ານເພິ່ງກະທຳຄວາມອຸດສາຫະໃນຜ້າບັງສຸກຸນນັ້ນຈົນຕະຫຼອດຊີວິດ ອະຕິເຣກລາບ ຄື ຜ້າເປືອກໄມ້ ຜ້າຝ້າຍ ຜ້າໄໝ ຜ້າຂົນສັດ ຜ້າປ່ານ ຜ້າປົນກັນ

໓. ບັນພະຊາອາໄສເສນາສະນະ ຄື ຂ່ວງໄມ້ ທ່ານເພິ່ງກະທຳຄວາມອຸດສາຫະໃນເສນາສະນະ ຄື ຂ່ວງໄມ້ນັ້ນ ຈົນຕະຫຼອດຊີວິດ ອະຕິເຣກລາບ ຄື ວິຫານ ເຮືອນມຸງແຖບດຽວ ປາສາດ ເຮືອນໂລ້ນ ຖ້ຳ

໔. ບັນພະຊາອາໄສຢາ ຄື ນ້ຳມູດເນົ່າ ທ່ານເພິ່ງກະທຳຄວາມອຸດສາຫະໃນຢາ ຄື ນ້ຳມູດເນົ່ານັ້ນ ຈົນຕະຫຼອດຊີວິດ ອະຕິເຣກລາບ ຄື ເນີຍໃສ ເນີຍຂຸ້ນ ນ້ຳມັນ ນ້ຳເຜິ້ງ ນ້ຳອ້ອຍ

**ອຸປັດຊາຍະວັດຕະພານະວານທີ ໕ ຈົບ**

**ປະນາມິຕະກະຖາ ຈົບ**

# ໑໗. ອາຈະຣິຍະວັດຕະກະຖາ

## ວ່າດ້ວຍອາຈະຣິຍະວັດ

## ເລື້ອງການບອກນິດໄສແກ່ມານົບກ່ອນບວດ

[໗໘] ສະໄໝນັ້ນ ມານົບຄົນໜຶ່ງເຂົ້າໄປຫາພິກຂຸທັງຫຼາຍ ຂໍບັນພະຊາ ພິກຂຸທັງຫຼາຍໄດ້ບອກນິດໄສແກ່ເຂົາກ່ອນບວດ ເຂົາກ່າວແນວນີ້ວ່າ "ທ່ານຂ້ານ້ອຍ ຖ້າບວດແລ້ວ ທ່ານທັງຫຼາຍຈະເພິ່ງບອກນິດໄສແກ່ຂ້າພະເຈົ້າ ຂ້າພະເຈົ້າກໍຈະຍິນດີຍິ່ງ ບັດນີ້ ຂ້າພະເຈົ້າຈັກບໍ່ບວດ ຍ້ອນວ່ານິດໄສເປັນສິ່ງທີ່ໜ້າຊັງໜ້າກຽດສຳລັບຂ້າພະເຈົ້າ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ບໍ່ເພິ່ງບອກນິດໄສກ່ອນບວດ ອົງໃດບອກຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ບອກນິດໄສ ເມື່ອອຸປະສົມບົດສຳເລັດແລ້ວ

## ເລື້ອງໃຫ້ອຸປະສົມບົດດ້ວຍຄະນະ

ສະໄໝນັ້ນ ພິກຂຸທັງຫຼາຍໃຫ້ອຸປະສົມບົດດ້ວຍຄະນະມີພວກ ໔ ແດ່ ມີພວກ ໓ ແດ່ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງວ່າ "ພິກຂຸທັງຫຼາຍ ບໍ່ເພິ່ງໃຫ້ອຸປະສົມບົດດ້ວຍຄະນະມີພິກຂຸຢ່ອນກວ່າ ໑໐ ອົງ ພິກຂຸອົງໃດ ໃຫ້ອຸປະສົມບົດ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ອຸປະສົມບົດດ້ວຍຄະນະມີພວກ ໑໐ ຫຼື ມີພວກເກີນ ໑໐ ໄດ້

## ເລື່ອງອຸປັດຊາມີພັນສາດຽວໃຫ້ກຸນລະບຸດບວດ

[໗໕] ສະໄໝນັ້ນ ພິກຂຸທັງຫຼາຍ ມີພັນສາ ໑ ແດ່ ມີພັນສາ ໘ ແດ່ ໃຫ້ສັດທິວິຫາຣິກອຸປະສົມບົດ ແມ່ນທ່ານພຣະອຸປະເສນະວັງຄັນຕະບຸດຜູ້ມີພັນສາດຽວ ກໍໃຫ້ສັດທິວິຫາຣິກອຸປະສົມບົດ ທ່ານອອກພັນສາແລ້ວ ມີພັນສາ ໘ ໄດ້ພາສັດທິວິຫາຣິກມີພັນສາ ໑ ເຂົ້າໄປ ເຝົ້າພຣະຜູ້ມີພຣະພາກເຈົ້າ ຖວາຍອະພິວາດແລ້ວນັ່ງໃນບ່ອນສົມຄວນ

ອັນການທີ່ພຣະຜູ້ມີພຣະພາກພຸດທະເຈົ້າທັງຫຼາຍ ຊົງປາໄສກັບພຣະອາຄັນຕຸກະທັງຫຼາຍນັ້ນເປັນພຸດທະປະເພນີ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດຖາມທ່ານພຣະອຸປະເສນະວັງຄັນຕະບຸດວ່າ "ພິກຂຸ ທ່ານຍັງສະບາຍດີບໍ? ຍັງພໍເປັນຢູ່ໄດ້ແມ່ນບໍ? ທ່ານເດີນທາງມາບໍ່ລຳບາກແດ່ບໍ?

ທ່ານພຣະອຸປະເສນະວັງຄັນຕະບຸດຂາບທູນວ່າ "ຍັງສະບາຍດີ ຂ້ານ້ອຍ ຍັງພໍເປັນຢູ່ໄດ້ຂ້ານ້ອຍ ຂ້າພະອົງເດີນທາງມາໂດຍບໍ່ລຳບາກ ຂ້ານ້ອຍ

### ພຸດທະປະເພນີ

ພຣະຕະຖາຄົດເຈົ້າທັງຫຼາຍ ຊົງຮູ້ເລື້ອງຕັດຖາມກໍມີ ບໍ່ຕັດຖາມກໍມີ ຊົງຮູ້ການອັນຄວນຕັດຖາມກໍມີ ບໍ່ຕັດຖາມກໍມີ ຕັດຖາມເລື້ອງທີ່ເປັນປະໂຫຍດ ບໍ່ຕັດຖາມເລື້ອງທີ່ບໍ່ເປັນປະໂຫຍດ ຍ້ອນພຣະຕະຖາຄົດເຈົ້າທັງຫຼາຍ ຊົງກຳຈັດເລື້ອງທີ່ບໍ່ເປັນປະໂຫຍດດ້ວຍອະຣິຍະມັກ ພຣະຜູ້ມີພຣະພາກພຸດທະເຈົ້າທັງຫຼາຍ ສອບຖາມພິກຂຸທັງຫຼາຍດ້ວຍເຫດ ໔ ປະການ ຄື ຈະຊົງສະແດງທຳຢ່າງໜຶ່ງ ຈະຊົງບັນຍັດສິກຂາບົດແກ່ພຣະສາວົກຢ່າງໜຶ່ງ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດຖາມທ່ານພຣະອຸປະເສນະວັງຄັນຕະບຸດວ່າ "ທ່ານມີພັນສາທໍ່ໃດ ພິກຂຸ?"

ທ່ານພຣະອຸປະເສນະວັງຄັນຕະບຸດຂາບທູນວ່າ "ຂ້າພະອົງບວດໄດ້ ໘ ພັນສາແລ້ວຂ້ານ້ອຍ"

ພິກຂຸອົງນີ້ ມີພັນສາທໍ່ໃດ?

ມີພັນສາດຽວ ຂ້ານ້ອຍ

ພິກຂຸອົງນີ້ ເປັນຫຍັງກັບທ່ານ?

ເປັນສັດທິວິຫາຣິກຂອງຂ້າພະອົງ ຂ້ານ້ອຍ

### ຊົງຕຳໜິ

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດ ການກະທຳຂອງທ່ານ

ນັ້ນ ບໍ່ສົມຄວນ ບໍ່ຄວນເຮັດ ບໍ່ແມ່ນກິດຂອງສະມະນະ ໃຊ້ບໍ່ໄດ້ ບໍ່ຄວນເຮັດເລີຍ ໂມຄະບຸຣຸດ ທ່ານຍັງເປັນຜູ້ທີ່ຜູ້ອື່ນຈະຕ້ອງຕັກເຕືອນສັ່ງສອນ ແລ້ວເປັນຫຍັງ ຈຶ່ງໄດ້ສຳຄັນຕົນເພື່ອຕັກເຕືອນສັ່ງສອນຜູ້ອື່ນໄດ້ນໍ? ທ່ານວຽນມາເພື່ອຄວາມເປັນຜູ້ມັກຫຼາຍ ເຊິ່ງມີຄວາມກ່ຽວພັນກັບໝູ່ໄວໂພດ ການເຮັດແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ເມື່ອຕຳໜິແລ້ວ ຊົງສະແດງທຳມິກະຖາ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸມີພັນສາບໍ່ຮອດ ໑໐ ບໍ່ເພິ່ງໃຫ້ອຸປະສົມບົດ ອົງໃດໃຫ້ ອຸປະສົມບົດ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸມີພັນສາຄົບ ໑໐ ຫຼື ມີພັນສາເກີນ ໑໐ ໃຫ້ອຸປະສົມບົດໄດ້

## ເລື້ອງອຸປັດຊາໂງ່ຈ້າ

[໗໖] ສະໄໝນັ້ນ ພິກຂຸທັງຫຼາຍຄິດວ່າ "ເຮົາມີພັນສາຄົບ ໑໐ ເຮົາມີພັນສາຄົບ ໑໐" ແຕ່ເປັນຜູ້ໂງ່ຈ້າ ບໍ່ສະຫຼາດ ໃຫ້ອຸປະສົມບົດ ຜາກົດວ່າ ອຸປັດຊາເປັນຜູ້ໂງ່ຈ້າ ສັດທິວິຫາຣິກເປັນບັນດິດກໍມີ ອຸປັດຊາເປັນຜູ້ບໍ່ສະຫຼາດ ສັດທິວິຫາຣິກເປັນຜູ້ສະຫຼາດກໍມີ ອຸປັດຊາມີສຸຕະໜ້ອຍ ສັດທິວິຫາຣິກເປັນພະຫູສູດກໍມີ ອຸປັດຊາມີປັນຍາຊາມ ສັດທິວິຫາຣິກມີປັນຍາດີກໍມີ

ແມ່ນພິກຂຸອົງໜຶ່ງເຄີຍເປັນອັນຍະເດຍຣະຖີ ຖືກອຸປັດຊາວ່າກ່າວໂດຍຊອບທຳ ກໍຜິດຖຽງອຸປັດຊາໄປເຂົ້າລັດທິເດຍຣະຖີນັ້ນຄືເກົ່າ

ບັນດາພິກຂຸທີ່ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸທັງຫຼາຍ ຈຶ່ງໄດ້ອ້າງວ່າ ເຮົາມີພັນສາຄົບ ໑໐ ເຮົາມີພັນສາຄົບ ໑໐ ແຕ່ເປັນຜູ້ໂງ່ຈ້າ ບໍ່ສະຫຼາດ ໃຫ້ອຸປະສົມບົດ ຜາກົດວ່າ ອຸປັດຊາເປັນຜູ້ໂງ່ຈ້າ ສັດທິວິຫາຣິກເປັນບັນດິດກໍມີ ອຸປັດຊາເປັນຜູ້ບໍ່ສະຫຼາດ ສັດທິວິຫາຣິກເປັນຜູ້ສະຫຼາດກໍມີ ອຸປັດຊາມີສຸຕະໜ້ອຍ ສັດທິວິຫາຣິກ ເປັນພະຫູສູດກໍມີ ອຸປັດຊາມີປັນຍາຊາມ ສັດທິວິຫາຣິກມີປັນຍາດີກໍມີ" ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງສອບຖາມ

ພຣະຜູ້ມີພຣະພາກເຈົ້າ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸໄດ້ອ້າງວ່າ ເຮົາມີພັນສາຄົບ ໑໐ ເຮົາມີພັນສາຄົບ ໑໐ ແຕ່ເປັນຜູ້ໂງ່ຈ້າ ບໍ່ສະຫຼາດ ໃຫ້ອຸປະສົມບົດ ຜາກົດວ່າອຸປັດຊາເປັນຜູ້ໂງ່ຈ້າ ສັດທິວິຫາຣິກເປັນຜູ້ສະຫຼາດກໍມີ ອຸປັດຊາເປັນຜູ້ບໍ່ສະຫຼາດ ສັດທິວິຫາຣິກເປັນຜູ້ສະຫຼາດກໍມີ ອຸປັດຊາມີສຸຕະໜ້ອຍ ສັດທິວິຫາຣິກເປັນພະຫູສູດກໍມີ ອຸປັດຊາມີປັນຍາຊາມ ສັດທິວິຫາຣິກມີປັນຍາດີກໍມີ ແມ່ນບໍ?

ພິກຂຸທັງຫຼາຍທູນຮັບວ່າ "ແມ່ນແລ້ວ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງໂມຄະບຸຣຸດເຫຼົ່ານັ້ນຈຶ່ງໄດ້ອ້າງວ່າ ເຮົາມີພັນສາຄົບ ໑໐ ເຮົາມີພັນສາຄົບ ໑໐ ແຕ່ເປັນຜູ້ໂງ່ຈ້າ ບໍ່ສະຫຼາດໃຫ້ອຸປະສົມບົດນໍ ຜາກົດວ່າອຸປັດຊາເປັນຜູ້ໂງ່ຈ້າ ສັດທິວິຫາຣິກເປັນບັນດິດກໍມີ ອຸປັດຊາເປັນຜູ້ບໍ່ສະຫຼາດ ສັດທິວິຫາຣິກເປັນຜູ້ສະຫຼາດກໍມີ ອຸປັດຊາມີສຸຕະໜ້ອຍ ສັດທິວິຫາຣິກເປັນພະຫູສູດກໍມີອຸປັດຊາມີປັນຍາຊາມ ສັດທິວິຫາຣິກມີປັນຍາດີກໍມີ ພິກຂຸທັງຫຼາຍ ການກະທຳຂອງພວກໂມຄະບຸຣຸດນັ້ນ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ເມື່ອແລ້ວຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸຜູ້ໂງ່ຈ້າ ບໍ່ສະຫຼາດ ບໍ່ເພິ່ງໃຫ້ອຸປະສົມບົດ ອົງໃດ ໃຫ້ອຸປະສົມບົດ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດ ໃຫ້ພິກຂຸຜູ້ສະຫຼາດ ຜູ້ສາມາດ ມີພັນສາຄົບ ໑໐ ຫຼື ມີພັນສາເກີນ ໑໐ ໃຫ້ອຸປະສົມບົດໄດ້

## ເລື້ອງອຸປັດຊາຫຼີກໄປ

[໗໗] ສະໄໝນັ້ນ ເມື່ອອຸປັດຊາຫຼີກໄປແລ້ວ ພາກກັນສິກແດ່ ມໍຣະນະພາບແດ່ ໄປເຂົ້າຮີດເດຍຣະຖີແດ່ ພິກຂຸທັງຫຼາຍ ບໍ່ມີອາຈານ ບໍ່ມີຜູ້ຖ້າຕັກເຕືອນສັ່ງສອນ ຈຶ່ງນຸ່ງຫົ່ມບໍ່ ຮຽບຮ້ອຍ ມີມາຣະຍາດບໍ່ສົມຄວນ ທ່ຽວບິນທະບາດ ເມື່ອຄົນທັງຫຼາຍ ກຳລັງບໍຣິໂພກ ກໍເດ່ບາດສຳລັບທ່ຽວບິນທະບາດເຂົ້າໄປເທິງຂອງບໍຣິໂພກແດ່ ເທິງຂອງຫຍ້ຳແດ່ ເທິງຂອງສັນແດ່ ເທິງນ້ຳດື່ມແດ່ ອອກປາກຂໍແກງແດ່ ເຂົ້າສຸກແດ່ ດ້ວຍຕົນເອງມາສັນ ສົ່ງສຽງດັງໃນໂຮງສັນແດ່

ຄົນທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ສະມະນະເຊື້ອສາຍສາກະຍະບຸດທັງຫຼາຍ ຈຶ່ງໄດ້ນຸ່ງຫົ່ມບໍ່ຮຽບຮ້ອຍ ມີມາຣະຍາດບໍ່ສົມຄວນ ທ່ຽວບິນທະບາດ ເມື່ອຄົນທັງຫຼາຍກຳລັງບໍຣິໂພກ ກໍເດ່ບາດສຳລັບທ່ຽວບິນທະບາດເຂົ້າໄປເທິງຂອງບໍຣິໂພກແດ່ ເທິງຂອງຫຍ້ຳແດ່ ເທິງຂອງສັນແດ່ ເທິງນ້ຳດື່ມແດ່ ອອກປາກຂໍແກງແດ່ ເຂົ້າສຸກແດ່ ດ້ວຍຕົນເອງມາສັນ ສົ່ງສຽງດັງໃນໂຮງສັນແດ່ ເໝືອນພວກພາມໃນສະຖານທີ່ລ້ຽງພາມແນວນັ້ນນໍ

ພິກຂຸທັງຫຼາຍໄດ້ຍິນຄົນເຫຼົ່ານັ້ນຕຳໜິ ປະນາມ ໂພນທະນາຢູ່ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸທັງຫຼາຍ ຈຶ່ງໄດ້ນຸ່ງຫົ່ມບໍ່ຮຽບຮ້ອຍ ມີມາຣະຍາດບໍ່ສົມຄວນ ຯລຯ ສົ່ງສຽງດັ່ງໃນໂຮງສັນແດ່ນໍ" ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າພວກພິກຂຸນຸ່ງຫົ່ມບໍ່ຮຽບຮ້ອຍ ມີມາຣະຍາດບໍ່ສົມຄວນ ຯລຯ ສົ່ງສຽງດັງໃນໂຮງສັນແດ່ແມ່ນບໍ?

ພິກຂຸທັງຫຼາຍທູນຮັບວ່າ "ແມ່ນແລ້ວ ຂ້ານ້ອຍ"

## ເລື່ອງຖືນິດໄສຢູ່ ໑໐ ພັນສາ

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ໂມຄະບຸຣຸດເຫຼົ່ານັ້ນ ຯລຯ" ເມື່ອແລ້ວ ຊົງສະແດງທຳມິກະຖາ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດອາຈານ ອາຈານຈັກເຂົ້າໄປຕັ້ງຈິດສະນິດສະໜົມໃນອັນເຕວາສິກຄືກັນກັບບຸດຕົນ ອັນເຕວາສິກຈັກເຂົ້າໄປຕັ້ງຈິດສະນິດສະໜົມໃນອາຈານຄືກັນກັບບິດາຕົນ ເມື່ອເປັນແບບນີ້ ອາຈານແລະອັນເຕວາສິກຈັກມີຄວາມເຄົາລົບຢຳເກງ ປະພຶດກົມກຽວກັນ ຈັກເຖິງຄວາມຈະເລີນງອກງາມໄພບູນໃນພຣະທຳວິໄນນີ້ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ອາໄສພິກຂຸມີພັນສາ ໑໐ ຢູ່ ອະນຸຍາດໃຫ້ພິກຂຸມີພັນສາ ໑໐ ໃຫ້ນິດໄສໄດ້

## ວິທີຖືນິດໄສ

ພິກຂຸທັງຫຼາຍ ອັນເຕວາສິກ ເພິ່ງຖືອາຈານແບບນີ້

ອັນເຕວາສິກນັ້ນ ເພິ່ງຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນ ນັ່ງຢ່ອງຢໍ້ ປະນົມມືກ່າວແບບນີ້ວ່າ "ທ່ານຜູ້ຈະເລີນ ທ່ານຈົ່ງເປັນອາຈານຂອງຂ້າພະເຈົ້າເທີ້ນ ຂ້າພະເຈົ້າ ຈັກອາໄສທ່ານຢູ່ ທ່ານຜູ້ຈະເລີນ ທ່ານຈົ່ງເປັນອາຈານຂອງຂ້າພະເຈົ້າເທີ້ນ ຂ້າພະເຈົ້າຈັກອາໄສ ທ່ານຢູ່ ທ່ານຜູ້ຈະເລີນ ທ່ານຈົ່ງເປັນອາຈານຂອງຂ້າພະເຈົ້າ ຂ້າພະເຈົ້າຈັກອາໄສທ່ານຢູ່

ເມື່ອອາຈານໃຫ້ອັນເຕວາສິກຮູ້ດ້ວຍກາຍ ໃຫ້ຮູ້ດ້ວຍວາຈາ ຫຼື ໃຫ້ຮູ້ດ້ວຍກາຍແລະວາຈາ ວ່າ "ດີແລ້ວ" ວ່າ "ເບົາໃຈໄດ້" ວ່າ "ສົມຄວນດ້ວຍອຸບາຍແລ້ວ" ວ່າ "ສົມຄວນແລ້ວ" ຫຼື ວ່າ "ຈົ່ງປະພຶດປະຕິບັດໃຫ້ໜ້າເຫຼື້ອມໃສ" ອາຈານຊື່ວ່າ ເປັນຜູ້ທີ່ອັນເຕວາສິກຖືແລ້ວ

ອາຈານບໍ່ໃຫ້ອັນເຕວາສິກຮູ້ດ້ວຍກາຍ ບໍ່ໃຫ້ຮູ້ດ້ວຍວາຈາ ຫຼື ບໍ່ໃຫ້ຮູ້ດ້ວຍກາຍແລະວາຈາ ອາຈານເປັນຜູ້ທີ່ອັນເຕວາສິກຍັງບໍ່ໄດ້ຖື

## ອາຈະຣິຍະວັດ

[໗໘] ພິກຂຸທັງຫຼາຍ ອັນເຕວາສິກ ເພິ່ງປະພຶດສົມຄວນໃນອາຈານ ວິທີປະພຶດສົມຄວນໃນອາຈານນັ້ນ ມີດັ່ງນີ້

ອັນເຕວາສິກເພິ່ງລຸກຂຶ້ນແຕ່ເຊົ້າມືດ ປົດເກີບ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຖວາຍໄມ້ຖູແຂ້ວ ນ້ຳລ້າງໜ້າ ປູອາສະນະ

ຖ້າເຂົ້າຕົ້ມມີ ເພິ່ງລ້າງພາຊະນະໃສ່ເຂົ້າຕົ້ມເຂົ້າໄປຖວາຍ ເມື່ອອາຈານສັນເຂົ້າຕົ້ມສຳເລັດແລ້ວ ເພິ່ງຖວາຍນ້ຳຮັບພາຊະນະມາ ຖືຢ່າງລະມັດລະວັງ ບໍ່ໃຫ້ຄູດ ລ້າງແລ້ວມ້ຽນໄວ້ ເມື່ອອາຈານລຸກຂຶ້ນແລ້ວ ເພິ່ງຍົກອາສະນະເກັບ ຖ້າທີ່ນັ້ນຮົກ ເພິ່ງປັດກວາດ

ຖ້າອາຈານຕ້ອງການຈະເຂົ້າໝູ່ບ້ານ ເພິ່ງຖວາຍຜ້ານຸ່ງ ຮັບຜ້ານຸ່ງອາໄສ ຖວາຍປະຄົດແອວ ຖວາຍສັງຄາຕິທີ່ພັບຊ້ອນກັນ ລ້າງບາດແລ້ວຖວາຍພ້ອມນໍ້າ

ຖ້າອາຈານຫວັງຈະໃຫ້ເປັນປັດສາສະມະນະ ເພິ່ງນຸ່ງໃຫ້ຮຽບຮ້ອຍປົກປິດໄດ້ມົນທົນ ໓ ຄາດປະຄົດແອວ ຫົ່ມສັງຄາຕິທີ່ພັບຊ້ອນກັນ ໃສ່ລູກດຸມ ລ້າງບາດຖືໄປ ເປັນປັດສາສະມະນະຂອງອາຈານ ເພິ່ງຍ່າງບໍ່ໃຫ້ຫ່າງຫຼາຍ ບໍ່ໃຫ້ໃກ້ຫຼາຍ ເພິ່ງຮັບບາດທີ່ມີຂອງບັນຈຸຢູ່

ເມື່ອອາຈານກຳລັງເວົ້າ ບໍ່ເພິ່ງເວົ້າສອດຂຶ້ນໃນລະຫວ່າງ ອາຈານກ່າວຄຳເວົ້າໃກ້ຕໍ່ອາບັດ ເພິ່ງຫ້າມໄວ້

ເມື່ອອາຈານຈະກັບ ເພິ່ງມາກ່ອນແລ້ວປູອາສະນະໄວ້ ເພິ່ງກຽມນໍ້າລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນໄວ້ ເພິ່ງລຸກຂຶ້ນຮັບບາດແລະຈີວອນ ເພິ່ງຖວາຍຜ້ານຸ່ງອາໄສ ຮັບຜ້ານຸ່ງມາ

ຖ້າຈີວອນຊຸ່ມເຫື່ອ ເພິ່ງຕາກແດດບຶດໜຶ່ງ ບໍ່ເພິ່ງຕາກຖິ້ມໄວ້ກາງແດງເທິງໂພດ ເພິ່ງພັບຈີວອນ ເມື່ອຈະພັບຈີວອນ ເພິ່ງພັບຈີວອນໃຫ້ເຫຼື່ອມແຈກັນ ໔ ນີ້ວ ຕັ້ງໃຈວ່າ ສູນກາງຈະໄດ້ບໍ່ມີຮອຍພັບ ເພິ່ງມ້ວນປະຄົດແອວໃສ່ຂົດຈີວອນ

ຖ້າບິນທະບາດມີ ແລະອາຈານຕ້ອງການຈະສັນ ເພິ່ງຖວາຍນໍ້າແລ້ວນ້ອມບິນທະບາດເຂົ້າໄປຖວາຍ ນຳນໍ້າສັນມາຖວາຍ ເມື່ອອາຈານສັນສຳເລັດແລ້ວ ເພິ່ງຖວາຍນໍ້າ ຮັບບາດມາ ຖືຢ່າງລະມັດລະວັງ ບໍ່ໃຫ້ຄູດ ລ້າງແລ້ວເຊັດໃຫ້ສະເດັດນໍ້າຕາກແດດບຶດໜຶ່ງ ບໍ່ເພິ່ງຕາກຖິ້ມໄວ້ກາງແດງເທິງໂພດ

ເພິ່ງເກັບບາດແລະຈີວອນ ເມື່ອຈະເກັບບາດ ເພິ່ງໃຊ້ມືຂ້າງໜຶ່ງຈັບບາດ ໃຊ້ມືຂ້າງໜຶ່ງລູບໃຕ້ຕຽງຫຼືໃຕ້ຕັ່ງ ຈຶ່ງເກັບບາດ ບໍ່ເພິ່ງເກັບບາດໄວ້ເທິງພື້ນທີ່ບໍ່ມີສິ່ງໃດຮອງ ເມື່ອຈະເກັບຈີວອນ ເພິ່ງໃຊ້ມືຂ້າງໜຶ່ງຖືຈີວອນ ໃຊ້ມືຂ້າງໜຶ່ງລູບຮາວຈີວອນ ຫຼື ສາຍຜຽກ ເອົາຊາຍໄວ້ນອກເອົາຂົດໄວ້ໃນ ຈຶ່ງເກັບຈີວອນ

ເມື່ອອາຈານລຸກຂຶ້ນແລ້ວ ເພິ່ງຍົກອາສະນະເກັບ ເພິ່ງເກັບນໍ້າລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນ ຖ້າທີ່ນັ້ນຮົກ ເພິ່ງປັດກວາດ

ຖ້າອາຈານຕ້ອງການຈະອາບນໍ້າ ເພິ່ງຈັດນໍ້າອາບຖວາຍ ຖ້າທ່ານຕ້ອງການນໍ້າເຢັນ ເພິ່ງຈັດນໍ້າເຢັນຖວາຍ ຖ້າທ່ານຕ້ອງການນໍ້າອຸ່ນ ເພິ່ງຈັດນໍ້າອຸ່ນຖວາຍ

ຖ້າອາຈານຕ້ອງການຈະເຂົ້າເຮືອນໄຟ ເພິ່ງບົດຜົງແປ້ງ ເພິ່ງແຊ່ດິນ ຖືຕັ່ງສຳລັບເຮືອນໄຟຍ່າງຕາມຫຼັງອາຈານໄປ ຖວາຍຕັ່ງສຳລັບເຮືອນໄຟແລ້ວ ຮັບຈີວອນມາວາງໃນບ່ອນສົມຄວນ ຈຶ່ງຖວາຍຜົງແປ້ງແລະດິນ

ຖ້າສາມາດ ເພິ່ງເຂົ້າເຮືອນໄຟ ເມື່ອຈະເຂົ້າເຮືອນໄຟ ເພິ່ງເອົາດິນທາໜ້າປິດໜ້າແລະຫຼັງ ຈຶ່ງເຂົ້າເຮືອນໄຟ ບໍ່ເພິ່ງນັ່ງບຽດພຣະເຖຣະ ບໍ່ເພິ່ງກີດກັນອາສະນະພຣະນະວະກະ ເພິ່ງກະທຳການບົວລະບັດແກ່ອາຈານໃນເຮືອນໄຟ ເມື່ອຈະອອກຈາກເຮືອນໄຟ ເພິ່ງຖືຕັ່ງສຳລັບເຮືອນໄຟປິດໜ້າແລະຫຼັງ ຈຶ່ງອອກຈາກເຮືອນໄຟ

ເພິ່ງກະທຳການບົວລະບັດແກ່ອາຈານແມ່ນໃນນ້ຳ ຕົນອາບນ້ຳສຳເລັດແລ້ວ ເພິ່ງຂຶ້ນກ່ອນເຊັດໂຕໃຫ້ແຫ້ງແລ້ວປ່ຽນຜ້າ ເພິ່ງເຊັດນ້ຳຈາກໂຕອາຈານ ຖວາຍຜ້ານຸ່ງ ສັງຄາຕິ ຖືຕັ່ງສຳລັບເຮືອນໄຟມາກ່ອນ ປູອາສະນະ ກຽມນ້ຳລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນໄວ້ ນຳນ້ຳສັນມາຖວາຍອາຈານ

ຖ້າອາຈານຕ້ອງການຈະໃຫ້ຮຽນ ເພິ່ງຮຽນ

ຖ້າອາຈານຕ້ອງການຈະໃຫ້ສອບຖາມອັດຖະ ເພິ່ງສອບຖາມອາຈານຢູ່ໃນວິຫານໃດ ຖ້າວິຫານນັ້ນ ສົກກະປົກ ຖ້າສາມາດ ເພິ່ງອານາໄມໃຫ້ສະອາດ ເມື່ອຈະອານາໄມວິຫານໃຫ້ສະອາດ ເພິ່ງຂົນບາດແລະຈີວອນອອກກ່ອນ ວາງໄວ້ ໃນບ່ອນສົມຄວນ ເພິ່ງຂົນຜ້າປູນັ່ງ ຜ້າປູນອນ ຟູກ ໝອນ ອອກມາວາງ ໃນບ່ອນສົມຄວນ

ຕຽງ ຕັ່ງ ອັນເຕວາສິກເພິ່ງຍົກຢ່າງລະມັດລະວັງ ບໍ່ໃຫ້ຄູດ ບໍ່ໃຫ້ກະທົບບານປະຕູ ແລະຂອບປະຕູ ຂົນອອກໄປຕັ້ງໄວ້ ໃນທີ່ສົມຄວນ ຊຽງຮອງຕຽງ ງົ່ງ ພະນັກອີງ ເພິ່ງຂົນອອກມາວາງໄວ້ ໃນທີ່ສົມຄວນ ພົມປູພື້ນ ເພິ່ງສັງເກດທີ່ປູໄວ້ເດີມ ຄ່ອຍຂົນອອກມາວາງໃນທີ່ສົມຄວນ

ຖ້າໃນວິຫານມີຝຸ່ນ ເພິ່ງປັດກວາດເພດານລົງມາກ່ອນ ຂອບໜ້າຕ່າງແລະແຈຫ້ອງເພິ່ງເຊັດ

ຖ້າຝາທີ່ເຂົາທານ້ຳມັນຫຼືພື້ນທາສີດຳຂຶ້ນຮາ ຄວນໃຊ້ຜ້າຊຸບນ້ຳບິດແລ້ວເຊັດ

ຖ້າເປັນພື້ນບໍ່ໄດ້ທາ ເພິ່ງໃຊ້ນ້ຳປະພົມເຊັດ ຢ່າໃຫ້ວິຫານເປິເປື້ອນເຕັມໄປດ້ວຍຝຸ່ນລະອອງ ເພິ່ງຄັດຂີ້ເຫຍື້ອໄປຖິ້ມ ໃນບ່ອນສົມຄວນ

ພົມປູພື້ນ ເພິ່ງຕາກແດດ ຊັກ ຕົບ ຂົນກັບປູໄວ້ຄືເກົ່າ ຊຽງຮອງຕຽງ ເພິ່ງຕາກແດດເຊັດ ຂົນກັບວາງໄວ້ຄືເກົ່າ

ຕຽງ ຕັ່ງ ເພິ່ງຕາກແດດ ຊຳຮະ ປັດ ຍົກຢ່າງລະມັດລະວັງ ບໍ່ໃຫ້ຄູດ ບໍ່ໃຫ້ກະທົບບານປະຕູ ແລະຂອບປະຕູ ຂົນກັບຕັ້ງໄວ້ຄືເກົ່າ ຟູກ ໝອນ ຜ້າປູນັ່ງ ຜ້າປູນອນ ເພິ່ງຕາກແດດຊຳຮະ ຕົບ ຂົນກັບວາງປູໄວ້ຄືເກົ່າ ງົ່ງ ພະນັກອີງ ເພິ່ງຕາກແດດ ເຊັດຖູ ຂົນກັບວາງໄວ້ຄືເກົ່າ

ເພິ່ງເກັບບາດແລະຈີວອນ ເມື່ອຈະເກັບບາດ ເພິ່ງໃຊ້ມືຂ້າງໜຶ່ງຖືບາດ ໃຊ້ມືຂ້າງໜຶ່ງລູບໃຕ້ຕຽງຫຼືໃຕ້ຕັ່ງ ຈຶ່ງເກັບບາດ ບໍ່ເພິ່ງເກັບບາດໄວ້ເທິງພື້ນທີ່ບໍ່ມີສິ່ງໃດຮອງ ເມື່ອຈະເກັບຈີວອນ

ເພິ່ງໃຊ້ມືຂ້າງໜຶ່ງຖືຈີວອນ ໃຊ້ມືຂ້າງໜຶ່ງລູບຮາວຈີວອນຫຼືສາຍຟຽກ ເອົາຊາຍໄວ້ນອກ ເອົາຂົດໄວ້ໃນ ຈຶ່ງເກັບຈີວອນ

ຖ້າລົມເຈືອຝຸ່ນລະອອງພັດມາທາງທິດຕາເວັນອອກ ເພິ່ງປິດໜ້າຕ່າງທິດຕາເວັນອອກ
ຖ້າພັດມາທາງທິດຕາເວັນຕົກ ເພິ່ງປິດໜ້າຕ່າງທິດຕາເວັນຕົກ
ຖ້າພັດມາທາງທິດເໜືອ ເພິ່ງປິດໜ້າຕ່າງທິດເໜືອ
ຖ້າພັດມາທາງທິດໃຕ້ ເພິ່ງປິດໜ້າຕ່າງທິດໃຕ້
ຖ້າເປັນລະດູໜາວ ເພິ່ງເປີດໜ້າຕ່າງກາງເວັນ ປິດກາງຄືນ
ຖ້າເປັນລະດູຮ້ອນ ເພິ່ງປິດໜ້າຕ່າງກາງເວັນ ເປີດກາງຄືນ

ຖ້າບໍລິເວນ ຊຸ້ມ ໂຮງສັນ ໂຮງໄຟ ວັດຈະກຸຕິ ຮົກ ເພິ່ງປັດກວາດ ຖ້ານ້ຳສັນນ້ຳໃຊ້ບໍ່ມີ ເພິ່ງຈັດກຽມໄວ້ ຖ້າໝໍ້ນ້ຳລ້າງບໍ່ມີນ້ຳ ເພິ່ງຕັກນ້ຳໃສ່ໝໍ້ນ້ຳລ້າງໃຫ້ເຕັມ

ຖ້າອາຈານເກີດຄວາມບໍ່ຍິນດີ ອັນເຕວາສິກເພິ່ງຊ່ອຍລະງັບ ຫຼືເພິ່ງບອກພິກຂຸອື່ນໃຫ້ຊ່ອຍລະງັບ ຫຼື ເພິ່ງສະແດງທຳມີກະຖາແກ່ອາຈານ

ຖ້າອາຈານເກີດຄວາມລຳຄານ ອັນເຕວາສິກເພິ່ງຊ່ອຍບັນເທົາ ຫຼື ເພິ່ງບອກພິກຂຸອື່ນໃຫ້ຊ່ອຍບັນເທົາ ຫຼື ເພິ່ງສະແດງທຳມີກະຖາແກ່ອາຈານ

ຖ້າອາຈານເກີດຄວາມເຫັນຜິດ ອັນເຕວາສິກເພິ່ງໃຫ້ສະລະສາ ຫຼື ເພິ່ງບອກພິກຂຸອື່ນໃຫ້ຊ່ອຍໃຫ້ສະລະສາ ຫຼື ເພິ່ງສະແດງທຳມີກະຖາແກ່ອາຈານ

ຖ້າອາຈານຕ້ອງອາບັດໜັກ ຄວນແກ່ປະຣິວາດ ອັນເຕວາສິກເພິ່ງກະທຳການຂວນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ສົງເພິ່ງໃຫ້ປະຣິວາດແກ່ອາຈານ"

ຖ້າອາຈານຄວນແກ່ການດຶງເຂົ້າຫາອາບັດເກົ່າ ອັນເຕວາສິກເພິ່ງກະທຳການຂວນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ສົງເພິ່ງດຶງອາຈານເຂົ້າຫາອາບັດເກົ່າ"

ຖ້າອາຈານຄວນແກ່ມານັດ ອັນເຕວາສິກເພິ່ງກະທຳການຂວນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ສົງເພິ່ງໃຫ້ມານັດແກ່ອາຈານ"

ຖ້າອາຈານຄວນແກ່ອັບພານ ອັນເຕວາສິກເພິ່ງກະທຳການຂວນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ສົງເພິ່ງອັບພານອາຈານ

ຖ້າສົງຕ້ອງການຈະເຮັດກຳ ຄື ຕັດຊະນີຍະກຳ ນິຍະສະກຳ ປັບພາຊະນີຍະກຳ ປະຕິສາຣະນີຍະກຳ ຫຼື ອຸກເຂປະນີຍະກຳແກ່ອາຈານ ອັນເຕວາສິກເພິ່ງກະທຳການຂວນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ສົງບໍ່ເພິ່ງເຮັດກຳແກ່ອາຈານ ຫຼື ເພິ່ງປ່ຽນໄປເປັນໂທດເບົາ" ຫຼື ວ່າອາຈານຖືກສົງລົງຕັດຊະນີຍະກຳ ນິຍະສະກຳ ປັບພາຊະນີຍະກຳ ປະຕິສາຣະນີຍະກຳ ຫຼື ອຸກເຂປະນີຍະກຳແລ້ວ ອັນເຕວາສິກເພິ່ງກະທຳການຂວນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ອາຈານເພິ່ງກັບປະພຶດສົມຄວນ ເພິ່ງຫາຍຈອງຫອງ ເພິ່ງກັບໂຕໄດ້ ສົງເພິ່ງລະງັບກຳນັ້ນສາ

ຖ້າຈີວອນຂອງອາຈານຈະຕ້ອງຊັກ ອັນເຕວາສິກເພິ່ງຊັກ ຫຼື ເພິ່ງກະທຳການຂວນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ຜູ້ໃດ ເພິ່ງຊັກຈີວອນຂອງອາຈານ"

ຖ້າຈີວອນຂອງອາຈານຈະຕ້ອງຕັດຫຍິບ ອັນເຕວາສິກເພິ່ງຕັດຫຍິບ ຫຼືເພິ່ງກະທຳການຂວນຂວາຍ ວ່າ "ດ້ວຍອຸບາຍແນວໃດນໍ ຜູ້ໃດ ເພິ່ງຕັດຫຍິບຈີວອນຂອງອາຈານ"

ຖ້ານ້ຳຍ້ອມຂອງອາຈານຈະຕ້ອງຕົ້ມ ອັນເຕວາສິກເພິ່ງຕົ້ມ ຫຼືເພິ່ງກະທຳການຂວນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ຜູ້ໃດ ເພິ່ງຕົ້ມນ້ຳຍ້ອມຂອງອາຈານ"

ຖ້າຈີວອນຂອງອາຈານຈະຕ້ອງຍ້ອມ ອັນເຕວາສິກເພິ່ງຍ້ອມ ຫຼື ເພິ່ງກະທຳການຂວນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ຜູ້ໃດ ເພິ່ງຍ້ອມຈີວອນຂອງອາຈານ" ເມື່ອຈະຍ້ອມຈີວອນເພິ່ງຍ້ອມ ພິກກັບໄປກັບມາດີ ໆ ເມື່ອຢົດນ້ຳຍ້ອມຍັງຍ້ອຍບໍ່ຂາດສາຍ ບໍ່ເພິ່ງຫຼີກໄປ

ອັນເຕວາສິກບໍ່ບອກອາຈານ ບໍ່ເພິ່ງໃຫ້ບາດແກ່ພິກຂຸບາງອົງ ບໍ່ເພິ່ງຮັບບາດຂອງພິກຂຸບາງອົງ ບໍ່ເພິ່ງໃຫ້ຈີວອນແກ່ພິກຂຸບາງອົງ ບໍ່ເພິ່ງຮັບຈີວອນຂອງພິກຂຸບາງອົງ ບໍ່ເພິ່ງໃຫ້ບໍຣິຂານແກ່ພິກຂຸບາງອົງ ບໍ່ເພິ່ງຮັບບໍຣິຂານຂອງພິກຂຸບາງອົງ ບໍ່ເພິ່ງແຖຜົມໃຫ້ພິກຂຸບາງອົງ ບໍ່ເພິ່ງໃຫ້ພິກຂຸບາງອົງແຖຜົມໃຫ້ ບໍ່ເພິ່ງກະທຳການບົວລະບັດແກ່ພິກຂຸບາງອົງ ບໍ່ເພິ່ງໃຫ້ພິກຂຸບາງອົງກະທຳການບົວລະບັດໃຫ້ ບໍ່ເພິ່ງກະທຳການຂວນຂວາຍແກ່ພິກຂຸບາງອົງ ບໍ່ເພິ່ງສັ່ງພິກຂຸບາງອົງໃຫ້ກະທຳການຂວນຂວາຍ ບໍ່ເພິ່ງເປັນປັດສາສະມະນະຂອງພິກຂຸບາງອົງ ບໍ່ເພິ່ງພາພິກຂຸບາງອົງໄປເປັນປັດສາສະມະນະ ບໍ່ເພິ່ງນຳບິນທະບາດໄປຖວາຍພິກຂຸບາງອົງ ບໍ່ເພິ່ງສັ່ງພິກຂຸບາງອົງໃຫ້ນຳບິນທະບາດໄປຖວາຍ

ອັນເຕວາສິກ ບໍ່ບອກລາອາຈານ ບໍ່ເພິ່ງເຂົ້າໝູ່ບ້ານ ບໍ່ເພິ່ງໄປປ່າຊ້າ ບໍ່ເພິ່ງອອກໄປຕ່າງຖິ່ນ ຖ້າອາຈານເປັນໄຂ້ ເພິ່ງພະຍາບານຈົນຕະຫຼອດຊີວິດ ເພິ່ງຖ້າຈົນກວ່າອາຈານນັ້ນຈະຫາຍ

**ອາຈະຣິຍະວັດຕະກະຖາ ຈົບ**

# ໑໗. ອັນເຕວາສິກະວັດຕະກະຖາ

## ວ່າດ້ວຍອັນເຕວາສິກວັດ

[໗໙] ພິກຂຸທັງຫຼາຍ ອາຈານເພິ່ງປະພຶດສົມຄວນໃນອັນເຕວາສິກ ວິທີປະພຶດສົມຄວນໃນອັນເຕວາສິກນັ້ນ ມີດັ່ງນີ້

ພິກຂຸທັງຫຼາຍ ອາຈານເພິ່ງສົງເຄາະອະນຸເຄາະອັນເຕວາສິກ ດ້ວຍອຸດເທດ ປະຣິປຸດສາ ໂອວາດ ແລະ ອະນຸສາດ

ຖ້າອາຈານມີບາດ ອັນເຕວາສິກບໍ່ມີບາດ ອາຈານເພິ່ງຖວາຍບາດແກ່ອັນເຕວາສິກ ຫຼື ເພິ່ງກະທຳການຂວນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ບາດເພິ່ງເກີດຂຶ້ນແກ່ອັນເຕວາສິກ"

ຖ້າອາຈານມີຈີວອນ ອັນເຕວາສິກບໍ່ມີຈີວອນ ອາຈານເພິ່ງຖວາຍຈີວອນແກ່ອັນເຕວາສິກ ຫຼື ເພິ່ງກະທຳການຂວນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ຈີວອນເພິ່ງເກີດຂຶ້ນແກ່ອັນເຕວາສິກ"

ຖ້າອາຈານມີບໍຣິຂານ ອັນເຕວາສິກບໍ່ມີບໍຣິຂານ ອາຈານເພິ່ງຖວາຍບໍຣິຂານແກ່ອັນເຕວາສິກ ຫຼື ເພິ່ງກະທຳການຂວນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ບໍຣິຂານເພິ່ງເກີດຂຶ້ນແກ່ອັນເຕວາສິກ"

ຖ້າອັນເຕວາສິກເປັນໄຂ້ ອາຈານເພິ່ງລຸກຂຶ້ນແຕ່ເຊົ້າມືດ ຖວາຍໄມ້ຖູແຂ້ວ ນ້ຳລ້າງໜ້າ ປູອາສະນະ

ຖ້າເຂົ້າຕົ້ມມີ ເພິ່ງລ້າງພາຊະນະໃສ່ເຂົ້າຕົ້ມເຂົ້າໄປຖວາຍ ເມື່ອອັນເຕວາສິກສັນເຂົ້າຕົ້ມສຳເລັດແລ້ວ ເພິ່ງຖວາຍນ້ຳ ຮັບພາຊະນະມາຖືຢ່າງລະມັດລະວັງ ບໍ່ໃຫ້ຄູດ ລ້າງແລ້ວມ້ຽນໄວ້ ເມື່ອອັນເຕວາສິກລຸກຂຶ້ນແລ້ວ ເພິ່ງຍົກອາສະນະເກັບ ຖ້າທີ່ນັ້ນຮົກ ເພິ່ງປັດກວາດ

ຖ້າອັນເຕວາສິກຕ້ອງການຈະເຂົ້າໝູ່ບ້ານ ເພິ່ງຖວາຍຜ້ານຸ່ງ ຮັບຜ້ານຸ່ງອາໄສ ຖວາຍປະຄົດແອວ ຖວາຍສັງຄາຕິທີ່ພັບຊ້ອນກັນ ລ້າງບາດແລ້ວຖວາຍພ້ອມນ້ຳ ປູອາສະນະໄວ້ ໂດຍກຳນົດວ່າ "ເວລາພຽງເທົ່ານີ້ ອັນເຕວາສິກຈັກກັບມາ" ເພິ່ງກຽມນ້ຳລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນໄວ້ ເພິ່ງລຸກຂຶ້ນຮັບບາດແລະຈີວອນ ເພິ່ງຖວາຍຜ້ານຸ່ງ ຜ້າອາໄສ ຮັບຜ້ານຸ່ງມາ

ຖ້າຈີວອນຊຸ່ມເຫື່ອ ເພິ່ງຕາກແດດບຶດໜຶ່ງ ບໍ່ເພິ່ງຕາກຖິ້ມໄວ້ກາງແດງເທິງໂພດ ເພິ່ງພັບຈີວອນ ເມື່ອຈະພັບຈີວອນ ເພິ່ງພັບຈີວອນໃຫ້ເຫຼື່ອມແຈກັນ ໔ ນິ້ວ ຕັ້ງໃຈວ່າ ສູນກາງຈະໄດ້ບໍ່ມີຮອຍພັບ ເພິ່ງມ້ວນປະຄົດແອວໃສ່ຂົດຈີວອນ

ຖ້າບິນທະບາດມີ ແລະອັນເຕວາສິກຕ້ອງການຈະສັນ ເພິ່ງຖວາຍນ້ຳແລ້ວນຳບິນທະບາດເຂົ້າໄປຖວາຍ ນຳນ້ຳສັນມາຖວາຍ ເມື່ອອັນເຕວາສິກສັນສຳເລັດແລ້ວ ເພິ່ງຖວາຍນ້ຳຮັບບາດມາ ຖືຢ່າງລະມັດລະວັງ ບໍ່ໃຫ້ຄູດ ລ້າງແລ້ວເຊັດໃຫ້ສະເດັດນ້ຳຕາກແດດບຶດໜຶ່ງ ບໍ່ເພິ່ງຕາກຖິ້ມໄວ້ກາງແດງເທິງໂພດ

ເພິ່ງເກັບບາດແລະຈີວອນ ເມື່ອຈະເກັບບາດ ເພິ່ງໃຊ້ມືຂ້າງໜຶ່ງຖືບາດ ໃຊ້ມືຂ້າງໜຶ່ງລູບໃຕ້ຕຽງ ຫຼື ໃຕ້ຕັ່ງ ຈຶ່ງເກັບບາດ ບໍ່ເພິ່ງເກັບບາດໄວ້ເທິງພື້ນທີ່ບໍ່ມີສິ່ງໃດຮອງ ເມື່ອຈະເກັບຈີວອນ ເພິ່ງໃຊ້ມືຂ້າງໜຶ່ງຖືຈີວອນ ໃຊ້ມືຂ້າງໜຶ່ງລູບຮາວຈີວອນ ຫຼື ສາຍຟຽກເອົາຊາຍໄວ້ນອກເອົາຂົດໄວ້ໃນຈຶ່ງເກັບຈີວອນ

ເມື່ອອັນເຕວາສິກລຸກຂຶ້ນແລ້ວ ເພິ່ງຍົກອາສະນະເກັບ ເພິ່ງເກັບນ້ຳລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນ ຖ້າທີ່ນັ້ນຮົກ ເພິ່ງປັດກວາດ

ຖ້າອັນເຕວາສິກຕ້ອງການຈະອາບນ້ຳ ເພິ່ງຈັດນ້ຳອາບຖວາຍ ຖ້າທ່ານຕ້ອງການນ້ຳເຢັນ ເພິ່ງຈັດນ້ຳເຢັນຖວາຍ ຖ້າທ່ານຕ້ອງການນ້ຳອຸ່ນ ເພິ່ງຈັດນ້ຳອຸ່ນຖວາຍ

ຖ້າອັນເຕວາສິກຕ້ອງການຈະເຂົ້າເຮືອນໄຟ ເພິ່ງບົດຜົງແປ້ງ ເພິ່ງແຊ່ດິນ ຖືຕັ່ງສຳລັບເຮືອນໄຟຍ່າງໄປ ຖວາຍຕັ່ງສຳລັບເຮືອນໄຟ ແລ້ວຮັບຈີວອນມາວາງໃນບ່ອນສົມຄວນ ເພິ່ງຖວາຍຜົງແປ້ງແລະດິນ

ຖ້າສາມາດ ເພິ່ງເຂົ້າເຮືອນໄຟ ເມື່ອຈະເຂົ້າເຮືອນໄຟ ເພິ່ງເອົາດິນທາໜ້າປິດໜ້າແລະຫຼັງ ຈຶ່ງເຂົ້າເຮືອນໄຟ ບໍ່ເພິ່ງນັ່ງບຽດພຣະເຖຣະ ບໍ່ເພິ່ງກີດກັນອາສະນະພຣະນະວະກະ ເພິ່ງກະທຳການບົວລະບັດແກ່ອັນເຕວາສິກໃນເຮືອນໄຟ ເມື່ອຈະອອກຈາກເຮືອນໄຟ ເພິ່ງຖືຕັ່ງສຳລັບເຮືອນໄຟປິດໜ້າແລະຫຼັງ ຈຶ່ງອອກຈາກເຮືອນໄຟ

ເພິ່ງກະທຳການບົວລະບັດແກ່ອັນເຕວາສິກແມ່ນໃນນ້ຳ ຕົນອາບສຳເລັດແລ້ວ ເພິ່ງຂຶ້ນກ່ອນເຊັດໂຕໃຫ້ແຫ້ງແລ້ວປຸ່ງນຜ້າ ເພິ່ງເຊັດນ້ຳຈາກໂຕອັນເຕວາສິກ ຖວາຍຜ້ານຸ່ງ ສັງຄາຕິ ຖືຕັ່ງສຳລັບເຮືອນໄຟມາກ່ອນ ປູອາສະນະ ກຽມນ້ຳລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນໄວ້ ນຳນ້ຳສັນມາຖວາຍອັນເຕວາສິກ

ອັນເຕວາສິກຢູ່ໃນວິຫານໃດ ຖ້າວິຫານນັ້ນສົກກະປົກ ຖ້າສາມາດ ເພິ່ງອານາໄມໃຫ້ສະອາດ ເມື່ອຈະອານາໄມວິຫານໃຫ້ສະອາດ ເພິ່ງຂົນບາດແລະຈີວອນອອກກ່ອນ ວາງໄວ້ ໃນບ່ອນສົມຄວນ ເພິ່ງຂົນຜ້າປູນັ່ງ ຜ້າປູນອນ ຟູກ ໝອນ ອອກມາວາງໄວ້ ໃນບ່ອນສົມຄວນ

ຕຽງ ຕັ່ງ ອາຈານເພິ່ງຍົກຢ່າງລະມັດລະວັງ ບໍ່ໃຫ້ຄູດ ບໍ່ໃຫ້ກະທົບບານປະຕູ ແລະຂອບປະຕູ ຂົນອອກໄປຕັ້ງໄວ້ ໃນບ່ອນສົມຄວນ ຊຽງຮອງຕຽງ ງັ່ງ ພະນັກອີງ

ເພິ່ງຂົນອອກມາວາງໄວ້ ໃນບ່ອນສົມຄວນ ພົມປູພື້ນ ເພິ່ງສັງເກດທີ່ປູໄວ້ເດີມ ຄ່ອຍຂົນອອກມາວາງໄວ້ ໃນບ່ອນສົມຄວນ

ຖ້າໃນວິຫານມີຝຸ່ນ ເພິ່ງປັດກວາດເພດານລົງມາກ່ອນ ຂອບໜ້າຕ່າງແລະແຈຫ້ອງເພິ່ງເຊັດ

ຖ້າຝາທີ່ທານ້ຳມັນຫຼືພື້ນທາສີດຳຂຶ້ນຮາ ເພິ່ງໃຊ້ຜ້າຊຸບນ້ຳບິດແລ້ວເຊັດ

ຖ້າເປັນພື້ນບໍ່ໄດ້ທາ ເພິ່ງໃຊ້ນ້ຳປະພົມເຊັດ ຢ່າໃຫ້ວິຫານເປິເປື້ອນດ້ວຍຝຸ່ນລະອອງເພິ່ງເກັບຂີ້ເຫຍື້ອໄປຖິ້ມ ໃນບ່ອນສົມຄວນ

ພົມປູພື້ນ ເພິ່ງຕາກແດດ ຊຳຣະ ຕົບ ຂົນກັບປູໄວ້ຄືເກົ່າ ຊຽງຮອງຕຽງ ເພິ່ງຕາກແດດເຊັດ ຂົນກັບວາງໄວ້ຄືເກົ່າ

ຕຽງ ຕັ່ງ ເພິ່ງຕາກແດດ ຊຳຣະ ປັດ ຍົກຢ່າງລະມັດລະວັງ ບໍ່ໃຫ້ຄູດ ບໍ່ໃຫ້ກະທົບບານປະຕູ ແລະຂອບໜ້າຕ່າງ ຂົນກັບຕັ້ງໄວ້ຄືເກົ່າ ຟູກ ໝອນ ຜ້າປູນັ່ງ ຜ້າປູນອນ ເພິ່ງຕາກແດດ ຊຳຣະ ຕົບ ຂົນກັບວາງປູໄວ້ຄືເກົ່າ ງົ່ງ ພະນັກອີງ ເພິ່ງຕາກແດດ ເຊັດຖູ ຂົນກັບວາງໄວ້ຄືເກົ່າ

ເພິ່ງເກັບບາດ ແລະຈີວອນ ເມື່ອຈະເກັບບາດ ເພິ່ງໃຊ້ມືຂ້າງໜຶ່ງຖືບາດ ໃຊ້ມືຂ້າງໜຶ່ງລູບໃຕ້ຕຽງ ຫຼື ໃຕ້ຕັ່ງ ຈຶ່ງເກັບບາດ ບໍ່ເພິ່ງເກັບບາດໄວ້ເທິງພື້ນທີ່ບໍ່ມີສິ່ງໃດຮອງ ເມື່ອຈະເກັບຈີວອນ ເພິ່ງໃຊ້ມືຂ້າງໜຶ່ງຖືຈີວອນ ໃຊ້ມືຂ້າງໜຶ່ງລູບຮາວຈີວອນ ຫຼື ສາຍຢຽກ ເອົາຊາຍໄວ້ນອກ ເອົາຂົດໄວ້ໃນ ຈຶ່ງເກັບຈີວອນ

ຖ້າລົມມີຝຸ່ນລະອອງພັດມາທາງທິດຕາເວັນອອກ ເພິ່ງປິດໜ້າຕ່າງທິດຕາເວັນອອກ
ຖ້າພັດມາທາງທິດຕາເວັນຕົກ ເພິ່ງປິດໜ້າຕ່າງທິດຕາເວັນຕົກ
ຖ້າພັດມາທາງທິດເໜືອ ເພິ່ງປິດໜ້າຕ່າງທິດເໜືອ
ຖ້າພັດມາທາງທິດໃຕ້ ເພິ່ງປິດໜ້າຕ່າງທິດໃຕ້
ຖ້າເປັນລະດູໜາວ ເພິ່ງເປີດໜ້າຕ່າງກາງເວັນ ປິດກາງຄືນ
ຖ້າເປັນລະດູຮ້ອນ ເພິ່ງປິດໜ້າຕ່າງກາງເວັນ ເປີດກາງຄືນ

ຖ້າບໍລິເວນ ຊຸ້ມ ໂຮງສັນ ໂຮງໄຟ ວັດຈະກຸຕິ ຮົກ ເພິ່ງປັດກວາດ ຖ້ານ້ຳສັນນ້ຳໃຊ້ບໍ່ມີເພິ່ງຈັດກຽມໄວ້ ຖ້າໝໍ້ນ້ຳລ້າງບໍ່ມີນ້ຳ ເພິ່ງຕັກນ້ຳໃສ່ໝໍ້ນ້ຳລ້າງ

ຖ້າອັນເຕວາສິກເກີດຄວາມບໍ່ຍິນດີ ອາຈານເພິ່ງຊ່ອຍລະງັບ ຫຼືເພິ່ງບອກພິກຂຸອື່ນໃຫ້ຊ່ອຍລະງັບ ຫຼືເພິ່ງສະແດງທຳມະກະຖາແກ່ອັນເຕວາສິກ

ຖ້າອັນເຕວາສິກເກີດຄວາມລຳຄານ ອາຈານເພິ່ງຊ່ອຍບັນເທົາ ຫຼືເພິ່ງບອກພິກຂຸອື່ນໃຫ້ຊ່ອຍບັນເທົາ ຫຼືເພິ່ງສະແດງທຳມະກະຖາແກ່ອັນເຕວາສິກ

ຖ້າອັນເຕວາສິກເກີດຄວາມເຫັນຜິດ ອາຈານເພິ່ງໃຫ້ສະລະສາ ຫຼືເພິ່ງບອກພິກຂຸອື່ນໃຫ້ຊ່ອຍສະລະສາ ຫຼື ເພິ່ງສະແດງທຳມະກະຖາແກ່ອັນເຕວາສິກ

ຖ້າອັນເຕວາສິກຕ້ອງອາບັດໜັກ ຄວນແກ່ປະຣິວາດ ອາຈານເພິ່ງກະທຳການຂວນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ສົງເພິ່ງໃຫ້ປະຣິວາດແກ່ອັນເຕວາສິກ"

ຖ້າອັນເຕວາສິກຄວນແກ່ການດຶງເຂົ້າຫາອາບັດເກົ່າ ອາຈານເພິ່ງກະທຳການຂວນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ສົງເພິ່ງດຶງອັນເຕວາສິກເຂົ້າຫາອາບັດເກົ່າ"

ຖ້າອັນເຕວາສິກຄວນແກ່ມານັດ ອາຈານເພິ່ງກະທຳການຂວນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ສົງເພິ່ງໃຫ້ມານັດແກ່ອັນເຕວາສິກ"

ຖ້າອັນເຕວາສິກຄວນແກ່ອັບພານ ອາຈານເພິ່ງກະທຳການຂວນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ສົງເພິ່ງອັບພານອັນເຕວາສິກ

ຖ້າສົງຕ້ອງການຈະເຮັດກຳ ຄື ຕັດຊະນີຍະກຳ ນິຍະສະກຳ ປັບພາຊະນີຍະກຳ ປະຕິສາຣະນີຍະກຳ ຫຼືອຸກເຂປະນີຍະກຳແກ່ອັນເຕວາສິກ ອາຈານເພິ່ງກະທຳການຂວນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ສົງບໍ່ເພິ່ງເຮັດກຳແກ່ອັນເຕວາສິກຫຼືເພິ່ງປ່ຽນໄປເປັນໂທດເບົາ" ຫຼືວ່າອັນເຕວາສິກຖືກສົງລົງຕັດຊະນີຍະກຳ ນິຍະສະກຳ ປັບພາຊະນີຍະກຳ ປະຕິສາຣະນີຍະກຳ ຫຼືອຸເຂປະນີຍະກຳແລ້ວ ອາຈານເພິ່ງກະທຳການຂວນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ອັນເຕວາສິກເພິ່ງກັບປະພຶດສົມຄວນ ເພິ່ງຫາຍຈອງຫອງ ເພິ່ງກັບໂຕໄດ້ ສົງເພິ່ງລະງັບກຳນັ້ນສາ

ຖ້າຈີວອນຂອງອັນເຕວາສິກຈະຕ້ອງຊັກ ອາຈານເພິ່ງບອກວ່າ "ເພິ່ງຊັກແນວນີ້" ຫຼື ເພິ່ງກະທຳການຂວນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ຜູ້ໃດ ເພິ່ງຊັກຈີວອນຂອງອັນເຕວາສິກ"

ຖ້າຈີວອນຂອງອັນເຕວາສິກ ຈະຕ້ອງຕັດຫຍິບ ອາຈານເພິ່ງບອກວ່າ "ເພິ່ງຕັດຫຍິບແນວນີ້" ຫຼືເພິ່ງກະທຳການຂວນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ຜູ້ໃດ ເພິ່ງຕັດຫຍິບຈີວອນຂອງອັນເຕວາສິກ"

ຖ້ານ້ຳຍ້ອມຂອງອັນເຕວາສິກຈະຕ້ອງຕົ້ມ ອາຈານເພິ່ງບອກວ່າ "ເພິ່ງຕົ້ມແນວນີ້" ຫຼືເພິ່ງກະທຳການຂວນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ຜູ້ໃດ ເພິ່ງຕົ້ມນ້ຳຍ້ອມຂອງອັນເຕວາສິກ"

ຖ້າຈີວອນຂອງອັນເຕວາສິກຈະຕ້ອງຍ້ອມ ອາຈານເພິ່ງບອກວ່າ "ເພິ່ງຍ້ອມແນວນີ້" ຫຼືເພິ່ງກະທຳການຂວນຂວາຍວ່າ "ດ້ວຍອຸບາຍແນວໃດນໍ ຜູ້ໃດ ເພິ່ງຍ້ອມຈີວອນຂອງອັນເຕວາສິກ" ເມື່ອຈະຍ້ອມຈີວອນ ເພິ່ງຍ້ອມພິກກັບໄປກັບມາດີ ໆ ເມື່ອຢົດນ້ຳຍ້ອມຍັງຍ້ອຍບໍ່ຂາດສາຍບໍ່ເພິ່ງຫຼີກໄປ"

ຖ້າອັນເຕວາສິກເປັນໄຂ້ ເພິ່ງພະຍາບານຈົນຕະຫຼອດຊີວິດ ເພິ່ງຖ້າຈົນກວ່າອັນເຕວາສິກນັ້ນຈະຫາຍ

**ອັນເຕວາສິກະວັດຕະກະຖາ ຈົບ**

**ພານະວານທີ ໖ ຈົບ**

# ໔໐. ປະນາມະນາຂະມາປະນາ

## ວ່າດ້ວຍການປະນາມແລະການຂໍຂະມາ

## ເລື້ອງອັນເຕວາສິກບໍ່ປະພຶດສົມຄວນ

[໗໐] ສະໄໝນັ້ນ ພວກອັນເຕວາສິກບໍ່ປະພຶດສົມຄວນໃນອາຈານທັງຫຼາຍ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ອັນເຕວາສິກຈະບໍ່ປະພຶດສົມຄວນໃນອາຈານບໍ່ໄດ້ ອົງໃດບໍ່ປະພຶດສົມຄວນ ຕ້ອງອາບັດທຸກກົດ

## ເລື້ອງຊົງອະນຸຍາດໃຫ້ປະນາມ

ອັນເຕວາສິກທັງຫຼາຍກໍຍັງບໍ່ປະພຶດສົມຄວນຢູ່ຄືເກົ່າ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ປະນາມອັນເຕວາສິກຜູ້ບໍ່ປະພຶດສົມຄວນ

## ວິທີປະນາມ

ພິກຂຸທັງຫຼາຍ ກໍອາຈານເພິ່ງປະນາມອັນເຕວາສິກແນວນີ້ວ່າ "ເຮົາປະນາມທ່ານ" ຫຼື "ທ່ານຢ່າເຂົ້າມາບ່ອນນີ້ອີກ" "ທ່ານ ຈົ່ງຂົນບາດແລະຈີວອນຂອງທ່ານໄປ" ຫຼື "ທ່ານບໍ່ຕ້ອງອຸປັດຖາກເຮົາອີກ"

ອາຈານໃຫ້ອັນເຕວາສິກຮູ້ດ້ວຍກາຍ ໃຫ້ຮູ້ດ້ວຍວາຈາ ຫຼື ໃຫ້ຮູ້ດ້ວຍກາຍແລະວາຈາ ເປັນອັນໄດ້ປະນາມອັນເຕວາສິກແລ້ວ ອາຈານບໍ່ໃຫ້ອັນເຕວາສິກຮູ້ດ້ວຍກາຍ ບໍ່ໃຫ້ຮູ້ດ້ວຍວາຈາ ຫຼື ບໍ່ໃຫ້ຮູ້ດ້ວຍກາຍແລະວາຈາ ເປັນອັນຍັງບໍ່ໄດ້ປະນາມອັນເຕວາສິກ"

## ອັນເຕວາສິກບໍ່ຂໍຂະມາ

ສະໄໝນັ້ນ ອັນເຕວາສິກທັງຫຼາຍຖືກປະນາມແລ້ວ ກໍຍັງບໍ່ຍອມຂໍຂະມາອາຈານ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ອັນເຕວາສິກຂໍຂະມາອາຈານ"

ອັນເຕວາສິກທັງຫຼາຍ ກໍຍັງບໍ່ຍອມຂໍຂະມາອາຈານຢູ່ຄືເກົ່າ ພິກຂຸທັງຫຼາຍຈຶ່ງນຳ ເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ອັນເຕວາສິກຖືກປະນາມແລ້ວ ຈະບໍ່ຂໍຂະມາອາຈານບໍ່ໄດ້ ອົງໃດບໍ່ຂໍຂະມາ ຕ້ອງອາບັດທຸກກົດ

## ອາຈານບໍ່ຮັບການຂໍຂະມາ

ສະໄໝນັ້ນ ອາຈານທັງຫຼາຍ ຖືກອັນເຕວາສິກຂໍຂະມາ ກໍຍັງບໍ່ຍອມໃຫ້ຂະມາ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍເຮົາອະນຸຍາດໃຫ້ອາຈານຮັບການຂໍຂະມາ"

ອາຈານທັງຫຼາຍ ກໍຍັງບໍ່ຍອມໃຫ້ຂະມາຢູ່ຄືເກົ່າ ພວກອັນເຕວາສິກພາກັນຫຼີກໄປແດ່ ສິກໄປແດ່ ໄປເຂົ້າຮີດເດຍຣະຖີແດ່ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ອາຈານຜູ້ທີ່ອັນເຕວາສິກຂໍຂະມາຈະບໍ່ຮັບການຂໍຂະມາບໍ່ໄດ້ ອົງໃດບໍ່ຮັບການຂໍຂະມາ ຕ້ອງອາບັດທຸກກົດ

## ຊົງປັບອາບັດທຸກກົດເມື່ອປະນາມບໍ່ຖືກຕ້ອງ

ສະໄໝນັ້ນ ອາຈານທັງຫຼາຍປະນາມອັນເຕວາສິກຜູ້ປະພຶດສົມຄວນ ບໍ່ປະນາມອັນເຕວາສິກຜູ້ປະພຶດບໍ່ສົມຄວນ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ອັນເຕວາສິກຜູ້ປະພຶດສົມຄວນ ອາຈານ ບໍ່ເພິ່ງປະນາມ ອົງໃດປະນາມ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ອັນເຕວາສິກຜູ້ປະພຶດບໍ່ສົມຄວນ ອາຈານຈະບໍ່ປະນາມບໍ່ໄດ້ ອົງໃດບໍ່ປະນາມ ຕ້ອງອາບັດທຸກກົດ

## ອົງແຫ່ງການປະນາມ

[໗໑] ພິກຂຸທັງຫຼາຍ ອາຈານເພິ່ງປະນາມອັນເຕວາສິກຜູ້ປະກອບດ້ວຍອົງ ໕ ຄື

໑. ບໍ່ມີຄວາມ ຮັກ ຢ່າງຍິ່ງໃນອາຈານ
໒. ບໍ່ມີຄວາມ ເຫຼື້ອມໃສ ຢ່າງຍິ່ງໃນອາຈານ
໓. ບໍ່ມີຄວາມ ລະອາຍ ຢ່າງຍິ່ງໃນອາຈານ
໔. ບໍ່ມີຄວາມ ເຄົາລົບ ຢ່າງຍິ່ງໃນອາຈານ
໕. ບໍ່ມີຄວາມ ຫວັງດີ ຢ່າງຍິ່ງໃນອາຈານ

ພິກຂຸທັງຫຼາຍ ອາຈານເພິ່ງປະນາມອັນເຕວາສິກຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້

ພິກຂຸທັງຫຼາຍ ອາຈານບໍ່ເພິ່ງປະນາມອັນເຕວາສິກຜູ້ປະກອບດ້ວຍອົງ ໕ ຄື

໑. ມີຄວາມ ຮັກ ຢ່າງຍິ່ງໃນອາຈານ
໒. ມີຄວາມ ເຫຼື້ອມໃສ ຢ່າງຍິ່ງໃນອາຈານ
໓. ມີຄວາມ ລະອາຍ ຢ່າງຍິ່ງໃນອາຈານ
໔. ມີຄວາມ ເຄົາລົບ ຢ່າງຍິ່ງໃນອາຈານ
໕. ມີຄວາມ ຫວັງດີ ຢ່າງຍິ່ງໃນອາຈານ

ພິກຂຸທັງຫຼາຍ ອາຈານບໍ່ເພິ່ງປະນາມອັນເຕວາສິກຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້
ພິກຂຸທັງຫຼາຍ ອັນເຕວາສິກຜູ້ປະກອບດ້ວຍອົງ ໕ ຄວນທີ່ຈະຖືກປະນາມ ຄື

໑. ບໍ່ມີຄວາມ ຮັກ ຢ່າງຍິ່ງໃນອາຈານ
໒. ບໍ່ມີຄວາມ ເຫຼື້ອມໃສຢ່າງຍິ່ງໃນອາຈານ
໓. ບໍ່ມີຄວາມ ລະອາຍ ຢ່າງຍິ່ງໃນອາຈານ
໔. ບໍ່ມີຄວາມ ເຄົາລົບ ຢ່າງຍິ່ງໃນອາຈານ
໕. ບໍ່ມີຄວາມ ຫວັງດີ ຢ່າງຍິ່ງໃນອາຈານ

ພິກຂຸທັງຫຼາຍ ອັນເຕວາສິກຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ ຄວນທີ່ຈະຖືກປະນາມ
ພິກຂຸທັງຫຼາຍ ອັນເຕວາສິກຜູ້ປະກອບດ້ວຍອົງ ໕ ບໍ່ຄວນທີ່ຈະຖືກປະນາມ ຄື

໑. ມີຄວາມ ຮັກ ຢ່າງຍິ່ງໃນອາຈານ
໒. ມີຄວາມ ເຫຼື້ອມໃສ ຢ່າງຍິ່ງໃນອາຈານ
໓. ມີຄວາມ ລະອາຍ ຢ່າງຍິ່ງໃນອາຈານ
໔. ມີຄວາມ ເຄົາລົບ ຢ່າງຍິ່ງໃນອາຈານ
໕. ມີຄວາມ ຫວັງດີ ຢ່າງຍິ່ງໃນອາຈານ

ພິກຂຸທັງຫຼາຍ ອັນເຕວາສິກຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ ບໍ່ຄວນທີ່ຈະຖືກ ປະນາມ
ພິກຂຸທັງຫຼາຍ ອັນເຕວາສິກຜູ້ປະກອບດ້ວຍອົງ ໕ ເມື່ອອາຈານບໍ່ປະນາມຍ່ອມມີໂທດ ເມື່ອປະນາມຍ່ອມບໍ່ມີໂທດ ຄື

໑. ບໍ່ມີຄວາມ ຮັກ ຢ່າງຍິ່ງໃນອາຈານ
໒. ບໍ່ມີຄວາມ ເຫຼື້ອມໃສ ຢ່າງຍິ່ງໃນອາຈານ
໓. ບໍ່ມີຄວາມ ລະອາຍ ຢ່າງຍິ່ງໃນອາຈານ
໔. ບໍ່ມີຄວາມ ເຄົາລົບ ຢ່າງຍິ່ງໃນອາຈານ
໕. ບໍ່ມີຄວາມ ຫວັງດີ ຢ່າງຍິ່ງໃນອາຈານ

ພິກຂຸທັງຫຼາຍ ອັນເຕວາສິກຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ ເມື່ອອາຈານ
ບໍ່ປະນາມ ຍ່ອມມີໂທດ ເມື່ອປະນາມຍ່ອມບໍ່ມີໂທດ
ພິກຂຸທັງຫຼາຍ ອັນເຕວາສິກຜູ້ປະກອບດ້ວຍອົງ ໕ ເມື່ອອາຈານປະນາມ ຍ່ອມມີໂທດ ເມື່ອບໍ່ປະນາມ ຍ່ອມບໍ່ມີໂທດ ຄື

໑. ມີຄວາມ ຮັກ ຢ່າງຍິ່ງໃນອາຈານ

໔. ມີຄວາມ ເຫຼື້ອມໃສ ຢ່າງຍິ່ງໃນອາຈານ
໓. ມີຄວາມ ລະອາຍ ຢ່າງຍິ່ງໃນອາຈານ
໔. ມີຄວາມ ເຄົາລົບ ຢ່າງຍິ່ງໃນອາຈານ
໕. ມີຄວາມ ຫວັງດີ ຢ່າງຍິ່ງໃນອາຈານ

ພິກຂຸທັງຫຼາຍ ອັນເຕວາສິກຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ ເມື່ອອາຈານປະນາມ ຍ່ອມມີໂທດ ເມື່ອບໍ່ປະນາມ ຍ່ອມບໍ່ມີໂທດ

**ປະນາມະນາຂະມາປະນາ ຈົບ**

# ໔໑. ພາລະອັບພະຍັດຕະວັດຖຸ

## ວ່າດ້ວຍພິກຂຸໂງ່ບໍ່ສະຫຼາດ

## ເລື້ອງອາຈານໂງ່ຈ້າ

[໗໔] ສະໄໝນັ້ນ ພິກຂຸທັງຫຼາຍຄິດວ່າ "ເຮົາມີພັນສາຄົບ ໑໐ ເຮົາມີພັນສາຄົບ ໑໐" ແຕ່ເປັນຜູ້ໂງ່ຈ້າ ບໍ່ສະຫຼາດ ໃຫ້ນິດໄສ ຜາກົດວ່າ ອາຈານເປັນຜູ້ໂງ່ຈ້າ ອັນເຕວາສິກເປັນບັນດິດກໍມີ ອາຈານເປັນຜູ້ບໍ່ສະຫຼາດ ອັນເຕວາສິກເປັນຜູ້ສະຫຼາດກໍມີ ອາຈານມີສຸຕະໜ້ອຍ ອັນເຕວາສິກເປັນພະຫູສູດກໍມີ ອາຈານມີປັນຍາຊາມ ອັນເຕວາສິກມີປັນຍາດີກໍມີ

ບັນດາພິກຂຸຜູ້ມີຄວາມມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ ເປັນຫຍັງພິກຂຸທັງຫຼາຍ ຈຶ່ງໄດ້ອ້າງວ່າ ເຮົາມີພັນສາຄົບ ໑໐ ເຮົາມີພັນສາຄົບ ໑໐ ແຕ່ ເປັນຜູ້ໂງ່ຈ້າ ບໍ່ສະຫຼາດ ໃຫ້ນິດໄສ ຜາກົດວ່າ ອາຈານເປັນຜູ້ໂງ່ຈ້າ ອັນເຕວາສິກເປັນບັນດິດກໍມີ ອາຈານເປັນຜູ້ບໍ່ສະຫຼາດ ອັນເຕວາສິກເປັນຜູ້ສະຫຼາດກໍມີ ອາຈານມີສຸຕະໜ້ອຍ ອັນເຕວາສິກເປັນພະຫູສູດກໍມີ ອາຈານມີປັນຍາຊາມ ອັນເຕວາສິກມີປັນຍາດີກໍມີ" ຈຶ່ງນຳເລື້ອງນີ້ ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງສອບຖາມ

ພຣະຜູ້ມີພຣະພາກເຈົ້າ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າພວກພິກຂຸໄດ້ອ້າງວ່າ ເຮົາມີພັນສາຄົບ ໑໐ ເຮົາມີພັນສາຄົບ ໑໐ ແຕ່ເປັນຜູ້ໂງ່ຈ້າ ບໍ່ສະຫຼາດ ໃຫ້ນິດໄສ ຜາກົດວ່າອາຈານເປັນຜູ້ໂງ່ຈ້າ ຯລຯ ອັນເຕວາສິກມີປັນຍາດີກໍມີ ແມ່ນບໍ?

ພິກຂຸທັງຫຼາຍທູນຮັບວ່າ "ແມ່ນແລ້ວ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ພິກຂຸຜູ້ໂງ່ຈ້າ ບໍ່ສະຫຼາດ ບໍ່ເພິ່ງໃຫ້ນິດໄສ ອົງໃດໃຫ້ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ສະຫຼາດ ຜູ້ສາມາດ ມີພັນສາຄົບ ໑໐ ຫຼື ມີພັນສາເກີນ ໑໐ ໃຫ້ນິດໄສໄດ້

**ພາລະອັບພະຍັດຕະວັດຖຸ ຈົບ**

# ໔໘. ນິດສະຍະປະຕິປັດສັດທິກະຖາ

## ວ່າດ້ວຍການລະງັບນິດໄສ

### ເລື້ອງນິດໄສລະງັບຈາກອຸປັດຊາແລະອາຈານ

[໗໓] ສະໄໝນັ້ນ ເມື່ອອຸປັດຊາ ແລະອາຈານຫຼີກໄປກໍດີ ສິກໄປກໍດີ ມໍຣະນະພາບກໍດີ ໄປເຂົ້າຮີດເດຍຣະຖີກໍດີ ພິກຂຸທັງຫຼາຍ ບໍ່ຮູ້ວ່ານິດໄສລະງັບ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ນິດໄສລະງັບຈາກອຸປັດຊາ ໕ ປະການເຫຼົ່ານີ້ ຄື

໑. ອຸປັດຊາຫຼີກໄປ
໒. ອຸປັດຊາສິກ
໓. ອຸປັດຊາມໍຣະນະພາບ
໔. ອຸປັດຊາໄປເຂົ້າຮີດເດຍຣະຖີ
໕. ອຸປັດຊາສັ່ງບັງຄັບ

ພິກຂຸທັງຫຼາຍ ນິດໄສລະງັບຈາກອຸປັດຊາ ໕ ປະການເຫຼົ່ານີ້

ພິກຂຸທັງຫຼາຍ ນິດໄສລະງັບຈາກອາຈານ ໖ ປະການເຫຼົ່ານີ້ ຄື

໑. ອາຈານຫຼີກໄປ
໒. ອາຈານສິກ
໓. ອາຈານມໍຣະນະພາບ
໔. ອາຈານໄປເຂົ້າຮີດເດຍຣະຖີ
໕. ອາຈານສັ່ງບັງຄັບ
໖. ສັດທິວິຫາຣິກໄປເຂົ້າຮ່ວມກັບອຸປັດຊາ

ພິກຂຸທັງຫຼາຍ ນິດໄສລະງັບຈາກອາຈານ ໖ ປະການເຫຼົ່ານີ້

**ນິດສະຍະປະຕິປັດສັດທິກະຖາ ຈົບ**

# ໔໓. ອຸປະສຳປາເທຕັບພະປັນຈະກະ

## ວ່າດ້ວຍອົງ ໕ ແຫ່ງພິກຂຸຜູ້ຄວນໃຫ້ອຸປະສົມບົດ ໑໖ ໝວດ

## ເລື່ອງພິກຂຸປະກອບດ້ວຍອົງ ໕

### ກັນຫະປັກ ຝ່າຍດຳ ໑

[໘໔] ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ບໍ່ເພິ່ງໃຫ້ອຸປະສົມບົດ ບໍ່ເພິ່ງໃຫ້ນິດໄສ ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ ຄື

໑. ບໍ່ປະກອບດ້ວຍ ສີນຂັນ ອັນເປັນອະເສຂະ
໒. ບໍ່ປະກອບດ້ວຍ ສະມາທິຂັນອັນເປັນອະເສຂະ
໓. ບໍ່ປະກອບດ້ວຍ ປັນຍາຂັນ ອັນເປັນອະເສຂະ
໔. ບໍ່ປະກອບດ້ວຍ ວິມຸດຕິຂັນ ອັນເປັນອະເສຂະ
໕. ບໍ່ປະກອບດ້ວຍ ວິມຸດຕິຍານທັດສະນະ ຂັນອັນເປັນອະເສຂະ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ ບໍ່ເພິ່ງໃຫ້ອຸປະສົມບົດ ບໍ່ເພິ່ງໃຫ້ນິດໄສ ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ (໑)

### ສຸກກະປັກ ຝ່າຍຂາວ ໑

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິດໄສ ເພິ່ງໃຊ້ສາມະເນນອຸປັດຖາກ ຄື

໑. ປະກອບດ້ວຍ ສີນຂັນ ອັນເປັນອະເສຂະ
໒. ປະກອບດ້ວຍ ສະມາທິຂັນ ອັນເປັນອະເສຂະ
໓. ປະກອບດ້ວຍ ປັນຍາຂັນ ອັນເປັນອະເສຂະ
໔. ປະກອບດ້ວຍ ວິມຸດຕິຂັນ ອັນເປັນອະເສຂະ
໕. ປະກອບດ້ວຍ ວິມຸດຕິຍານທັດສະນະ ຂັນອັນເປັນອະເສຂະ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ ເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິດໄສ ເພິ່ງໃຊ້ສາມະເນນອຸປັດຖາກ (໒)

## ກັນທະປັກ ໔

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອື່ນອີກ ບໍ່ເພິ່ງໃຫ້ອຸປະສົມບົດ ບໍ່ເພິ່ງໃຫ້ນິດໄສ ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ ຄື

໑. ຕົນເອງບໍ່ປະກອບດ້ວຍສີນຂັນອັນເປັນອະເສຂະ ແລະ ບໍ່ຊັກຊວນຜູ້ອື່ນໃນສີນຂັນອັນເປັນອະເສຂະ

໒. ຕົນເອງບໍ່ປະກອບດ້ວຍສະມາທິຂັນອັນເປັນອະເສຂະ ແລະ ບໍ່ຊັກຊວນຜູ້ອື່ນໃນສະມາທິຂັນອັນເປັນອະເສຂະ

໓. ຕົນເອງບໍ່ປະກອບດ້ວຍປັນຍາຂັນອັນເປັນອະເສຂະ ແລະ ບໍ່ຊັກຊວນຜູ້ອື່ນໃນປັນຍາຂັນອັນເປັນອະເສຂະ

໔. ຕົນເອງບໍ່ປະກອບດ້ວຍວິມຸດຕິຂັນອັນເປັນອະເສຂະ ແລະ ບໍ່ຊັກຊວນຜູ້ອື່ນໃນວິມຸດຕິຂັນອັນເປັນອະເສຂະ

໕. ຕົນເອງບໍ່ປະກອບດ້ວຍວິມຸດຕິຍານທັດສະນະຂັນອັນເປັນອະເສຂະ ແລະບໍ່ຊັກຊວນຜູ້ອື່ນໃນວິມຸດຕິຍານທັດສະນະຂັນອັນເປັນອະເສຂະ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ ບໍ່ເພິ່ງໃຫ້ອຸປະສົມບົດ ບໍ່ເພິ່ງໃຫ້ນິດໄສ ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ (໓)

## ສຸກກະປັກ ໔

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິດໄສ ເພິ່ງໃຊ້ສາມະເນນອຸປັດຖາກ ຄື

໑. ຕົນເອງປະກອບດ້ວຍສີນຂັນອັນເປັນອະເສຂະ ແລະຊັກຊວນຜູ້ອື່ນໃນສີນຂັນອັນເປັນອະເສຂະ

໒. ຕົນເອງປະກອບດ້ວຍສະມາທິຂັນອັນເປັນອະເສຂະ ແລະຊັກຊວນຜູ້ອື່ນໃນສະມາທິຂັນອັນເປັນອະເສຂະ

໓. ຕົນເອງປະກອບດ້ວຍປັນຍາຂັນອັນເປັນອະເສຂະ ແລະຊັກຊວນຜູ້ອື່ນໃນປັນຍາຂັນອັນເປັນອະເສຂະ

໔. ຕົນເອງປະກອບດ້ວຍວິມຸດຕິຂັນອັນເປັນອະເສຂະ ແລະຊັກຊວນຜູ້ອື່ນໃນວິມຸດຕິຂັນອັນເປັນອະເສຂະ

໕. ຕົນເອງປະກອບດ້ວຍວິມຸດຕິຍານທັດສະນະຂັນອັນເປັນອະເສຂະ ແລະຊັກຊວນຜູ້ອື່ນໃນວິມຸດຕິຍານທັດສະນະຂັນອັນເປັນອະເສຂະ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ ເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິດໄສ ເພິ່ງໃຊ້ສາມະເນນອຸປັດຖາກ (໔)

## ກັນທະປັກ ໓

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອື່ນອີກ ບໍ່ເພິ່ງໃຫ້ອຸປະສົມບົດ ບໍ່ເພິ່ງໃຫ້ນິດໄສ ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ ຄື

໑. ເປັນຜູ້ບໍ່ມີສັດທາ
໒. ເປັນຜູ້ບໍ່ມີຫິຣິ
໓. ເປັນຜູ້ບໍ່ມີໂອດຕັບປະ
໔. ເປັນຜູ້ຂີ້ຄ້ານ
໕. ເປັນຜູ້ມີສະຕິຟັ່ນເຟືອນ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ ບໍ່ເພິ່ງໃຫ້ອຸປະສົມບົດ ບໍ່ເພິ່ງໃຫ້ນິດໄສ ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ (໕)

## ສຸກກະປັກ ໓

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິດໄສ ເພິ່ງໃຊ້ສາມະເນນອຸປັດຖາກ ຄື

໑. ເປັນຜູ້ມີສັດທາ
໒. ເປັນຜູ້ມີຫິຣິ
໓. ເປັນຜູ້ມີໂອດຕັບປະ
໔. ເປັນຜູ້ຜາຣົບຄວາມພຽນ
໕. ເປັນຜູ້ມີສະຕິຕັ້ງໝັ້ນ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ ເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິດໄສ ເພິ່ງໃຊ້ສາມະເນນອຸປັດຖາກ (໖)

## ກັນທະປັກ ໔

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອື່ນອີກ ບໍ່ເພິ່ງໃຫ້ອຸປະສົມບົດ ບໍ່ເພິ່ງໃຫ້ນິດໄສ ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ ຄື

໑. ເປັນຜູ້ມີສີນວິບັດໃນອະທິສີນ
໒. ເປັນຜູ້ມີອາຈາຣະວິບັດໃນອັດຊາຈານ
໓. ເປັນຜູ້ມີທິດຖິວິບັດໃນອະຕິທິດຖິ
໔. ເປັນຜູ້ໄດ້ຍິນໄດ້ຟັງໜ້ອຍ
໕. ເປັນຜູ້ມີປັນຍາຊາມ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ ບໍ່ເພິ່ງໃຫ້ອຸປະສົມບົດ ບໍ່ເພິ່ງໃຫ້ນິດໄສ ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ (໗)

## ສຸກກະປັກ ໔

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິດໄສ ເພິ່ງໃຊ້ສາມະເນນອຸປັດຖາກ ຄື

໑. ເປັນຜູ້ບໍ່ມີສີນວິບັດໃນອະທິສີນ
໒. ເປັນຜູ້ບໍ່ມີອາຈາຣະວິບັດໃນອັດຊາຈານ
໓. ເປັນຜູ້ບໍ່ມີທິດຖິວິບັດໃນອະຕິທິດຖິ
໔. ເປັນຜູ້ໄດ້ຍິນໄດ້ຟັງຫຼາຍ
໕. ເປັນຜູ້ມີປັນຍາ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ ເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິດໄສ ເພິ່ງໃຊ້ສາມະເນນອຸປັດຖາກ (໘)

## ກັນຫະປັກ ໕

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອື່ນອີກ ບໍ່ເພິ່ງໃຫ້ອຸປະສົມບົດ ບໍ່ເພິ່ງໃຫ້ນິດໄສ ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ ຄື

໑. ບໍ່ສາມາດພະຍາບານເອງ ຫຼື ໃຊ້ໃຫ້ຜູ້ອື່ນພະຍາບານອັນເຕວາສິກ ຫຼື ສັດທິວິຫາຣິກຜູ້ເປັນໄຂ້
໒. ບໍ່ສາມາດລະງັບເອງ ຫຼື ໃຊ້ໃຫ້ຜູ້ອື່ນຊ່ອຍລະງັບຄວາມກະສັນ
໓. ບໍ່ສາມາດບັນເທົາເອງ ຫຼື ໃຊ້ໃຫ້ຜູ້ອື່ນຊ່ອຍບັນເທົາຄວາມເບື່ອໜ່າຍທີ່ເກີດຂຶ້ນໂດຍທຳ
໔. ບໍ່ຮູ້ຈັກອາບັດ
໕. ບໍ່ຮູ້ຈັກວິທີອອກຈາກອາບັດ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ ບໍ່ເພິ່ງໃຫ້ອຸປະສົມບົດ ບໍ່ເພິ່ງໃຫ້ນິດໄສ ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ (໙)

## ສຸກກະປັກ ໕

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິດໄສ ເພິ່ງໃຊ້ສາມະເນນອຸປັດຖາກ ຄື

໑. ສາມາດພະຍາບານເອງ ຫຼື ໃຊ້ໃຫ້ຜູ້ອື່ນພະຍາບານອັນເຕວາສິກ ຫຼື ສັດທິວິຫາຣິກຜູ້ເປັນໄຂ້
໒. ສາມາດລະງັບເອງ ຫຼື ໃຊ້ໃຫ້ຜູ້ອື່ນຊ່ອຍລະງັບຄວາມກະສັນ
໓. ສາມາດບັນເທົາເອງ ຫຼື ໃຊ້ໃຫ້ຜູ້ອື່ນຊ່ອຍບັນເທົາຄວາມເບື່ອໜ່າຍທີ່ເກີດຂຶ້ນໂດຍທຳ
໔. ຮູ້ຈັກອາບັດ
໕. ຮູ້ຈັກວິທີອອກຈາກອາບັດ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ ເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິດໄສ ເພິ່ງໃຊ້ສາມະເນນອຸປັດຖາກ (໑໐)

## ກັນຫະປັກ ໖

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອື່ນອີກ ບໍ່ເພິ່ງໃຫ້ອຸປະສົມບົດ ບໍ່ເພິ່ງໃຫ້ນິດໄສ ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ ຄື

໑. ບໍ່ສາມາດຝຶກອັນເຕວາສິກ ຫຼື ສັດທິວິຫາຣິກໃນອະພິສະມາຈາຣິກາສິກຂາ
໒. ບໍ່ສາມາດແນະນຳໃນອາທິພົມຈະຣິຍະກາສິກຂາ
໓. ບໍ່ສາມາດແນະນຳໃນອະພິທຳ
໔. ບໍ່ສາມາດແນະນຳໃນອະພິວິໄນ
໕. ບໍ່ສາມາດເປື້ອງຄວາມເຫັນຜິດອັນເກີດຂຶ້ນໄດ້ໂດຍທຳ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ ບໍ່ເພິ່ງໃຫ້ອຸປະສົມບົດ ບໍ່ເພິ່ງໃຫ້ນິດໄສ ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ (໑໑)

## ສຸກກະປັກ ໖

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິດໄສ ເພິ່ງໃຊ້ສາມະເນນອຸປັດຖາກ ຄື

໓. ສາມາດຝຶກອັນເຕວາສິກ ຫຼື ສັດທິວິຫາຣິກໃນອະພິສະມາຈາຣິກາສິກຂາ
໔. ສາມາດແນະນຳໃນອາທິພົມຈະຣິກາສິກຂາ
໖. ສາມາດແນະນຳໃນອະພິທຳ
໔. ສາມາດແນະນຳໃນອະພິວິໄນ
໕. ສາມາດເປື້ອງຄວາມເຫັນຜິດອັນເກີດຂຶ້ນໄດ້ໂດຍທຳ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ ເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິດໄສ ເພິ່ງໃຊ້ສາມະເນນອຸປັດຖາກ (໑໔)

## ກັນທະປັກ ໗

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອື່ນອີກ ບໍ່ເພິ່ງໃຫ້ອຸປະສົມບົດ ບໍ່ເພິ່ງໃຫ້ນິດໄສ ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ ຄື

໑. ບໍ່ຮູ້ຈັກອາບັດ
໔. ບໍ່ຮູ້ຈັກອະນາບັດ
໖. ບໍ່ຮູ້ຈັກອາບັດເບົາ
໔. ບໍ່ຮູ້ຈັກອາບັດໜັກ
໕. ຈຳປາຕິໂມກທັງສອງໂດຍພິສະດານບໍ່ໄດ້ດີ ຈຳແນກບໍ່ໄດ້ດີ ບໍ່ວ່ອງໄວດີ ວິນິດໄສໂດຍສູດຕະ ໂດຍອະນຸພະຍັນຊະນະບໍ່ໄດ້ດີ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ ບໍ່ເພິ່ງໃຫ້ອຸປະສົມບົດ ບໍ່ເພິ່ງໃຫ້ນິດໄສ ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ (໑໖)

## ສຸກກະປັກ ໗

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິດໄສ ເພິ່ງໃຊ້ສາມະເນນອຸປັດຖາກ ຄື

໑. ຮູ້ຈັກອາບັດ
໔. ຮູ້ຈັກອະນາບັດ
໖. ຮູ້ຈັກອາບັດເບົາ
໔. ຮູ້ຈັກອາບັດໜັກ
໕. ຈຳປາຕິໂມກທັງສອງໂດຍພິສະດານໄດ້ດີ ຈຳແນກໄດ້ດີ ວ່ອງໄວດີ ວິນິດໄສໂດຍສູດຕະ ໂດຍອະນຸພະຍັນຊະນະໄດ້ດີ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ ເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິດໄສ ເພິ່ງໃຊ້ສາມະເນນອຸປັດຖາກ (໑໔)

### ກັນທະປັກ ໗

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອື່ນອີກ ບໍ່ເພິ່ງໃຫ້ອຸປະສົມບົດ ບໍ່ເພິ່ງໃຫ້ນິດໄສ ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ ຄື

໑. ບໍ່ຮູ້ຈັກອາບັດ
໒. ບໍ່ຮູ້ຈັກອະນາບັດ
໓. ບໍ່ຮູ້ຈັກອາບັດເບົາ
໔. ບໍ່ຮູ້ຈັກອາບັດໜັກ
໕. ມີພັນສາຢ່ອນ ໑໐

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ ບໍ່ເພິ່ງໃຫ້ອຸປະສົມບົດ ບໍ່ເພິ່ງໃຫ້ນິດໄສ ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ (໑໕)

### ສຸກກະປັກ ໗

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິດໄສ ເພິ່ງໃຊ້ສາມະເນນອຸປັດຖາກ ຄື

໑. ຮູ້ຈັກອາບັດ
໒. ຮູ້ຈັກອະນາບັດ
໓. ຮູ້ຈັກອາບັດເບົາ
໔. ຮູ້ຈັກອາບັດໜັກ
໕. ມີພັນສາຄົບ ໑໐ ຫຼື ມີພັນສາເກີນ ໑໐

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ ເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິດໄສ ເພິ່ງໃຊ້ສາມະເນນອຸປັດຖາກ (໑໖)

**ອຸປະສຳປາເທຕັບພະປັນຈະກະ ໑໖ ໝວດ ຈົບ**

# ໔໔. ອຸປະສຳປາເທຕັບພະສັກກະ

## ວ່າດ້ວຍອົງ ໖ ແຫ່ງພິກຂຸຜູ້ຄວນໃຫ້ອຸປະສົມບົດ ໑໔ ໝວດ

## ເລື້ອງພິກຂຸປະກອບດ້ວຍອົງ ໖

### ກັນທະປັກ ໑

[໗໕] ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ບໍ່ເພິ່ງໃຫ້ອຸປະສົມບົດ ບໍ່ເພິ່ງໃຫ້ນິດໄສ ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ ຄື

໑. ບໍ່ປະກອບດ້ວຍ ສີນຂັນ ອັນເປັນອະເສຂະ
໒. ບໍ່ປະກອບດ້ວຍ ສະມາທິຂັນ ອັນເປັນອະເສຂະ
໓. ບໍ່ປະກອບດ້ວຍ ປັນຍາຂັນ ອັນເປັນອະເສຂະ
໔. ບໍ່ປະກອບດ້ວຍ ວິມຸດຕິຂັນ ອັນເປັນອະເສຂະ
໕. ບໍ່ປະກອບດ້ວຍ ວິມຸດຕິຍານທັດສະນະຂັນ ອັນເປັນອະເສຂະ
໖. ມີພັນສາຢ່ອນ ໑໐

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ເຫຼົ່ານີ້ແລ ບໍ່ເພິ່ງໃຫ້ອຸປະສົມບົດ ບໍ່ເພິ່ງໃຫ້ນິດໄສ ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ (໑)

## ສຸກກະປັກ ໑

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິດໄສ ເພິ່ງໃຊ້ສາມະເນນອຸປັດຖາກ ຄື

໑. ປະກອບດ້ວຍ ສີນຂັນ ອັນເປັນອະເສຂະ
໒. ປະກອບດ້ວຍ ສະມາທິຂັນ ອັນເປັນອະເສຂະ
໓. ປະກອບດ້ວຍ ປັນຍາຂັນ ອັນເປັນອະເສຂະ
໔. ປະກອບດ້ວຍ ວິມຸດຕິຂັນ ອັນເປັນອະເສຂະ
໕. ປະກອບດ້ວຍ ວິມຸດຕິຍານທັດສະນະຂັນ ອັນເປັນອະເສຂະ
໖. ມີພັນສາຄົບ ໑໐ ຫຼື ມີພັນສາເກີນ ໑໐

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ເຫຼົ່ານີ້ແລ ເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິດໄສ ເພິ່ງໃຊ້ສາມະເນນອຸປັດຖາກ (໒)

## ກັນຫະປັກ ໒

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ແມ່ນອື່ນອີກ ບໍ່ເພິ່ງໃຫ້ອຸປະສົມບົດ ບໍ່ເພິ່ງໃຫ້ນິດໄສ ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ ຄື

໑. ຕົນເອງບໍ່ປະກອບດ້ວຍສີນຂັນອັນເປັນອະເສຂະ ແລະ ບໍ່ຊັກຊວນຜູ້ອື່ນໃນສີນຂັນອັນເປັນອະເສຂະ
໒. ຕົນເອງບໍ່ປະກອບດ້ວຍສະມາທິຂັນອັນເປັນອະເສຂະ ແລະ ບໍ່ຊັກຊວນຜູ້ອື່ນໃນສະມາທິຂັນອັນເປັນອະເສຂະ

໓. ຕົນເອງບໍ່ປະກອບດ້ວຍປັນຍາຂັນອັນເປັນອະເສຂະ ແລະ ບໍ່ຊັກຊວນຜູ້ອື່ນໃນປັນຍາຂັນອັນເປັນອະເສຂະ
໔. ຕົນເອງບໍ່ປະກອບດ້ວຍວິມຸດຕິຂັນອັນເປັນອະເສຂະ ແລະ ບໍ່ຊັກຊວນຜູ້ອື່ນໃນວິມຸດຕິຂັນອັນເປັນອະເສຂະ
໕. ຕົນເອງບໍ່ປະກອບດ້ວຍວິມຸດຕິຍານທັດສະນະຂັນອັນເປັນອະເສຂະ ແລະບໍ່ຊັກຊວນຜູ້ອື່ນໃນວິມຸດຕິຍານທັດສະນະຂັນອັນເປັນອະເສຂະ

## ໖. ມີພັນສາຢ່ອນ ໑໐

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ເຫຼົ່ານີ້ແລ ບໍ່ເພິ່ງໃຫ້ອຸປະສົມບົດ ບໍ່ເພິ່ງໃຫ້ນິດໄສ ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ (໓)

## ສຸກກະປັກ ໔

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິດໄສ ເພິ່ງໃຊ້ສາມະເນນອຸປັດຖາກ ຄື

໑. ຕົນເອງປະກອບດ້ວຍສີນຂັນອັນເປັນອະເສຂະ ແລະ ຊັກຊວນຜູ້ອື່ນໃນສີນຂັນອັນເປັນອະເສຂະ
໒. ຕົນເອງປະກອບດ້ວຍສະມາທິຂັນອັນເປັນອະເສຂະ ແລະ ຊັກຊວນຜູ້ອື່ນໃນສະມາທິຂັນອັນເປັນອະເສຂະ
໓. ຕົນເອງປະກອບດ້ວຍປັນຍາຂັນອັນເປັນອະເສຂະ ແລະ ຊັກຊວນຜູ້ອື່ນໃນປັນຍາຂັນອັນເປັນອະເສຂະ
໔. ຕົນເອງປະກອບດ້ວຍວິມຸດຕິຂັນອັນເປັນອະເສຂະ ແລະ ຊັກຊວນຜູ້ອື່ນໃນວິມຸດຕິຂັນອັນເປັນອະເສຂະ
໕. ຕົນເອງປະກອບດ້ວຍວິມຸດຕິຍານທັດສະນະຂັນອັນເປັນອະເສຂະ ແລະ ຊັກຊວນຜູ້ອື່ນໃນວິມຸດຕິຍານທັດສະນະຂັນອັນເປັນອະເສຂະ
໖. ມີພັນສາຄົບ ໑໐ ຫຼື ມີພັນສາເກີນ ໑໐

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ເຫຼົ່ານີ້ແລ ເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິດໄສ ເພິ່ງໃຊ້ສາມະເນນອຸປັດຖາກ (໔)

## ກັນທະປັກ ໓

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ແມ່ນອື່ນອີກ ບໍ່ເພິ່ງໃຫ້ອຸປະສົມບົດ ບໍ່ເພິ່ງໃຫ້ນິດໄສ ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ ຄື

| | |
|---|---|
| ໑. ເປັນຜູ້ບໍ່ມີສັດທາ | ໔. ເປັນຜູ້ບໍ່ມີຫິຣິ |
| ໒. ເປັນຜູ້ບໍ່ມີໂອດຕັບປະ | ໔. ເປັນຜູ້ຂີ້ຄ້ານ |
| ໕. ເປັນຜູ້ມີສະຕິຟັ່ນເຟືອນ | ໖. ມີພັນສາຢ່ອນ ໑໐ |

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ເຫຼົ່ານີ້ແລ ບໍ່ເພິ່ງໃຫ້ອຸປະສົມບົດ ບໍ່ເພິ່ງໃຫ້ນິດໄສ ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ (໕)

## ສຸກກະປັກ ໓

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິດໄສ ເພິ່ງໃຊ້ສາມະເນນອຸປັດຖາກ ຄື

| | |
|---|---|
| ໑. ເປັນຜູ້ມີສັດທາ | ໔. ເປັນຜູ້ມີຫິຣິ |
| ໒. ເປັນຜູ້ມີໂອດຕັບປະ | ໔. ເປັນຜູ້ຜາຣົບຄວາມພຽນ |
| ໕. ເປັນຜູ້ມີສະຕິຕັ້ງໝັ້ນ | ໖. ມີພັນສາຄົບ ໑໐ ຫຼື ມີພັນສາ ເກີນ ໑໐ |

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ເຫຼົ່ານີ້ແລ ເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິດໄສ ເພິ່ງໃຊ້ສາມະເນນອຸປັດຖາກ (໖)

## ກັນທະປັກ ໔

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ແມ່ນອື່ນອີກ ບໍ່ເພິ່ງໃຫ້ອຸປະສົມບົດ ບໍ່ເພິ່ງໃຫ້ນິດໄສ ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ ຄື

| | |
|---|---|
| ໑. ເປັນຜູ້ມີສິນວິບັດໃນອະທິສິນ | ໔. ເປັນຜູ້ມີອາຈາຣະວິບັດໃນອັດຊາຈານ |
| ໒. ເປັນຜູ້ມີທິດຖິວິບັດໃນອະຕິທິດຖິ | ໔. ເປັນຜູ້ໄດ້ຍິນໄດ້ຟັງໜ້ອຍ |
| ໕. ເປັນຜູ້ມີປັນຍາຊາມ | ໖. ມີພັນສາຢ່ອນ ໑໐ |

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ເຫຼົ່ານີ້ແລ ບໍ່ເພິ່ງໃຫ້ອຸປະສົມບົດ ບໍ່ເພິ່ງໃຫ້ນິດໄສ ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ (໗)

## ສຸກກະປັກ ໔

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິດໄສ ເພິ່ງໃຊ້ສາມະເນນອຸປັດຖາກ ຄື

໑. ເປັນຜູ້ບໍ່ມີສິນວິບັດໃນອະທິສິນ
໒. ເປັນຜູ້ບໍ່ມີອາຈາຣະວິບັດໃນອັດຊາຈານ
໓. ເປັນຜູ້ບໍ່ມີທິດຖິວິບັດໃນອະຕິທິດຖິ
໔. ເປັນຜູ້ໄດ້ຍິນໄດ້ຟັງຫຼາຍ
໕. ເປັນຜູ້ມີປັນຍາ
໖. ມີພັນສາຄົບ ໑໐ ຫຼື ມີພັນສາ ເກີນ ໑໐

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ເຫຼົ່ານີ້ແລ ເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິດໄສ ເພິ່ງໃຊ້ສາມະເນນອຸປັດຖາກ (໗)

## ກັນທະປັກ ໕

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ແມ່ນອື່ນອີກ ບໍ່ເພິ່ງໃຫ້ອຸປະສົມບົດ ບໍ່ເພິ່ງໃຫ້ນິດໄສ ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ ຄື

໑. ບໍ່ສາມາດພະຍາບານເອງ ຫຼື ໃຊ້ໃຫ້ຜູ້ອື່ນຊ່ອຍພະຍາບານອັນເຕວາສິກ ຫຼື ສັດທິວິຫາຣິກຜູ້ເປັນໄຂ້
໒. ບໍ່ສາມາດລະງັບເອງ ຫຼື ໃຊ້ໃຫ້ຜູ້ອື່ນຊ່ອຍລະງັບຄວາມກະສັນ
໓. ບໍ່ສາມາດບັນເທົາເອງ ຫຼື ໃຊ້ໃຫ້ຜູ້ອື່ນຊ່ອຍບັນເທົາຄວາມເບື່ອໜ່າຍທີ່ເກີດຂຶ້ນໂດຍທຳ
໔. ບໍ່ຮູ້ຈັກອາບັດ
໕. ບໍ່ຮູ້ຈັກວິທີອອກຈາກອາບັດ
໖. ມີພັນສາຢ່ອນ ໑໐

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ເຫຼົ່ານີ້ແລ ບໍ່ເພິ່ງໃຫ້ອຸປະສົມບົດ ບໍ່ເພິ່ງໃຫ້ນິດໄສ ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ (໘)

## ສຸກກະປັກ ໕

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິດໄສ ເພິ່ງໃຊ້ສາມະເນນອຸປັດຖາກ ຄື

໑. ສາມາດພະຍາບານເອງ ຫຼື ໃຊ້ໃຫ້ຜູ້ອື່ນຊ່ອຍພະຍາບານອັນເຕວາສິກ ຫຼື ສັດທິວິຫາຣິກຜູ້ເປັນໄຂ້
໒. ສາມາດລະງັບເອງ ຫຼື ໃຊ້ໃຫ້ຜູ້ອື່ນຊ່ອຍລະງັບຄວາມກະສັນ
໓. ສາມາດບັນເທົາເອງ ຫຼື ໃຊ້ໃຫ້ຜູ້ອື່ນຊ່ອຍບັນເທົາຄວາມເບື່ອໜ່າຍທີ່ເກີດຂຶ້ນໂດຍທຳ
໔. ຮູ້ຈັກອາບັດ
໕. ຮູ້ຈັກວິທີອອກຈາກອາບັດ
໖. ມີພັນສາຄົບ ໑໐ ຫຼື ມີພັນສາເກີນ ໑໐

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ເຫຼົ່ານີ້ແລ ເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິດໄສ ເພິ່ງໃຊ້ສາມະເນນອຸປັດຖາກ (໑໐)

## ກັນທະປັກ ໖

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ແມ່ນອື່ນອີກ ບໍ່ເພິ່ງໃຫ້ອຸປະສົມບົດ ບໍ່ເພິ່ງໃຫ້ນິດໄສ ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ ຄື

໑. ບໍ່ສາມາດຝຶກອັນເຕວາສິກ ຫຼື ສັດທິວິຫາຣິກໃນອະພິສະມາຈາຣິກາສິກຂາ
໒. ບໍ່ສາມາດແນະນຳໃນອາທິພົມຈາຣິກາສິກຂາ
໓. ບໍ່ສາມາດແນະນຳໃນອະພິທຳ
໔. ບໍ່ສາມາດແນະນຳໃນອະພິວິໄນ
໕. ບໍ່ສາມາດເປື້ອງຄວາມເຫັນຜິດອັນເກີດຂຶ້ນໄດ້ໂດຍທຳ
໖. ມີພັນສາຢ່ອນ ໑໐

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ເຫຼົ່ານີ້ແລ ບໍ່ເພິ່ງໃຫ້ອຸປະສົມບົດ ບໍ່ເພິ່ງໃຫ້ນິດໄສ ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ (໑໑)

## ສຸກກະປັກ ໖

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິດໄສ ເພິ່ງໃຊ້ສາມະເນນອຸປັດຖາກ ຄື

໑. ສາມາດຝຶກອັນເຕວາສິກ ຫຼື ສັດທິວິຫາຣິກໃນອະພິສະມາຈາຣິກາສິກຂາ
໒. ສາມາດແນະນຳໃນອາທິພົມຈາຣິກາສິກຂາ
໓. ສາມາດແນະນຳໃນອະພິທຳ
໔. ສາມາດແນະນຳໃນອະພິວິໄນ

໕. ສາມາດເປື້ອງຄວາມເຫັນຜິດອັນເກີດຂຶ້ນໄດ້ໂດຍທຳ
໖. ມີພັນສາຄົບ ໑໐ ຫຼື ມີພັນສາເກີນ ໑໐

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ເຫຼົ່ານີ້ແລ ເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິດໄສ ເພິ່ງໃຊ້ສາມະເນນອຸປັດຖາກ (໑໘)

## ກັນທະປັກ ໗

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ແມ່ນອື່ນອີກ ບໍ່ເພິ່ງໃຫ້ອຸປະສົມບົດ ບໍ່ເພິ່ງໃຫ້ນິດໄສ ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ ຄື

໑. ບໍ່ຮູ້ຈັກອາບັດ
໒. ບໍ່ຮູ້ຈັກອະນາບັດ
໓. ບໍ່ຮູ້ຈັກອາບັດເບົາ
໔. ບໍ່ຮູ້ຈັກອາບັດໜັກ
໕. ຈຳປາຕິໂມກທັງສອງໂດຍພິສະດານບໍ່ໄດ້ດີ ຈຳແນກບໍ່ໄດ້ດີ ບໍ່ວ່ອງໄວດີ ວິນິດໄສໂດຍສູດຕະໂດຍອະນຸພະຍັນຊະນະບໍ່ໄດ້ດີ

## ໖. ມີພັນສາຍ່ອນ ໑໐

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ເຫຼົ່ານີ້ແລ ບໍ່ເພິ່ງໃຫ້ອຸປະສົມບົດ ບໍ່ເພິ່ງໃຫ້ນິດໄສ ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ (໑໓)

## ສຸກກະປັກ ໗

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິດໄສ ເພິ່ງໃຊ້ສາມະເນນອຸປັດຖາກ ຄື

໑. ຮູ້ຈັກອາບັດ
໒. ຮູ້ຈັກອະນາບັດ
໓. ຮູ້ຈັກອາບັດເບົາ
໔. ຮູ້ຈັກອາບັດໜັກ
໕. ຈຳປາຕິໂມກທັງສອງໂດຍພິສະດານໄດ້ດີ ຈຳແນກໄດ້ດີ ວ່ອງໄວດີ ວິນິດໄສໂດຍສູດຕະໂດຍອະນຸພະຍັນຊະນະໄດ້ດີ
໖. ມີພັນສາຄົບ ໑໐ ຫຼື ມີພັນສາເກີນ ໑໐

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ເຫຼົ່ານີ້ແລ ເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິດໄສ ເພິ່ງໃຊ້ສາມະເນນອຸປັດຖາກ (໑໘)

**ອຸປະສຳປາເທຕັບພະສັກກະ ໑໘ ໝວດ ຈົບ**

# ໘໕. ອັນຍະຕິດຖິຍະປຸບພະກະຖາ

## ວ່າດ້ວຍພິກຂຸຜູ້ເຄີຍເປັນອັນຍະເດຍຣະຖີ

## ຕິດຖິຍະປະຣິວາດ

[໘໖] ສະໄໝນັ້ນ ພິກຂຸຜູ້ເຄີຍເປັນອັນຍະເດຍຣະຖີຖືກພຣະອຸປັດຊາວ່າກ່າວໂດຍຊອບທຳ ໄດ້ຜິດຖຽງພຣະອຸປັດຊາ ໄປເຂົ້າຮີດເດຍຣະຖີຕາມເກົ່າແລ້ວ ກັບມາຂໍອຸປະສົມບົດກັບພິກຂຸອີກ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸທີ່ເຄີຍເປັນອັນຍະເດຍຣະຖີຖືກພຣະອຸປັດຊາວ່າກ່າວໂດຍຊອບທຳ ໄດ້ຜິດຖຽງພຣະອຸປັດຊາ ໄປເຂົ້າຮີດເດຍຣະຖີຕາມເກົ່າມາແລ້ວ ສົງບໍ່ເພິ່ງໃຫ້ອຸປະສົມບົດ ພິກຂຸທັງຫຼາຍ ແມ່ນຜູ້ອື່ນທີ່ເຄີຍເປັນອັນຍະເດຍຣະຖີ ຫວັງບັນພະຊາອຸປະສົມບົດໃນພຣະທຳວິໄນນີ້ ເພິ່ງໃຫ້ຜູ້ນັ້ນຢູ່ປະຣິວາດ ໔ ເດືອນ

## ວິທີໃຫ້ຕິດຖິຍະປະຣິວາດ

ພິກຂຸທັງຫຼາຍ ກໍແລ ສົງເພິ່ງໃຫ້ຕິດຖິຍະປະຣິວາດແນວນີ້ ກ່ອນອື່ນເພິ່ງໃຫ້ກຸນລະບຸດທີ່ເຄີຍເປັນອັນຍະເດຍຣະຖີແຖຜົມແລະໜວດ ໃຫ້ຄອງຜ້າກາສາຍະ ໃຫ້ຫົ່ມຜ້າບ່ຽງບ່າຂ້າງໜຶ່ງ ໃຫ້ຂາບຕີນພິກຂຸທັງຫຼາຍ ໃຫ້ນັ່ງຢ່ອງຢໍ້ ໃຫ້ປະນົມແລ້ວມີສັ່ງວ່າ "ທ່ານຈົ່ງກ່າວແນວນີ້" ແລ້ວໃຫ້ວ່າສະຣະນະຄົມດັ່ງນີ້

## ໄຕຣສະຣະນະຄົມ

## ວ່າດ້ວຍການເຖິງພຣະຣັດຕະນະໄຕຣເປັນສະຣະນະ

ຂ້າພະເຈົ້າ ຂໍເຖິງພຣະ ພຸດທະເຈົ້າ ເປັນສະຣະນະ
ຂ້າພະເຈົ້າ ຂໍເຖິງພຣະ ທຳ ເປັນສະຣະນະ
ຂ້າພະເຈົ້າ ຂໍເຖິງພຣະ ສົງ ເປັນສະຣະນະ
ຂ້າພະເຈົ້າ ຂໍເຖິງພຣະ ພຸດທະເຈົ້າ ເປັນສະຣະນະ ແມ່ນຄັ້ງທີ ໒

ຂ້າພະເຈົ້າ ຂໍເຖິງພຣະ ທຳ ເປັນສະຣະນະ ແມ່ນຄັ້ງທີ ໒
ຂ້າພະເຈົ້າ ຂໍເຖິງພຣະ ສົງ ເປັນສະຣະນະ ແມ່ນຄັ້ງທີ ໒
ຂ້າພະເຈົ້າ ຂໍເຖິງພຣະ ພຸດທະເຈົ້າ ເປັນສະຣະນະ ແມ່ນຄັ້ງທີ ໓
ຂ້າພະເຈົ້າ ຂໍເຖິງພຣະ ທຳ ເປັນສະຣະນະ ແມ່ນຄັ້ງທີ ໓
ຂ້າພະເຈົ້າ ຂໍເຖິງພຣະ ສົງ ເປັນສະຣະນະ ແມ່ນຄັ້ງທີ ໓

ພິກຂຸທັງຫຼາຍ ກຸນລະບຸດທີ່ເຄີຍເປັນອັນຍະເດຍຣະຖີນັ້ນ ເພິ່ງເຂົ້າໄປຫາສົງ ຫົ່ມຜ້າບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸທັງຫຼາຍ ນັ່ງຍ່ອງຍໍ້ ປະນົມມື ກ່າວຄຳຂໍຕິດຖີຍະປະຣິວາດແນວນີ້ວ່າ

## ຄຳຂໍຕິດຖີຍະປະຣິວາດແລະກຳມະວາຈາໃຫ້ຕິດຖີຍະປະຣິວາດ

ທ່ານຜູ້ຈະເລີນ ຂ້າພະເຈົ້າມີຊື່ນີ້ເຄີຍເປັນອັນຍະເດຍຣະຖີ ຫວັງອຸປະສົມບົດໃນພຣະທຳວິໄນນີ້ ທ່ານຜູ້ຈະເລີນ ຂ້າພະເຈົ້ານັ້ນຂໍປະຣິວາດ ໔ ເດືອນຕໍ່ສົງ

ເພິ່ງຂໍແມ່ນຄັ້ງທີ ໒ ຯລຯ
ເພິ່ງຂໍແມ່ນຄັ້ງທີ ໓ ຯລຯ

ພິກຂຸຜູ້ສະຫຼາດ ສາມາດ ເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຜູ້ນີ້ມີຊື່ນີ້ເຄີຍເປັນອັນຍະເດຍຣະຖີ ຫວັງອຸປະສົມບົດໃນພຣະທຳວິໄນນີ້ ທ່ານຂໍປະຣິວາດ ໔ ເດືອນຕໍ່ສົງ ຖ້າສົງພ້ອມກັນແລ້ວ ເພິ່ງໃຫ້ປະຣິວາດ ໔ ເດືອນແກ່ຜູ້ມີຊື່ນີ້ ເຊິ່ງເຄີຍເປັນອັນຍະເດຍຣະຖີ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຜູ້ນີ້ມີຊື່ນີ້ເຄີຍເປັນອັນຍະເດຍຣະຖີ ຫວັງອຸປະສົມບົດໃນພຣະທຳວິໄນນີ້ ທ່ານຂໍປະຣິວາດ ໔ ເດືອນຕໍ່ສົງ ສົງໃຫ້ປະຣິວາດ ໔ ເດືອນແກ່ຜູ້ມີຊື່ນີ້ ເຊິ່ງເຄີຍເປັນອັນຍະເດຍຣະຖີ ທ່ານອົງໃດເຫັນດ້ວຍກັບການໃຫ້ປະຣິວາດ ໔ ເດືອນແກ່ຜູ້ມີຊື່ນີ້ ເຊິ່ງເຄີຍເປັນອັນຍະເດຍຣະຖີ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ ປະຣິວາດ ໔ ເດືອນ ສົງໃຫ້ແລ້ວແກ່ຜູ້ມີຊື່ນີ້ເຊິ່ງເຄີຍເປັນອັນຍະເດຍຣະຖີ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືເອົາຄວາມນິ່ງນັ້ນເປັນມະຕິແນວນີ້

[໘໗] ພິກຂຸທັງຫຼາຍ ກຸນລະບຸດຜູ້ເຄີຍເປັນອັນຍະເດຍຣະຖີ ເປັນຜູ້ປະຕິບັດໃຫ້ສົງຍິນດີແນວນີ້ ເປັນຜູ້ປະຕິບັດບໍ່ເຮັດໃຫ້ສົງຍິນດີແນວນີ້

## ຂໍ້ປະຕິບັດທີ່ບໍ່ເຮັດໃຫ້ສົງຍິນດີ

ພິກຂຸທັງຫຼາຍ ກໍກຸນລະບຸດຜູ້ເຄີຍເປັນອັນຍະເດຍຣະຖີຊື່ວ່າ ເປັນຜູ້ປະຕິບັດບໍ່ເຮັດໃຫ້ສົງຍິນດີເປັນແນວໃດ?

ພິກຂຸທັງຫຼາຍ ໃນກໍລະນີນີ້ ກຸນລະບຸດຜູ້ເຄີຍເປັນອັນຍະເດຍຣະຖີ ເຂົ້າໝູ່ບ້ານເຊົ້າເກີນ ໄປກັບສາຍເກີນໄປ ແມ່ນແນວນີ້ ກໍຊື່ວ່າເປັນຜູ້ປະຕິບັດບໍ່ເຮັດໃຫ້ສົງຍິນດີ

ພິກຂຸທັງຫຼາຍ ອີກປະການໜຶ່ງ ກຸນລະບຸດຜູ້ເຄີຍເປັນອັນຍະເດຍຣະຖີ ເປັນຜູ້ມີຍິງແພດສະຫຍາເປັນໂຄຈອນ ມີແມ່ໝ້າຍເປັນໂຄຈອນ ມີສາວເທື້ອເປັນໂຄຈອນ ມີບັນເດາະເປັນໂຄຈອນ ຫຼື ມີພິກຂຸນີເປັນໂຄຈອນ ແມ່ນແນວນີ້ກໍຊື່ວ່າເປັນຜູ້ປະຕິບັດບໍ່ເຮັດໃຫ້ສົງຍິນດີ

ພິກຂຸທັງຫຼາຍ ອີກປະການໜຶ່ງ ກຸນລະບຸດຜູ້ເຄີຍເປັນອັນຍະເດຍຣະຖີ ເປັນຜູ້ບໍ່ດຸໝັ່ນ ຂີ້ຄ້ານໃນການງານໃຫຍ່ນ້ອຍຂອງເພື່ອນພົມມະຈາຣີທັງຫຼາຍ ບໍ່ປະກອບດ້ວຍປັນຍາເຄື່ອງພິຈາລະນາອັນເປັນອຸບາຍໃນການງານເຫຼົ່ານັ້ນ ບໍ່ອາດຈະເຮັດ ບໍ່ອາດຈະຈັດ ແມ່ນແນວນີ້ກໍຊື່ວ່າເປັນຜູ້ປະຕິບັດບໍ່ເຮັດໃຫ້ສົງຍິນດີ

ພິກຂຸທັງຫຼາຍ ອີກປະການໜຶ່ງ ກຸນລະບຸດຜູ້ເຄີຍເປັນອັນຍະເດຍຣະຖີ ເປັນຜູ້ບໍ່ມີສັນທະແຮງກ້າໃນອຸດເທດ ໃນປະຣິປຸດສາ ໃນອະທິສີນ ອະທິຈິດ ອະທິປັນຍາ ແມ່ນແນວນີ້ກໍຊື່ວ່າເປັນຜູ້ປະຕິບັດບໍ່ເຮັດໃຫ້ສົງຍິນດີ

ພິກຂຸທັງຫຼາຍ ອີກປະການໜຶ່ງ ກຸນລະບຸດຜູ້ເຄີຍເປັນອັນຍະເດຍຣະຖີອອກຈາກລັດທິຂອງຄູໃດ ເມື່ອມີຜູ້ກ່າວຕິຕຽນຄູນັ້ນ ກ່າວຕິຕຽນຄວາມເຫັນຂອງຄູນັ້ນ ຄວາມພໍໃຈຂອງຄູນັ້ນ ຄວາມພໍໃຈຂອງຄູນັ້ນ ຄວາມຍຶດຖືຂອງຄູນັ້ນ ກໍໂກດ ບໍ່ພໍໃຈ ບໍ່ຖືກໃຈ ເມື່ອມີຜູ້ກ່າວຕິຕຽນພຣະພຸດທະ ພຣະທຳ ຫຼື ພຣະສົງ ກັບພໍໃຈ ລ່າເລີງ ພໍໃຈ ຫຼື ອອກຈາກລັດທິຂອງຄູໃດ ເມື່ອມີຜູ້ກ່າວສັນເສີນຄູນັ້ນ ກ່າວສັນເສີນຄວາມເຫັນຂອງຄູນັ້ນ ຄວາມພໍໃຈຂອງຄູນັ້ນ ຄວາມພໍໃຈຂອງຄູນັ້ນ ຄວາມຍຶດຖືຂອງຄູນັ້ນ ຍ່ອມພໍໃຈ ລ່າເລີງ ຍິນດີ ເມື່ອກ່າວສັນເສີນພຣະພຸດທະ ພຣະທຳ ຫຼື ພຣະສົງ ກັບໂກດ ບໍ່ພໍໃຈ ບໍ່ຍິນດີ ທັງຫຼາຍເຫຼົ່ານີ້ ເປັນເຄື່ອງສອບສວນໃນຂໍ້ປະຕິບັດທີ່ບໍ່ຊວນໃຫ້ສົງຍິນດີຂອງກຸນລະບຸດຜູ້ເຄີຍເປັນອັນຍະເດຍຣະຖີ

ພິກຂຸທັງຫຼາຍ ກໍກຸນລະບຸດຜູ້ເຄີຍເປັນອັນຍະເດຍຣະຖີ ຊື່ວ່າເປັນຜູ້ປະຕິບັດບໍ່ເຮັດໃຫ້ສົງຍິນດີແນວນີ້ ກຸນລະບຸດຜູ້ເຄີຍເປັນອັນຍະເດຍຣະຖີຜູ້ປະຕິບັດບໍ່ເຮັດໃຫ້ສົງຍິນດີແນວນີ້ມາແລ້ວບໍ່ເພິ່ງໃຫ້ອຸປະສົມບົດ

## ຂໍ້ປະຕິບັດທີ່ໃຫ້ສົງຍິນດີ

ພິກຂຸທັງຫຼາຍ ກໍກຸນລະບຸດຜູ້ເຄີຍເປັນອັນຍະເດຍຣະຖີຊື່ວ່າ ເປັນຜູ້ປະຕິບັດໃຫ້ສົງຍິນດີແນວໃດ

ພິກຂຸທັງຫຼາຍ ໃນກໍລະນີນີ້ ກຸນລະບຸດຜູ້ເຄີຍເປັນອັນຍະເດຍຣະຖີນີ້ ເຂົ້າໝູ່ບ້ານບໍ່ເຊົ້າໂພດ ກັບບໍ່ສາຍຫຼາຍ ແມ່ນແນວນີ້ກໍຊື່ວ່າເປັນຜູ້ປະຕິບັດໃຫ້ສົງຍິນດີ

ພິກຂຸທັງຫຼາຍ ອີກປະການໜຶ່ງ ກຸນລະບຸດຜູ້ເຄີຍເປັນອັນຍະເດຍຣະຖີ ບໍ່ເປັນຜູ້ມີຍິງແພດສະຫຍາເປັນໂຄຈອນ ບໍ່ມີແມ່ໝ້າຍເປັນໂຄຈອນ ບໍ່ມີສາວເທື້ອເປັນໂຄຈອນ ບໍ່ມີບັນເດາະເປັນໂຄຈອນ ຫຼື ບໍ່ມີພິກຂຸນີເປັນໂຄຈອນ ແມ່ນແນວນີ້ ກໍຊື່ວ່າເປັນຜູ້ປະຕິບັດໃຫ້ສົງຍິນດີ

ພິກຂຸທັງຫຼາຍ ອີກປະການໜຶ່ງ ກຸນລະບຸດຜູ້ເຄີຍເປັນອັນຍະເດຍຣະຖີ ເປັນຜູ້ດຸໝັ່ນ ບໍ່ຂີ້ຄ້ານໃນການງານໃຫຍ່ນ້ອຍຂອງເພື່ອນພົມມະຈາຣີທັງຫຼາຍ ປະກອບດ້ວຍປັນຍາເຄື່ອງພິຈາລະນາອັນເປັນອຸບາຍໃນການງານເຫຼົ່ານັ້ນ ອາດຈະເຮັດ ອາດຈະຈັດ ແມ່ນແນວນີ້ກໍຊື່ວ່າເປັນຜູ້ປະຕິບັດໃຫ້ສົງຍິນດີ

ພິກຂຸທັງຫຼາຍ ອີກປະການໜຶ່ງ ກຸນລະບຸດຜູ້ເຄີຍເປັນອັນຍະເດຍຣະຖີ ເປັນຜູ້ມີສັນທະແຮງກ້າໃນອຸດເທດ ໃນປະຣິປຸດສາ ໃນອະທິສີນ ອະທິຈິດ ອະທິປັນຍາ ແມ່ນແນວນີ້ກໍຊື່ວ່າເປັນຜູ້ປະຕິບັດໃຫ້ສົງຍິນດີ

ພິກຂຸທັງຫຼາຍ ອີກປະການໜຶ່ງ ກຸນລະບຸດຜູ້ເຄີຍເປັນອັນຍະເດຍຣະຖີອອກຈາກລັດທິຂອງຄູໃດ ເມື່ອມີຜູ້ກ່າວຕິຕຽນຄູນັ້ນ ກ່າວຕິຕຽນຄວາມເຫັນຂອງຄູນັ້ນ ຄວາມພໍໃຈຂອງຄູນັ້ນ ຄວາມຖືກໃຈຂອງຄູນັ້ນ ຄວາມຍຶດຖືຂອງຄູນັ້ນ ຍ່ອມພໍໃຈ ລ່າເລີງ ຍິນດີ

ເມື່ອເຂົາກ່າວຕິຕຽນພຣະພຸດທະ ພຣະທຳ ຫຼື ພຣະສົງ ກັບໂກດ ບໍ່ພໍໃຈ ບໍ່ຍິນດີ ຫຼື ອອກຈາກລັດທິຂອງຄູໃດ ເມື່ອເຂົາກ່າວສັນເສີນຄູນັ້ນ ກ່າວສັນເສີນຄວາມເຫັນຂອງຄູນັ້ນ ຄວາມພໍໃຈຂອງຄູນັ້ນ ຄວາມຖືກໃຈຂອງຄູນັ້ນ ຄວາມຍຶດຖືຂອງຄູນັ້ນ ຍ່ອມໂກດ ບໍ່ພໍໃຈ ບໍ່ຍິນດີ ເມື່ອເຂົາກ່າວສັນເສີນພຣະພຸດທະ ພຣະທຳ ຫຼື ພຣະສົງ ຍ່ອມພໍໃຈ ລ່າເລີງ ຍິນດີ ຂໍ້ນີ້ເປັນເຄື່ອງສອບສວນໃນຂໍ້ປະຕິບັດທີ່ຊວນໃຫ້ສົງຍິນດີຂອງກຸນລະບຸດຜູ້ເຄີຍເປັນອັນຍະເດຍຣະຖີ

ພິກຂຸທັງຫຼາຍ ກໍກຸນລະບຸດຜູ້ເຄີຍເປັນອັນຍະເດຍຣະຖີຊື່ວ່າເປັນຜູ້ປະຕິບັດໃຫ້ສົງຍິນດີເປັນແນວນີ້ ກຸນລະບຸດຜູ້ເຄີຍເປັນອັນຍະເດຍຣະຖີຜູ້ປະຕິບັດໃຫ້ສົງຍິນດີແນວນີ້ ມາແລ້ວ ເພິ່ງໃຫ້ອຸປະສົມບົດ

## ເລື້ອງອັນຍະເດຍຣະຖີເປືອຍບໍ່ແຖຜົມ

ພິກຂຸທັງຫຼາຍ ຖ້າກຸນລະບຸດຜູ້ເຄີຍເປັນອັນຍະເດຍຣະຖີເປືອຍກາຍມາ ເພິ່ງສະແຫວງຫາຈີວອນເຊິ່ງມີອຸປັດຊາເປັນເຈົ້າຂອງ ຖ້າຍັງບໍ່ແຖຜົມມາ ສົງເພິ່ງອະປະໂລກເພື່ອແຖຜົມ

## ເລື້ອງຊະດິນບູຊາໄຟ

ພິກຂຸທັງຫຼາຍ ພວກຊະດິນບູຊາໄຟມາແລ້ວ ເພິ່ງໃຫ້ອຸປະສົມບົດ ບໍ່ຕ້ອງໃຫ້ປະຣິວາດແກ່ພວກທ່ານ ຂໍ້ນັ້ນຍ້ອນເຫດໃດ ຍ້ອນຊະດິນເຫຼົ່ານັ້ນເປັນກຳມະວາທີ ເປັນກີຣິຍະວາທີ[໑]

## ເລື້ອງອັນຍະເດຍຣະຖີສາກະຍະ

ພິກຂຸທັງຫຼາຍ ຖ້າສາກະຍະໂດຍກຳເນີດເຄີຍເປັນອັນຍະເດຍຣະຖີມາ ສາກະຍະນັ້ນເມື່ອມາແລ້ວ ເພິ່ງໃຫ້ອຸປະສົມບົດ ບໍ່ຕ້ອງໃຫ້ປະຣິວາດແກ່ສາກະຍະນັ້ນ ເຮົາໃຫ້ສິດພິເສດສ່ວນນີ້ສະເພາະແກ່ໝູ່ຍາດ

**ອັນຍະຕິດຖິຍະປຸບພະກະຖາ ຈົບ**

**ພານະວານທີ ໆ ຈົບ**

# ໔໓. ປັນຈາພາດວັດຖຸ

## ວ່າດ້ວຍອາພາດ ໕ ຊະນິດ

## ເລື້ອງອັນຕະຣາຍິກະທຳ

[໗໗] ສະໄໝນັ້ນ ໃນແຄວັນມະຄົດເກີດໂຣກລະບາດຂຶ້ນ ໕ ຊະນິດ ຄື (໑) ໂຣກຂີ້ທູດ (໒) ໂຣກຝີ (໓) ໂຣກກາກ (໔) ໂຣກມອງຄໍ່ (໕) ໂຣກລົມບ້າໝູ ພວກມະນຸດຖືກໂຣກ ໕ ຊະນິດບຽດບຽນ ພາກັນໄປຫາໝໍຊີວົກໂກມາຣະພັດ ກ່າວວ່າ "ຂໍໂອກາດ ທ່ານໝໍຊ່ອຍຮັກສາພວກຂ້າພະເຈົ້າດ້ວຍເທີ້ນ"

ໝໍຊີວົກ ໂກມາຣະພັດກ່າວວ່າ "ທ່ານທັງຫຼາຍ ເຮົາມີກິດຫຼາຍ ມີງານຕ້ອງເຮັດຫຼາຍ ພຣະເຈົ້າພິມພິສານຈອມທັບມະຄົດຣັດ ພຣະສະໜົມ ແລະ ພິກຂຸສົງມີພຣະພຸດທະເຈົ້າເປັນປະມຸກ ເຮົາກໍ່ຕ້ອງພະຍາບານ ເຮົາບໍ່ສາມາດຮັກສາໄດ້

ມະນຸດເຫຼົ່ານັ້ນກ່າວວ່າ "ທ່ານໝໍ ຊັບສົມບັດຍົກໃຫ້ທ່ານທັງໝົດ ແລະພວກຂ້າພະເຈົ້າຍອມເປັນຂ້າທາດຂອງທ່ານ ຂໍໂອກາດ ຂໍຄວາມກະລຸນາຮັກສາພວກຂ້າພະເຈົ້າດ້ວຍເທີ້ນ

ໝໍຊີວົກໂກມາຣະພັດຕອບວ່າ "ທ່ານທັງຫຼາຍ ເຮົາມີກິດຫຼາຍ ມີງານຕ້ອງເຮັດຫຼາຍ ພຣະເຈົ້າພິມພິສານຈອມທັບມະຄົດຣັດ ນາງສະໜົມ ແລະພິກຂຸສົງມີພຣະພຸດທະເຈົ້າເປັນປະມຸກ ເຮົາກໍ່ຕ້ອງພະຍາບານ ເຮົາບໍ່ສາມາດຮັກສາ (ພວກທ່ານ) ໄດ້

ຂະນະນັ້ນ ມະນຸດເຫຼົ່ານັ້ນມີຄວາມຄິດດັ່ງນີ້ວ່າ "ພຣະສະມະນະເຊື້ອສາຍສາກະຍະບຸດເຫຼົ່ານີ້ມີລັກສະນະນິໄສດີ ປະພຶດຮຽບຮ້ອຍ ບໍຣິໂພກອາຫານດີ ນອນໃນຫ້ອງດີ ຖ້າຈັ່ງໃດແລ້ວ ພວກເຮົາເພິ່ງບັນພະຊາໃນພວກສະມະນະເຊື້ອສາຍສາກະຍະບຸດນັ້ນດີກວ່າ ພິກຂຸທັງຫຼາຍ ຈັກ

ພະຍາບານພວກເຮົາ ແລະໝໍຊີວົກໂກມາຣະພັດຈັກຮັກສາ” ຕໍ່ມາ ຈຶ່ງເຂົ້າໄປຂໍບັນພະຊາ ພິກຂຸທັງຫຼາຍ ໄດ້ໃຫ້ບັນພະຊາໃຫ້ອຸປະສົມບົດ ພວກພິກຂຸ ກໍຕ້ອງພະຍາບານ ແລະໝໍຊີວົກໂກມາຣະພັດກໍຕ້ອງຮັກສາພວກເຂົາ

ເມື່ອຕໍ່ມາ ພິກຂຸທັງຫຼາຍ ພະຍາບານພິກຂຸໄຂ້ເປັນຈຳນວນຫຼາຍ ເປັນຜູ້ຫຼາຍດ້ວຍການຂໍຫຼາຍດ້ວຍການອອກປາກຂໍວ່າ “ຈົ່ງໃຫ້ອາຫານສຳລັບພິກຂຸຜູ້ເປັນໄຂ້ ຈົ່ງໃຫ້ອາຫານສຳລັບພິກຂຸພະຍາບານໄຂ້ ຈົ່ງໃຫ້ຢາສຳລັບພິກຂຸຜູ້ເປັນໄຂ້

ແມ່ນໝໍຊີວົກໂກມາຣະພັດຍ້ອນເອົາແຕ່ຮັກສາພິກຂຸໄຂ້ເປັນຈຳນວນຫຼາຍ ຈຶ່ງປະຕິບັດຣາຊະການບາງຢ່າງບົກຜ່ອງ

[໗໙] ຝ່າຍບຸຣຸດຄົນໜຶ່ງຖືກໂຣກ ໕ ຊະນິດບຽດບຽນ ກໍເຂົ້າໄປຫາໝໍຊີວົກໂກມາຣະພັດຮຽນວ່າ “ຂໍໂອກາດ ທ່ານໝໍ ຊ່ອຍຮັກສາຂ້າພະເຈົ້າດ້ວຍເທີ້ນ”

ໝໍຊີວົກໂກມາຣະພັດກ່າວວ່າ “ທ່ານ ເຮົາມີກິດຫຼາຍ ມີງານຕ້ອງເຮັດຫຼາຍ ພຣະເຈົ້າພິມພິສານຈອມທັບມະຄົດຣັດ ພຣະສະໜົມ ແລະພິກຂຸສົງມີພຣະພຸດທະເຈົ້າເປັນປະມຸກ ເຮົາກໍຕ້ອງພະຍາບານ ເຮົາບໍ່ສາມາດຮັກສາທ່ານໄດ້

ທ່ານໝໍ ຊັບສົມບັດຍົກໃຫ້ທ່ານທັງໝົດ ແລະ ຂ້າພະເຈົ້າຈັກຍອມເປັນຂ້າທາດຂອງທ່ານຂໍໂອກາດ ໂຜດຮັກສາຂ້າພະເຈົ້າດ້ວຍເທີ້ນ

ທ່ານ ເຮົາມີກິດຫຼາຍ ມີງານຕ້ອງເຮັດຫຼາຍ ພຣະເຈົ້າພິມພິສານຈອມທັບມະຄົດຣັດ ນາງສະໜົມແລະພິກຂຸສົງມີພຣະພຸດທະເຈົ້າເປັນປະມຸກ ເຮົາກໍຕ້ອງພະຍາບານ ເຮົາບໍ່ສາມາດຮັກສາໄດ້

ຂະນະນັ້ນ ບຸຣຸດນັ້ນ ມີຄວາມຄິດດັ່ງນີ້ວ່າ “ພຣະສະມະນະເຊື້ອສາຍພຣະສາກບຸດເຫຼົ່ານີ້ມີລັກສະນະນິໄສດີ ປະພຶດຮຽບຮ້ອຍ ບໍຣິໂພກອາຫານດີ ນອນໃນຫ້ອງດີ ຖ້າຈັ່ງໃດພວກເຮົາເພິ່ງບັນພະຊາໃນພວກສະມະນະເຊື້ອສາຍສາກະຍະບຸດ ໃນທີ່ນັ້ນພິກຂຸທັງຫຼາຍຈັກພະຍາບານ ແລະໝໍຊີວົກໂກມາຣະພັດຈັກຮັກສາ ເມື່ອເຮົາຫາຍຈາກໂຣກແລ້ວຄອຍສິກ” ຈຶ່ງເຂົ້າໄປຂໍການບັນພະຊາ ພິກຂຸທັງຫຼາຍໄດ້ໃຫ້ບັນພະຊາໃຫ້ອຸປະສົມບົດ ເມື່ອແລ້ວພວກພິກຂຸກໍຕ້ອງພະຍາບານ ແລະໝໍຊີວົກໂກມາຣະພັດກໍຕ້ອງຮັກສາ ພວກເຂົາຫາຍຈາກໂຣກແລ້ວໄດ້ສິກອອກໄປສາ

ໝໍຊີວົກໂກມາຣະພັດ ເຫັນບຸຣຸດເຫຼົ່ານັ້ນສິກອອກໄປ ຈຶ່ງຖາມວ່າ “ທ່ານໄດ້ບັນພະຊາໃນໝູ່ພິກຂຸບໍ່ແມ່ນບໍ?”

ບຸຣຸດນັ້ນ ຕອບວ່າ “ແມ່ນແລ້ວ ຂ້ານ້ອຍ”

ທ່ານເຮັດແນວນັ້ນ ເຮັດຫຍັງ?

ບຸຣຸດນັ້ນ ໄດ້ບອກເລື້ອງນັ້ນໃຫ້ໝໍຊີວົກໂກມາຣະພັດຮູ້ ໝໍຊີວົກໂກມາຣະພັດຈຶ່ງຕຳໜິປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸທັງຫຼາຍ ຈຶ່ງໃຫ້ກຸນລະບຸດຜູ້ຖືກໂຣກ ໕ ຊະນິດບຽດບຽນບັນພະຊານໍ" ແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງທີ່ປະທັບ ເມື່ອເຖິງແລ້ວ ໄດ້ຖວາຍບັງຄົມພຣະຜູ້ມີພຣະພາກເຈົ້າແລ້ວນັ່ງ ໃນບ່ອນສົມຄວນ ຂາບທູນວ່າ "ຂໍປະທານພຣະວະໂຣກາດ ຂໍພຣະຜູ້ເປັນເຈົ້າທັງຫຼາຍ ບໍ່ເພິ່ງໃຫ້ກຸນລະບຸດຜູ້ຖືກໂຣກ ໕ ຊະນິດບຽດບຽນບັນພະຊາ ດ້ວຍເທີ້ນ ຂ້ານ້ອຍ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຊີ້ແຈ່ງໃຫ້ໝໍຊີວົກໂກມາຣະພັດເຫັນແຈ້ງ ຊວນໃຫ້ຍາກຮັບໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າເລີງດ້ວຍທຳມີກະຖາແລ້ວ ລຳດັບນັ້ນ ໝໍຊີວົກໂກມາຣະພັດເຊິ່ງພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫັນແຈ້ງ ຊວນໃຫ້ຍາກຮັບໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າເລີງດ້ວຍທຳມີກະຖາແລ້ວ ຈຶ່ງລຸກຈາກທີ່ນັ່ງຖວາຍບັງຄົມພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນຈາກໄປ

## ຊົງຫ້າມຄົນເປັນໂຣກຕິດຕໍ່ບັນພະຊາ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ກຸນລະບຸດຜູ້ຖືກໂຣກ ໕ ຊະນິດບຽດບຽນ ບໍ່ເພິ່ງໃຫ້ບັນພະຊາ ອົງໃດໃຫ້ບັນພະຊາ ຕ້ອງອາບັດທຸກກົດ

# ໔໗. ຣາຊະພະຕະວັດຖຸ

## ວ່າດ້ວຍຣາຊະພັດບັນພະຊາ

## ພຣະເຈົ້າພິມພິສານທູນຂໍອະນຸຍາດ

[໔໐] ສະໄໝນັ້ນ ເຂດຊາຍແດນຂອງພຣະເຈົ້າພິມພິສານ ຈອມທັບມະຄົດຣັດເກີດຄວາມວຸ້ນວາຍຂຶ້ນ ພຣະອົງຊົງຮັບສັ່ງກັບເຫຼົ່າມະຫາອຳໝາດຜູ້ເປັນແມ່ທັບນາຍກອງວ່າ "ທ່ານທັງຫຼາຍຈົ່ງໄປປາບປາມເຂດຊາຍແດນໃຫ້ສະງົບ" ເຫຼົ່າມະຫາອຳໝາດ ຜູ້ເປັນແມ່ທັບນາຍກອງ ທູນຮັບສະໜອງພຣະກະແສຮັບສັ່ງຂອງພຣະເຈົ້າພິມພິສານຈອມທັບມະຄົດຣັດ

ຂະນະນັ້ນ ພວກທະຫານທີ່ມີຊື່ສຽງຕ່າງໆມີຄວາມວິຕົກວ່າ ພວກເຮົາຍິນດີໃນການຮົບຕ້ອງໄດ້ເຮັດບາບກຳ ແລະຈະປະສົບສິ່ງບໍ່ແມ່ນບຸນເປັນຈຳນວນຫຼາຍ ດ້ວຍອຸບາຍແນວໃດນໍພວກເຮົາຈະເພິ່ງເວັ້ນຈາກກຳຊົ່ວ ແລະເຮັດກຳດີໄດ້ນໍ?

ທະຫານເຫຼົ່ານັ້ນ ຈິງມີຄວາມຄິດວ່າ "ພຣະສະມະນະເຊື້ອສາຍສາກະຍະບຸດເຫຼົ່ານີ້

ປະພຶດທຳ ປະພຶດສະງົບ ປະພຶດພົມມະຈັນ ກ່າວວາຈາສັດ ມີສິນ ມີກັນລະຍານະທຳ ຖ້າພວກເຮົາຈະເພິ່ງບັນພະຊາໃນພວກສະມະນະ ເຊື້ອສາຍພຣະສາກະຍະບຸດແລ້ວ ດ້ວຍອຸບາຍແນວນີ້ ພວກເຮົາຈະເພິ່ງເວັ້ນຈາກກຳຊົ່ວ ແລະເຮັດກຳດີໄດ້" ຈຶ່ງພາກັນເຂົ້າໄປຂໍການບັນພະຊາ ພິກຂຸທັງຫຼາຍ ໄດ້ໃຫ້ບັນພະຊາໃຫ້ອຸປະສົມບົດ ເຫຼົ່າມະຫາອຳໝາດຜູ້ເປັນແມ່ທັບນາຍກອງ ຖາມພວກຣາຊະພັດວ່າ "ທະຫານຜູ້ມີຊື່ນີ້ ແລະ ມີຊື່ນີ້ຫາຍໄປໄສໝົດແລ້ວ"

ພວກຣາຊະພັດຮຽນວ່າ "ທະຫານຜູ້ມີຊື່ນີ້ ແລະ ມີຊື່ນີ້ ໄດ້ພາກັນໄປບັນພະຊາໃນໝູ່ພິກຂຸແລ້ວໝົດແລ້ວ ຂ້ານ້ອຍ"

ເຫຼົ່າມະຫາອຳໝາດ ຜູ້ເປັນແມ່ທັບນາຍກອງ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພຣະສະມະນະເຊື້ອສາຍສາກະຍະບຸດທັງຫຼາຍ ຈຶ່ງໄດ້ໃຫ້ພວກຣາຊະພັດບັນພະຊານໍ" ແລ້ວນຳເລື້ອງນີ້ໄປຂາບທູນພຣະເຈົ້າພິມພິສານ ຈອມທັບມະຄົດຣັດໃຫ້ຊົງຊາບ"

## ເລື້ອງພຣະເຈົ້າພິມພິສານທູນຂໍຫ້າມໃຫ້ຣາຊະພັດບັນພະຊາ

ລຳດັບນັ້ນ ພຣະເຈົ້າພິມພິສານຈອມທັບມະຄົດຣັດໄດ້ຕັດຖາມຄະນະມະຫາອຳໝາດຜູ້ພິພາກສາວ່າ "ທ່ານ ພິກຂຸອົງໃດ ໃຫ້ຜູ້ທີ່ເປັນຣາຊະພັດບັນພະຊາ ພິກຂຸອົງນັ້ນຕ້ອງໂທດສະຖານໃດ?"

ຄະນະມະຫາອຳໝາດ ຜູ້ພິພາກສາຂາບບັງຄົມທູນວ່າ "ຂໍເດຊະ ພຣະອຸປັດຊາຕ້ອງຖືກຕັດຫົວ ພຣະອະນຸສາວະນາຈານຕ້ອງຖືກດຶງລີ້ນ ພຣະຄະນະປູຣະກະ°ຕ້ອງຖືກຫັກດູກຂ້າງໄປແຖວໜຶ່ງ ຂ້ານ້ອຍ

ຕໍ່ມາ ພຣະເຈົ້າພິມພິສານຈອມທັບມະຄົດຣັດ ໄດ້ສະເດັດໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວ ໄດ້ຖວາຍບັງຄົມພຣະຜູ້ມີພຣະພາກເຈົ້າແລ້ວ ປະທັບນັ່ງໃນບ່ອນສົມຄວນ

ພຣະເຈົ້າພິມພິສານຈອມທັບມະຄົດຣັດ ຜູ້ປະທັບນັ່ງໃນບ່ອນສົມຄວນແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ພຣະຣາຊາທັງຫຼາຍ ຜູ້ບໍ່ຊົງສັດທາ ບໍ່ເຫຼື້ອມໃສມີຢູ່ ພຣະຣາຊາເຫຼົ່ານັ້ນ ຈະເພິ່ງລົບກວນເຫຼົ່າພິກຂຸດ້ວຍເຫດພຽງເລັກນ້ອຍໄດ້ ຂໍປະທານພຣະອະໂຣກາດ ຂໍພຣະຜູ້ເປັນເຈົ້າທັງຫຼາຍ ບໍ່ເພິ່ງໃຫ້ຣາຊະພັດບັນພະຊາເທີ້ນ ຂ້ານ້ອຍ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຊີ້ແຈ່ງໃຫ້ພຣະເຈົ້າພິມພິສານຈອມທັບມະຄົດຣັດເຫັນແຈ້ງ ຊວນໃຫ້ຍາກຮັບໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າເລີງດ້ວຍທຳມີກະຖາ

ເມື່ອພຣະເຈົ້າພິມພິສານຈອມທັບມະຄົດຣັດ ຜູ້ເຊິ່ງພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫັນແຈ້ງ ຊວນໃຫ້ຍາກຮັບໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນ ລ່າເລີງດ້ວຍທຳມີກະຖາແລ້ວ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວ ກະທຳປະທັກຂິນສະເດັດຈາກໄປ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ຜູ້ເປັນຣາຊະພັດພິກຂຸບໍ່ເພິ່ງໃຫ້ບັນພະຊາ ອົງໃດໃຫ້ບັນພະຊາ ຕ້ອງອາບັດທຸກກົດ

# ໔໗. ອັງຄຸລິມາລະໂຈຣະວັດຖຸ

## ວ່າດ້ວຍໂຈນອົງຄຸລີມານບັນພະຊາ

[໙໑] ສະໄໝນັ້ນ ໂຈນອົງຄຸລີມານໄດ້ບັນພະຊາໃນໝູ່ພິກຂຸ ຊາວບ້ານເຫັນເຂົ້າຕ່າງຢ້ານກົວແດ່ ຕົກໃຈແດ່ ໜີໄປແດ່ ປົບໄປທາງອື່ນແດ່ ປົບໜ້າໄປແດ່ ປິດປະຕູແດ່ ຄົນທັງຫຼາຍ ພາກັນຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງ ພຣະສະມະນະເຊື້ອສາຍສາກະຍະບຸດທັງຫຼາຍຈຶ່ງໃຫ້ໂຈນທີ່ມີຊື່ໂດ່ງດັ່ງບັນພະຊານໍ?”

## ເລື້ອງຫ້າມໂຈນມີຊື່ສຽງບັນພະຊາ

ພິກຂຸທັງຫຼາຍ ໄດ້ຍິນຄົນເຫຼົ່ານັ້ນຕຳໜິ ປະນາມ ໂພນທະນາ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ໂຈນທີ່ມີຊື່ໂດ່ງດັງ ບໍ່ເພິ່ງໃຫ້ບັນພະຊາ ອົງໃດໃຫ້ບັນພະຊາ ຕ້ອງອາບັດທຸກກົດ”

# ໔໙. ກາຣະເພທະກະໂຈຣະວັດຖຸ

## ວ່າດ້ວຍໂຈນແຫກຄຸກບັນພະຊາ

[໙໔] ສະໄໝນັ້ນ ພຣະເຈົ້າພິມພິສານຈອມທັບມະຄົດຣັດ ຊົງມີພຣະບໍຣົມຣາຊານຸຍາດໄວ້ວ່າ “ກຸນລະບຸດເຫຼົ່າໃດໄດ້ບັນພະຊາໃນພວກພຣະສະມະນະ ເຊື້ອສາຍພຣະສາກະຍະບຸດກຸນລະບຸດເຫຼົ່ານັ້ນຜູ້ໃດ ຈະເຮັດຫຍັງບໍ່ໄດ້ ພຣະທຳອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຈົ່ງປະພຶດພົມມະຈັນເພື່ອເຮັດທີ່ສຸດທຸກໂດຍຊອບເທີ້ນ

ຄັ້ງນັ້ນ ບຸຣຸດຄົນໜຶ່ງກະທຳການໂຈຣະກຳແລ້ວຖືກເຈົ້າໜ້າທີ່ຈອງຈຳໄວ້ໃນຄຸກ ເຂົາແຫກຄຸກໜີໄປບັນພະຊາໃນໝູ່ພິກຂຸ ມະນຸດທັງຫຼາຍພົບເຂົ້າແລ້ວຈຶ່ງກ່າວແນວນີ້ວ່າ

ພິກຂຸອົງນີ້ ຄືໂຈນແຫກຄຸກຄົນນັ້ນແທ້ນໍ ຖ້າຈັ່ງຊັ້ນແລ້ວ ພວກເຮົາຈະຈັບພິກຂຸນັ້ນໄປ ມະນຸດບາງພວກກ່າວແນວນີ້ວ່າ "ທ່ານທັງຫຼາຍຢ່າໄດ້ກ່າວແນວນີ້ ພຣະເຈົ້າພິມພິສານຈອມທັບມະຄົດຣັດໄດ້ຊົງມີພຣະບໍຣົມຣາຊານຸຍາດໄວ້ວ່າ ກຸນລະບຸດເຫຼົ່າໃດໄດ້ບັນພະຊາໃນພວກສະມະນະເຊື້ອສາຍສາກະຍະບຸດ ກຸນລະບຸດເຫຼົ່ານັ້ນຜູ້ໃດຈະເຮັດຫຍັງບໍ່ໄດ້ ພຣະທໍາອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຈົ່ງປະພຶດພົມມະຈັນເພື່ອເຮັດທີ່ສຸດທຸກໂດຍຊອບເທີ້ນ"

ມະນຸດທັງຫຼາຍ ພາກັນຕໍາໜິ ປະນາມ ໂພນທະນາວ່າ "ພຣະສະມະນະເຊື້ອສາຍສາກະຍະບຸດເຫຼົ່ານີ້ບໍ່ແມ່ນຜູ້ປົບໜີໄພ ຜູ້ໃດຈະເຮັດຫຍັງບໍ່ໄດ້ ເປັນຫຍັງ ພຣະສະມະນະເຊື້ອສາຍສາກະຍະບຸດທັງຫຼາຍ ຈຶ່ງໃຫ້ໂຈນແຫກຄຸກບັນພະຊານໍ"

ພິກຂຸທັງຫຼາຍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ໂຈນຜູ້ແຫກຄຸກບໍ່ເພິ່ງໃຫ້ບັນພະຊາ ອົງໃດໃຫ້ບັນພະຊາ ຕ້ອງອາບັດທຸກກົດ"

## ໓໐. ລິຂິຕະກະໂຈຣະວັດຖຸ

### ວ່າດ້ວຍໂຈນຖືກອອກໝາຍຈັບບັນພະຊາ

[໘໓] ສະໄໝນັ້ນ ບຸຣຸດຄົນໜຶ່ງກະທໍາໂຈຣະກໍາແລ້ວໄດ້ໜີໄປບັນພະຊາໃນໝູ່ພິກຂຸ ແລະເຂົາຖືກເຈົ້າໜ້າທີ່ອອກໝາຍຈັບທົ່ວຣາຊະອານາຈັກວ່າ "ຖ້າພົບເຫັນເຂົ້າໃນທີ່ໃດ ເພິ່ງຂ້າຖິ້ມໃນທີ່ນັ້ນ" ມະນຸດທັງຫຼາຍ ເຫັນເຂົ້າຈຶ່ງກ່າວແນວນີ້ວ່າ "ພິກຂຸອົງນີ້ຄືໂຈນຜູ້ຖືກອອກໝາຍຈັບຄົນນັ້ນ ຖ້າຈັ່ງຊັ້ນແລ້ວ ພວກເຮົາຈະຂ້າພິກຂຸນັ້ນສາ"

ມະນຸດບາງພວກກ່າວແນວນີ້ວ່າ "ທ່ານທັງຫຼາຍ ຢ່າໄດ້ກ່າວແນວນີ້ ພຣະເຈົ້າພິມພິສານຈອມທັບມະຄົດຣັດໄດ້ຊົງມີພຣະບໍຣົມຣາຊານຸຍາດໄວ້ວ່າ ກຸນລະບຸດເຫຼົ່າໃດໄດ້ບັນພະຊາໃນພວກສະມະນະເຊື້ອສາຍສາກະຍະບຸດ ກຸນລະບຸດເຫຼົ່ານັ້ນຜູ້ໃດ ຈະເຮັດຫຍັງບໍ່ໄດ້ ພຣະທໍາອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຈົ່ງປະພຶດພົມມະຈັນເພື່ອເຮັດທີ່ສຸດທຸກໂດຍຊອບເທີ້ນ"

ມະນຸດທັງຫຼາຍພາກັນຕໍາໜິ ປະນາມ ໂພນທະນາວ່າ "ພຣະສະມະນະເຊື້ອສາຍພຣະສາກະຍະບຸດເຫຼົ່ານີ້ປອດໄພ ຜູ້ໃດຈະເຮັດຫຍັງບໍ່ໄດ້ ເປັນຫຍັງ ພຣະສະມະນະເຊື້ອສາຍພຣະສາກະຍະບຸດ ຈຶ່ງໃຫ້ໂຈນຜູ້ຖືກອອກໝາຍຈັບບັນພະຊານໍ"

ພິກຂຸທັງຫຼາຍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ໂຈນຜູ້ຖືກອອກໝາຍຈັບບໍ່ເພິ່ງໃຫ້ບັນພະຊາ ອົງໃດໃຫ້ບັນພະຊາ ຕ້ອງອາບັດທຸກກົດ"

# ໓໑. ກະສາຫະຕະວັດຖຸ

## ວ່າດ້ວຍບຸຣຸດຜູ້ຖືກຄ້ຽນຕີດ້ວຍຫວາຍບັນພະຊາ

[໘໔] ສະໄໝນັ້ນ ບຸຣຸດຄົນໜຶ່ງຖືກລົງອາຍາຄ້ຽນຕີດ້ວຍຫວາຍ ໄດ້ບັນພະຊາໃນໝູ່ພິກຂຸ ມະນຸດທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພຣະສະມະນະເຊື້ອສາຍ

ພຣະສາກະຍະບຸດທັງຫຼາຍຈຶ່ງໃຫ້ບຸຣຸດຜູ້ຖືກລົງອາຍາຄ້ຽນຕີດ້ວຍຫວາຍບັນພະຊານໍ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ບຸຣຸດຜູ້ຖືກລົງອາຍາຄ້ຽນຕີດ້ວຍຫວາຍ

ບໍ່ເພິ່ງໃຫ້ບັນພະຊາ ອົງໃດໃຫ້ບັນພະຊາ ຕ້ອງອາບັດທຸກກົດ

# ໓໔. ລັກຂະນາຫະຕະວັດຖຸ

## ວ່າດ້ວຍບຸຣຸດຖືກສັກໝາຍໂທດບັນພະຊາ

[໘໕] ສະໄໝນັ້ນ ບຸຣຸດຄົນໜຶ່ງຖືກລົງອາຍາສັກໝາຍໂທດໄດ້ບັນພະຊາໃນໝູ່ພິກຂຸ ມະນຸດທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພຣະສະມະນະເຊື້ອສາຍພຣະສາກະຍະບຸດທັງຫຼາຍ ຈຶ່ງໃຫ້ບຸຣຸດຜູ້ຖືກລົງອາຍາສັກໝາຍໂທດບັນພະຊານໍ"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ບຸຣຸດຜູ້ຖືກລົງອາຍາສັກໝາຍໂທດບໍ່ເພິ່ງໃຫ້ບັນພະຊາ ອົງໃດໃຫ້ບັນພະຊາ ຕ້ອງອາບັດທຸກກົດ"

# ໓໓. ອິນາຍິກະວັດຖຸ

## ວ່າດ້ວຍລູກໜີ້ບັນພະຊາ

[໘໖] ສະໄໝນັ້ນ ຊາຍຜູ້ເປັນລູກໜີ້ຄົນໜຶ່ງໄດ້ໜີໄປບັນພະຊາໃນໝູ່ພິກຂຸ ພວກເຈົ້າຊັບພົບເຂົ້າຈຶ່ງກ່າວແນວນີ້ວ່າ "ພິກຂຸອົງນີ້ຄືລູກໜີ້ຂອງພວກເຮົາຄົນນັ້ນ ຖ້າຈັ່ງຊັ້ນແລ້ວ ພວກເຮົາຈຶ່ງຈັບພິກຂຸນັ້ນໄວ້"

ມະນຸດບາງພວກກ່າວແນວນີ້ວ່າ "ທ່ານທັງຫຼາຍ ຢ່າໄດ້ກ່າວແນວນັ້ນ ພຣະເຈົ້າພິມພິສານຈອມທັບມະຄົດຣັດ ໄດ້ຊົງມີພຣະບໍຣົມຣາຊານຸຍາດໄວ້ວ່າ ກຸນລະບຸດເຫຼົ່າໃດໄດ້ບັນພະຊາໃນພວກພຣະສະມະນະເຊື້ອສາຍພຣະສາກະຍະບຸດ ກຸນລະບຸດເຫຼົ່ານັ້ນຜູ້ໃດ ຈະເຮັດຫຍັງບໍ່ໄດ້

ພຣະທຳອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຈົ່ງປະພຶດພົມມະຈັນເພື່ອເຮັດທີ່ສຸດທຸກໂດຍຊອບເທີ້ນ"

ມະນຸດທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ "ພຣະສະມະນະເຊື້ອສາຍພຣະສາກະຍະບຸດເຫຼົ່ານີ້ປອດໄພ ຜູ້ໃດ ຈະເຮັດຫຍັງບໍ່ໄດ້ ເປັນຫຍັງພຣະສະມະນະເຊື້ອສາຍ ພຣະສາກະຍະບຸດທັງຫຼາຍຈຶ່ງໃຫ້ຄົນມີໜີ້ບັນພະຊານໍ"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ຄົນມີໜີ້ບໍ່ເພິ່ງໃຫ້ບັນພະຊາ ອົງໃດໃຫ້ບັນພະຊາຕ້ອງອາບັດທຸກກົດ"

## ໕໔. ທາຕະວັດຖຸ

### ວ່າດ້ວຍຂ້າທາດບັນພະຊາ

[໙໗] ສະໄໝນັ້ນ ຂ້າທາດຄົນໜຶ່ງໄດ້ໜີໄປບັນພະຊາໃນໝູ່ພິກຂຸ ພວກເຈົ້ານາຍພົບເຂົ້າຈຶ່ງກ່າວແນວນີ້ວ່າ "ພິກຂຸອົງນີ້ຄືຂ້າທາດຂອງພວກເຮົາຄົນນັ້ນ ຖ້າຈັ່ງຊັ້ນແລ້ວ ພວກເຮົາຈົ່ງຈັບພິກຂຸນັ້ນໄວ້"

ມະນຸດບາງພວກກ່າວແນວນີ້ວ່າ "ທ່ານທັງຫຼາຍຢ່າໄດ້ກ່າວແນວນີ້ ຍ້ອນພຣະເຈົ້າພິມພິສານຈອມທັບມະຄົດຮັດໄດ້ ຊົງມີພຣະບໍຣົມຣາຊານຸຍາດໄວ້ວ່າ ກຸນລະບຸດເຫຼົ່າໃດໄດ້ບັນພະຊາໃນພວກສະມະນະເຊື້ອສາຍພຣະສາກະຍະບຸດ ກຸນລະບຸດເຫຼົ່ານັ້ນຜູ້ໃດ ຈະເຮັດຫຍັງບໍ່ໄດ້ພຣະທຳອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຈົ່ງປະພຶດພົມມະຈັນເພື່ອເຮັດທີ່ສຸດທຸກໂດຍຊອບເທີ້ນ"

ມະນຸດທັງຫຼາຍ ພາກັນຕຳໜິ ປະນາມ ໂພນທະນາວ່າ "ພຣະສະມະນະເຊື້ອສາຍພຣະສາກະຍະບຸດເຫຼົ່ານີ້ປອດໄພ ຜູ້ໃດຈະເຮັດຫຍັງບໍ່ໄດ້ ເປັນຫຍັງ ພຣະສະມະນະເຊື້ອສາຍ ພຣະສາກະຍະບຸດທັງຫຼາຍ ຈຶ່ງໃຫ້ຂ້າທາດບັນພະຊານໍ"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ຄົນເປັນຂ້າທາດບໍ່ເພິ່ງໃຫ້ບັນພະຊາ ອົງໃດໃຫ້ບັນພະຊາຕ້ອງອາບັດທຸກກົດ

## ໕໕. ກຳມາຣະພັນດະວັດຖຸ

### ວ່າດ້ວຍບຸດຊ່າງຄຳຜົມຈຸກໜ້າຫຍ່ອມບັນພະຊາ

[໙໘] ສະໄໝນັ້ນ ບຸດຊ່າງຄຳຫົວໂລ້ນຄົນໜຶ່ງຜິດຖຽງກັບມານດາບິດາ ໄດ້ໄປສູ່ອາຮາມບັນພະຊາໃນໝູ່ພິກຂຸ ຕໍ່ມາ ມານດາບິດາໄດ້ອອກຕາມຫາບຸດ ໄປເຖິງອາຮາມຖາມພິກຂຸທັງຫຼາຍວ່າ "ທ່ານໄດ້ພົບເດັກຊາຍມີຮູບຮ່າງແນວນີ້ແດ່ບໍ? ຂ້ານ້ອຍ

ພວກພິກຂຸທີ່ບໍ່ຮູ້ເລີຍ ກໍກ່າວວ່າ "ພວກອາດຕະມາບໍ່ຮູ້"
ພວກພິກຂຸທີ່ບໍ່ເຫັນເລີຍກໍກ່າວວ່າ "ພວກອາດຕະມາບໍ່ເຫັນ"

ຂະນະມານດາບິດາຕາມຫາໄດ້ພົບບຸດບັນພະຊາໃນໝູ່ພິກຂຸຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ "ພຣະສະມະນະເຊື້ອສາຍພຣະສາກະຍະບຸດເຫຼົ່ານີ້ ບໍ່ມີຄວາມລະອາຍ ທຸສິນເວົ້າຕົວະ ຮູ້ຢູ່ແທ້ ໆ ກໍກ່າວວ່າ ພວກອາດຕະມາບໍ່ຮູ້ ເຫັນຢູ່ແທ້ ໆ ກໍກ່າວວ່າ ພວກອາດຕະມາບໍ່ເຫັນ ເດັກນີ້ໄດ້ບັນພະຊາໃນໝູ່ພິກຂຸສາແລ້ວ

ພິກຂຸທັງຫຼາຍ ໄດ້ຍິນມານດາບິດາຂອງບຸດຊ່າງຄຳຜົມຈຸກຕຳໜິ ປະນາມ ໂພນທະນາ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ອະປະໂລກຕໍ່ສົງເພື່ອການແຖຜົມ"

# ໓໓. ອຸປາລິທາຣະກະວັດຖຸ

## ວ່າດ້ວຍເດັກຊາຍອຸບາລິບັນພະຊາ

[໙໙] ສະໄໝນັ້ນ ໃນນະຄອນຣາຊະຄຶມີເດັກຊາຍຜູ້ເປັນເພື່ອນກັນ ໑໗ ຄົນ ເດັກຊາຍອຸບາລິເປັນຫົວໜ້າຂອງເດັກເຫຼົ່ານັ້ນ ຄັ້ງນັ້ນ ມານດາບິດາຂອງເດັກຊາຍອຸບາລິໄດ້ປຶກສາກັນດັ່ງນີ້ວ່າ "ເມື່ອພວກເຮົາລ່ວງລັບໄປ ເຈົ້າອຸບາລິຈະຢູ່ສຸກສະບາຍ ແລະບໍ່ລຳບາກດ້ວຍວິທີໃດນໍ" ລຳດັບນັ້ນ ມານດາບິດາຂອງເດັກຊາຍອຸບາລິໄດ້ປຶກສາກັນອີກວ່າ "ຖ້າເຈົ້າອຸບາລິຮຽນຂຽນໜັງສື ດ້ວຍວິທີແນວນີ້ ເມື່ອພວກເຮົາລ່ວງລັບໄປ ເຈົ້າອຸບາລິຈະຢູ່ສຸກສະບາຍ ແລະບໍ່ລຳບາກ" ແຕ່ກໍວິຕົກໄປວ່າ "ຖ້າເຈົ້າອຸບາລິຮຽນຂຽນໜັງສື ນິ້ວມືຈະເຈັບ ຖ້າເຈົ້າອຸບານຮຽນວິຊາຄຳນວນ ດ້ວຍວິທີແນວນີ້ ເມື່ອພວກເຮົາລ່ວງລັບໄປ ເຈົ້າອຸບາລິຈະຢູ່ສຸກສະບາຍ ແລະບໍ່ລຳບາກ" ແລະວິຕົກອີກວ່າ "ຖ້າເຈົ້າອຸບາລິຈັກຮຽນວິຊາຄຳນວນ ກໍຈະເຈັບຫົວ ຖ້າເຈົ້າອຸບາລິຮຽນວິຊາກ່ຽວກັບການເງິນ ດ້ວຍວິທີແນວນີ້ ເມື່ອພວກເຮົາລ່ວງລັບໄປ ເຈົ້າອຸບາລິ ຈະຢູ່ສຸກສະບາຍ ແລະບໍ່ລຳບາກ" ແລ້ວກໍວິຕົກອີກວ່າ "ຖ້າເຈົ້າອຸບາລິຮຽນວິຊາກ່ຽວກັບການເງິນ ໜ່ວຍຕາຈັກບອດ ພຣະສະມະນະເຊື້ອສາຍພຣະສາກະຍະບຸດເຫຼົ່ານີ້ ມີລັກສະນະນິໄສດີ ປະພຶດຮຽບຮ້ອຍ ບໍຣິໂພກອາຫານດີ ນອນໃນຫ້ອງດີ ຖ້າເຈົ້າອຸບາລິໄດ້ບວດໃນສຳນັກພຣະສະມະນະເຊື້ອສາຍພຣະສາກະຍະບຸດ ດ້ວຍວິທີແນວນີ້ ເມື່ອພວກເຮົາລ່ວງລັບໄປ ເຈົ້າອຸບາລິຈະຢູ່ສຸກສະບາຍ ແລະບໍ່ລຳບາກ"

## ເດັກຊາຍອຸບາລິອອກບວດ

ເດັກຊາຍອຸບາລິໄດ້ຍິນຄຳສົນທະນາຂອງມານດາບິດາ ເມື່ອແລ້ວເດັກຊາຍອຸບາລິຈຶ່ງໄດ້

ໄປຫາພວກເດັກນ້ອຍ ເຖິງທີ່ພັກ ເມື່ອເຖິງແລ້ວ ໄດ້ກ່າວກັບພວກເດັກນ້ອຍເຫຼົ່ານັ້ນ ດັ່ງນີ້ວ່າ ເພື່ອນທັງຫຼາຍ ມາເທີ້ນ ພວກເຮົາຈະໄປບວດໃນສຳນັກພຣະສະມະນະເຊື້ອສາຍສາກະຍະບຸດ"

ເດັກເຫຼົ່ານັ້ນກ່າວວ່າ "ເພື່ອນເອີຍ ຖ້າເຈົ້າບວດ ພວກເຮົາກໍຈະບວດຄືກັນ"

ເມື່ອແລ້ວເດັກນ້ອຍເຫຼົ່ານັ້ນ ຕ່າງຄົນຕ່າງກໍເຂົ້າໄປຫາມານດາບິດາຂອງຕົນ ແລ້ວໄດ້ກ່າວຂໍອະນຸຍາດດັ່ງນີ້ວ່າ "ພໍ່ແມ່ໂຜດອະນຸຍາດໃຫ້ພວກລູກ ໆ ອອກຈາກເຮືອນໄປບວດເປັນບັນພະຊິດດ້ວຍເທີ້ນ"

ມານດາບິດາຂອງເດັກເຫຼົ່ານັ້ນ ອະນຸຍາດດ້ວຍຄິດວ່າ "ເດັກພວກນີ້ຕ່າງພ້ອມໃຈມີຄວາມປາຖະໜາສິ່ງທີ່ດີງາມຄືກັນທຸກຄົນ

ພວກເດັກເຫຼົ່ານັ້ນຈຶ່ງເຂົ້າໄປຫາພິກຂຸທັງຫຼາຍ ຂໍບັນພະຊາ ພິກຂຸທັງຫຼາຍໃຫ້ເດັກເຫຼົ່ານັ້ນບັນພະຊາອຸປະສົມບົດແລ້ວ

ເມື່ອເວລາໃກ້ຮຸ່ງແຈ້ງແຫ່ງຣາຕີ ພິກຂຸໃໝ່ເຫຼົ່ານັ້ນ ລຸກຂຶ້ນຮ້ອງໄຫ້ວ່າ "ທ່ານທັງຫຼາຍໂຜດໃຫ້ເຂົ້າຕົ້ມ ໂຜດໃຫ້ເຂົ້າສຸກ ໂຜດໃຫ້ຂອງຫຍໍ້າ

ພິກຂຸທັງຫຼາຍ ກ່າວແນວນີ້ວ່າ "ທ່ານທັງຫຼາຍ ຖ້າໃຫ້ສະຫວ່າງສາກ່ອນ ຖ້າມີເຂົ້າຕົ້ມພວກທ່ານຈະໄດ້ສັນ ຖ້າມີເຂົ້າສຸກ ພວກທ່ານຈະໄດ້ສັນ ຖ້າມີຂອງຫຍໍ້າ ພວກທ່ານຈະໄດ້ຫຍໍ້າແຕ່ຖ້າເຂົ້າຕົ້ມເຂົ້າສຸກ ຫຼື ຂອງຫຍໍ້າບໍ່ມີ ພວກທ່ານຕ້ອງທ່ຽວບິນທະບາດມາສັນພິກຂຸໃໝ່ເຫຼົ່ານັ້ນອັນພິກຂຸທັງຫຼາຍກ່າວຢູ່ແນວນີ້ ກໍຍັງພາກັນຮ້ອງໄຫ້ ວ່າ

ທ່ານທັງຫຼາຍໂຜດໃຫ້ເຂົ້າຕົ້ມ ໂຜດໃຫ້ເຂົ້າສຸກ ໂຜດໃຫ້ຂອງຫຍໍ້າເທີ້ນ" ພາກັນຖ່າຍອຸດຈາຣະແດ່ ຖ່າຍປັດສາວະແດ່ ໃສ່ເສນາສະນະ

ພຣະຜູ້ມີພຣະພາກເຈົ້າ ຊົງຕື່ນບັນທົມເວລາໃກ້ຮຸ່ງແຫ່ງຣາຕີ ໄດ້ຊົງສະດັບສຽງເດັກນ້ອຍເມື່ອໄດ້ຊົງສະດັບແລ້ວຈຶ່ງຕັດກັບທ່ານພຣະອານົນວ່າ "ອານົນ ສຽງເດັກຮ້ອງໄຫ້ຍ້ອນເຫດໃດນໍ"

ໃນບັດນັ້ນ ທ່ານພຣະອານົນໄດ້ຂາບທູນເລື້ອງນັ້ນ ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

## ເລື້ອງຊົງຫ້າມກຸນລະບຸດອາຍຸຍ່ອນກວ່າ ໒໐ ປີອຸປະສົມບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດຊົງ

ສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸຮູ້ຢູ່ ແຕ່ກໍຍັງໃຫ້ບຸກຄົນອາຍຸຍ່ອນກວ່າ ໒໐ ປີ ອຸປະສົມບົດແມ່ນບໍ?" ພິກຂຸທັງຫຼາຍ ທູນຮັບວ່າ "ແມ່ນແລ້ວ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ฯລฯ ພິກຂຸທັງຫຼາຍ ເປັນຫຍັງ ໂມຄະບຸຣຸດເຫຼົ່ານັ້ນ ຮູ້ຢູ່ແຕ່ກໍຍັງໃຫ້ບຸກຄົນອາຍຸຍ່ອນກວ່າ ໒໐ ປີອຸປະສົມບົດນໍ ພິກຂຸທັງຫຼາຍ ບຸກຄົນຜູ້ມີອາຍຸຍ່ອນກວ່າ ໒໐ ປີ ຍັງບໍ່ອົດທົນ ບໍ່ອົດກັ້ນຕໍ່ຄວາມເຢັນ ຄວາມຮ້ອນ ຄວາມຫິວ ຄວາມກະຫາຍ ສຳຜັດຈາກເຫຼືອດ ຍຸງ ລົມ ແດດ ສັດເລືອຄານ ຄຳກ່າວຮ້າຍ ຄຳທີ່ບໍ່ມ່ວນຫູ ຄວາມຮູ້ສຶກທາງກາຍທີ່ເກີດຂຶ້ນເປັນທຸກແສນສາຫັດ ອັນຮຸນແຮງ ເຜັດຮ້ອນ ບໍ່ໜ້າຍິນດີ ບໍ່ໜ້າພໍໃຈ ອັນເປັນອັນຕະລາຍຕໍ່ຊີວິດ ພິກຂຸທັງຫຼາຍ ບຸກຄົນຜູ້ມີອາຍຸຄົບ ໒໐ ປີ ຈຶ່ງຈະອົດທົນ ອົດກັ້ນຕໍ່ຄວາມເຢັນ ຄວາມຮ້ອນ ຄວາມຫິວ ຄວາມກະຫາຍ ສຳຜັດຈາກເຫຼືອດ ຍຸງ ລົມ ແດດ ສັດເລືອຄານ ຄຳກ່າວຮ້າຍ ຄຳທີ່ບໍ່ມ່ວນຫູ ຄວາມຮູ້ສຶກທາງກາຍທີ່ເກີດຂຶ້ນເປັນທຸກແສນສາຫັດ ຮຸນແຮງ ເຜັດຮ້ອນ ບໍ່ໜ້າຍິນດີ ບໍ່ໜ້າພໍໃຈ ອັນເປັນອັນຕະລາຍຕໍ່ຊີວິດ ພິກຂຸທັງຫຼາຍ ການເຮັດແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ฯລฯ" ເມື່ອແລ້ວໄດ້ຊົງສະແດງທຳມີກະຖາແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸຮູ້ຢູ່ບໍ່ເພິ່ງໃຫ້ບຸກຄົນຜູ້ມີອາຍຸຍ່ອນກວ່າ ໒໐ ປີ ອຸປະສົມບົດ ອົງໃດໃຫ້ອຸປະສົມບົດ ເພິ່ງປັບອາບັດຕາມທຳ"

## ໕໓. ອະຫິວາຕະກະໂຣຄະວັດຖຸ

### ວ່າດ້ວຍອະຫິວາຕະກະໂຣກ

### ກຳນົດອາຍຸຜູ້ບັນພະຊາເປັນສາມະເນນ

[໑໐໐] ສະໄໝນັ້ນ ຄອບຄົວໜຶ່ງໄດ້ເຖິງແກ່ກຳດ້ວຍອະຫິວາຕະກະໂຣກ ເຫຼືອພຽງບິດາກັບບຸດ ຄົນທັງ ໒ ໄດ້ບັນພະຊາໃນໝູ່ພິກຂຸແລ້ວທ່ຽວບິນທະບາດນຳກັນ ຄັ້ງນັ້ນ ເມື່ອເຂົາຖວາຍພິກສາແກ່ພິກຂຸຜູ້ບິດາ ສາມະເນນນ້ອຍແລ່ນໄປຫາແລ້ວໄດ້ກ່າວກັບພິກຂຸຜູ້ເປັນບິດານັ້ນວ່າ "ພໍ່ ໆ ໃຫ້ລູກແດ່ ພໍ່ ໆ ໃຫ້ລູກແດ່"

ມະນຸດທັງຫຼາຍ ພາກັນຕຳໜິ ປະນາມ ໂພນທະນາວ່າ "ພຣະສະມະນະເຊື້ອສາຍພຣະສາກະຍະບຸດເຫຼົ່ານີ້ ບໍ່ແມ່ນຜູ້ປະພຶດພົມມະຈັນ ສາມະເນນນ້ອຍອົງນີ້ຄົງຈະເກີດຈາກພິກຂຸນີ"

ພິກຂຸທັງຫຼາຍ ໄດ້ຍິນມະນຸດເຫຼົ່ານັ້ນຕຳໜິ ປະນາມ ໂພນທະນາ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເດັກຊາຍມີອາຍຸຍ່ອນກວ່າ ໑໕ ປີ ບໍ່ເພິ່ງໃຫ້ບັນພະຊາ ອົງໃດໃຫ້ບັນພະຊາ ຕ້ອງອາບັດທຸກກົດ

## ເລື່ອງບັນພະຊາໃຫ້ເດັກນ້ອຍອາຍຸຢ່ອນກວ່າ ໑໕ ປີຂອງຕະກູນມີສັດທາ

ສະໄໝນັ້ນ ຕະກູນອຸປັດຖາກຂອງທ່ານພຣະອານິນມີສັດທາເຫຼື້ອມໃສ ໄດ້ເຖິງແກ່ກຳດ້ວຍອະຫິວາຕະກະໂຣກ ເຫຼືອພຽງເດັກຊາຍ ໔ ຄົນ ເດັກຊາຍທັງ ໔ ເຫັນພິກຂຸທັງຫຼາຍແລ້ວກໍແລ່ນເຂົ້າໄປຫາດ້ວຍກິຣິຍາທີ່ຄຸ້ນເຄີຍກັນມາແຕ່ກ່ອນ ແຕ່ພິກຂຸທັງຫຼາຍໄດ້ໄລ່ໄປສາ ເດັກທັງ ໔ ເມື່ອຖືກພິກຂຸໄລ່ກໍຮ້ອງໄຫ້ ຂະນະນັ້ນ ທ່ານພຣະອານົນໄດ້ມີຄວາມຄິດດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ວ່າ ເດັກຊາຍມີອາຍຸຢ່ອນກວ່າ ໑໕ ປີ ບໍ່ເພິ່ງໃຫ້ບັນພະຊາ ກໍເດັກທັງ ໔ ຄົນນີ້ມີອາຍຸຢ່ອນກວ່າ ໑໕ ປີ ດ້ວຍອຸບາຍແນວໃດນໍ ເດັກທັງ ໔ ນີ້ ຈຶ່ງຈະບໍ່ເສຍໂອກາດ" ບັດນັ້ນທ່ານພຣະອານົນ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ອານົນ ກໍເດັກທັງ ໔ ນັ້ນ ສາມາດໄລ່ກາໄດ້ແລ້ວບໍ" ທ່ານພຣະອານົນຂາບທູນວ່າ "ໄດ້ແລ້ວ ຂ້ານ້ອຍ"

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸໃຫ້ເດັກຊາຍມີອາຍຸຢ່ອນກວ່າ ໑໕ ປີ ເຊິ່ງສາມາດໄລ່ກາໄດ້ບັນພະຊາ"

# ໘໗. ກັນຕະກະວັດຖຸ

## ວ່າດ້ວຍສາມະເນນກັນຕະກະ

[໑໐໑] ສະໄໝນັ້ນ ທ່ານພຣະອຸປະນັນທະສາກະຍະບຸດມີສາມະເນນຢູ່ ໔ ອົງ ຄື ສາມະເນນກັນຕະກະ ແລະສາມະເນນມະຫະກະ ທ່ານທັງ ໔ ມັກຂົ່ມເຫງກັນແລະກັນ ພິກຂຸທັງຫຼາຍຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ສາມະເນນທັງສອງຈຶ່ງໄດ້ປະພຶດບໍ່ສົມຄວນແນວນີ້ນໍ" ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸອົງດຽວບໍ່ຄວນມີສາມະເນນຮັບໃຊ້ ໔ ອົງ ອົງໃດໃຫ້ຮັບໃຊ້ ຕ້ອງອາບັດທຸກກົດ"

# ໘໙. ອາຫຸນະທະຣິກະວັດຖຸ

## ວ່າດ້ວຍທິດຄັບແຄບ

[໑໐໔] ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ໃນນະຄອນຣາຊະຄຶພຽງແຫ່ງດຽວທັງລະດູຝົນ ລະດູໜາວແລະລະດູຮ້ອນ ມະນຸດທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ

"ທິດທັງຫຼາຍຄັບແຄບ ມືດມົນສຳລັບພວກພຣະສະມະນະ ເຊື້ອສາຍພຣະສາກະຍະບຸດ ພຣະສະມະນະເຊື້ອສາຍພຣະສາກະຍະບຸດເຫຼົ່ານີ້ ຈຶ່ງແນມບໍ່ເຫັນທິດທາງ

ພິກຂຸທັງຫຼາຍ ໄດ້ຍິນຄົນເຫຼົ່ານັ້ນຕຳໜິ ປະນາມ ໂພນທະນາ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຮັບສັ່ງກັບພຣະອານົນວ່າ "ອານົນ ທ່ານຈົ່ງໄປຖອດຫຼົ້ມໄລແຈ້ງພິກຂຸທັງຫຼາຍໃນບໍລິເວນວິຫານວ່າ "ອາວຸໂສທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຊົງປະສົງຈະສະເດັດຈາຣິກໄປສູ່ທັກຂິນາຄີຣີຊົນນະບົດ ທ່ານຜູ້ໃດມີຄວາມປະສົງ ທ່ານຜູ້ນັ້ນຈົ່ງຕາມມາ

ທ່ານພຣະອານົນ ທູນຮັບສະໜອງພຣະພຸດທະບັນຊາແລ້ວ ຈຶ່ງຖອດຫຼົ້ມໄລແຈ້ງພິກຂຸທັງຫຼາຍໃນບໍລິເວນວິຫານວ່າ "ອາວຸໂສທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຊົງປະສົງຈະສະເດັດຈາຣິກໄປສູ່ທັກຂິນາຄີຣີຊົນນະບົດ ທ່ານຜູ້ໃດມີຄວາມປະສົງ ທ່ານຜູ້ນັ້ນຈົ່ງຕາມມາ

ພິກຂຸທັງຫຼາຍຮຽນຊີ້ແຈ່ງວ່າ "ທ່ານພຣະອານົນ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໃຫ້ພິກຂຸຖືນິດໄສຢູ່ ໑໐ ພັນສາ ແລະໃຫ້ພິກຂຸມີພັນສາຄົບ ໑໐ ໃຫ້ນິດໄສໄດ້ ພວກເຮົາຈະຕ້ອງໄປໃນທັກຂິນາຄີຣີຊົນນະບົດນັ້ນ ກໍຕ້ອງຖືນິດໄສ ພັກຢູ່ພຽງບໍ່ດົນ ກໍຕ້ອງກັບມາອີກ ແລະຕ້ອງຖືນິດໄສອີກດ້ວຍ ຖ້າພຣະອຸປັດຊາ ແລະພຣະອາຈານຂອງພວກເຮົາໄປ ພວກເຮົາກໍຈະໄປດ້ວຍ ຖ້າພຣະອຸປັດຊາ ແລະພຣະອາຈານຂອງພວກເຮົາບໍ່ໄປ ພວກເຮົາກໍຈະບໍ່ໄປ ທ່ານພຣະອານົນຄວາມທີ່ພວກເຮົາມີຈິດໃຈໂລເລຈັກຜາກົດ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ໄດ້ສະເດັດຈາຣິກໄປສູ່ທັກຂິນາຄີຣີຊົນນະບົດພ້ອມດ້ວຍພິກຂຸສົງຈຳນວນໜ້ອຍ

# ໔໐. ນິດສະຍະມຸດຈະນະກະກະຖາ

## ວ່າດ້ວຍການຖືນິດໄສແລະການພົ້ນນິດໄສ

[໑໐໓] ເມື່ອພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ທີ່ທັກຂິນາຄີຣີຊົນນະບົດຕາມພຣະອັດທະຍາໄສແລ້ວ ກໍສະເດັດກັບມາໃນເມືອງຣາຊະຄຶຄືເກົ່າອີກ ໄດ້ຕັດຮຽກທ່ານພຣະອານົນມາສອບຖາມວ່າ "ອານົນ ຕະຖາຄົດໄດ້ຈາຣິກໄປສູ່ທັກຂິນາຄີຣີຊົນນະບົດພ້ອມດ້ວຍພິກຂຸສົງຈຳນວນໜ້ອຍ ຍ້ອນເຫດໃດ?

ທ່ານພຣະອານົນ ຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

## ຊົງອະນຸຍາດໃຫ້ຖືນິດໄສ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື່ອງນີ້ເປັນຕົ້ນເຫດ ແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ສະຫຼາດ ຜູ້ສາມາດຖືນິດໄສຢູ່ ໕ ພັນສາ ໃຫ້ພິກຂຸຜູ້ບໍ່ສະຫຼາດຖືນິດໄສຢູ່ຈົນຕະຫຼອດຊີວິດ"

## ອົງ ໕ ແຫ່ງພິກຂຸຜູ້ຕ້ອງຖືນິດໄສ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ຈະເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສບໍ່ໄດ້ ຄື

໑. ບໍ່ປະກອບດ້ວຍ ສີນຂັນ ອັນເປັນອະເສຂະ
໒. ບໍ່ປະກອບດ້ວຍ ສະມາທິ ຂັນອັນເປັນອະເສຂະ
໓. ບໍ່ປະກອບດ້ວຍ ປັນຍາຂັນ ອັນເປັນອະເສຂະ
໔. ບໍ່ປະກອບດ້ວຍ ວິມຸດຕິຂັນ ອັນເປັນອະເສຂະ
໕. ບໍ່ປະກອບດ້ວຍ ວິມຸດຕິຍານທັດສະນະຂັນອັນເປັນອະເສຂະ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ຈະເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສບໍ່ໄດ້ (໑)

## ອົງ ໕ ແຫ່ງພິກຂຸຜູ້ບໍ່ຕ້ອງຖືນິດໄສ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສ ຄື

໑. ປະກອບດ້ວຍ ສີນຂັນ ອັນເປັນອະເສຂະ
໒. ປະກອບດ້ວຍ ສະມາທິຂັນ ອັນເປັນອະເສຂະ
໓. ປະກອບດ້ວຍ ປັນຍາຂັນ ອັນເປັນອະເສຂະ
໔. ປະກອບດ້ວຍ ວິມຸດຕິຂັນ ອັນເປັນອະເສຂະ
໕. ປະກອບດ້ວຍ ວິມຸດຕິຍານທັດສະນະຂັນ ອັນເປັນອະເສຂະ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ ເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສ (໒)

## ອົງ ໕ ແຫ່ງພິກຂຸຜູ້ຕ້ອງຖືນິດໄສ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອື່ນອີກ ຈະເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສບໍ່ໄດ້ ຄື

໑. ເປັນຜູ້ບໍ່ມີສັດທາ
໒. ເປັນຜູ້ບໍ່ມີຫິຣິ

໓. ເປັນຜູ້ບໍ່ມີໂອດຕັບປະ

໔. ເປັນຜູ້ຂີ້ຄ້ານ

໕. ເປັນຜູ້ມີສະຕິຟັ່ນເຟືອນ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ ຈະເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສບໍ່ໄດ້ (໓)

## ອົງ ໕ ແຫ່ງພິກຂຸຜູ້ບໍ່ຕ້ອງຖືນິດໄສ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສ ຄື

໑. ເປັນຜູ້ມີສັດທາ

໒. ເປັນຜູ້ມີຫິຣິ

໓. ເປັນຜູ້ມີໂອດຕັບປະ

໔. ເປັນຜູ້ຜາຣົບຄວາມພຽນ

໕. ເປັນຜູ້ມີສະຕິຕັ້ງໝັ້ນ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ ເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສ (໔)

## ອົງ ໕ ແຫ່ງພິກຂຸຜູ້ຕ້ອງຖືນິດໄສ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອື່ນອີກ ຈະເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສບໍ່ໄດ້ ຄື

໑. ເປັນຜູ້ມີ ສີນວິບັດໃນອະທິສີນ

໒. ເປັນຜູ້ມີ ອາຈາຣະວິບັດໃນອັດຊາຈານ

໓. ເປັນຜູ້ມີ ທິດຖິວິບັດໃນອະຕິທິດຖິ

໔. ເປັນຜູ້ໄດ້ ຍິນໄດ້ຟັງໜ້ອຍ

໕. ເປັນຜູ້ມີ ປັນຍາຊາມ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ ຈະເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສບໍ່ໄດ້ (໕)

## ອົງ ໕ ແຫ່ງພິກຂຸຜູ້ບໍ່ຕ້ອງຖືນິດໄສ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສ ຄື

໑. ເປັນຜູ້ບໍ່ມີສີນວິບັດໃນອະທິສີນ

໒. ເປັນຜູ້ບໍ່ມີອາຈາຣະວິບັດໃນອັດຊາຈານ

໓. ເປັນຜູ້ບໍ່ມີທິດຖິວິບັດໃນອະຕິທິດຖິ

໔. ເປັນຜູ້ໄດ້ຍິນໄດ້ຟັງຫຼາຍ

໕. ເປັນຜູ້ມີປັນຍາ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ ເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສ (໖)

## ອົງ ໕ ແຫ່ງພິກຂຸຜູ້ຕ້ອງຖືນິດໄສ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອື່ນອີກ ຈະເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສບໍ່ໄດ້ ຄື

໑. ບໍ່ຮູ້ຈັກອາບັດ
໒. ບໍ່ຮູ້ຈັກອະນາບັດ
໓. ບໍ່ຮູ້ຈັກອາບັດເບົາ
໔. ບໍ່ຮູ້ຈັກອາບັດໜັກ
໕. ຈຳປາຕິໂມກທັງສອງໂດຍພິສະດານບໍ່ໄດ້ດີ ຈຳແນກບໍ່ໄດ້ດີ ບໍ່ວ່ອງໄວດີ ວິນິດໄສໂດຍສູດຕະໂດຍອະນຸພະຍັນຊະນະບໍ່ໄດ້ດີ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ຈະເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສບໍ່ໄດ້ (໗)

## ອົງ ໕ ແຫ່ງພິກຂຸຜູ້ບໍ່ຕ້ອງຖືນິດໄສ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສ ຄື

໑. ຮູ້ຈັກອາບັດ
໒. ຮູ້ຈັກອະນາບັດ
໓. ຮູ້ຈັກອາບັດເບົາ
໔. ຮູ້ຈັກອາບັດໜັກ
໕. ຈຳປາຕິໂມກທັງສອງໂດຍພິສະດານໄດ້ດີ ຈຳແນກໄດ້ດີ ວ່ອງໄວດີ ວິນິດໄສໂດຍສູດຕະໂດຍອະນຸພະຍັນຊະນະໄດ້ດີ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ ເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສ (໘)

## ອົງ ໕ ແຫ່ງພິກຂຸຜູ້ຕ້ອງຖືນິດໄສ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອື່ນອີກ ຈະເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສບໍ່ໄດ້ ຄື

໑. ບໍ່ຮູ້ຈັກອາບັດ
໒. ບໍ່ຮູ້ຈັກອະນາບັດ
໓. ບໍ່ຮູ້ຈັກອາບັດເບົາ
໔. ບໍ່ຮູ້ຈັກອາບັດໜັກ
໕. ມີພັນສາຢ່ອນ ໕

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ຈະເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສບໍ່ໄດ້ (໙)

## ອົງ ໕ ແຫ່ງພິກຂຸຜູ້ບໍ່ຕ້ອງຖືນິດໄສ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສ ຄື

໑. ຮູ້ຈັກອາບັດ
໒. ຮູ້ຈັກອະນາບັດ
໓. ຮູ້ຈັກອາບັດເບົາ
໔. ຮູ້ຈັກອາບັດໜັກ
໕. ມີພັນສາຄົບ ໕ ຫຼື ມີພັນສາເກີນ ໕

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ ເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສ (໑໐)

**ປັນຈະກະທະສະວານ ຈົບ**

## ອົງ ໖ ແຫ່ງພິກຂຸຜູ້ຕ້ອງຖືນິດໄສ

[໑໐໔] ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ຈະເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສບໍ່ໄດ້ ຄື

໑. ບໍ່ປະກອບດ້ວຍ ສີນຂັນ ອັນເປັນອະເສຂະ
໒. ບໍ່ປະກອບດ້ວຍ ສະມາທິຂັນ ອັນເປັນອະເສຂະ
໓. ບໍ່ປະກອບດ້ວຍ ປັນຍາຂັນ ອັນເປັນອະເສຂະ
໔. ບໍ່ປະກອບດ້ວຍ ວິມຸດຕິຂັນ ອັນເປັນອະເສຂະ
໕. ບໍ່ປະກອບດ້ວຍ ວິມຸດຕິຍານທັດສະນະຂັນ ອັນເປັນອະເສຂະ
໖. ມີພັນສາຍ່ອນ ໕

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ເຫຼົ່ານີ້ຈະເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສບໍ່ໄດ້ (໑)

## ອົງ ໖ ແຫ່ງພິກຂຸຜູ້ບໍ່ຕ້ອງຖືນິດໄສ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສ ຄື

໑. ປະກອບດ້ວຍ ສີນຂັນ ອັນເປັນອະເສຂະ
໒. ປະກອບດ້ວຍ ສະມາທິຂັນ ອັນເປັນອະເສຂະ
໓. ປະກອບດ້ວຍ ປັນຍາຂັນ ອັນເປັນອະເສຂະ
໔. ປະກອບດ້ວຍ ວິມຸດຕິຂັນ ອັນເປັນອະເສຂະ
໕. ປະກອບດ້ວຍ ວິມຸດຕິຍານທັດສະນະຂັນ ອັນເປັນອະເສຂະ
໖. ມີພັນສາຄົບ ໕ ຫຼື ມີພັນສາເກີນ ໕

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ເຫຼົ່ານີ້ແລ ເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສ (໒)

## ອົງ ໖ ແຫ່ງພິກຂຸຜູ້ຕ້ອງຖືນິດໄສ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ແມ່ນອື່ນອີກ ຈະເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສບໍ່ໄດ້ ຄື

໑. ເປັນຜູ້ບໍ່ມີສັດທາ
໓. ເປັນຜູ້ບໍ່ມີໂອດຕັບປະ
໕. ເປັນຜູ້ມີສະຕິຟັ່ນເຟືອນ
໒. ເປັນຜູ້ບໍ່ມີຫິຣິ
໔. ເປັນຜູ້ຂີ້ຄ້ານ
໖. ມີພັນສາຢ່ອນ ໕

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ເຫຼົ່ານີ້ຈະເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສບໍ່ໄດ້ (໓)

## ອົງ ໖ ແຫ່ງພິກຂຸຜູ້ບໍ່ຕ້ອງຖືນິດໄສ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສ ຄື

໑. ເປັນຜູ້ມີສັດທາ
໓. ເປັນຜູ້ມີໂອດຕັບປະ
໕. ເປັນຜູ້ມີສະຕິຕັ້ງໝັ້ນ
໒. ເປັນຜູ້ມີຫິຣິ
໔. ເປັນຜູ້ຜາຣົບຄວາມພຽນ
໖. ມີພັນສາຄົບ ໕ ຫຼື ມີພັນສາເກີນ ໕

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ເຫຼົ່ານີ້ແລ ເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສ (໔)

## ອົງ ໖ ແຫ່ງພິກຂຸຜູ້ຕ້ອງຖືນິດໄສ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ແມ່ນອື່ນອີກ ຈະເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສບໍ່ໄດ້ ຄື

໑. ເປັນຜູ້ມີ ສິນວິບັດໃນອະທິສິນ
໒. ເປັນຜູ້ມີ ອາຈາຣະວິບັດໃນອັດຊາຈານ
໓. ເປັນຜູ້ມີ ທິດຖິວິບັດໃນອະຕິທິດຖິ
໔. ເປັນຜູ້ໄດ້ຍິນໄດ້ຟັງໜ້ອຍ
໕. ເປັນຜູ້ມີ ປັນຍາຊາມ
໖. ມີພັນສາຢ່ອນ ໕

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ເຫຼົ່ານີ້ ຈະເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສບໍ່ໄດ້ (໕)

## ອົງ ໖ ແຫ່ງພິກຂຸຜູ້ບໍ່ຕ້ອງຖືນິດໄສ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສ ຄື

໑. ເປັນຜູ້ບໍ່ມີສິນວິບັດໃນອະທິສິນ
໒. ເປັນຜູ້ບໍ່ມີອາຈາຣະວິບັດໃນອັດຊາຈານ
໓. ເປັນຜູ້ບໍ່ມີທິດຖິວິບັດໃນອະຕິທິດຖິ
໔. ເປັນຜູ້ໄດ້ຍິນໄດ້ຟັງຫຼາຍ

໕. ເປັນຜູ້ມີປັນຍາ

໖. ມີພັນສາຄົບ ໕ ຫຼື ມີພັນສາເກີນ ໕

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ເຫຼົ່ານີ້ແລ ເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສ (໖)

## ອົງ ໖ ແຫ່ງພິກຂຸຜູ້ຕ້ອງຖືນິດໄສ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ແມ່ນອື່ນອີກ ຈະເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສບໍ່ໄດ້ ຄື

໑. ບໍ່ຮູ້ຈັກອາບັດ

໒. ບໍ່ຮູ້ຈັກອະນາບັດ

໓. ບໍ່ຮູ້ຈັກອາບັດເບົາ

໔. ບໍ່ຮູ້ຈັກອາບັດໜັກ

໕. ຈຳປາຕິໂມກທັງສອງໂດຍພິສະດານບໍ່ໄດ້ດີ ຈຳແນກບໍ່ໄດ້ດີ ບໍ່ວ່ອງໄວດີ ວິນິດໄສໂດຍສູດຕະໂດຍອະນຸພະຍັນຊະນະບໍ່ໄດ້ດີ

໖. ມີພັນສາຍ່ອນ ໕

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ເຫຼົ່ານີ້ ຈະເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສບໍ່ໄດ້ (໗)

## ອົງ ໖ ແຫ່ງພິກຂຸຜູ້ບໍ່ຕ້ອງຖືນິດໄສ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສ ຄື

໑. ຮູ້ຈັກອາບັດ

໒. ຮູ້ຈັກອະນາບັດ

໓. ຮູ້ຈັກອາບັດເບົາ

໔. ຮູ້ຈັກອາບັດໜັກ

໕. ຈຳປາຕິໂມກທັງສອງໂດຍພິສະດານໄດ້ດີ ຈຳແນກໄດ້ດີ ວ່ອງໄວດີ ວິນິດໄສໂດຍສູດຕະໂດຍອະນຸພະຍັນຊະນະໄດ້ດີ

໖. ມີພັນສາຄົບ ໕ ຫຼື ມີພັນສາເກີນ ໕

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໖ ເຫຼົ່ານີ້ແລ ເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສ (໘)

**ນິດໄສມຸດຈະນະກະກະຖາ ຈົບ**

**ອະພະຍູວະຣະພານະວານທີ ໗ ຈົບ**

# ໔໑. ຣາຫຸລະວັດຖຸ

## ວ່າດ້ວຍພຣະຣາຫຸນກຸມານບັນພະຊາ

## ພຣະຣາຫຸນກຸມານຊົງບວດເປັນສາມະເນນ

[໑໐໔] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ໃນນະຄອນຣາຊະຄຶຕາມພຣະອັດທະຍາໄສແລ້ວໄດ້ສະເດັດຈາຣິກໄປທາງເມືອງກະບິນລະພັດ ສະເດັດຈາຣິກໄປໂດຍລຳດັບຈົນເຖິງເມືອງກະບິນລະພັດ ໄດ້ຂ່າວວ່າພຣະອົງປະທັບຢູ່ນິໂຄທາຣາມ ເມືອງກະບິນລະພັດ ແຄວ້ນສັກກະ ເມື່ອເວລາເຊົ້າ ຊົງອັນຕະຣະວາສົກແລ້ວຖືບາດ ແລະຈີວອນສະເດັດໄປສູ່ພຣະນິເວດພຣະເຈົ້າສຸດໂທທະນະສາກະຍະ ປະທັບນັ່ງເທິງພຸດທະອາດທີ່ໄດ້ປູລາດໄວ້

ຂະນະນັ້ນ ພຣະເທວີມານດາພຣະຣາຫຸນກຸມານໄດ້ຊົງມີພຣະດຳຣັດວ່າ "ຣາຫຸນ ສະມະນະນັ້ນ ເປັນບິດາຂອງເຈົ້າ ເຈົ້າຈົ່ງໄປທູນຂໍຊັບສົມບັດຈາກພຣະອົງເທີ້ນ

ພຣະຣາຫຸນກຸມານ ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ປະທັບຢືນຕໍ່ເບື້ອງພຣະພັກພ້ອມຂາບທູນວ່າ "ຂ້າແດ່ພຣະສະມະນະ ພຣະສາຍາຂອງພຣະອົງຢູ່ເປັນສຸກ"

ພຣະຜູ້ມີພຣະພາກເຈົ້າ ໄດ້ສະເດັດລຸກຈາກອາສະນະແລ້ວສະເດັດກັບໄປ ພຣະກຸມານກໍສະເດັດຕິດຕາມໄປເບື້ອງພຣະປະຣິດສະດາງ ພ້ອມຂາບທູນຂໍວ່າ "ພຣະສະມະນະໄດ້ໂຜດປະທານຊັບສົມບັດແກ່ຂ້ານ້ອຍ ພຣະສະມະນະໄດ້ໂຜດປະທານຊັບສົມບັດແກ່ຂ້ານ້ອຍດ້ວຍເທີ້ນ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດຮຽກທ່ານພຣະສາຣີບຸດມາຮັບສັ່ງວ່າ "ສາຣີບຸດຖ້າແນວນັ້ນ ທ່ານຈົ່ງໃຫ້ຣາຫຸນກຸມານບັນພະຊາເທີ້ນ

ທ່ານພຣະສາຣີບຸດທູນຖາມວ່າ "ຂ້າພະອົງຈະໃຫ້ຣາຫຸນກຸມານບັນພະຊາແນວໃດຂ້ານ້ອຍ"

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດການບັນພະຊາເປັນສາມະເນນດ້ວຍໄຕຣສະຣະນະຄົມ"

## ວິທີໃຫ້ບັນພະຊາ

ພິກຂຸທັງຫຼາຍ ກໍແລ ພິກຂຸເພິ່ງໃຫ້ກຸນລະບຸດບັນພະຊາ ແນວນີ້ ໃນເບື້ອງຕົ້ນ ເພິ່ງໃຫ້ກຸນລະບຸດຜູ້ມຸ້ງບັນພະຊາແຖຜົມ ແລະໜວດ ໃຫ້ຄອງຜ້າກາສາຍະ ໃຫ້ຫົ່ມຜ້າບ່ຽງບ່າຂ້າງໜຶ່ງໃຫ້ຂາບຕີນພິກຂຸທັງຫຼາຍ ໃຫ້ນັ່ງຢ່ອງຍໍ້ ໃຫ້ປະນົມມືແລ້ວສັ່ງວ່າ "ທ່ານຈົ່ງກ່າວແນວນີ້" ແລ້ວໃຫ້ວ່າ ສະຣະນະຄົມ ດັ່ງນີ້

## ໄຕຣສະຣະນະຄົມ

ວ່າດ້ວຍການເຖິງພຣະຣັດຕະນະໄຕຣເປັນສະຣະນະ

ຂ້າພະເຈົ້າ ຂໍເຖິງພຣະ ພຸດທະເຈົ້າ ເປັນສະຣະນະ
ຂ້າພະເຈົ້າ ຂໍເຖິງພຣະ ທຳ ເປັນສະຣະນະ
ຂ້າພະເຈົ້າ ຂໍເຖິງພຣະ ສົງ ເປັນສະຣະນະ
ຂ້າພະເຈົ້າ ຂໍເຖິງພຣະ ພຸດທະເຈົ້າ ເປັນສະຣະນະ ແມ່ນຄັ້ງທີ ໒
ຂ້າພະເຈົ້າ ຂໍເຖິງພຣະ ທຳ ເປັນສະຣະນະ ແມ່ນຄັ້ງທີ ໒
ຂ້າພະເຈົ້າ ຂໍເຖິງພຣະ ສົງ ເປັນສະຣະນະ ແມ່ນຄັ້ງທີ ໒
ຂ້າພະເຈົ້າ ຂໍເຖິງພຣະ ພຸດທະເຈົ້າ ເປັນສະຣະນະ ແມ່ນຄັ້ງທີ ໓
ຂ້າພະເຈົ້າ ຂໍເຖິງພຣະ ທຳ ເປັນສະຣະນະ ແມ່ນຄັ້ງທີ ໓
ຂ້າພະເຈົ້າ ຂໍເຖິງພຣະ ສົງ ເປັນສະຣະນະ ແມ່ນຄັ້ງທີ ໓

ພິກຂຸທັງຫຼາຍ ເຮົາອະນຸຍາດການບັນພະຊາ ເປັນສາມະເນນດ້ວຍໄຕຣສະຣະນະຄົມແນວນີ້" ເປັນອັນວ່າ ທ່ານພຣະສາຣີບຸດໄດ້ໃຫ້ພຣະຣາຫຸນບັນພະຊາແລ້ວ

## ເລື້ອງພຣະເຈົ້າສຸດໂທທະນະທູນຂໍພອນ

ຄັ້ງນັ້ນ ພຣະເຈົ້າສຸດໂທທະນະສາກະຍະໄດ້ສະເດັດໄປເຝົ້າພຣະຜູ້ພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວໄດ້ຖວາຍບັງຄົມພຣະຜູ້ມີພຣະພາກເຈົ້າແລ້ວປະທັບນັ່ງໃນບ່ອນສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ຂ້ານ້ອຍທູນຂໍພອນພຣະຜູ້ມີພຣະພາກເຈົ້າຢ່າງໜຶ່ງ"

ພຣະຜູ້ມີພຣະພາກເຈົ້າຖວາຍພຣະພອນວ່າ "ມະຫາບໍພິດຜູ້ໂຄດົມ ຕະຖາຄົດທັງຫຼາຍເຊົາໃຫ້ພອນແລ້ວ

ພຣະເຈົ້າສຸດໂທທະນະສາກະຍະທູນວ່າ "ຂ້ານ້ອຍ ທູນຂໍພອນທີ່ສົມຄວນ ແລະບໍ່ມີໂທດຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໂຜດຕັດບອກພອນນັ້ນເທີ້ນ ມະຫາບໍພິດຜູ້ໂຄດົມ

ພຣະເຈົ້າສຸດໂທທະນະສາກະຍະທູນວ່າ "ເມື່ອພຣະອົງຊົງບວດ ຂ້ານ້ອຍມີທຸກບໍ່ໜ້ອຍ ເມື່ອນັນທະບວດກໍເຊັ່ນດຽວກັນ ເມື່ອຣາຫຸນບັນພະຊາ ຍິ່ງເກີດທຸກເຫຼືອປະມານ ຍ້ອນຄວາມຮັກໃນພຣະໂອຣົດຍ່ອມຕັດຜິວ ຕັດຜິວແລ້ວກໍຕັດໜັງ ຕັດໜັງແລ້ວກໍຕັດຊີ້ນ ຕັດຊີ້ນແລ້ວກໍຕັດເອັນ ຕັດເອັນແລ້ວກໍຕັດກະດູກ ຕັດກະດູກແລ້ວກໍຕັດຮອດເຍື່ອໃນກະດູກ ຂໍປະທານພຣະອະໂຣກາດ

ຂໍພຣະຜູ້ເປັນເຈົ້າທັງຫຼາຍ ບໍ່ເພິ່ງໃຫ້ບຸດທີ່ມານດາບິດາຍັງບໍ່ອະນຸຍາດບັນພະຊາ ດ້ວຍເທີ້ນ ຂ້ານ້ອຍ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຊີ້ແຈ່ງໃຫ້ພຣະເຈົ້າສຸດໂທທະນະສາກະຍະຊົງ ເຫັນແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ ສົດຊື່ນລ່າເລີງດ້ວຍທຳມີກະຖາ

ເມື່ອພຣະເຈົ້າສຸດໂທທະນະສາກະຍະ ຜູ້ເຊິ່ງພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫັນ ແຈ້ງ ຊວນໃຫ້ຍາກຮັບໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າ ເລີງດ້ວຍທຳມີກະຖາແລ້ວ ກໍສະເດັດລຸກຂຶ້ນຈາກທີ່ປະທັບ ຖວາຍອະພິວາດພຣະຜູ້ມີພຣະພາ ກເຈົ້າ ຊົງກະທຳປະທັກຂິນສະເດັດກັບໄປແລ້ວ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນເຫດ ແລ້ວຮັບ ສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ບຸດທີ່ມານດາບິດາບໍ່ອະນຸຍາດບໍ່ເພິ່ງໃຫ້ບັນພະຊາ ອົງ ໃດໃຫ້ບັນພະຊາ ຕ້ອງອາບັດທຸກກົດ

ເມື່ອພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ເມືອງກະບິນລະພັດຕາມພຣະອັດທະຍາໄສແລ້ວ ໄດ້ສະເດັດຈາຣິກໄປທາງນະຄອນສາວັດຖີ ສະເດັດຈາຣິກໄປໂດຍລຳດັບ ຈົນເຖິງນະຄອນສາ ວັດຖີ ໄດ້ຂ່າວວ່າ ພຣະອົງປະທັບຢູ່ພຣະເຊຕະວັນອາຮາມຂອງອະນາຖະບິນທິກະຄະຫະບໍດີ ເຂດນະຄອນສາວັດຖີນັ້ນ

## ຊົງອະນຸຍາດໃຫ້ພິກຂຸຜູ້ສະຫຼາດມີສາມະເນນຫຼາຍອົງໄວ້ອຸປັດຖາກ

ສະໄໝນັ້ນ ຕະກູນອຸປັດຖາກຂອງທ່ານພຣະສາຣີບຸດສົ່ງເດັກຊາຍໄປສູ່ສຳນັກຂອງທ່ານ ດ້ວຍມອບໝາຍວ່າ "ຂໍພຣະເຖຣະໂຜດໃຫ້ເດັກຄົນນີ້ບັນພະຊາ"

ຂະນະນັ້ນ ທ່ານພິຈາລະນາເຫັນວ່າ "ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ວ່າ ພິກຂຸອົງ ດຽວບໍ່ເພິ່ງໃຊ້ສາມະເນນ ໒ ອົງໃຫ້ອຸປັດຖາກ ກໍເຮົາມີສາມະເນນຣາຫຸນນີ້ຢູ່ແລ້ວ ຈະເພິ່ງ ປະຕິບັດແນວໃດນໍ" ຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກ ຂຸອົງດຽວເຊິ່ງເປັນຜູ້ສະຫຼາດສາມາດ ໃຊ້ສາມະເນນ ໒ ອົງໃຫ້ອຸປັດຖາກໄດ້ ຫຼື ອະນຸຍາດໃຫ້ໃຊ້ ສາມະເນນເທົ່າທີ່ສາມາດຈະຕັກເຕືອນສັ່ງສອນໃຫ້ອຸປັດຖາກໄດ້

# ໔໘. ສິກຂາປະທະກະຖາ

## ວ່າດ້ວຍສິກຂາບົດຂອງສາມະເນນ

[໑໐໖] ຄັ້ງນັ້ນ ສາມະເນນທັງຫຼາຍໄດ້ມີຄວາມຄິດຄຳນຶງວ່າ "ສິກຂາບົດຂອງພວກເຮົາມີທີ່ໃດນໍ ແລະເຮົາຈະຕ້ອງສຶກສາໃນສິກຂາບົດໃດນໍ?

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດສິກຂາບົດ ໑໐ ແກ່ສາມະເນນ ແລະໃຫ້ສາມະເນນສຶກສາໃນສິກຂາບົດ ໑໐ ນັ້ນ ຄື

໑. ເຈຕະນາງົດເວັ້ນຈາກການ ຂ້າສັດ
໒. ເຈຕະນາງົດເວັ້ນຈາກການ ຖືເອົາຂອງທີ່ເຈົ້າຂອງບໍ່ໄດ້ໃຫ້
໓. ເຈຕະນາງົດເວັ້ນຈາກ ພຶດຕິກຳອັນບໍ່ແມ່ນພົມມະຈັນ
໔. ເຈຕະນາງົດເວັ້ນຈາກການ ເວົ້າຕົວະ
໕. ເຈຕະນາງົດເວັ້ນຈາກນ້ຳເມົາຄືສຸຣາແລະເມໄຣອັນເປັນທີ່ຕັ້ງແຫ່ງຄວາມຜະໝາດ
໖. ເຈຕະນາງົດເວັ້ນຈາກການ ບໍຣິໂພກອາຫານໃນເວລາວິການ
໗. ເຈຕະນາງົດເວັ້ນຈາກການ ຟ້ອນລຳ ຂັບຮ້ອງ ບັນເລງດົນຕີແລະເບິ່ງການລະຫຼິ້ນອັນເປັນຂ້າເສິກຕໍ່ພົມມະຈັນ
໘. ເຈຕະນາງົດເວັ້ນຈາກການທັດຊົງດອກໄມ້ຂອງຫອມ ແລະ ເຄື່ອງລູບໄລ້ເຊິ່ງໃຊ້ເປັນເຄື່ອງປະດັບຕົກແຕ່ງ
໙. ເຈຕະນາງົດເວັ້ນຈາກທີ່ນອນສູງ ແລະ ທີ່ນອນໃຫຍ່
໑໐. ເຈຕະນາງົດເວັ້ນຈາກການຮັບຄຳ ແລະ ເງິນ

ພິກຂຸທັງຫຼາຍ ເຮົາອະນຸຍາດສິກຂາບົດ ໑໐ ເຫຼົ່ານີ້ແກ່ສາມະເນນ ແລະໃຫ້ສາມະເນນສຶກສາໃນສິກຂາບົດ ໑໐ ເຫຼົ່ານີ້

# ໔໓. ທັນດະກຳມະວັດຖຸ

## ວ່າດ້ວຍການລົງທັນດະກຳສາມະເນນ

[໑໐໗] ສະໄໝນັ້ນ ສາມະເນນທັງຫຼາຍບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງ ມີຄວາມປະພຶດບໍ່ເຂົ້າກັນກັບພິກຂຸທັງຫຼາຍ

ພິກຂຸທັງຫຼາຍ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກສາມະເນນຈຶ່ງ

ໄດ້ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢໍາເກງ ມີຄວາມປະພຶດບໍ່ເຂົ້າກັນກັບພິກຂຸທັງຫຼາຍບໍ" ຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ລົງທັນດະກໍາແກ່ສາມະເນນຜູ້ປະກອບດ້ວຍອົງ ໕ ຄື

໑. ພະຍາຍາມເພື່ອຄວາມເສື່ອມລາບແກ່ພິກຂຸທັງຫຼາຍ
໒. ພະຍາຍາມເພື່ອຄວາມພິນາດແກ່ພິກຂຸທັງຫຼາຍ
໓. ພະຍາຍາມເພື່ອຄວາມຢູ່ບໍ່ໄດ້ແກ່ພິກຂຸທັງຫຼາຍ
໔. ດ່າ ບໍຣິພາດພິກຂຸທັງຫຼາຍ
໕. ຍຸຍົງພິກຂຸກັບພິກຂຸໃຫ້ແຕກກັນ

ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ລົງທັນດະກໍາ ແກ່ສາມະເນນຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້

ຄັ້ງນັ້ນ ພິກຂຸທັງຫຼາຍໄດ້ມີຄວາມສົງໄສວ່າ "ຈະເພິ່ງລົງທັນດະກໍາແນວໃດບໍ" ຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ລົງທັນດະກໍາຄືການຫ້າມ"

## ເລື້ອງວິທີລົງທັນດະກໍາ

ສະໄໝນັ້ນ ພິກຂຸທັງຫຼາຍ ໄດ້ລົງທັນດະກໍາຄືຫ້າມສາມະເນນເຂົ້າສັງຄາຣາມທຸກແຫ່ງ ພວກສາມະເນນເຂົ້າອາຣາມບໍ່ໄດ້ ຈຶ່ງຫຼີກໄປແດ່ ສຶກແດ່ ໄປເຂົ້າຮີດເດຍຣະຖີແດ່

ພິກຂຸທັງຫຼາຍ ຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ບໍ່ເພິ່ງລົງທັນດະກໍາຄືຫ້າມສັງຄາຣາມທຸກແຫ່ງ ອົງໃດລົງ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ລົງທັນດະກໍາ ຄືຫ້າມສະເພາະທີ່ຢູ່ຂອງຕົນ ຫຼື ທີ່ທີ່ຕົນຈະເຂົ້າໄປ

## ເລື້ອງຫ້າມສັນທາງປາກ

ສະໄໝນັ້ນ ພິກຂຸທັງຫຼາຍໄດ້ລົງທັນດະກໍາ ຄືຫ້າມສັນອາຫານທາງປາກ ມະນຸດທັງຫຼາຍຕົ້ມນ້ຳຍາຄູແດ່ ເຮັດສັງຄະພັດແດ່ ນິມົນພວກສາມະເນນວ່າ "ຈົ່ງມາດື່ມຍາຄູເທີ້ນ ຈົ່ງມາສັນພັດຕາຫານເທີ້ນ"

ພວກສາມະເນນກ່າວວ່າ "ພວກອາດຕະມາເຮັດແນວນັ້ນບໍ່ໄດ້ດອກທ່ານ ຍ້ອນພິກຂຸທັງຫຼາຍໄດ້ລົງທັນດະກໍາຫ້າມໄວ້"

ມະນຸດທັງຫຼາຍ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸທັງຫຼາຍຈຶ່ງໄດ້ລົງທັນດະກຳ ຫ້າມສັນອາຫານທາງປາກນໍ"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ບໍ່ເພິ່ງລົງທັນດະກຳຫ້າມສັນອາຫານທາງປາກ ອົງໃດລົງ ຕ້ອງອາບັດທຸກກົດ"

**ທັນດະກຳມະວັດຖຸ ຈົບ**

## ໔໔. ອະນາປຸດສາວະຣະນະວັດຖຸ

### ວ່າດ້ວຍການກັກໂຕສາມະເນນໂດຍບໍ່ບອກອຸປັດຊາ

[໑໐໗] ສະໄໝນັ້ນ ພວກພິກຂຸສັບພັກຄີບໍ່ຖາມພຣະອຸປັດຊາກ່ອນ ໄດ້ກັກໂຕພວກສາມະເນນໄວ້ ພຣະອຸປັດຊາຕາມຫາດ້ວຍນຶກສົງໄສວ່າ "ເປັນຫຍັງນໍ ພວກສາມະເນນຂອງເຮົາຈຶ່ງຫາຍໂຕໄປ

ພິກຂຸທັງຫຼາຍໄດ້ຮຽນວ່າ "ພວກພິກຂຸສັບພັກຄີໄດ້ກັກໂຕໄວ້ ຂ້ານ້ອຍ"

ພຣະອຸປັດຊາທັງຫຼາຍພາກັນ ຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸສັບພັກຄີ ຈຶ່ງບໍ່ຖາມພວກເຮົາກ່ອນກັກໂຕສາມະເນນທັງຫຼາຍຂອງພວກເຮົາໄວ້ນໍ" ຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸຍັງບໍ່ຂໍອະນຸຍາດອຸປັດຊາກ່ອນບໍ່ເພິ່ງກະທຳການກັກໂຕສາມະເນນໄວ້ ອົງໃດເຮັດ ຕ້ອງອາບັດທຸກກົດ"

## ໔໕. ອະປະລາລະນະວັດຖຸ

### ວ່າດ້ວຍການເກ້ຍກ່ອມສາມະເນນ

### ຊົງຫ້າມເກ້ຍກ່ອມສາມະເນນ

ສະໄໝນັ້ນ ພວກພິກຂຸສັບພັກຄີພາກັນເກ້ຍກ່ອມພວກສາມະເນນຂອງພິກຂຸຜູ້ເປັນເຖຣະທັງຫຼາຍ ພຣະເຖຣະທັງຫຼາຍຕ້ອງເຮັດໄມ້ຖູແຂ້ວແດ່ ຕັກນ້ຳລ້າງໜ້າແດ່ ດ້ວຍຕົນເອງ ຍ່ອມລຳບາກ ຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ບໍ່ເພິ່ງເກ້ຍກ່ອມບໍລິສັດຂອງພິກຂຸອື່ນ ອົງໃດເກ້ຍກ່ອມ ຕ້ອງອາບັດທຸກກົດ

# ໔໖. ກັນຕະກະສາມະເນຣະວັດຖຸ

## ວ່າດ້ວຍການນາສະນະສາມະເນນກັນຕະກະ

### ອົງ ໑໐ ສໍາລັບນາສະນະສາມະເນນ

ສະໄໝນັ້ນ ສາມະເນນຂອງທ່ານພຣະອຸປະນັນທະສາກະຍະບຸດຊື່ກັນຕະກະ ໄດ້ປະທຸດສະຮ້າຍພິກຂຸນີຊື່ ກັນຕະກີ

ພິກຂຸທັງຫຼາຍ ພາກັນຕໍາໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ສາມະເນນ ຈຶ່ງໄດ້ປະພຶດຊົ່ວແນວນີ້ນໍ" ຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ນາສະນະສາມະເນນຜູ້ປະກອບດ້ວຍອົງ ໑໐ ຄື

໑. ຂ້າສັດ
໒. ຖືເອົາຂອງທີ່ເຈົ້າຂອງບໍ່ໄດ້ໃຫ້
໓. ປະພຶດກໍາອັນບໍ່ແມ່ນພົມມະຈັນ
໔. ເວົ້າຕົວະ
໕. ດື່ມນໍ້າເມົາ
໖. ກ່າວຕິຕຽນພຣະພຸດທະເຈົ້າ
໗. ກ່າວຕິຕຽນພຣະທໍາ
໘. ກ່າວຕິຕຽນພຣະສົງ
໙. ມີຄວາມເຫັນຜິດ
໑໐. ປະທຸດສະຮ້າຍພິກຂຸນີ

ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ນາສະນະສາມະເນນຜູ້ປະກອບດ້ວຍອົງ ໑໐ ເຫຼົ່ານີ້

# ໔໗. ບັນຖະກະວັດຖຸ

## ວ່າດ້ວຍບັນເດາະບັນພະຊາ

### ຫ້າມບັນເດາະອຸປະສົມບົດ

[໑໐໙] ສະໄໝນັ້ນ ບັນເດາະຄົນໜຶ່ງໄດ້ບັນພະຊາໃນໝູ່ພິກຂຸ ເຂົາເຂົ້າໄປຫາພິກຂຸໜຸ່ມ ໆ ເວົ້າຊວນວ່າ "ນີ້ ໆ ພວກທ່ານຈົ່ງມາປະທຸດສະຮ້າຍເຮົາເທີ້ນ ຂ້ານ້ອຍ"

ພວກພຣະໜຸ່ມເວົ້າໄລ່ວ່າ "ເຈົ້າບັນເດາະຈົ່ງຈິບຫາຍ ເຈົ້າບັນເດາະຈົ່ງພິນາດ ເຈົ້າຈະມີປະໂຫຍດອັນໃດ"

ເຂົາເມື່ອຖືກພວກພິກຂຸໄລ່ ຈຶ່ງເຂົ້າໄປຫາພວກສາມະເນນໂຕໃຫຍ່ ເວົ້າຊວນວ່າ ພວກທ່ານຈົ່ງມາປະທຸດສະຮ້າຍເຮົາເທີ້ນ ຂ້ານ້ອຍ

ພວກສາມະເນນກໍເວົ້າຮຸກຮານວ່າ "ເຈົ້າບັນເດາະຈົ່ງຈິບຫາຍ ເຈົ້າບັນເດາະຈົ່ງພິນາດ ເຈົ້າຈະມີປະໂຫຍດອັນໃດ"

ເຂົາຖືກພວກສາມະເນນເວົ້າຮຸກຮານ ຈຶ່ງເຂົ້າໄປຫາພວກຄົນລ້ຽງຊ້າງ ພວກຄົນລ້ຽງມ້າເວົ້າຊວນວ່າ "ພວກທ່ານຈົ່ງມາປະທຸດສະຮ້າຍເຮົາເທີ້ນ"

ພວກຄົນລ້ຽງຊ້າງ ພວກຄົນລ້ຽງມ້າກະທຳຊຳເຮົາແລ້ວ ກໍພາກັນຕຳໜິ ປະນາມ ໂພນທະນາວ່າ "ພຣະສະມະນະເຊື້ອສາຍພຣະສາກະຍະບຸດເຫຼົ່ານີ້ເປັນບັນເດາະ ບັນດາສະມະນະເຫຼົ່ານີ້ ແມ່ນທີ່ບໍ່ແມ່ນບັນເດາະ ກໍສົມສູ່ກັບບັນເດາະເຫຼົ່ານີ້ ເມື່ອເປັນແນວນີ້ ສະມະນະເຫຼົ່ານີ້ຈຶ່ງລ້ວນແຕ່ບໍ່ແມ່ນຜູ້ປະພຶດພົມມະຈັນ

ພິກຂຸທັງຫຼາຍ ໄດ້ຍິນຄົນລ້ຽງຊ້າງ ຄົນລ້ຽງມ້າເຫຼົ່ານັ້ນຕຳໜິ ປະນາມ ໂພນທະນາ ຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ອະນຸປະສຳບັນຜູ້ເປັນບັນເດາະ ບໍ່ເພິ່ງໃຫ້ອຸປະສົມບົດ ທີ່ອຸປະສົມບົດແລ້ວ ເພິ່ງໃຫ້ສິກເສຍ" (໑)

## ໔໗. ເຖີຍຍະວາສະວັດຖຸ

### ວ່າດ້ວຍຄົນລັກເພດແລະຄົນເຂົ້າຮີດເດຍຣະຖີບັນພະຊາ

### ຫ້າມຄົນລັກເພດແລະຄົນເຂົ້າຮີດອຸປະສົມບົດ

[໑໑໐] ສະໄໝນັ້ນ ບຸດຂອງຕະກູນເກົ່າແກ່ຄົນໜຶ່ງ ເປັນຄົນບອບບາງ ມີໝູ່ຍາດໃນຕະກູນເສຍໄປ ເຂົາມີຄວາມຄິດວ່າ "ເຮົາເປັນຄົນບອບບາງ ບໍ່ສາມາດຈະຫາໂພຄະຊັບທີ່ຍັງບໍ່ມີ ຫຼື ຈະເຮັດໂພຄະຊັບທີ່ມີຢູ່ໃຫ້ເພີ່ມພູນຂຶ້ນໄດ້ ດ້ວຍວິທີໃດນໍ ເຮົາຈະຢູ່ສຸກສະບາຍ ແລະບໍ່ລຳບາກ" ຄິດໄດ້ວ່າ "ພຣະສະມະນະເຊື້ອສາຍພຣະສາກະຍະບຸດເຫຼົ່ານີ້ ມີລັກສະນະນິໄສດີປະພຶດຮຽບຮ້ອຍ ບໍຣິໂພກອາຫານດີ ໆ ນອນໃນຫ້ອງດີ ຖ້າຈັ່ງໃດເຮົາເພິ່ງກຽມບາດ ແລະຈີວອນ ແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາຍະເອງ ແລ້ວໄປສູ່ອາຮາມຢູ່ຮ່ວມກັບພິກຂຸທັງຫຼາຍ

ດີກວ່າ ຕໍ່ມາ ເຂົາໄດ້ກຽມບາດແລະຈີວອນ ແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາຍະເອງ ໄປສູ່ອາຮາມໄຫວ້ພິກຂຸທັງຫຼາຍ

ພິກຂຸທັງຫຼາຍຖາມວ່າ "ທ່ານມີພັນສາໄດ້ທໍ່ໃດແລ້ວ"
ເຂົາຍ້ອນຖາມວ່າ "ທີ່ຊື່ວ່າມີພັນສາທໍ່ໃດ ນັ້ນຄືອັນໃດ ຂ້ານ້ອຍ
ທ່ານ ກໍໃຜເປັນພຣະອຸປັດຊາຂອງທ່ານນໍ?
ທີ່ຊື່ວ່າພຣະອຸປັດຊາ ນັ້ນຄືໃຜ ຂ້ານ້ອຍ

ພິກຂຸທັງຫຼາຍ ໄດ້ບອກເລື້ອງນີ້ແກ່ທ່ານພຣະອຸບາລີວ່າ "ທ່ານອຸບາລີ ຂໍນິມົນທ່ານສອບສວນບັນພະຊິດອົງນີ້ເບິ່ງເທີ້ນ"

ເມື່ອເຂົາຖືກທ່ານພຣະອຸບາລີສອບສວນ ຈຶ່ງຍອມບອກເລື້ອງນັ້ນ ທ່ານພຣະອຸບາລີໄດ້ບອກພິກຂຸທັງຫຼາຍ ພິກຂຸທັງຫຼາຍ ຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ

"ພິກຂຸທັງຫຼາຍ ອະນຸປະສຳບັນຜູ້ເປັນຄົນລັກເພດ ບໍ່ເພິ່ງໃຫ້ອຸປະສົມບົດ ທີ່ອຸປະສົມບົດແລ້ວ ເພິ່ງໃຫ້ສິກສາ

ພິກຂຸທັງຫຼາຍ ອະນຸປະສຳບັນຜູ້ໄປເຂົ້າຮີດເດຍຣະຖີ ບໍ່ເພິ່ງໃຫ້ອຸປະສົມບົດ ທີ່ອຸປະສົມບົດແລ້ວ ເພິ່ງໃຫ້ສິກສາ" (໔-໕)

# ໔໙. ຕິຣັດສານະຄະຕະວັດຖຸ

## ວ່າດ້ວຍສັດເດຍຣັດສານບັນພະຊາ

### ນາກແປງກາຍເປັນມະນຸດມາຂໍບັນພະຊາ

[໑໑໑] ສະໄໝນັ້ນ ນາກໂຕໜຶ່ງອຶດອັດ ຣະອາ ລັງກຽດກຳເນີດນາກຂອງຕົນ ຕໍ່ມາ ນາກນັ້ນ ມີຄວາມຄິດວ່າ "ດ້ວຍອຸບາຍແນວໃດນໍ ເຮົາຈະເພິ່ງພົ້ນຈາກກຳເນີດນາກ ແລະເພິ່ງໄດ້ອັດຕະພາບມະນຸດທັນທີຄິດໄດ້ວ່າ "ພຣະສະມະນະເຊື້ອສາຍສາກະຍະບຸດເຫຼົ່ານີ້ ເປັນຜູ້ປະພຶດທຳ ປະພຶດສະງົບ ປະພຶດພົມມະຈັນ ກ່າວວາຈາສັດ ມີສິນ ມີກັນລະຍານະທຳ ຖ້າເຮົາຈະເພິ່ງບັນພະຊາໃນພວກພຣະສະມະນະ ເຊື້ອສາຍພຣະສາກະຍະບຸດແລ້ວ ດ້ວຍອຸບາຍແນວນີ້ ເຮົາກໍຈະເພິ່ງພົ້ນຈາກກຳເນີດນາກ ແລະໄດ້ອັດຕະພາບມະນຸດທັນທີ" ຈຶ່ງໄດ້ແປງກາຍເປັນຊາຍໜຸ່ມເຂົ້າໄປຫາພິກຂຸທັງຫຼາຍຂໍບັນພະຊາ

ພິກຂຸທັງຫຼາຍ ໄດ້ໃຫ້ບັນພະຊາໃຫ້ອຸປະສົມບົດ ຕໍ່ມາ ພຣະນາກອາໄສຢູ່ໃນວິຫານຫຼັງສຸດທ້າຍກັບພິກຂຸອົງໜຶ່ງ ເມື່ອຣາຕີໃກ້ແຈ້ງ ພິກຂຸອົງນັ້ນ ໄດ້ຕື່ນຂຶ້ນໄປຍ່າງຈົງກົມຢູ່ໃນທີ່ແຈ້ງ ເມື່ອທ່ານອອກໄປແລ້ວ ພຣະນາກຈຶ່ງຫຼັບໃນວິຫານດ້ວຍຮ່າງກາຍທີ່ເປັນງູ ຂົດຍື່ນອອກທາງໜ້າຕ່າງ ເມື່ອພິກຂຸນັ້ນຍູ້ບານປະຕູຈະເຂົ້າວິຫານ ໄດ້ເຫັນໃນວິຫານມີງູ ຂົດຍື່ນອອກທາງໜ້າຕ່າງ ກໍຕົກໃຈຮ້ອງສຽງດັງ

ພິກຂຸທັງຫຼາຍ ໄດ້ພາກັນແລ່ນເຂົ້າໄປຖາມພິກຂຸນັ້ນວ່າ "ອາວຸໂສ ທ່ານຮ້ອງສຽງດັງເຮັດຫຍັງ"

ພິກຂຸນັ້ນບອກວ່າ "ທ່ານທັງຫຼາຍ ໃນວິຫານຫຼັງນີ້ມີງູ ມີຫາງຍື່ນອອກທາງໜ້າຕ່າງ"

ທັນໃດນັ້ນ ພຣະນາກໄດ້ຕື່ນຂຶ້ນຍ້ອນສຽງນັ້ນ ຟ້າວນັ່ງເທິງອາສະນະຂອງຕົນ

ພິກຂຸທັງຫຼາຍຖາມວ່າ "ອາວຸໂສ ທ່ານເປັນໃຜກັນແທ້"

ພຣະນາກຕອບວ່າ "ເຮົາເປັນນາກ ຂ້ານ້ອຍ"

ພິກຂຸທັງຫຼາຍຖາມວ່າ "ອາວຸໂສ ທ່ານເຮັດແນວນີ້ເພື່ອຫຍັງ?

ພຣະນາກໄດ້ບອກເລື້ອງນັ້ນ ແກ່ພິກຂຸທັງຫຼາຍ ໆ ຈຶ່ງຂາບທູນໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ ຕໍ່ມາ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງໃຫ້ປະຊຸມພິກຂຸສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ໄດ້ຕັດກັບພຣະນາກນັ້ນວ່າ "ພວກເຈົ້າເປັນນາກ ບໍ່ສາມາດງອກງາມໃນພຣະທຳວິໄນນີ້ໄດ້ ໄປເທີ້ນນາກ ເຈົ້າຈົ່ງຖືອຸໂປສົດໃນດິຖີທີ່ ໑໔ ດິຖີທີ່ ໑໕ ແລະດິຖີທີ່ ໘ ແຫ່ງປັກນັ້ນກ່ອນ ດ້ວຍອຸບາຍແນວນີ້ ເຈົ້າຈັກພົ້ນຈາກກຳເນີດນາກ ແລະໄດ້ອັດຕະພາບກາຍເປັນມະນຸດໄດ້"

ນາກເມື່ອໄດ້ຮູ້ວ່າຕົນບໍ່ສາມາດງອກງາມໃນພຣະທຳວິໄນນີ້ໄດ້ ກໍທຸກ ເສຍໃຈ ຫຼັ່ງນ້ຳຕາສົ່ງສຽງດັງຫຼີກໄປ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຫດທີ່ເຮັດໃຫ້ນາກຜາກົດຮ່າງກາຍເປັນນາກ ມີ ໒ ປະການເຫຼົ່ານີ້ ຄື (໑) ເວລາທີ່ເສບເມຖຸນທຳກັບນາງນາກມີຊາດສະເໝີກັນ (໒) ເວລານອນຫຼັບ ພິກຂຸທັງຫຼາຍ ເຫດທີ່ເຮັດໃຫ້ນາກຜາກົດຮ່າງເປັນນາກມີ ໒ ປະການເຫຼົ່ານີ້

ພິກຂຸທັງຫຼາຍ ອະນຸປະສຳບັນຜູ້ເປັນສັດເດຍຣັດສານ ບໍ່ເພິ່ງໃຫ້ອຸປະສົມບົດ ທີ່ອຸປະສົມບົດແລ້ວເພິ່ງໃຫ້ສິກອອກໄປ" (໔)

## ໕໐. ມາຕຸຄາຕະກະວັດຖຸ
### ວ່າດ້ວຍຄົນຂ້າມານດາຂໍບັນພະຊາ
### ຫ້າມຄົນຂ້າມານດາອຸປະສົມບົດ

[໑໑໒] ສະໄໝນັ້ນ ມານົບຜູ້ໜຶ່ງໄດ້ປົງຊີວິດມານດາ ເຂົາອຶດອັດ ຣະອາ ລັງກຽດບາບ

ກຳນັ້ນ ຕໍ່ມາ ເຂົາມີຄວາມຄິດວ່າ "ດ້ວຍອຸບາຍແນວໃດນໍ ເຮົາຈະເພິ່ງກະທຳການສະສາງບາບກຳນີ້ໄດ້" ແລ້ວຄິດໄດ້ວ່າ "ພຣະສະມະນະເຊື້ອສາຍພຣະສາກະຍະບຸດເຫຼົ່ານີ້ ເປັນຜູ້ປະພຶດທຳ ປະພຶດສະງົບ ປະພຶດພົມມະຈັນ ກ່າວວາຈາສັດຈິງ ມີສີນ ມີກັນລະຍານະທຳ ຖ້າເຮົາຈະເພິ່ງບັນພະຊາໃນພວກພຣະສະມະນະ ເຊື້ອສາຍພຣະສາກະຍະບຸດ ດ້ວຍອຸບາຍແນວນີ້ ເຮົາກໍຈະເພິ່ງກະທຳການສະສາງບາບກຳນີ້ໄດ້" ຈຶ່ງເຂົ້າໄປຫາພິກຂຸທັງຫຼາຍຂໍບັນພະຊາ

ພິກຂຸທັງຫຼາຍ ໄດ້ບອກເລື້ອງນີ້ແກ່ທ່ານພຣະອຸບາລີວ່າ "ທ່ານອຸບາລີ ເມື່ອກ່ອນນາກໄດ້ແປງກາຍເປັນຊາຍໜຸ່ມເຂົ້າມາບັນພະຊາໃນໝູ່ພິກຂຸ ຂໍນິມົນທ່ານຈົ່ງສອບສວນມານົບຜູ້ນີ້ເບິ່ງກ່ອນເທີ້ນ

ເມື່ອມານົບນັ້ນ ຖືກທ່ານພຣະອຸບາລີສອບສວນຈຶ່ງບອກເລື້ອງນັ້ນໃຫ້ຮູ້ ທ່ານພຣະອຸບາລີໄດ້ບອກເລື້ອງນັ້ນໃຫ້ພິກຂຸທັງຫຼາຍຮູ້ ພວກພິກຂຸຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ອະນຸປະສຳບັນຜູ້ຂ້າມານດາ ບໍ່ເພິ່ງໃຫ້ອຸປະສົມບົດ ທີ່ອຸປະສົມບົດແລ້ວ ເພິ່ງໃຫ້ສຶກອອກໄປ" (໕)

## ໕໑. ປິຕຸຄາຕະກະວັດຖຸ
### ວ່າດ້ວຍຄົນຂ້າບິດາຂໍບັນພະຊາ
### ຫ້າມຄົນຂ້າບິດາອຸປະສົມບົດ

[໑໑໓] ສະໄໝນັ້ນ ມານົບຜູ້ໜຶ່ງໄດ້ປົງຊີວິດບິດາ ເຂົາອຶດອັດ ຣະອາ ລັງກຽດບາບກຳນັ້ນ ຕໍ່ມາ ເຂົາມີຄວາມຄິດວ່າ "ດ້ວຍອຸບາຍແນວໃດນໍ ເຮົາຈະເພິ່ງກະທຳການສະສາງບາບກຳນີ້ໄດ້" ຄິດໄດ້ວ່າ "ພຣະສະມະນະເຊື້ອສາຍພຣະສາກະຍະບຸດເຫຼົ່ານີ້ ເປັນຜູ້ປະພຶດທຳ ປະພຶດສະງົບ ປະພຶດພົມມະຈັນ ກ່າວວາຈາສັດຈິງ ມີສີນ ມີກັນລະຍານະທຳ ຖ້າເຮົາຈະເພິ່ງບັນພະຊາໃນພວກພຣະສະມະນະເຊື້ອສາຍພຣະສາກະຍະບຸດ ດ້ວຍອຸບາຍແນວນີ້ ເຮົາກໍຈະເພິ່ງກະທຳການສະສາງບາບກຳນີ້ໄດ້" ຈຶ່ງເຂົ້າໄປຫາພິກຂຸທັງຫຼາຍຂໍບັນພະຊາ

ພິກຂຸທັງຫຼາຍ ໄດ້ບອກເລື້ອງນີ້ແກ່ທ່ານພຣະອຸບາລີວ່າ "ທ່ານອຸບາລີ ເມື່ອກ່ອນນາກໄດ້ແປງກາຍເປັນຊາຍໜຸ່ມເຂົ້າມາບັນພະຊາໃນໝູ່ພິກຂຸ ຂໍນິມົນທ່ານສອບສວນມານົບຜູ້ນີ້ເບິ່ງກ່ອນເທີ້ນ

ເມື່ອມານົບນັ້ນ ຖືກທ່ານພຣະອຸບາລີສອບສວນ ຈຶ່ງບອກເລື້ອງນັ້ນໃຫ້ຮູ້ ທ່ານພຣະອຸບາລີໄດ້ບອກເລື້ອງນັ້ນໃຫ້ພິກຂຸທັງຫຼາຍຮູ້ ພວກພິກຂຸຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ອະນຸປະສຳບັນຜູ້ຂ້າບິດາ ບໍ່ເພິ່ງໃຫ້ອຸປະສົມບົດ ທີ່ອຸປະສົມບົດແລ້ວ ເພິ່ງໃຫ້ສິກອອກໄປ" (ຜ)

# ໕໔. ອະຣະຫັນຕະຄາຕະກະວັດຖຸ

## ວ່າດ້ວຍຄົນຂ້າພຣະອະຣະຫັນບັນພະຊາ

## ຫ້າມຄົນຂ້າພຣະອະຣະຫັນອຸປະສົມບົດ

[໑໑໔] ສະໄໝນັ້ນ ພິກຂຸຈຳນວນຫຼາຍອົງໄດ້ເດີນທາງໄກຈາກເມືອງສາເກດໄປນະຄອນສາວັດຖີ ລະຫວ່າງທາງ ໂຈນຍົກພວກອອກມາປຸ້ນພິກຂຸບາງພວກ ຂ້າພິກຂຸບາງພວກ ເຈົ້າໜ້າທີ່ຍົກກຳລັງຈາກນະຄອນສາວັດຖີໄປຈັບໂຈນບາງພວກໄດ້ ບາງພວກປົບໜີໄປ ພວກທີ່ໜີໄປໄດ້ບັນພະຊາໃນໝູ່ພິກຂຸ ພວກທີ່ຖືກຈັບກຳລັງຖືກເຈົ້າໜ້າທີ່ນຳໄປຂ້າ ພວກໂຈນທີ່ໜີໄປບັນພະຊາໄດ້ເຫັນໂຈນເຫຼົ່ານັ້ນກຳລັງຖືກນຳໄປຂ້າ ກໍກ່າວຂຶ້ນວ່າ "ດີແລ້ວ ທີ່ພວກເຮົາໜີລອດມາໄດ້ ຖ້າວັນນັ້ນຖືກຈັບກໍຈະຕ້ອງຖືກຂ້າແນວນັ້ນດ້ວຍ

ພິກຂຸທັງຫຼາຍຖາມວ່າ "ທ່ານທັງຫຼາຍ ກໍພວກທ່ານໄດ້ເຮັດຫຍັງ
ພິກຂຸເຫຼົ່ານັ້ນໄດ້ບອກເລື່ອງນີ້ໃຫ້ພິກຂຸທັງຫຼາຍຮູ້ ພວກພິກຂຸຈຶ່ງຂາບທູນໃຫ້
ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸພວກນັ້ນທີ່ຖືກຂ້າເປັນພຣະອະຣະຫັນ ພິກຂຸທັງຫຼາຍ ອະນຸປະສຳບັນຜູ້ຂ້າພຣະອະຣະຫັນ ບໍ່ເພິ່ງໃຫ້ອຸປະສົມບົດ ທີ່ອຸປະສົມບົດແລ້ວ ເພິ່ງໃຫ້ສິກອອກໄປ" (ກ)

# ໕໖. ພິກຂຸນີທູສະກະວັດຖຸ

## ວ່າດ້ວຍຄົນປະທຸດສະຮ້າຍພິກຂຸນີເປັນຕົ້ນບັນພະຊາ

## ຫ້າມຄົນປະທຸດສະຮ້າຍພິກຂຸນີເປັນຕົ້ນອຸປະສົມບົດ

[໑໑໕] ສະໄໝນັ້ນ ພິກຂຸນີຫຼາຍອົງໄດ້ເດີນທາງໄກຈາກເມືອງສາເກດໄປນະຄອນສາວັດຖີ ລະຫວ່າງທາງ ມີໂຈນຍົກພວກອອກມາປຸ້ນພິກຂຸນີບາງພວກ ທຳຮ້າຍພິກຂຸນີບາງພວກ ເຈົ້າໜ້າທີ່ຍົກກຳລັງອອກຈາກນະຄອນສາວັດຖີໄປຈັບໂຈນບາງພວກໄດ້ ບາງພວກປົບໜີໄປ ພວກທີ່ໜີໄປໄດ້ບັນພະຊາໃນໝູ່ພິກຂຸ ພວກທີ່ຖືກຈັບກຳລັງຖືກເຈົ້າໜ້າທີ່ນຳໄປຂ້າ ພວກໂຈນທີ່ໜີໄປບັນພະຊາໄດ້ເຫັນໂຈນເຫຼົ່ານັ້ນກຳລັງຖືກນຳໄປຂ້າ ກໍກ່າວຂຶ້ນວ່າ "ດີແລ້ວທີ່ພວກເຮົາໜີລອດມາໄດ້ ຖ້າວັນນັ້ນຖືກຈັບ ກໍຈະຕ້ອງຖືກຂ້າແນວນັ້ນດ້ວຍ

ພິກຂຸທັງຫຼາຍ ຖາມວ່າ "ທ່ານທັງຫຼາຍ ກໍພວກທ່ານໄດ້ເຮັດຫຍັງໄວ້ບໍ?"

ພິກຂຸເຫຼົ່ານັ້ນ ໄດ້ບອກເລື້ອງນີ້ໃຫ້ພິກຂຸທັງຫຼາຍຮູ້ ພວກພິກຂຸຈຶ່ງຂາບທູນໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ອະນຸປະສຳບັນຜູ້ປະທຸດສະຮ້າຍພິກຂຸນີບໍ່ເພິ່ງໃຫ້ອຸປະສົມບົດ ທີ່ອຸປະສົມບົດແລ້ວ ເພິ່ງໃຫ້ສິກອອກໄປ" (໙)

## ເລື້ອງຄົນທຳລາຍສົງ

ພິກຂຸທັງຫຼາຍ ອະນຸປະສຳບັນຜູ້ທຳລາຍສົງ ບໍ່ເພິ່ງໃຫ້ອຸປະສົມບົດ ທີ່ອຸປະສົມບົດແລ້ວເພິ່ງໃຫ້ສິກອອກໄປ (໙)

## ເລື້ອງຄົນທຳຮ້າຍພຣະພຸດທະເຈົ້າຈົນຫໍ້ພຣະໂລຫິດ

ພິກຂຸທັງຫຼາຍ ອະນຸປະສຳບັນຜູ້ທຳຮ້າຍພຣະພຸດທະເຈົ້າຈົນຫໍ້ພຣະໂລຫິດ ບໍ່ເພິ່ງໃຫ້ອຸປະສົມບົດ ທີ່ອຸປະສົມບົດແລ້ວ ເພິ່ງໃຫ້ສິກອອກໄປ" (໑໐)

# ໕໔. ອຸພະໂຕພະຍັນຊະນະກະ

## ວ່າດ້ວຍອຸພະໂຕພະຍັນຊະນະກະບັນພະຊາ
## ຫ້າມອຸພະໂຕພະຍັນຊະນະກະອຸປະສົມບົດ

[໑໑໖] ສະໄໝນັ້ນ ອຸພະໂຕພະຍັນຊະນະກະບາງຄົນໄດ້ບັນພະຊາໃນໝູ່ພິກຂຸ ທ່ານເສບເມຖຸນທຳໃນສະຕີທັງຫຼາຍ ດ້ວຍປຸຣິສະນິມິດຂອງຕົນແດ່ ໃຫ້ບຸຣຸດອື່ນເສບເມຖຸນທຳໃນອິດຖີນິມິດຂອງຕົນແດ່ ພິກຂຸທັງຫຼາຍຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ອະນຸປະສຳບັນຜູ້ເປັນອຸພະໂຕພະຍັນຊະນະກະບໍ່ເພິ່ງໃຫ້ອຸປະສົມບົດ ທີ່ອຸປະສົມບົດແລ້ວ ເພິ່ງໃຫ້ສິກອອກໄປ" (໑໑)

# ໕໕. ອະນຸປັດຊາຍະກາທິວັດຖຸ

## ວ່າດ້ວຍຄົນບໍ່ມີອຸປັດຊາອຸປະສົມບົດເປັນຕົ້ນ

[໑໑໗] ສະໄໝນັ້ນ ພວກພິກຂຸໃຫ້ກຸນລະບຸດຜູ້ບໍ່ມີອຸປັດຊາອຸປະສົມບົດ ພິກຂຸທັງຫຼາຍຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ກຸນລະບຸດຜູ້ບໍ່ມີອຸປັດຊາ ບໍ່ເພິ່ງໃຫ້ອຸປະສົມບົດ ອົງໃດໃຫ້ອຸປະສົມບົດ ຕ້ອງອາບັດທຸກກົດ" (໑໔)

## ເລື້ອງຄົນມີສິງເປັນອຸປັດຊາ

ສະໄໝນັ້ນ ພວກພິກຂຸໃຫ້ກຸນລະບຸດມີສິງເປັນອຸປັດຊາອຸປະສົມບົດ ພິກຂຸທັງຫຼາຍຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ກຸນລະບຸດມີສິງເປັນອຸປັດຊາ ບໍ່ເພິ່ງໃຫ້ອຸປະສົມບົດ ອົງໃດໃຫ້ອຸປະສົມບົດ ຕ້ອງອາບັດທຸກກົດ" (໑໖)

## ເລື້ອງຄົນມີຄະນະເປັນອຸປັດຊາ

ສະໄໝນັ້ນ ພວກພິກຂຸໃຫ້ກຸນລະບຸດມີຄະນະເປັນອຸປັດຊາອຸປະສົມບົດ ພິກຂຸທັງຫຼາຍຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ກຸນລະບຸດມີຄະນະເປັນອຸປັດຊາ ບໍ່ເພິ່ງໃຫ້ອຸປະສົມບົດ ອົງໃດໃຫ້ອຸປະສົມບົດ ຕ້ອງອາບັດທຸກກົດ" (໑໘)

## ເລື້ອງຄົນມີບັນເດາະເປັນອຸປັດຊາເປັນຕົ້ນ

ສະໄໝຕໍ່ມາ ພວກພິກຂຸໃຫ້ກຸນລະບຸດມີ ບັນເດາະ ເປັນອຸປັດຊາອຸປະສົມບົດ ฯລฯ

ฯລฯ ຄົນລັກເພດ ເປັນອຸປັດຊາອຸປະສົມບົດ ฯລฯ

ฯລฯ ພິກຂຸໄປເຂົ້າຮີດເດຍຣະຖີ ເປັນອຸປັດຊາອຸປະສົມບົດ ฯລฯ

ฯລฯ ສັດເດຍຣັດສານ ເປັນອຸປັດຊາອຸປະສົມບົດ ฯລฯ

ฯລฯ ຄົນຂ້າມານດາ ເປັນອຸປັດຊາອຸປະສົມບົດ ฯລฯ

ฯລฯ ຄົນຂ້າບິດາ ເປັນອຸປັດຊາອຸປະສົມບົດ ฯລฯ

ฯລฯ ຄົນຂ້າພຣະອະຣະຫັນ ເປັນອຸປັດຊາອຸປະສົມບົດ ฯລฯ

ฯລฯ ຄົນປະທຸດສະຮ້າຍພິກຂຸນີ ເປັນອຸປັດຊາອຸປະສົມບົດ ฯລฯ

ฯລฯ ຄົນທຳລາຍສົງ ເປັນອຸປັດຊາອຸປະສົມບົດ ฯລฯ

ฯລฯ ຄົນທຳຮ້າຍພຣະພຸດທະເຈົ້າຈົນຫໍ້ພຣະໂລຫິດ ເປັນອຸປັດຊາອຸປະສົມບົດ ฯລฯ

ฯລฯ ອຸພະໂຕພະຍັນຊະນະກະ ເປັນອຸປັດຊາອຸປະສົມບົດ ฯລฯ

ພິກຂຸທັງຫຼາຍ ຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ກຸນລະບຸດມີບັນເດາະເປັນອຸປັດຊາ ບໍ່ເພິ່ງໃຫ້ອຸປະສົມບົດ ອົງໃດໃຫ້ອຸປະສົມບົດ ຕ້ອງອາບັດທຸກກົດ

ฯລฯ ຄົນລັກເພດ ເປັນອຸປັດຊາ ບໍ່ເພິ່ງໃຫ້ອຸປະສົມບົດ ฯລฯ

ฯລฯ ພິກຂຸໄປເຂົ້າຮີດເດຍຣະຖີ ເປັນອຸປັດຊາ ບໍ່ເພິ່ງໃຫ້ອຸປະສົມບົດ ฯລฯ

ຯລຯ ສັດເດຍຣັດສານ ເປັນອຸປັດຊາ ບໍ່ເພິ່ງໃຫ້ອຸປະສົມບົດ ຯລຯ
ຯລຯ ຄົນຂ້າມານດາ ເປັນອຸປັດຊາ ບໍ່ເພິ່ງໃຫ້ອຸປະສົມບົດ ຯລຯ
ຯລຯ ຄົນຂ້າບິດາ ເປັນອຸປັດຊາ ບໍ່ເພິ່ງໃຫ້ອຸປະສົມບົດ ຯລຯ
ຯລຯ ຄົນຂ້າພຣະອະຣະຫັນ ເປັນອຸປັດຊາ ບໍ່ເພິ່ງໃຫ້ອຸປະສົມບົດ ຯລຯ
ຯລຯ ຄົນປະທຸດສະຮ້າຍພິກຂຸນີ ເປັນອຸປັດຊາ ບໍ່ເພິ່ງໃຫ້ອຸປະສົມບົດ ຯລຯ
ຯລຯ ຄົນທຳລາຍສົງ ເປັນອຸປັດຊາ ບໍ່ເພິ່ງໃຫ້ອຸປະສົມບົດ ຯລຯ

ຯລຯ ຄົນທຳຮ້າຍພຣະພຸດທະເຈົ້າຈົນຫໍ້ພຣະໂລຫິດເປັນອຸປັດຊາ ບໍ່ເພິ່ງໃຫ້ອຸປະສົມບົດ ຯລຯ

ຯລຯ ອຸພະໂຕພະຍັນຊະນະກະເປັນອຸປັດຊາ ບໍ່ເພິ່ງໃຫ້ອຸປະສົມບົດ ອົງໃດໃຫ້ອຸປະສົມບົດ ຕ້ອງອາບັດທຸກກົດ" (໑໕)

# ໕໖. ອະປັດຕະກາທິວັດຖຸ

## ວ່າດ້ວຍຄົນບໍ່ມີບາດອຸປະສົມບົດເປັນຕົ້ນ

## ຫ້າມຄົນບໍ່ມີບາດອຸປະສົມບົດ

[໑໑໗] ສະໄໝນັ້ນ ພວກພິກຂຸໃຫ້ກຸນລະບຸດຜູ້ບໍ່ມີບາດອຸປະສົມບົດ ພວກທ່ານເມື່ອອຸປະສົມບົດແລ້ວກໍທ່ຽວບິນທະບາດດ້ວຍມື ມະນຸດທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ "ທ່ຽວບິນທະບາດເໝືອນພວກເດຍຣະຖີ" ພິກຂຸທັງຫຼາຍ ຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ກຸນລະບຸດຜູ້ບໍ່ມີບາດ ບໍ່ເພິ່ງໃຫ້ອຸປະສົມບົດ ອົງໃດໃຫ້ອຸປະສົມບົດ ຕ້ອງອາບັດທຸກກົດ" (໑໖)

## ເລື້ອງຄົນບໍ່ມີຈີວອນ

ສະໄໝນັ້ນ ພວກພິກຂຸໃຫ້ກຸນລະບຸດຜູ້ບໍ່ມີຈີວອນອຸປະສົມບົດ ພວກທ່ານອຸປະສົມບົດແລ້ວກໍເປືອຍກາຍທ່ຽວບິນທະບາດ ມະນຸດທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາ ວ່າ "ທ່ຽວບິນທະບາດເໝືອນພວກເດຍຣະຖີ"

ພິກຂຸທັງຫຼາຍ ຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ກຸນລະບຸດຜູ້ບໍ່ມີຈີວອນ ບໍ່ເພິ່ງໃຫ້ອຸປະສົມບົດອົງໃດໃຫ້ອຸປະສົມບົດ ຕ້ອງອາບັດທຸກກົດ" (໑໗)

## ເລື້ອງຄົນບໍ່ມີທັງບາດແລະຈີວອນ

ສະໄໝນັ້ນ ພວກພິກຂຸໃຫ້ກຸນລະບຸດຜູ້ບໍ່ມີທັງບາດ ແລະຈີວອນອຸປະສົມບົດ ພວກທ່ານອຸປະສົມບົດແລ້ວ ກໍເປືອຍກາຍທ່ຽວບິນທະບາດດ້ວຍມື ມະນຸດທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ "ທ່ຽວບິນທະບາດເໝືອນພວກເດຍຣະຖີ

ພິກຂຸທັງຫຼາຍຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ກຸນລະບຸດຜູ້ບໍ່ມີທັງບາດແລະຈີວອນ ບໍ່ເພິ່ງໃຫ້ອຸປະສົມບົດ ອົງໃດໃຫ້ອຸປະສົມບົດ ຕ້ອງອາບັດທຸກກົດ" (໑໗)

## ເລື້ອງຄົນຢືມບາດ

ສະໄໝນັ້ນ ພວກພິກຂຸໃຫ້ກຸນລະບຸດຜູ້ຢືມບາດເຂົ້າມາອຸປະສົມບົດ ເມື່ອອຸປະສົມບົດແລ້ວເຈົ້າຂອງກໍຂໍເອົາບາດຄືນ ພວກທ່ານທ່ຽວບິນທະບາດດ້ວຍມື ມະນຸດທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ "ທ່ຽວບິນທະບາດເໝືອນພວກເດຍຣະຖີ"

ພິກຂຸທັງຫຼາຍ ຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍກຸນລະບຸດຜູ້ຢືມບາດເຂົ້າມາ ບໍ່ເພິ່ງໃຫ້ອຸປະສົມບົດ ອົງໃດໃຫ້ອຸປະສົມບົດ ຕ້ອງອາບັດທຸກກົດ" (໑໙)

## ເລື້ອງຄົນຢືມຈີວອນ

ສະໄໝນັ້ນ ພວກພິກຂຸໃຫ້ກຸນລະບຸດຜູ້ຢືມຈີວອນເຂົ້າມາອຸປະສົມບົດ ເມື່ອອຸປະສົມບົດແລ້ວເຈົ້າຂອງກໍຂໍເອົາຈີວອນຄືນ ພວກທ່ານເປືອຍກາຍທ່ຽວບິນທະບາດດ້ວຍມື ມະນຸດທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ "ທ່ຽວບິນທະບາດເໝືອນພວກເດຍຣະຖີ

ພິກຂຸທັງຫຼາຍ ຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ກຸນລະບຸດຜູ້ຢືມຈີວອນເຂົ້າມາ ບໍ່ເພິ່ງໃຫ້ອຸປະສົມບົດ ອົງໃດໃຫ້ອຸປະສົມບົດ ຕ້ອງອາບັດທຸກກົດ" (໔໐)

## ເລື້ອງຄົນຢືມບາດແລະຈີວອນ

ສະໄໝນັ້ນ ພວກພິກຂຸໃຫ້ກຸນລະບຸດຜູ້ຢືມບາດ ແລະຈີວອນເຂົ້າມາອຸປະສົມບົດ ເມື່ອອຸປະສົມບົດ ແລ້ວເຈົ້າຂອງກໍຂໍເອົາບາດແລະຈີວອນຄືນ ພວກທ່ານເປືອຍກາຍທ່ຽວບິນທະບາດດ້ວຍມື ມະນຸດທັງຫຼາຍພາກັນຕຳໜິ ປະນາມ ໂພນທະນານວ່າ "ທ່ຽວບິນທະບາດເໝືອນພວກເດຍຣະຖີ"

ພິກຂຸທັງຫຼາຍຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ກຸນລະບຸດຜູ້ຢືມບາດແລະຈີວອນເຂົາມາບໍ່ເພິ່ງໃຫ້ອຸປະສົມບົດ ອົງໃດໃຫ້ອຸປະສົມບົດ ຕ້ອງອາບັດທຸກກົດ" (໔໑)

**ນະອຸປະສຳປາເທຕັບພະກະວິສະຕິວານ ຈົບ**

# ໕໗. ປັບພາເຊຕັບພະທະວັດຕິງສະວານ

## ວ່າດ້ວຍບຸກຄົນບໍ່ຄວນໃຫ້ບັນພະຊາ ໓໘ ຈຳພວກ

| | | | |
|---|---|---|---|
| [໑໑໙] ສະໄໝນັ້ນ ພວກພິກຂຸໃຫ້ຄົນ | ມືກຸດ | ບັນພະຊາ | ຯລຯ |
| ຯລຯ ໃຫ້ຄົນ | ຕີນກຸດ | ບັນພະຊາ | ຯລຯ |
| ຯລຯ ໃຫ້ຄົນ | ທັງມືທັງຕີນກຸດ | ບັນພະຊາ | ຯລຯ |
| ຯລຯ ໃຫ້ຄົນ | ຫູວິ່ນ | ບັນພະຊາ | ຯລຯ |
| ຯລຯ ໃຫ້ຄົນ | ດັງແຫວ່ງ | ບັນພະຊາ | ຯລຯ |
| ຯລຯ ໃຫ້ຄົນ | ທັງຫູວິ່ນທັງດັງແຫວ່ງ | ບັນພະຊາ | ຯລຯ |
| ຯລຯ ໃຫ້ຄົນ | ນິ້ວມືນິ້ວຕີນຂາດ | ບັນພະຊາ | ຯລຯ |
| ຯລຯ ໃຫ້ຄົນ | ງ່າມມືງ່າມຕີນຂາດ | ບັນພະຊາ | ຯລຯ |
| ຯລຯ ໃຫ້ຄົນ | ເອັນຂາດ | ບັນພະຊາ | ຯລຯ |
| ຯລຯ ໃຫ້ຄົນ | ມືເປັນແຜ່ນ | ບັນພະຊາ | ຯລຯ |
| ຯລຯ ໃຫ້ຄົນ | ຄ່ອມ | ບັນພະຊາ | ຯລຯ |
| ຯລຯ ໃຫ້ຄົນ | ເຕ້ຍ | ບັນພະຊາ | ຯລຯ |
| ຯລຯ ໃຫ້ຄົນ | ຄໍພອກ | ບັນພະຊາ | ຯລຯ |
| ຯລຯ ໃຫ້ຄົນ | ຖືກສັກໝາຍໂທດ | ບັນພະຊາ | ຯລຯ |
| ຯລຯ ໃຫ້ຄົນ | ມີຮອຍຄ້ຽນຕີດ້ວຍຫວາຍ | ບັນພະຊາ | ຯລຯ |
| ຯລຯ ໃຫ້ຄົນ | ມີໝາຍຈັບ | ບັນພະຊາ | ຯລຯ |
| ຯລຯ ໃຫ້ຄົນ | ຕີນປຸກ | ບັນພະຊາ | ຯລຯ |
| ຯລຯ ໃຫ້ຄົນ | ມີໂຣກຊຳເຮື້ອ | ບັນພະຊາ | ຯລຯ |
| ຯລຯ ໃຫ້ຄົນ | ມີຮູບຮ່າງບໍ່ສົມປະກອບ | ບັນພະຊາ | ຯລຯ |
| ຯລຯ ໃຫ້ຄົນ | ຕາບອດຂ້າງດຽວ | ບັນພະຊາ | ຯລຯ |
| ຯລຯ ໃຫ້ຄົນ | ເປ້ຍ | ບັນພະຊາ | ຯລຯ |
| ຯລຯ ໃຫ້ຄົນ | ງ່ອຍ | ບັນພະຊາ | ຯລຯ |
| ຯລຯ ໃຫ້ຄົນ | ເປັນໂຣກອຳມະພາດ | ບັນພະຊາ | ຯລຯ |

ฯลฯ ໃຫ້ຄົນ ເຄື່ອນໄຫວເອງບໍ່ໄດ້ ບັນພະຊາ ฯลฯ
ฯลฯ ໃຫ້ຄົນ ຊະຣາທຸບພົນລະພາບ ບັນພະຊາ ฯลฯ
ฯลฯ ໃຫ້ຄົນ ຕາບອດສອງຂ້າງ ບັນພະຊາ ฯลฯ
ฯลฯ ໃຫ້ຄົນ ກືກ ບັນພະຊາ ฯลฯ
ฯลฯ ໃຫ້ຄົນ ຫູໜວກ ບັນພະຊາ ฯลฯ
ฯลฯ ໃຫ້ຄົນ ທັງບອດທັງກືກ ບັນພະຊາ ฯลฯ
ฯลฯ ໃຫ້ຄົນ ທັງບອດທັງໜວກ ບັນພະຊາ ฯลฯ
ฯลฯ ໃຫ້ຄົນ ທັງກືກທັງໜວກ ບັນພະຊາ ฯลฯ
ฯลฯ ໃຫ້ຄົນ ທັງບອດທັງກືກທັງໜວກ ບັນພະຊາ ฯลฯ

ພິກຂຸທັງຫຼາຍຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

## ເລື້ອງຊົງຫ້າມໃຫ້ຄົນມີກຸດເປັນຕົ້ນບັນພະຊາ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ບໍ່ເພິ່ງໃຫ້ຄົນ ມືກຸດ ບັນພະຊາ ฯลฯ

ฯลฯ ບໍ່ເພິ່ງໃຫ້ຄົນ ຕີນກຸດ ບັນພະຊາ ฯลฯ
ฯลฯ ບໍ່ເພິ່ງໃຫ້ຄົນ ທັງມືທັງຕີນກຸດ ບັນພະຊາ ฯลฯ
ฯลฯ ບໍ່ເພິ່ງໃຫ້ຄົນ ຫູວິ່ນ ບັນພະຊາ ฯลฯ
ฯลฯ ບໍ່ເພິ່ງໃຫ້ຄົນ ດັງແຫວ່ງ ບັນພະຊາ ฯลฯ
ฯลฯ ບໍ່ເພິ່ງໃຫ້ຄົນ ທັງຫູວິ່ນທັງດັງແຫວ່ງ ບັນພະຊາ ฯลฯ
ฯลฯ ບໍ່ເພິ່ງໃຫ້ຄົນ ນິ້ວມືນິ້ວຕີນຂາດ ບັນພະຊາ ฯลฯ
ฯลฯ ບໍ່ເພິ່ງໃຫ້ຄົນ ງ່າມມືງ່າມຕີນຂາດ ບັນພະຊາ ฯลฯ
ฯลฯ ບໍ່ເພິ່ງໃຫ້ຄົນ ເອັນຂາດ ບັນພະຊາ ฯลฯ
ฯลฯ ບໍ່ເພິ່ງໃຫ້ຄົນ ມືເປັນແຜ່ນ ບັນພະຊາ ฯลฯ
ฯลฯ ບໍ່ເພິ່ງໃຫ້ຄົນ ຄ່ອມ ບັນພະຊາ ฯลฯ
ฯลฯ ບໍ່ເພິ່ງໃຫ້ຄົນ ເຕ້ຍ ບັນພະຊາ ฯลฯ
ฯลฯ ບໍ່ເພິ່ງໃຫ້ຄົນ ຄໍພອກ ບັນພະຊາ ฯลฯ
ฯลฯ ບໍ່ເພິ່ງໃຫ້ຄົນ ຖືກສັກໝາຍໂທດ ບັນພະຊາ ฯลฯ
ฯลฯ ບໍ່ເພິ່ງໃຫ້ຄົນ ມີຮອຍຄຸ້ງບຕີດ້ວຍຫວາຍ ບັນພະຊາ ฯลฯ
ฯลฯ ບໍ່ເພິ່ງໃຫ້ຄົນ ມີໝາຍຈັບ ບັນພະຊາ ฯลฯ
ฯลฯ ບໍ່ເພິ່ງໃຫ້ຄົນ ຕີນປຸກ ບັນພະຊາ ฯลฯ
ฯลฯ ບໍ່ເພິ່ງໃຫ້ຄົນ ມີໂຣກຊຳເຮື້ອ ບັນພະຊາ ฯลฯ
ฯลฯ ບໍ່ເພິ່ງໃຫ້ຄົນ ມີຮູບຮ່າງບໍ່ສົມປະກອບ ບັນພະຊາ ฯลฯ

ຯລຯ ບໍ່ເພິ່ງໃຫ້ຄົນ ຕາບອດຂ້າງດຽວ ບັນພະຊາ ຯລຯ
ຯລຯ ບໍ່ເພິ່ງໃຫ້ຄົນ ເປັ້ຍ ບັນພະຊາ ຯລຯ
ຯລຯ ບໍ່ເພິ່ງໃຫ້ຄົນ ກະຈອກ ບັນພະຊາ ຯລຯ
ຯລຯ ບໍ່ເພິ່ງໃຫ້ຄົນ ເປັນໂຣກອຳມະພາດ ບັນພະຊາ ຯລຯ
ຯລຯ ບໍ່ເພິ່ງໃຫ້ຄົນ ເຄື່ອນໄຫວເອງບໍ່ໄດ້ ບັນພະຊາ ຯລຯ
ຯລຯ ບໍ່ເພິ່ງໃຫ້ຄົນ ຊະຣາທຸບພົນລະພາບ ບັນພະຊາ ຯລຯ
ຯລຯ ບໍ່ເພິ່ງໃຫ້ຄົນ ຕາບອດສອງຂ້າງ ບັນພະຊາ ຯລຯ
ຯລຯ ບໍ່ເພິ່ງໃຫ້ຄົນ ກືກ ບັນພະຊາ ຯລຯ
ຯລຯ ບໍ່ເພິ່ງໃຫ້ຄົນ ຫູໜວກ ບັນພະຊາ ຯລຯ
ຯລຯ ບໍ່ເພິ່ງໃຫ້ຄົນ ທັງບອດທັງກືກ ບັນພະຊາ ຯລຯ
ຯລຯ ບໍ່ເພິ່ງໃຫ້ຄົນ ທັງບອດທັງໜວກ ບັນພະຊາ ຯລຯ
ຯລຯ ບໍ່ເພິ່ງໃຫ້ຄົນ ທັງກືກທັງໜວກ ບັນພະຊາ ຯລຯ

ຯລຯ ບໍ່ເພິ່ງໃຫ້ຄົນ ທັງບອດທັງກືກທັງໜວກບັນພະຊາ ອົງໃດໃຫ້ບັນພະຊາ ຕ້ອງອາບັດ ທຸກກົດ

**ນະປັບພາເຊຕັບພະທະວັດຕິງສະວານ ຈົບ**

**ທາຍັດຊະພານະວານທີ ໗ ຈົບ**

# ໕໗. ອະລັດຊີນິດສະຍະວັດຖຸ

## ວ່າດ້ວຍການໃຫ້ນິດໄສແກ່ພິກຂຸອະລັດຊີ

## ເລື້ອງຊົງຫ້າມການໃຫ້ນິດໄສແກ່ພິກຂຸອະລັດຊີ

[໑໔໐] ສະໄໝນັ້ນ ພວກພິກຂຸສັບພັກຄີໃຫ້ນິດໄສແກ່ພວກພິກຂຸອະລັດຊີ ພິກຂຸທັງຫຼາຍຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ບໍ່ເພິ່ງໃຫ້ນິດໄສແກ່ພວກພິກຂຸອະລັດຊີ ອົງໃດໃຫ້ ຕ້ອງອາບັດທຸກກົດ”

## ເລື້ອງຊົງຫ້າມການຖືນິດໄສພິກຂຸອະລັດຊີ

ສະໄໝນັ້ນ ພວກພິກຂຸຢູ່ອາໄສພວກພິກຂຸອະລັດຊີ ບໍ່ດົນຫຼາຍແມ່ນພິກຂຸພວກນັ້ນກໍກາຍເປັນພິກຂຸອະລັດຊີ ເປັນພິກຂຸຊົ່ວຊາມໄປນຳກັນ

ພິກຂຸທັງຫຼາຍ ຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ບໍ່ເພິ່ງຢູ່ອາໄສພວກພິກຂຸອະລັດຊີ ອົງໃດຢູ່ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພິກຂຸທັງຫຼາຍມີຄວາມຄິດວ່າ "ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ວ່າ ບໍ່ເພິ່ງໃຫ້ນິດໄສແກ່ພວກພິກຂຸອະລັດຊີ ບໍ່ເພິ່ງຢູ່ອາໄສພວກພິກຂຸອະລັດຊີ ເຮັດແນວໃດນໍ ພວກເຮົາຈຶ່ງຈະຮູ້ວ່າພິກຂຸເປັນລັດຊີ ຫຼື ອະລັດຊີ" ຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຖ້າເບິ່ງກ່ອນ ໔-໕ ວັນ ພໍຈະຮູ້ວ່າພິກຂຸຜູ້ໃຫ້ນິດໄສເປັນສະພາຄະກັນ

## ໕໙. ຄະມິກາທິນິດສະຍະວັດຖຸ

### ວ່າດ້ວຍການຖືນິດໄສຂອງພິກຂຸຜູ້ເດີນທາງເປັນຕົ້ນ

### ເລື້ອງພິກຂຸຜູ້ເດີນທາງໄກບໍ່ຕ້ອງຖືນິດໄສ

[໑໔໑] ສະໄໝນັ້ນ ພິກຂຸອົງໜຶ່ງເດີນທາງໄກໄປໃນແຄວ້ນໂກສົນ ທ່ານມີຄວາມຄິດວ່າ "ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ວ່າ ພິກຂຸຈະຢູ່ໂດຍບໍ່ຖືນິດໄສບໍ່ໄດ້ ກໍເຮົາຈຳຕ້ອງຖືນິດໄສ ແຕ່ຕ້ອງເດີນທາງໄກ ເຮົາຈະເພິ່ງປະຕິບັດແນວໃດນໍ"

ພິກຂຸທັງຫຼາຍ ຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ເດີນທາງໄກ ເມື່ອບໍ່ໄດ້ຜູ້ໃຫ້ນິດໄສ ໃຫ້ຢູ່ໂດຍບໍ່ຕ້ອງຖືນິດໄສ"

### ເລື້ອງພິກຂຸໄຂ້ບໍ່ຕ້ອງຖືນິໄສ

ສະໄໝນັ້ນ ພິກຂຸ ໔ ອົງ ເດີນທາງໄກໄປໃນແຄວ້ນໂກສົນ ທ່ານທັງ ໔ ເຂົ້າພັກໃນອາວາດແຫ່ງໜຶ່ງ ໃນພິກຂຸ ໔ ອົງນັ້ນ ອົງໜຶ່ງເປັນໄຂ້ ທ່ານມີຄວາມຄິດວ່າ "ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ວ່າ ພິກຂຸຈະເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສບໍ່ໄດ້ ກໍເຮົາຈຳຕ້ອງຖືນິດໄສ ແຕ່ກຳລັງເປັນໄຂ້ ເຮົາຈະເພິ່ງປະຕິບັດແນວໃດນໍ"

ພິກຂຸທັງຫຼາຍ ຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຕັດອະນຸຍາດວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ເປັນໄຂ້ ເມື່ອບໍ່ໄດ້ຜູ້ໃຫ້ນິດໄສ ເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສ"

ຕໍ່ມາ ພິກຂຸຜູ້ພະຍາບານພິກຂຸໄຂ້ມີຄວາມຄິດວ່າ "ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້

ວ່າ ພິກຂຸຈະເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສບໍ່ໄດ້ ກໍເຮົາຈຳຕ້ອງຖືນິດໄສ ແຕ່ພິກຂຸນີ້ກຳລັງເປັນໄຂ້ ເຮົາຈະເພິ່ງປະຕິບັດແນວໃດນໍ"

ພິກຂຸທັງຫຼາຍ ຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

## ເລື້ອງພິກຂຸຜູ້ພະຍາບານໄຂ້ບໍ່ຕ້ອງຖືນິດໄສ

ພຣະຜູ້ມີພຣະພາກເຈົ້າຕັດອະນຸຍາດວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ພະຍາບານພິກຂຸໄຂ້ ເມື່ອບໍ່ໄດ້ຜູ້ໃຫ້ນິດໄສ ທັງຖືກພິກຂຸຜູ້ເປັນໄຂ້ຂໍຮ້ອງ ເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສ"

ສະໄໝນັ້ນ ພິກຂຸອົງໜຶ່ງຢູ່ໃນປ່າ ແລະທ່ານມີຄວາມຜາສຸກໃນເສນາສະນະນັ້ນ ຕໍ່ມາທ່ານມີຄວາມຄິດວ່າ "ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ວ່າ ພິກຂຸຈະເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສບໍ່ໄດ້ ກໍເຮົາຈຳຕ້ອງຖືນິດໄສ ແຕ່ຍັງຢູ່ໃນປ່າ ແລະມີຄວາມຜາສຸກໃນເສນາສະນະນີ້ ເຮົາຈະເພິ່ງປະຕິບັດແນວໃດນໍ"

ພິກຂຸທັງຫຼາຍ ຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

## ເລື້ອງບໍ່ຕ້ອງຖືນິດໄສຍ້ອນຫາຜູ້ໃຫ້ນິດໄສບໍ່ໄດ້

ພຣະຜູ້ມີພຣະພາກເຈົ້າຕັດອະນຸຍາດວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ຢູ່ປ່າເປັນວັດ ກຳນົດເອົາຄວາມຜາສຸກ ເມື່ອບໍ່ໄດ້ຜູ້ໃຫ້ນິດໄສ ເພິ່ງຢູ່ໂດຍບໍ່ຕ້ອງຖືນິດໄສ

ດ້ວຍຜູກໃຈວ່າ ເຮົາຈັກຖືນິດໄສຢູ່ໃນເມື່ອມີພິກຂຸຜູ້ໃຫ້ນິດໄສຜູ້ສົມຄວນມາເຖິງ

# ໖໐. ໂຄດເຕນະອະນຸດສາວະນານຸຊານະນາ

## ວ່າດ້ວຍຊົງອະນຸຍາດອຸປະສົມບົດກຳໂດຍສູດຣະບຸໂຄດຂອງອຸປັດຊາ

## ເລື້ອງພຣະມະຫາກັດສະປະນິມົນພຣະອານົນມາສູດນາກ

[໑໘໘] ສະໄໝນັ້ນ ທ່ານພຣະມະຫາກັດສະປະມີອຸປະສຳປະທາເປກຂະ ທ່ານຈຶ່ງສົ່ງທູດໄປໃນສຳນັກພຣະອານົນໃຫ້ນິມົນວ່າ "ທ່ານອານົນ ຈົ່ງມາສູດອຸປະສຳປະທາເປກຂະນີ້"

ພຣະອານົນຕອບໄປວ່າ "ຂ້ານ້ອຍ ບໍ່ສາມາດຈະຣະບຸນາມຂອງພຣະເຖຣະໄດ້ຍ້ອນພຣະເຖຣະເປັນທີ່ເຄົາລົບຂອງຂ້ານ້ອຍ"

ພິກຂຸທັງຫຼາຍ ຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສູດຣະບຸໂຄດໄດ້"

# ໗໑. ທະເວອຸປະສຳປະທາເປກຂາທິວັດຖຸ
## ວ່າດ້ວຍອຸປະສົມບົດອຸປະສຳປະທາເປກຂະ ໔ ຄົນເປັນຕົ້ນ
## ເລື້ອງຍາດກັນອຸປະສົມບົດກ່ອນ

[໑໔໖] ສະໄໝນັ້ນ ທ່ານພຣະມະຫາກັດສະປະ ມີອຸປະສຳປະທາເປກຂະ ໔ ຄົນ ອຸປະສຳປະທາເປກຂະທັງ ໔ ຖຽງກັນວ່າ "ເຮົາຈັກອຸປະສົມບົດກ່ອນ ເຮົາຈັກອຸປະສົມບົດກ່ອນ"

ພິກຂຸທັງຫຼາຍ ຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສູດອຸປະສຳປະທາເປກຂະ ໔ ຄົນ ໃນອະນຸສາວະນາດຽວກັນໄດ້"

## ເລື້ອງອຸປະສົມບົດຄັ້ງລະ ໖ ຄົນ ມີອຸປັດຊາອົງດຽວ

ສະໄໝຕໍ່ມາ ພຣະເຖຣະຫຼາຍອົງ ຕ່າງກໍມີອຸປະສຳປະທາເປກຂະຫຼາຍຄົນ ອຸປະສຳປະທາເປກຂະ ເຫຼົ່ານັ້ນຕ່າງຖຽງກັນວ່າ "ເຮົາຈັກອຸປະສົມບົດກ່ອນ ເຮົາຈັກອຸປະສົມບົດກ່ອນ"

ພຣະເຖຣະທັງຫຼາຍ ຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສູດອຸປະສຳປະທາເປກຂະໃນອະນຸສາວະນາດຽວກັນຄັ້ງລະ ໔ ຄົນ ໖ ຄົນໄດ້ ແຕ່ການສູດນັ້ນ ເຮົາອະນຸຍາດໃຫ້ມີອຸປັດຊາອົງດຽວກັນ ບໍ່ອະນຸຍາດໃຫ້ມີອຸປັດຊາຕ່າງອົງກັນ"

# ໗໔. ຄັບພະວີສູປະສຳປະທານຸຊານະນາ
## ອຸປະສົມບົດໃຫ້ກຸນລະບຸດໂດຍການນັບອາຍຸ ໒໐ ປີ ແມ່ນຢູ່ໃນທ້ອງ
## ເລື້ອງພຣະກຸມານກັດສະປະ

[໑໔໔] ສະໄໝນັ້ນ ທ່ານພຣະກຸມານກັດສະປະມີອາຍຸຄົບ ໒໐ ປີ ນັບ ແມ່ນຢູ່ໃນທ້ອງ ໄດ້ອຸປະສົມບົດແລ້ວ ຕໍ່ມາ ທ່ານມີຄວາມຄິດວ່າ "ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ວ່າ ບຸກຄົນມີອາຍຸຍ່ອນກວ່າ ໒໐ ປີ ສົງບໍ່ເພິ່ງໃຫ້ອຸປະສົມບົດ ແຕ່ເຮົາມີອາຍຸຄົບ ໒໐ ປີ ນັບແມ່ນຢູ່ໃນທ້ອງອຸປະສົມບົດແລ້ວ ຈະເປັນອັນໄດ້ອຸປະສົມບົດ ຫຼື ບໍ່ນໍ?

ພິກຂຸທັງຫຼາຍ ຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ສັດເກີດນັບຕັ້ງແຕ່ຈິດດວງທຳອິດ ວິນຍານດວງທຳອິດເກີດຜາກົດຂຶ້ນໃນທ້ອງຂອງມານດາ ພິກຂຸທັງຫຼາຍ ເຮົາອະນຸຍາດ ອຸປະສົມບົດໃຫ້ກຸນລະບຸດມີອາຍຸຄົບ ໒໐ ນັບຮອດແມ່ນຢູ່ໃນທ້ອງໄດ້"

# ໗໓. ອຸປະສຳປະທາວິທີ

## ວ່າດ້ວຍອຸປະສົມບົດວິທີ

## ເລື້ອງອຸປະສຳບັນຖືກໂຣກບຽດບຽນ

[໑໘໕] ສະໄໝນັ້ນ ກຸນລະບຸດທັງຫຼາຍທີ່ອຸປະສົມບົດແລ້ວ ຜາກົດເປັນໂຣກຂີ້ທູດກໍມີ ໂຣກຝີກໍມີ ໂຣກກາກກໍມີ ໂຣກມອງຄໍ່ກໍມີ ໂຣກລົມບ້າໝູກໍມີ ພິກຂຸທັງຫຼາຍ ຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສົງຜູ້ຈະໃຫ້ອຸປະສົມບົດຖາມອັນຕະຣາຍິກະທຳ ໑໓ ຂໍ້ ກ່ອນໄດ້

## ເລື້ອງຖາມອັນຕະຣາຍິກະທຳກັບອຸປະສຳປະທາເປກຂະ

ພິກຂຸທັງຫຼາຍ ກໍແລ ເພິ່ງຖາມອຸປະສຳປະທາເປກຂະແນວນີ້

ອາພາດແນວນີ້ຂອງເຈົ້າມີຢູ່ບໍ? ຄື ໂຣກຂີ້ທູດ ໂຣກຝີ ໂຣກກາກ ໂຣກມອງຄໍ່ ໂຣກລົມບ້າໝູ ເຈົ້າເປັນມະນຸດບໍ? ເຈົ້າເປັນຜູ້ຊາຍບໍ? ເຈົ້າເປັນອິດສະຫຼະແລ້ວບໍ? ເຈົ້າບໍ່ມີໜີ້ບໍ? ເຈົ້າບໍ່ແມ່ນຣາຊະພັດບໍ? ມານດາບິດາອະນຸຍາດເຈົ້າແລ້ວບໍ? ເຈົ້າມີອາຍຸຄົບ ໒໐ ປີແລ້ວບໍ? ບາດແລະຈີວອນຂອງເຈົ້າມີຄົບແລ້ວບໍ? ເຈົ້າຊື່ຫຍັງ? ອຸປັດຊາຂອງເຈົ້າຊື່ຫຍັງ?

## ເລື້ອງສອນຊ້ອມກ່ອນຖາມອັນຕະຣາຍິກະທຳ

ສະໄໝນັ້ນ ພວກພິກຂຸຖາມອັນຕະຣາຍິກະທຳກັບພວກອຸປະສຳປະທາເປກຂະຜູ້ຍັງບໍ່ໄດ້ສອນຊ້ອມ ພວກອຸປະສຳປະທາເປກຂະຍ່ອມສະທົກສະທ້ານ ເກີ້ເຂີນ ບໍ່ອາດຈະຕອບໄດ້

ພິກຂຸທັງຫຼາຍ ຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສອນຊ້ອມກ່ອນ ຈຶ່ງຖາມອັນຕະຣາຍິກະທຳພາຍຫຼັງ

ພວກພິກຂຸ ກໍສອນຊ້ອມໃນທ່າມກາງສົງນັ້ນ ພວກອຸປະສຳປະທາເປກຂະກໍຮູ້ສຶກອາຍສະທົກສະທ້ານ ເກີ້ເຂີນ ບໍ່ອາດຈະຕອບຄືເກົ່າໄດ້

ພິກຂຸທັງຫຼາຍ ຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສອນຊ້ອມ ໃນບ່ອນສົມຄວນ ຈຶ່ງຖາມອັນຕະຣາຍິກະທຳໃນທ່າມກາງສົງ

ພິກຂຸທັງຫຼາຍ ກໍແລ ເພິ່ງສອນຊ້ອມອຸປະສຳປະທາເປກຂະແນວນີ້

## ຄຳບອກບາດແລະຈີວອນ

[໑໘໖] ໃນເບື້ອງຕົ້ນ ເພິ່ງໃຫ້ອຸປະສຳປະທາເປກຂະຖືອຸປັດຊາ ເມື່ອໃຫ້ຖືອຸປັດຊາແລ້ວ ເພິ່ງບອກບາດແລະຈີວອນວ່າ "ນີ້ບາດ ນີ້ສັງຄາຕິ ນີ້ອຸດຕະຣາສົງ ນີ້ອັນຕະຣະວາສົກຂອງເຈົ້າ ເຈົ້າຈົ່ງອອກໄປຢືນຖ້າຢູ່ບ່ອນນັ້ນກ່ອນ

## ເລື່ອງພິກຂຸໂງ່ຈ້າສອນຊ້ອມ

ພວກພິກຂຸຜູ້ໂງ່ຈ້າບໍ່ສະຫຼາດ ສອນຊ້ອມ ພວກອຸປະສຳປະທາເປກຂະຖືກສອນຊ້ອມບໍ່ດີ ກໍສະທົກສະທ້ານ ເກີ້ເຂີນ ບໍ່ສາມາດຕອບໄດ້

ພິກຂຸທັງຫຼາຍ ຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸຜູ້ໂງ່ຈ້າບໍ່ສະຫຼາດ ບໍ່ເພິ່ງສອນຊ້ອມ ອົງໃດສອນຊ້ອມ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ສະຫຼາດ ຜູ້ສາມາດສອນຊ້ອມ

## ເລື້ອງພິກຂຸຍັງບໍ່ໄດ້ຮັບແຕ່ງຕັ້ງສອນຊ້ອມ

ພວກພິກຂຸຜູ້ຍັງບໍ່ໄດ້ຮັບແຕ່ງຕັ້ງສອນຊ້ອມ ພິກຂຸທັງຫຼາຍ ຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸຍັງບໍ່ໄດ້ຮັບແຕ່ງຕັ້ງບໍ່ເພິ່ງສອນຊ້ອມ ອົງໃດສອນຊ້ອມ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ໄດ້ຮັບແຕ່ງຕັ້ງສອນຊ້ອມ"

ພິກຂຸທັງຫຼາຍ ເພິ່ງແຕ່ງຕັ້ງແນວນີ້ ຕົນເອງແຕ່ງຕັ້ງຕົນເອງກໍໄດ້ ພິກຂຸອົງໜຶ່ງແຕ່ງຕັ້ງພິກຂຸອີກອົງໜຶ່ງກໍໄດ້

## ວິທີແຕ່ງຕັ້ງຕົນແລະກຳມະວາຈາ

ແນວໃດນໍ ຊື່ວ່າ ຕົນເອງແຕ່ງຕັ້ງຕົນເອງ ຄື ພິກຂຸຜູ້ສະຫຼາດ ຜູ້ສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິກຳມະວາຈາ ວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຜູ້ມີຊື່ນີ້ເປັນອຸປະສຳປະທາເປກຂະຂອງທ່ານຜູ້ມີຊື່ນີ້ ຖ້າສົງພ້ອມກັນແລ້ວ ຂ້າພະເຈົ້າຊື່ນີ້ ຈະສອນຊ້ອມຜູ້ມີຊື່ນີ້

ແນວນີ້ ຊື່ວ່າຕົນເອງແຕ່ງຕັ້ງຕົນເອງ

## ວິທີແຕ່ງຕັ້ງຜູ້ອື່ນແລະກຳມະວາຈາ

ແນວໃດບໍ ຊື່ວ່າພິກຂຸອົງໜຶ່ງແຕ່ງຕັ້ງພິກຂຸອີກອົງໜຶ່ງ ຄື ພິກຂຸຜູ້ສະຫຼາດ ຜູ້ສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິກຳມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຜູ້ມີຊື່ນີ້ເປັນອຸປະສຳປະທາເປກຂະຂອງທ່ານຜູ້ມີຊື່ນີ້ ຖ້າສົງພ້ອມກັນແລ້ວ ທ່ານຜູ້ມີຊື່ນີ້ເພິ່ງສອນຊ້ອມຜູ້ມີຊື່ນີ້

ແນວນີ້ ຊື່ວ່າພິກຂຸອົງໜຶ່ງແຕ່ງຕັ້ງພິກຂຸອີກອົງໜຶ່ງ

ພິກຂຸຜູ້ໄດ້ຮັບແຕ່ງຕັ້ງນັ້ນ ເພິ່ງເຂົ້າໄປຫາອຸປະສຳປະທາເປກຂະແລ້ວກ່າວແນວນີ້ວ່າ ຜູ້ມີຊື່ນີ້ ຈົ່ງຟັງ ນີ້ເປັນຄວາມສັດ ຄວາມຈິງຂອງເຈົ້າ ເມື່ອພິກຂຸຜູ້ສອນຊ້ອມຖາມໃນທ່າມກາງສົງເຖິງສິ່ງທີ່ເກີດ ສິ່ງທີ່ມີ ເພິ່ງບອກວ່າ "ມີ" ບໍ່ມີກໍເພິ່ງບອກວ່າ "ບໍ່ມີ" ເຈົ້າຢ່າສະທົກສະທ້ານ ຢ່າເກີ້ເຂີນ ພິກຂຸຜູ້ສອນຊ້ອມຈັກຖາມເຈົ້າແນວນີ້ວ່າ ອາພາດແນວນີ້ຂອງເຈົ້າມີຢູ່ບໍ? ຄື ໂຣກຂີ້ທູດ ໂຣກຝີ ໂຣກກາກ ໂຣກມອງຄໍ່ ໂຣກລົມບ້າໝູ ເຈົ້າເປັນມະນຸດບໍ? ເຈົ້າເປັນຜູ້ຊາຍບໍ? ເຈົ້າເປັນອິດສະຫຼະແລ້ວບໍ? ເຈົ້າບໍ່ມີໜີ້ແມ່ນບໍ? ເຈົ້າບໍ່ແມ່ນຣາຊະພັດບໍ? ມານດາບິດາອະນຸຍາດເຈົ້າແລ້ວບໍ? ເຈົ້າມີອາຍຸຄົບ ໒໐ ປີແລ້ວບໍ?

ເຈົ້າມີບາດແລະຈີວອນຄົບແລ້ວບໍ? ເຈົ້າຊື່ຫຍັງ? ອຸປັດຊາຂອງເຈົ້າຊື່ຫຍັງ?

## ເລື້ອງຫ້າມຜູ້ສອນຊ້ອມກັບອຸປະສຳປະທາເປກຂະຍ່າງມາພ້ອມກັນ

ພິກຂຸຜູ້ສອນຊ້ອມກັບອຸປະສຳປະທາເປກຂະຍ່າງມາພ້ອມກັນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸຜູ້ສອນຊ້ອມກັບອຸປະສຳປະທາເປກຂະ ບໍ່ເພິ່ງຍ່າງມາພ້ອມກັນ ພິກຂຸຜູ້ສອນຊ້ອມເພິ່ງຍ່າງມາກ່ອນ ແລ້ວປະກາດໃຫ້ສົງຮູ້ດ້ວຍຍັດຕິກຳມະວາຈາ ວ່າ"

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຜູ້ມີຊື່ນີ້ເປັນອຸປະສຳປະທາເປກຂະຂອງທ່ານຜູ້ມີຊື່ນີ້ ຂ້າພະເຈົ້າສອນຊ້ອມເຂົາແລ້ວ ຖ້າສົງພ້ອມກັນແລ້ວ ຜູ້ມີຊື່ນີ້ເພິ່ງມາໄດ້

ເພິ່ງຮຽກອຸປະສຳປະທາເປກຂະເຂົ້າມາດ້ວຍຄຳວ່າ "ເຈົ້າຈົ່ງເຂົ້າມາເທີ້ນ"

## ຄຳຂໍອຸປະສົມບົດ

ເພິ່ງໃຫ້ອຸປະສຳປະທາເປກຂະຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸທັງຫຼາຍນັ່ງຢ່ອງຍໍ້ ປະນົມມື ຂໍອຸປະສົມບົດ ວ່າ

ທ່ານຜູ້ຈະເລີນ ຂ້າພະເຈົ້າ ຂໍອຸປະສົມບົດຕໍ່ສົງ ສົງໂຜດຊ່ອຍອະນຸເຄາະຍົກຂ້າພະເຈົ້າຂຶ້ນດ້ວຍເທີ້ນ

ທ່ານຜູ້ຈະເລີນ ຂ້າພະເຈົ້າ ຂໍອຸປະສົມບົດຕໍ່ສົງ ເປັນຄັ້ງທີ ໔ ສົງໂຜດຊ່ອຍອະນຸເຄາະຍົກຂ້າພະເຈົ້າຂຶ້ນດ້ວຍເທີ້ນ

ທ່ານຜູ້ຈະເລີນ ຂ້າພະເຈົ້າຂໍອຸປະສົມບົດຕໍ່ສົງ ເປັນຄັ້ງທີ ໓ ສົງໂຜດຊ່ອຍອະນຸເຄາະຍົກຂ້າພະເຈົ້າຂຶ້ນດ້ວຍເທີ້ນ

## ຄຳແຕ່ງຕັ້ງຕົນເພື່ອຖາມອັນຕະຣາຍິກະທຳ

ພິກຂຸຜູ້ສະຫຼາດ ຜູ້ສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິກຳມະວາຈາ ວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຜູ້ມີຊື່ນີ້ເປັນອຸປະສຳປະທາເປກຂະຂອງທ່ານຜູ້ມີຊື່ນີ້ ຖ້າສົງພ້ອມກັນແລ້ວ ຂ້າພະເຈົ້າຈັກຖາມອັນຕະຣາຍິກະທຳກັບຜູ້ມີຊື່ນີ້ ດັ່ງຕໍ່ໄປນີ້

ຜູ້ມີຊື່ນີ້ ຈົ່ງຟັງ ນີ້ເປັນຄວາມສັດ ເປັນຄວາມຈິງຂອງເຈົ້າ ເຮົາຈະຖາມສິ່ງທີ່ເກີດ ສິ່ງທີ່ມີເພິ່ງບອກວ່າ “ມີ” ບໍ່ມີກໍເພິ່ງບອກວ່າ “ບໍ່ມີ” ອາພາດແນວນີ້ຂອງເຈົ້າມີຢູ່ບໍ? ຄື ໂຣກຂີ້ທູດ ໂຣກຝີ ໂຣກກາກ ໂຣກມອງຄ່ ໂຣກລົມບ້າໝູ ເຈົ້າເປັນມະນຸດບໍ?

ເຈົ້າເປັນຜູ້ຊາຍບໍ? ເຈົ້າເປັນອິດສະຫຼະແລ້ວບໍ? ເຈົ້າບໍ່ມີໜີ້ບໍ? ເຈົ້າບໍ່ແມ່ນຣາຊະພັດບໍ? ມານດາບິດາອະນຸຍາດເຈົ້າແລ້ວບໍ? ເຈົ້າມີອາຍຸຄົບ ໒໐ ປີແລ້ວບໍ? ບາດແລະຈີວອນຂອງເຈົ້າມີຄົບແລ້ວ ບໍ? ເຈົ້າຊື່ຫຍັງ? ອຸປັດຊາຂອງເຈົ້າຊື່ຫຍັງ?

## ຍັດຕິຈະຕຸດຖະກຳອຸປະສຳປະທາ

ພິກຂຸຜູ້ສະຫຼາດ ຜູ້ສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

[໑໔ກ] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຜູ້ມີຊື່ນີ້ເປັນອຸປະສຳປະທາເປກຂະຂອງທ່ານຜູ້ມີຊື່ນີ້ ບໍລິສຸດຈາກອັນຕະຣາຍິກະທຳທັງຫຼາຍແລ້ວ ເຂົາມີບາດແລະຈີວອນຄົບແລ້ວ ຜູ້ມີຊື່ນີ້ຂໍອຸປະສົມບົດຕໍ່ສົງ ມີທ່ານຜູ້ມີຊື່ນີ້ເປັນອຸປັດຊາ ຖ້າສົງພ້ອມກັນແລ້ວ ສົງເພິ່ງໃຫ້ຜູ້ມີຊື່ນີ້ອຸປະສົມບົດ ມີທ່ານຜູ້ມີຊື່ນີ້ເປັນອຸປັດຊາ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຜູ້ມີຊື່ນີ້ເປັນອຸປະສຳປະທາເປກຂະຂອງທ່ານຜູ້ມີຊື່ນີ້ ບໍລິສຸດຈາກອັນຕະຣາຍິກະທຳທັງຫຼາຍແລ້ວ ເຂົາມີບາດແລະຈີວອນຄົບແລ້ວ ຜູ້ມີຊື່ນີ້ຂໍອຸປະສົມບົດຕໍ່ສົງ ມີທ່ານຜູ້ມີຊື່ນີ້ເປັນອຸປັດຊາ ສົງໃຫ້ຜູ້ມີຊື່ນີ້ອຸປະສົມບົດ ມີທ່ານຜູ້ມີຊື່ນີ້ເປັນອຸປັດຊາ ທ່ານອົງໃດ ເຫັນດ້ວຍກັບການໃຫ້ຜູ້ມີຊື່ນີ້ອຸປະສົມບົດ ມີທ່ານຜູ້ມີຊື່ນີ້ເປັນອຸປັດຊາ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍທ່ານອົງນັ້ນເພິ່ງທັກທ້ວງຂຶ້ນ

ແມ່ນຄັ້ງທີ ໔ ຂ້າພະເຈົ້າກ່າວຄວາມນີ້ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຜູ້ມີຊື່ນີ້ເປັນອຸປະສຳປະທາເປກຂະຂອງທ່ານຜູ້ມີຊື່ນີ້ ບໍລິສຸດຈາກອັນຕະຣາຍິກະທຳທັງຫຼາຍແລ້ວ ເຂົາມີບາດ

ແລະຈີວອນຄົບແລ້ວ ຜູ້ມີຊື່ນີ້ຂໍອຸປະສົມບົດຕໍ່ສົງ ມີທ່ານຜູ້ມີຊື່ນີ້ເປັນອຸປັດຊາ ສົງໃຫ້ຜູ້ມີຊື່ນີ້ອຸປະສົມບົດ ມີທ່ານຜູ້ມີຊື່ນີ້ເປັນອຸປັດຊາ ທ່ານອົງໃດເຫັນດ້ວຍກັບການໃຫ້ຜູ້ມີຊື່ນີ້ອຸປະສົມບົດ ມີທ່ານຜູ້ມີຊື່ນີ້ເປັນອຸປັດຊາ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງຂຶ້ນ

ແມ່ນຄັ້ງທີ ໓ ຂ້າພະເຈົ້າກ່າວຄວາມນີ້ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຜູ້ມີຊື່ນີ້ເປັນອຸປະສຳປະທາເປກຂະຂອງທ່ານຜູ້ມີຊື່ນີ້ ບໍລິສຸດຈາກອັນຕະຣາຍິກະທຳທັງຫຼາຍແລ້ວ ເຂົາມີບາດແລະຈີວອນຄົບແລ້ວ ຜູ້ມີຊື່ນີ້ຂໍອຸປະສົມບົດຕໍ່ສົງ ມີທ່ານຜູ້ມີຊື່ນີ້ເປັນອຸປັດຊາ ສົງໃຫ້ຜູ້ມີຊື່ນີ້ອຸປະສົມບົດ ມີທ່ານຜູ້ມີຊື່ນີ້ເປັນອຸປັດຊາ ທ່ານອົງໃດເຫັນດ້ວຍກັບການໃຫ້ຜູ້ມີຊື່ນີ້ອຸປະສົມບົດ ມີທ່ານຜູ້ມີຊື່ນີ້ເປັນອຸປັດຊາ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງຂຶ້ນ

ທ່ານຜູ້ມີຊື່ນີ້ ສົງໃຫ້ອຸປະສົມບົດແລ້ວ ມີທ່ານຜູ້ມີຊື່ນີ້ເປັນອຸປັດຊາ ສົງເຫັນດ້ວຍ ດັ່ງນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນ ເປັນມະຕິແນວນີ້

**ອຸປະສຳປະທາວິທີ ຈົບ**

# ໖໔. ຈັດຕາຣິນິດສະຍະ

## ວ່າດ້ວຍນິດໄສ ໔

## ເລື້ອງຊົງອະນຸຍາດໃຫ້ບອກນິດໄສ ໔

[໑໔໗] ຂະນະນັ້ນ ເພິ່ງແທກເງົາແດດ ບອກປະມານແຫ່ງລະດູ ບອກສ່ວນແຫ່ງວັນ ບອກສັງຄີຕິ ບອກນິດໄສ ໔ ວ່າ

໑. ບັນພະຊາອາໄສໂພຊະນະ ຄື ຄຳເຂົ້າທີ່ເພິ່ງຫາໄດ້ດ້ວຍປີແຄ່ງ ທ່ານເພິ່ງກະທຳຄວາມອຸດສາຫະໃນໂພຊະນະ ຄື ຄຳເຂົ້າທີ່ເພິ່ງຫາໄດ້ດ້ວຍປີແຄ່ງຈົນຕະຫຼອດຊີວິດ ອະຕິເຣກລາບ ຄື ສັງຄະພັດ ອຸດເທສະພັດ ນິມັນຕະນະພັດ ສະລາກະພັດ ປັກຂິກະພັດ ອຸໂປສະຖິກະພັດ ປາຕິປະທິກະພັດ

໒. ບັນພະຊາອາໄສຜ້າບັງສຸກຸນ ທ່ານເພິ່ງກະທຳຄວາມອຸດສາຫະໃນຜ້າບັງສຸກຸນນັ້ນຈົນຕະຫຼອດຊີວິດ ອະຕິເຣກລາບ ຄື ຜ້າເປືອກໄມ້ ຜ້າຝ້າຍ ຜ້າໄໝ ຜ້າຂົນສັດ ຜ້າປ່ານ ຜ້າປົນກັນ

໓. ບັນພະຊາອາໄສເສນາສະນະຄື ຂ່ວງໄມ້ ທ່ານເພິ່ງກະທຳຄວາມອຸດສາຫະໃນເສນາສະນະຄືຂ່ວງໄມ້ນັ້ນຈົນຕະຫຼອດຊີວິດ ອະຕິເຣກລາບ ຄື ວິຫານເຮືອນມຸງແຖວດຽວ ພາສາດ ເຮືອນໂລ້ນ ຖ້ຳ

໔. ບັນພະຊາອາໄສຢາຄືນໍ້າມູດເນົ່າ ທ່ານເພິ່ງກະທໍາຄວາມອຸດສາຫະໃນຢາຄືນໍ້າມູດເນົ່ານັ້ນຈົນຕະຫຼອດຊີວິດ ອະຕິເຣກລາບ ຄື ເນີຍໃສ ເນີຍຂຸ້ນ ນໍ້າມັນ ນໍ້າເຜີ້ງ ນໍ້າອ້ອຍ

**ຈັດຕາຣິນິດສະຍະ ຈົບ**

# ໓໕. ຈັດຕາຣິອະກະຣະນີຍະ

## ວ່າດ້ວຍກິດທີ່ບໍ່ຄວນເຮັດ ໔

## ເລື່ອງຖິ້ມພິກຂຸບວດໃໝ່ໄວ້ຕາມລໍາພັງ

[໑໘໙] ສະໄໝນັ້ນ ພິກຂຸທັງຫຼາຍ ໃຫ້ພິກຂຸອົງໜຶ່ງອຸປະສົມບົດແລ້ວ ຕິດຕາມມາຕາມຫຼັງ ພຽງອົງດຽວ ໄດ້ພົບພັນລະຍາເກົ່າໃນລະຫວ່າງທາງ

ນາງໄດ້ຖາມວ່າ “ເວລານີ້ທ່ານບັນພະຊາແລ້ວແມ່ນບໍ?

ພິກຂຸອົງນັ້ນຕອບວ່າ “ແມ່ນແລ້ວ ເຮົາໄດ້ບັນພະຊາແລ້ວ”

ນາງຈຶ່ງເວົ້າຊວນວ່າ “ເມຖຸນທໍາສໍາລັບພວກບັນພະຊິດຫາໄດ້ຍາກ ຂໍທ່ານມາເສບເມຖຸນທໍາກັນເທີ້ນ”

ພິກຂຸອົງນັ້ນ ໄດ້ເສບເມຖຸນທໍາກັບພັນລະຍາເກົ່າແລ້ວ ຈຶ່ງເຮັດໃຫ້ມາຮອດຊ້າ

ພິກຂຸທັງຫຼາຍຖາມວ່າ “ທ່ານ ເປັນຫຍັງ ທ່ານຈຶ່ງມາຮອດຊ້າແນວນີ້”

ພິກຂຸອົງນັ້ນໄດ້ບອກເລື່ອງນັ້ນ ພິກຂຸທັງຫຼາຍ ຈຶ່ງນໍາເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ຊົງອະນຸຍາດໃຫ້ບອກກິດທີ່ບໍ່ຄວນເຮັດ ໔

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ອຸປະສົມບົດແລ້ວໃຫ້ມີພິກຂຸເປັນເພື່ອນ ແລະໃຫ້ບອກກິດທີ່ບໍ່ຄວນເຮັດ ໔ ຢ່າງ ດັ່ງນີ້

໑. ພິກຂຸຜູ້ອຸປະສົມບົດແລ້ວ ບໍ່ເພິ່ງເສບເມຖຸນທໍາ ໂດຍທີ່ສຸດແມ່ນກັບສັດເດຍຣັດສານໂຕແມ່ ພິກຂຸໃດເສບເມຖຸນທໍາ ຍ່ອມບໍ່ເປັນສະມະນະ ບໍ່ເປັນເຊື້ອສາຍພຣະສາກະຍະບຸດ ພິກຂຸເສບເມຖຸນທໍາແລ້ວ ຍ່ອມບໍ່ເປັນສະມະນະ ບໍ່ເປັນເຊື້ອສາຍພຣະສາກະຍະບຸດ ປຽບເໝືອນ ຄົນຖືກຕັດຫົວ ບໍ່ອາດຈະມີ

ຊີວິດຢູ່ໄດ້ ໂດຍການຕໍ່ຫົວຂາດຈາກຮ່າງກາຍນັ້ນ ການເສບເມຖຸນທຳນັ້ນ ອັນທ່ານບໍ່ເພິ່ງເຮັດຈົນຕະຫຼອດຊີວິດ

໒. ພິກຂຸຜູ້ອຸປະສົມບົດແລ້ວ ບໍ່ເພິ່ງຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ ໂດຍສ່ວນແຫ່ງຈິດຄິດຈະລັກ ໂດຍທີ່ສຸດແມ່ນຫຍ້າເສັ້ນດຽວ ພິກຂຸໃດຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ ໂດຍສ່ວນແຫ່ງຈິດຄິດຈະລັກ ໑ ບາດແດ່ ຄວນແກ່ ໑ ບາດແດ່ ເກີນກວ່າ ໑ ບາດແດ່ ຍ່ອມບໍ່ເປັນສະມະນະ ບໍ່ເປັນເຊື້ອສາຍພຣະສາກະຍະບຸດ ພິກຂຸຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ ໂດຍສ່ວນແຫ່ງຈິດຄິດຈະລັກ ໑ ບາດແດ່ ຄວນແກ່ ໑ ບາດແດ່ ເກີນກວ່າ ໑ ບາດແດ່ ຍ່ອມບໍ່ເປັນສະມະນະ ບໍ່ເປັນເຊື້ອສາຍພຣະສາກະຍະບຸດ ປຽບເໝືອນ ໃບໄມ້ຫ່ຽວເຫຼືອງລຸດຈາກຂວັ້ນແລ້ວ ບໍ່ອາດຈະກັບມາເປັນຂອງຂຽວສົດໄດ້ອີກ ການຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ນັ້ນ ອັນທ່ານບໍ່ເພິ່ງເຮັດຈົນຕະຫຼອດຊີວິດ

໓. ພິກຂຸຜູ້ອຸປະສົມບົດແລ້ວ ບໍ່ເພິ່ງຈົງໃຈພາກສັດຈາກຊີວິດໂດຍທີ່ສຸດແມ່ນມັບຮອດມົດດຳ ມົດແດງ ພິກຂຸໃດຈົງໃຈພາກກາຍມະນຸດຈາກຊີວິດໂດຍທີ່ສຸດຢູ່ໃນທ້ອງໃຫ້ຕົກໄປ ຍ່ອມບໍ່ເປັນສະມະນະ ບໍ່ເປັນເຊື້ອສາຍພຣະສາກະຍະບຸດ ພິກຂຸຈົງໃຈພາກກາຍມະນຸດເສຍຈາກຊີວິດ ຍ່ອມບໍ່ເປັນສະມະນະ ບໍ່ເປັນເຊື້ອສາຍພຣະສາກະຍະບຸດ ປຽບເໝືອນ ແຜ່ນສິລາໜາແຕກອອກເປັນ ໒ ສ່ຽງ ຈະປະສານໃຫ້ສະນິດເປັນແຜ່ນດຽວກັນອີກບໍ່ໄດ້ ການຈົງໃຈພາກກາຍມະນຸດເສຍຈາກຊີວິດນັ້ນ ອັນທ່ານບໍ່ເພິ່ງເຮັດຈົນຕະຫຼອດຊີວິດ

໔. ພິກຂຸຜູ້ອຸປະສົມບົດແລ້ວ ບໍ່ເພິ່ງກ່າວອວດອຸດຕະຣິມະນຸດສະທຳໂດຍທີ່ສຸດແມ່ນເວົ້າວ່າ ຂ້າພະເຈົ້າຍິນດີໃນເຮືອນວ່າງ ພິກຂຸໃດມີຄວາມປາຖະໜາຊົ່ວຖືກຄວາມຍາກຄອບງຳ ກ່າວອວດອຸດຕະຣິມະນຸດສະທຳທີ່ບໍ່ມີຢູ່ ບໍ່ເປັນຈິງ ຄືຊານກໍດີ ວິໂມກກໍດີ ສະມາທິກໍດີ ສະມາບັດກໍດີ ມັກກໍດີ ຜົນກໍດີ ຍ່ອມບໍ່ເປັນສະມະນະ ບໍ່ເປັນເຊື້ອສາຍພຣະສາກະຍະບຸດ ພິກຂຸມີຄວາມປາຖະໜາຊົ່ວ ຖືກຄວາມຍາກຄອບງຳ ກ່າວອວດອຸດຕະຣິມະນຸດສະທຳທີ່ບໍ່ມີຢູ່ ບໍ່ເປັນຈິງ ຍ່ອມບໍ່ເປັນສະມະນະ ບໍ່ເປັນເຊື້ອສາຍພຣະສາກະຍະບຸດ ປຽບເໝືອນຕົ້ນຕານປາຍກຸດທີ່ບໍ່ອາດຈະປົ່ງຂຶ້ນໄດ້ອີກ ການກ່າວອວດອຸດຕະຣິມະນຸດສະທຳນັ້ນ ອັນທ່ານບໍ່ເພິ່ງເຮັດຈົນຕະຫຼອດຊີວິດ

**ຈັດຕາຣິອະກະຣະນີຍະ ຈົບ**

# ໙໙. ອາປັດຕິອະທັດສະນະອຸກຂິຕະກະວັດຖຸ

## ວ່າດ້ວຍພິກຂຸຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ເຫັນອາບັດ

[໑໑໐] ສະໄໝນັ້ນ ພິກຂຸອົງໜຶ່ງ ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ເຫັນອາບັດ ໄດ້ສິກອອກໄປ ເຂົາກັບມາຂໍອຸປະສົມບົດກັບພິກຂຸທັງຫຼາຍອີກ ພິກຂຸທັງຫຼາຍ ຈຶ່ງນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຊົງສະແດງວິທີປະຕິບັດດັ່ງນີ້

ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ພິກຂຸຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ເຫັນອາບັດ ໄດ້ສິກອອກໄປແລ້ວ ເຂົາກັບມາຂໍອຸປະສົມບົດກັບພິກຂຸທັງຫຼາຍອີກ ເພິ່ງຖາມເຂົາວ່າ ເຈົ້າເຫັນອາບັດນັ້ນແລ້ວບໍ? ຖ້າເຂົາຕອບວ່າ ຂ້າພະເຈົ້າເຫັນ ຂ້ານ້ອຍ ເພິ່ງໃຫ້ບັນພະຊາ ຖ້າເຂົາຕອບວ່າ ຂ້າພະເຈົ້າບໍ່ເຫັນ ຂ້ານ້ອຍ ບໍ່ເພິ່ງໃຫ້ບັນພະຊາ ເມື່ອໃຫ້ບັນພະຊາແລ້ວເພິ່ງຖາມວ່າ ເຈົ້າເຫັນອາບັດນັ້ນແລ້ວບໍ? ຖ້າເຂົາຕອບວ່າ ຂ້າພະເຈົ້າເຫັນ ຂ້ານ້ອຍ ເພິ່ງໃຫ້ອຸປະສົມບົດ ຖ້າເຂົາຕອບວ່າ ຂ້າພະເຈົ້າບໍ່ເຫັນ ຂ້ານ້ອຍ ບໍ່ເພິ່ງໃຫ້ອຸປະສົມບົດ ເມື່ອໃຫ້ອຸປະສົມບົດແລ້ວເພິ່ງຖາມວ່າ ທ່ານເຫັນອາບັດນັ້ນບໍ? ຖ້າເຂົາຕອບວ່າ ຂ້າພະເຈົ້າເຫັນ ຂ້ານ້ອຍ ເພິ່ງຮຽກເຂົ້າໝູ່ ຖ້າເຂົາຕອບວ່າ ຂ້າພະເຈົ້າບໍ່ເຫັນ ຂ້ານ້ອຍ ບໍ່ເພິ່ງຮຽກເຂົ້າໝູ່ ເມື່ອຮຽກເຂົ້າໝູ່ແລ້ວເພິ່ງຖາມວ່າ ທ່ານເຫັນອາບັດນັ້ນບໍ? ຖ້າເຂົາເຫັນເອງ ນັ້ນເປັນການດີ ຖ້າບໍ່ເຫັນ ເມື່ອໄດ້ສາມັກຄີ ເພິ່ງລົງອຸກເຂປະນີຍະກຳອີກ ເມື່ອບໍ່ໄດ້ສາມັກຄີ ບໍ່ຕ້ອງອາບັດຍ້ອນກິນຮ່ວມ ແລະຢູ່ຮ່ວມ

## ເລື່ອງພິກຂຸຖືກລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ໄດ້ສິກອອກໄປ ເຂົາກັບມາຂໍອຸປະສົມບົດກັບພິກຂຸທັງຫຼາຍອີກ ເພິ່ງຖາມເຂົາວ່າ ເຈົ້າຈັກເຮັດຄືນອາບັດນັ້ນບໍ? ຖ້າເຂົາຕອບວ່າ ຂ້າພະເຈົ້າຈັກເຮັດຄືນ ຂ້ານ້ອຍ ເພິ່ງໃຫ້ບັນພະຊາ ຖ້າເຂົາຕອບວ່າ ຂ້າພະເຈົ້າຈັກບໍ່ເຮັດຄືນ ຂ້ານ້ອຍ ບໍ່ເພິ່ງໃຫ້ບັນພະຊາ ເມື່ອໃຫ້ບັນພະຊາແລ້ວເພິ່ງຖາມວ່າ ເຈົ້າຈັກເຮັດຄືນອາບັດນັ້ນບໍ? ຖ້າເຂົາຕອບວ່າ ຂ້າພະເຈົ້າຈັກເຮັດຄືນ ຂ້ານ້ອຍ ເພິ່ງໃຫ້ອຸປະສົມບົດ ຖ້າເຂົາຕອບວ່າ ຂ້າພະເຈົ້າຈະບໍ່ເຮັດຄືນ ບໍ່ເພິ່ງໃຫ້ອຸປະສົມບົດ ເມື່ອໃຫ້ອຸປະສົມບົດແລ້ວ ເພິ່ງຖາມວ່າ ທ່ານຈັກເຮັດຄືນອາບັດນັ້ນບໍ? ຖ້າເຂົາຕອບວ່າ ຂ້າພະເຈົ້າຈັກເຮັດຄືນ ຂ້ານ້ອຍ ເພິ່ງຮຽກເຂົ້າໝູ່ ຖ້າເຂົາຕອບວ່າ ຂ້າພະເຈົ້າຈະບໍ່ເຮັດຄືນ ບໍ່ເພິ່ງຮຽກເຂົ້າໝູ່ ເມື່ອຮຽກເຂົ້າໝູ່ແລ້ວເພິ່ງກ່າວວ່າ ຈົ່ງເຮັດຄືນອາບັດນັ້ນສາ ຖ້າເຂົາເຮັດຄືນ ນັ້ນເປັນການດີ ຖ້າບໍ່ເຮັດຄືນ ເມື່ອໄດ້ສາມັກຄີ ເພິ່ງລົງອຸກເຂປະນີຍະກຳອີກ ເມື່ອບໍ່ໄດ້ສາມັກຄີ ບໍ່ຕ້ອງອາບັດຍ້ອນກິນຮ່ວມ ແລະຢູ່ຮ່ວມ

## ເລື້ອງພິກຂຸຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບສິກອອກໄປ ເຂົາກັບມາຂໍອຸປະສົມບົດກັບພິກຂຸທັງຫຼາຍອີກ ເພິ່ງຖາມເຂົາວ່າ ເຈົ້າຈັກສະລະທິດຖິບາບນັ້ນບໍ? ຖ້າເຂົາຕອບວ່າ ຂ້າພະເຈົ້າຈັກສະລະ ຂ້ານ້ອຍ ເພິ່ງໃຫ້ບັນພະຊາ ຖ້າເຂົາຕອບວ່າ ຂ້າພະເຈົ້າຈັກບໍ່ສະລະ ຂ້ານ້ອຍ ບໍ່ເພິ່ງໃຫ້ບັນພະຊາ ເມື່ອໃຫ້ບັນພະຊາແລ້ວເພິ່ງຖາມວ່າ ເຈົ້າຈັກສະລະທິດຖິບາບນັ້ນບໍ? ຖ້າເຂົາຕອບວ່າ ຂ້າພະເຈົ້າຈັກສະລະ ຂ້ານ້ອຍ ເພິ່ງໃຫ້ອຸປະສົມບົດ ຖ້າເຂົາຕອບວ່າ ຂ້າພະເຈົ້າຈັກບໍ່ສະລະ ບໍ່ເພິ່ງໃຫ້ອຸປະສົມບົດ ເມື່ອໃຫ້ອຸປະສົມບົດແລ້ວ ເພິ່ງຖາມວ່າ ທ່ານຈັກສະລະທິດຖິບາບນັ້ນບໍ? ຖ້າເຂົາຕອບວ່າ ຂ້າພະເຈົ້າຈັກສະລະ ຂ້ານ້ອຍ ເພິ່ງຮຽກເຂົ້າໝູ່ ຖ້າເຂົາຕອບວ່າ ຂ້າພະເຈົ້າຈັກບໍ່ສະລະ ບໍ່ເພິ່ງຮຽກເຂົ້າໝູ່

ເມື່ອຮຽກເຂົ້າໝູ່ແລ້ວເພິ່ງກ່າວວ່າ ຈົ່ງສະລະທິດຖິບາບນັ້ນສາ ຖ້າເຂົາສະລະ ນັ້ນເປັນການດີ ຖ້າບໍ່ສະລະ ເມື່ອໄດ້ສາມັກຄີ ເພິ່ງລົງອຸກເຂປະນີຍະກຳອີກ ເມື່ອບໍ່ໄດ້ສາມັກຄີ ບໍ່ຕ້ອງອາບັດຍ້ອນກິນຮ່ວມ ແລະຢູ່ຮ່ວມ

**ເລື້ອງພິກຂຸຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ເຫັນອາບັດ ຈົບ**

**ມະຫາຂັນທະກະທີ ໑ ຈົບ**

# ໜ໗. ລວມເລື້ອງທີ່ມີໃນມະຫາຂັນທະກະ

[໑໓໑] ຍ້ອນພິກຂຸຜູ້ສະຫຼາດໃນພຣະວິໄນ ອັນມີປະໂຫຍດຫຼາຍ
ອັນນຳຄວາມສຸກມາໃຫ້ພິກຂຸຜູ້ມີສິນດີງາມ ໃນການຂົ່ມພິກຂຸ
ຜູ້ປາຖະໜາຕ່ຳຊາມ ໃນການຍົກຍ້ອງພິກຂຸຜູ້ມີຄວາມລະອາຍ
ໃນມະຫາວັກຂັນທະກະ ແລະຈູລະວັກຂັນທະກະ ໃນພິກຂຸວິພັງ
ແລະພິກຂຸນີວິພັງໃນຄຳພີບໍຣິວານ ໃນພິກຂຸປາຕິໂມກ
ແລະພິກຂຸນີປາຕິໂມກ ອັນຊົງໄວ້ເຊິ່ງພຣະສາດສະໜາ

ອັນເປັນພຸດທະວິໄສແຫ່ງພຣະສັບພັນຍູ
ບໍ່ແມ່ນວິໄສຂອງບຸກຄົນທົ່ວໄປ ອັນກະເສມ
ທີ່ຊົງບັນຍັດໄວ້ແລ້ວ ແລະປາສະຈາກຂໍ້ສົງໄສ
ຍ່ອມປະຕິບັດໂດຍແຍບຄາຍ ນັບວ່າເປັນຜູ້ເຮັດປະໂຫຍດ

ຜູ້ໃດ ບໍ່ຮູ້ຈັກງົວ ຜູ້ນັ້ນຍ່ອມຮັກສາຝູງງົວໄວ້ບໍ່ໄດ້ ສັນໃດ
ພິກຂຸກໍສັນນັ້ນ ເມື່ອບໍ່ຮູ້ຈັກສິນ ແລ້ວຈະເພິ່ງຮັກສາສັງວອນໄດ້ແນວໃດ

ເມື່ອພຣະສູດ ແລະພຣະອະພິທຳສູນຫາຍໄປແລ້ວ
ພຣະວິໄນຍັງບໍ່ເສື່ອມສູນ ພຣະສາດສະໜາຍ່ອມດຳລົງຢູ່ໄດ້

ຍ້ອນແນວນັ້ນ ຂ້າພະເຈົ້າຈັກກ່າວຫົວຂໍ້ເຫດແຫ່ງການສັງຄາຍະນາ
ຕາມຄວາມຮູ້ໂດຍລຳດັບ ຂໍທ່ານທັງຫຼາຍ ຈົ່ງຟັງຂ້າພະເຈົ້າກ່າວ

ການທີ່ຈະສະແດງ ວັດຖຸ ນິທານ ອາບັດ ໄນ ແລະເປີຍຍາລະ
ໃຫ້ໝົດສິ້ນນັ້ນ ເຮັດໄດ້ຍາກ ທ່ານທັງຫຼາຍຈົ່ງຮູ້ຂໍ້ນັ້ນໂດຍໄນນີ້ເທີ້ນ

## ໃນຂັນທະກະມີ ໑໗໔ ເລື້ອງ ຄື

ເລື້ອງເຫດການທຳອິດຕັດສະຣູ້ຢູ່ຂ່ວງຕົ້ນໂພທິພຶກ
ເລື້ອງເຫດການຂະນະປະທັບຢູ່ ຂ່ວງຕົ້ນອະຊະປາລະນິໂຄດ
ເລື້ອງເຫດການຂະນະປະທັບຢູ່ ຂ່ວງຕົ້ນມຸດຈະລິນ
ເລື້ອງເຫດການຂະນະປະທັບຢູ່ ຂ່ວງຕົ້ນຣາຊາຍະຕະນະ
ເລື້ອງທ້າວສະຫຳບໍດີພົມອາຣາດທະນາໃຫ້ຊົງສະແດງທຳ
ເລື້ອງອາລາຣະດາບົດ ກາລາມະໂຄດ
ເລື້ອງອຸດທະກະດາບົດ ຣາມະບຸດ ເລື້ອງອຸປະກາຊີວົກ

ເລື້ອງຊົງສະແດງທຳແກ່ພຣະປັນຈະວັກຄີ ຄື
ໂກນທັນຍະ ວັບປະ ພັນທິຍະ ມະຫານາມະ ອັດສະຊິ
ເລື້ອງຍະສະກຸນລະບຸດ ເລື້ອງສະຫາຍ ໔ ຄົນຂອງພຣະຍະສະ
ເລື້ອງສະຫາຍ ໕໐ ຄົນຂອງພຣະຍະສະ
ເລື້ອງສົ່ງພຣະອະຣະຫັນ ໖໐ ອົງໄປທຸກທິດ

ເລື້ອງມານ ເລື້ອງຊົງສະແດງທຳໂຜດພັດທະວັກຄີ ໓໐ ຄົນ
ເລື້ອງປາຕິຫານຢູ່ເຂດອຸຣຸເວລາ ເລື້ອງຊະດິນ ໓ ພີ່ນ້ອງ
ເລື້ອງໂຮງບູຊາໄຟ ເລື້ອງທ້າວມະຫາຣາດທັງ ໔ ເລື້ອງທ້າວສັກກະ
ເລື້ອງທ້າວສະຫຳບໍດີພົມ ເລື້ອງຊາວອັງຄະ ແລະມະຄົດ

ເລື້ອງຜ້າບັງສຸກຸນ ເລື້ອງສະໂບກຂະຣະນີ ເລື້ອງທຸບຜ້າບັງສຸກຸນເທິງສິລາ
ເລື້ອງພາດຜ້າບັງສຸກຸນເທິງຕົ້ນກຸ່ມ ເລື້ອງຕາກຜ້າບັງສຸກຸນເທິງແຜ່ນສິລາ
ເລື້ອງຕົ້ນຫວ້າ ເລື້ອງຕົ້ນໝາກມ່ວງ ເລື້ອງຕົ້ນໝາກຂາມປ້ອມ
ເລື້ອງດອກປາຣິສັດ

ເລື້ອງພວກຊະດິນຜ່າຟືນ ເລື້ອງພວກຊະດິນດັງໄຟ

ເລື້ອງພວກຊະດິນດັບໄຟ ເລື້ອງພວກຊະດິນດຳນ້ຳ ເລື້ອງພາຊະນະໃສ່ໄຟ
ເລື້ອງຝົນຕົກນ້ຳຖ້ວມ ເລື້ອງຊົງສະແດງອາທິດຕະປະຣິຍາຍະສູດໃກ້ແມ່ນ້ຳຄະຍາ
ເລື້ອງປະທັບໃນສວນຕານໜຸ່ມ ເລື້ອງພຣະເຈົ້າພິມພິສານຈອມທັບມະຄົດຣັດ

ເລື້ອງສາຣີບຸດແລະໂມກຄັນລານະບັນພະຊາ
ເລື້ອງກຸນລະບຸດມີຊື່ສຽງບັນພະຊາ
ເລື້ອງພິກຂຸນຸ່ງຫົ່ມບໍ່ຮຽບຮ້ອຍ ເລື້ອງການປະນາມ
ເລື້ອງພາມຈ່ອຍຜອມຍ້ອນບໍ່ໄດ້ບວດ

ເລື້ອງພິກຂຸປະພຶດບໍ່ສົມຄວນ
ເລື້ອງພາມບວດຍ້ອນເຫັນແກ່ທ້ອງ
ເລື້ອງການບອກນິດໄສແກ່ມານົບກ່ອນບວດ ເລື້ອງໃຫ້ອຸປະສົມບົດດ້ວຍຄະນະ
ເລື້ອງອຸປັດຊາມີພັນສາດຽວໃຫ້ກຸນລະບຸດອຸປະສົມບົດ
ເລື້ອງອຸປັດຊາໂງ່ຈ້າ ເລື້ອງອຸປັດຊາຫຼີກໄປ
ເລື້ອງຖືນິດໄສຢູ່ ໑໐ ພັນສາ

ເລື້ອງອັນເຕວາສິກບໍ່ປະພຶດສົມຄວນ
ເລື້ອງຊົງອະນຸຍາດໃຫ້ປະນາມ ເລື້ອງອາຈານໂງ່ຈ້າ
ເລື້ອງນິດໄສລະງັບຈາກອຸປັດຊາແລະອາຈານ
ເລື້ອງພິກຂຸປະກອບດ້ວຍອົງ ໕ ເລື້ອງພິກຂຸປະກອບດ້ວຍອົງ ໖
ເລື້ອງໃຫ້ຜູ້ເຄີຍເປັນອັນຍະເດຍຣະຖີອຸປະສົມບົດ
ເລື້ອງຜູ້ເຄີຍເປັນອັນຍະເດຍຣະຖີເປືອຍກາຍ
ເລື້ອງຜູ້ເຄີຍເປັນເດຍຣະຖີເປືອຍກາຍບໍ່ແຖຜົມ
ເລື້ອງໃຫ້ຊະດິນບູຊາໄຟອຸປະສົມບົດ ເລື້ອງອັນຍະເດຍຣະຖີສາກະຍະ

ເລື້ອງອາພາດ ໕ ທີ່ນະຄອນຣາຊະຄຶ ເລື້ອງຣາຊະພັດບັນພະຊາ
ເລື້ອງໂຈນອົງຄຸລິມານບັນພະຊາ ເລື້ອງພຣະເຈົ້າພິມພິສານຊົງອະນຸຍາດ
ເລື້ອງໂຈນແຫກຄຸກບັນພະຊາ ເລື້ອງໂຈນຖືກອອກໝາຍຈັບບັນພະຊາ
ເລື້ອງບຸຣຸດຖືກຄ້ຽນຕີດ້ວຍຫວາຍບັນພະຊາ

ເລື້ອງບຸຣຸດຖືກສັກໝາຍໂທດບັນພະຊາ ເລື້ອງລູກໜີ້ບັນພະຊາ
ເລື້ອງຂ້າທາດບັນພະຊາ ເລື້ອງບຸດຊ່າງຄຳຜົມຈຸກ ໕ ຫຍ່ອມບັນພະຊາ
ເລື້ອງເດັກຊາຍອຸບາລີບັນພະຊາ
ເລື້ອງໃຫ້ເດັກອາຍຸຍ່ອນກວ່າ ໑໕ ປີຂອງຕະກູນມີສັດທາບັນພະຊາ

ເລື້ອງສາມະເນນກັນຕະກະ ເລື້ອງທິດທັງຫຼາຍຄັບແຄບ
ເລື້ອງການຢູ່ຖືນິດໄສ ເລື້ອງຣາຫຸນກຸມານ

ເລື້ອງສິກຂາບົດຂອງສາມະເນນ ເລື້ອງສາມະເນນຢູ່ຢ່າງບໍ່ເຄົາລົບ
ເລື້ອງການລົງທັນດະກຳສາມະເນນ
ເລື້ອງລົງທັນດະກຳຫ້າມສາມະເນນເຂົ້າສັງຄາຣາມທຸກແຫ່ງ
ເລື້ອງລົງທັນດະກຳຫ້າມສັນທາງປາກ
ເລື້ອງການກັກໂຕສາມະເນນໂດຍບໍ່ບອກພຣະອຸປັດຊາ
ເລື້ອງການເກ້ຍກ່ອມສາມະເນນ ເລື້ອງນາສະນະສາມະເນນກັນຕະກະ

ເລື້ອງບັນເດາະບັນພະຊາ ເລື້ອງຄົນລັກເພດບັນພະຊາ
ເລື້ອງຄົນເຂົ້າຣີດເດຍຣະຖີບັນພະຊາ ເລື້ອງນາກແປງກາຍມາບວດ
ເລື້ອງຄົນຂ້າມານດາມາຂໍບວດ ເລື້ອງຄົນຂ້າບິດາມາຂໍບວດ
ເລື້ອງຄົນຂ້າພຣະອະຣະຫັນມາຂໍບວດ
ເລື້ອງຄົນປະທຸດສະຮ້າຍພິກຂຸນີມາຂໍບວດ
ເລື້ອງຄົນທຳລາຍສົງມາຂໍບວດ
ເລື້ອງຄົນທຳຮ້າຍພຣະພຸດທະເຈົ້າຈົນຫໍ້ພຣະໂລຫິດມາຂໍບວດ
ເລື້ອງອຸພະໂຕພະຍັນຊະນະກະບັນພະຊາ

ເລື້ອງຄົນບໍ່ມີອຸປັດຊາບັນພະຊາ
ເລື້ອງໃຫ້ຄົນມີສົງເປັນອຸປັດຊາອຸປະສົມບົດ
ເລື້ອງໃຫ້ຄົນມີຄະນະເປັນອຸປັດຊາອຸປະສົມບົດ
ເລື້ອງໃຫ້ຄົນມີບັນເດາະເປັນອຸປັດຊາເປັນຕົ້ນອຸປະສົມບົດ
ເລື້ອງໃຫ້ຄົນບໍ່ມີບາດອຸປະສົມບົດ ເລື້ອງໃຫ້ຄົນບໍ່ມີຈີວອນອຸປະສົມບົດ
ເລື້ອງໃຫ້ຄົນບໍ່ມີທັງບາດແລະຈີວອນອຸປະສົມບົດ
ເລື້ອງໃຫ້ຄົນຢືມບາດເຂົາມາອຸປະສົມບົດ
ເລື້ອງໃຫ້ຄົນຢືມຈີວອນເຂົາມາອຸປະສົມບົດ
ເລື້ອງໃຫ້ຄົນຢືມບາດແລະຈີວອນເຂົາມາອຸປະສົມບົດ

ເລື້ອງໃຫ້ຄົນມືກຸດບັນພະຊາ ເລື້ອງໃຫ້ຄົນຕີນກຸດບັນພະຊາ
ເລື້ອງໃຫ້ຄົນມືແລະຕີນກຸດບັນພະຊາ ເລື້ອງໃຫ້ຄົນຫູວິ່ນບັນພະຊາ
ເລື້ອງໃຫ້ຄົນດັງແຫວ່ງບັນພະຊາ ເລື້ອງໃຫ້ຄົນຫູວິ່ນແລະດັງແຫວ່ງບັນພະຊາ
ເລື້ອງໃຫ້ຄົນນິ້ວມືນິ້ວຕີນຂາດບັນພະຊາ

ເລື້ອງໃຫ້ຄົນງ່າມມືງ່າມຕີນຂາດບັນພະຊາ ເລື້ອງໃຫ້ຄົນເອັນຂາດບັນພະຊາ
ເລື້ອງໃຫ້ຄົນມືມືເປັນແຜ່ນບັນພະຊາ ເລື້ອງໃຫ້ຄົນຄ່ອມບັນພະຊາ
ເລື້ອງໃຫ້ຄົນເຕ້ຍບັນພະຊາ

ເລື້ອງໃຫ້ຄົນຄໍພອກບັນພະຊາ ເລື້ອງໃຫ້ຄົນຖືກສັກໝາຍໂທດບັນພະຊາ
ເລື້ອງໃຫ້ຄົນມີຮອຍຄຽ້ນຕີດ້ວຍຫວາຍບັນພະຊາ
ເລື້ອງໃຫ້ຄົນມີໝາຍຈັບບັນພະຊາ ເລື້ອງໃຫ້ຄົນຕີນປຸກບັນພະຊາ
ເລື້ອງໃຫ້ຄົນມີໂຣກຊຳເຮື້ອບັນພະຊາ
ເລື້ອງໃຫ້ຄົນມີຮູບຮ່າງບໍ່ສົມປະກອບບັນພະຊາ
ເລື້ອງໃຫ້ຄົນຕາບອດຂ້າງດຽວບັນພະຊາ

ເລື້ອງໃຫ້ຄົນເປ້ຍບັນພະຊາ ເລື້ອງໃຫ້ຄົນງ່ອຍບັນພະຊາ
ເລື້ອງໃຫ້ຄົນເປັນໂຣກອຳມະພາດບັນພະຊາ
ເລື້ອງໃຫ້ຄົນເຄື່ອນໄຫວບໍ່ໄດ້ບັນພະຊາ
ເລື້ອງໃຫ້ຄົນຊະຣາທຸບພົນລະພາບບັນພະຊາ
ເລື້ອງໃຫ້ຄົນຕາບອດ ໒ ຂ້າງບັນພະຊາ ເລື້ອງໃຫ້ຄົນກືກບັນພະຊາ

ເລື້ອງໃຫ້ຄົນຫູໜວກບັນພະຊາ ເລື້ອງໃຫ້ຄົນທັງບອດທັງກືກບັນພະຊາ
ເລື້ອງໃຫ້ຄົນທັງບອດທັງໜວກບັນພະຊາ
ເລື້ອງໃຫ້ຄົນທັງກືກທັງໜວກບັນພະຊາ
ເລື້ອງໃຫ້ຄົນທັງບອດໃບ້ແລະໜວກບັນພະຊາ
ເລື້ອງໃຫ້ນິດໄສແກ່ອະລັດຊີ ເລື້ອງຖືນິດໄສອະລັດຊີ

ເລື້ອງພິກຂຸຜູ້ເດີນທາງໄກບໍ່ຕ້ອງຖືນິດໄສ
ເລື້ອງພິກຂຸໄຂ້ບໍ່ຕ້ອງຖືນິດໄສ
ເລື້ອງພິກຂຸຢູ່ປ່າບໍ່ຕ້ອງຖືນິດໄສຈົນກວ່າອາຈານຜູ້ໃຫ້ນິດໄສຈະມາ
ເລື້ອງພຣະມະຫາກັດສະປະນິມົນພຣະອານົນມາສູດອະນຸສາວະນາ
ເລື້ອງຍາດກັນອຸປະສົມບົດກ່ອນ
ເລື້ອງອຸປະສົມບົດຄັ້ງລະ ໓ ຄົນໂດຍມີອຸປັດຊາອົງດຽວ
ເລື້ອງພຣະກຸມານກັດສະປະອາຍຸບໍ່ຄົບ ໒໐ ປີອຸປະສົມບົດ

ເລື້ອງຜູ້ຖືກໂຣກບຽດບຽນອຸປະສົມບົດ
ເລື້ອງຖາມອັນຕະຣາຍິກະທຳກັບອຸປະສຳປະທາເປກຂະ
ເລື້ອງສອນຊ້ອມກ່ອນຖາມອັນຕະຣາຍິກະທຳ

ເລື້ອງສອນຊ້ອມໃນທ່າມກາງສົງ  ເລື້ອງພິກຂຸໂງ່ຈ້າສອນຊ້ອມ
ເລື້ອງພິກຂຸຍັງບໍ່ໄດ້ຮັບສົມມຸດສອນຊ້ອມ
ເລື້ອງວິທີສົມມຸດພິກຂຸເປັນຜູ້ສອນຊ້ອມ
ເລື້ອງຫ້າມຜູ້ສອນຊ້ອມກັບອຸປະສໍາປະທາເປກຂະຍ່າງມາພ້ອມກັນ

ເລື້ອງຄໍາຂໍອຸປະສົມບົດເພື່ອຍົກຂຶ້ນເປັນພິກຂຸ
ເລື້ອງຍັດຕິຈະຕຸດຖະກໍາອຸປະສໍາປະທາ  ເລື້ອງຊົງອະນຸຍາດໃຫ້ບອກນິດໄສ ໔
ເລື້ອງຖິ້ມອຸປະສໍາບັນໄວ້ຕາມລໍາພັງ

ເລື້ອງພິກຂຸຖືກສົງອຸກເຂປະນີຍະກໍາຍ້ອນບໍ່ເຫັນອາບັດ
ເລື້ອງພິກຂຸຖືກສົງອຸກເຂປະນີຍະກໍາຍ້ອນບໍ່ເຮັດຄືນອາບັດ
ເລື້ອງພິກຂຸຖືກສົງອຸກເຂປະນີຍະກໍາຍ້ອນບໍ່ສະລະທິດຖິບາບ[໑]

**ມະຫາຂັນທະກະ  ຈົບ**

# ໔. ອຸໂປສະຖະຂັນທະກະ

## ໓໗. ສັນນິປາຕານຸຊານະນາ

### ວ່າດ້ວຍຊົງອະນຸຍາດໃຫ້ສົງປະຊຸມກັນ

### ເລື້ອງປະຣິພາຊົກອັນຍະເດຍຣະຖີ

[໑໓໔] ສະໄໝນັ້ນ ພຣະຜູ້ມີພຣະພາກ ພຸດທະເຈົ້າປະທັບຢູ່ ພູເຂົາຄິດຊະກູດ ເຂດນະຄອນຣາຊະຄຶ ຄັ້ງນັ້ນ ພວກປະຣິພາຊົກອັນຍະເດຍຣະຖີ ປະຊຸມກັນກ່າວທຳປະຊາຊົນພາກັນເຂົ້າໄປຫາເພື່ອຟັງທຳ ປະຊາຊົນເຫຼົ່ານັ້ນໄດ້ຄວາມຮັກຄວາມເຫຼື້ອມໃສໃນພວກປະຣິພາຊົກອັນຍະເດຍຣະຖີ ພວກປະຣິພາຊົກອັນຍະເດຍຣະຖີກໍໄດ້ສັດທາເພີ້ມຂຶ້ນ

### ເລື້ອງພຣະເຈົ້າພິມພິສານຈອມທັບມະຄົດຣັດ

ສະໄໝນັ້ນ ພຣະເຈົ້າພິມພິສານຈອມທັບມະຄົດຣັດສະເດັດຫຼີບຫຼີກຢູ່ໃນທີ່ສະຫງັດ ຊົງເກີດຄວາມຄິດຄຳນຶງຂຶ້ນໃນພຣະທະໄທແນວນີ້ວ່າ "ດຽວນີ້ ພວກປະຣິພາຊົກອັນຍະເດຍຣະຖີປະຊຸມກັນກ່າວທຳໃນວັນ ໑໔ ຄ່ຳ ໑໕ ຄ່ຳ ແລະ ໘ ຄ່ຳ ແຫ່ງປັກ ມະນຸດທັງຫຼາຍພາກັນເຂົ້າໄປຫາເພື່ອຟັງທຳ ຄົນເຫຼົ່ານັ້ນ ໄດ້ຄວາມຮັກຄວາມເຫຼື້ອມໃສໃນພວກປະຣິພາຊົກອັນຍະເດຍຣະຖີ ພວກປະຣິພາຊົກອັນຍະເດຍຣະຖີກໍໄດ້ສັດທາເພີ້ມຂຶ້ນ ແນວໃດກໍດີ ແມ່ນພິກຂຸທັງຫຼາຍກໍຄວນປະຊຸມກັນໃນວັນ ໑໔ ຄ່ຳ ໑໕ ຄ່ຳ ແລະ ໘ ຄ່ຳ ແຫ່ງປັກແດ່" ຈຶ່ງສະເດັດໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວ ໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວປະທັບນັ່ງໃນບ່ອນສົມຄວນ ພຣະເຈົ້າພິມພິສານຈອມທັບມະຄົດຣັດຜູ້ປະທັບນັ່ງໃນບ່ອນສົມຄວນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ພຣະອົງຜູ້ຈະເລີນ ຂ້ານ້ອຍຫຼີບຫຼີກຢູ່ໃນທີ່ສະຫງັດ ເກີດຄວາມຄິດຄຳນຶງຂຶ້ນໃນໃຈແນວນີ້ວ່າ ດຽວນີ້ພວກປະຣິພາຊົກອັນຍະເດຍຣະຖີ ປະຊຸມກັນກ່າວທຳ ໃນວັນ ໑໔ ຄ່ຳ ໑໕ ຄ່ຳ ແລະ ໘ ຄ່ຳ ແຫ່ງປັກ ປະຊາຊົນພາກັນເຂົ້າໄປຫາເພື່ອຟັງທຳ ປະຊາຊົນເຫຼົ່ານັ້ນໄດ້ຄວາມຮັກຄວາມເຫຼື້ອມໃສໃນພວກປະຣິພາຊົກອັນຍະເດຍຣະຖີ ພວກປະຣິພາຊົກອັນຍະເດຍຣະຖີກໍໄດ້ສັດທາເພີ້ມຂຶ້ນ ແນວໃດກໍດີ ແມ່ນພິກຂຸທັງຫຼາຍກໍຄວນປະຊຸມກັນໃນວັນ ໑໔ ຄ່ຳ ໑໕ ຄ່ຳ ແລະ ໘ ຄ່ຳ ແຫ່ງປັກແດ່ ຂ້ານ້ອຍ ຂໍປະທານພຣະວະໂຣກາດ ຂໍໃຫ້ພິກຂຸທັງຫຼາຍ ເພິ່ງປະຊຸມກັນໃນວັນ ໑໔ ຄ່ຳ ໑໕ ຄ່ຳ ແລະ ໘ ຄ່ຳ ແຫ່ງປັກດ້ວຍເທີ້ນ ຂ້ານ້ອຍ

## ຊົງສະແດງທຳມີກະຖາ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຊີ້ແຈ່ງໃຫ້ພຣະເຈົ້າພິມພິສານຈອມທັບມະຄົດຣັດເຫັນແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ພຣະຫະໄທໃຫ້ອາດຫານແກ່ກ້າ ປອບປະໂລມພຣະຫະໄທໃຫ້ສົດຊື່ນລ່າເລີງດ້ວຍທຳມີກະຖາ ເມື່ອພຣະອົງຜູ້ເຊິ່ງພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫັນແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມພຣະຫະໄທໃຫ້ສົດຊື່ນລ່າເລີງດ້ວຍທຳມີກະຖາ ກໍສະເດັດລຸກຈາກອາສະນະຖວາຍບັງຄົມຊົງກະທຳປະທັກຂິນສະເດັດຫຼີກໄປ

## ຊົງອະນຸຍາດວັນປະຊຸມ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ປະຊຸມກັນໃນວັນ ໑໔ ຄ່ຳ ໑໕ ຄ່ຳ ແລະ ໘ ຄ່ຳ ແຫ່ງປັກ”

## ເລື້ອງພິກຂຸປະຊຸມນັ່ງນິ່ງ

ສະໄໝນັ້ນ ພິກຂຸທັງຫຼາຍຄິດກັນວ່າ “ພຣະຜູ້ມີພຣະພາກເຈົ້າ ຊົງອະນຸຍາດໃຫ້ປະຊຸມກັນໃນວັນ ໑໔ ຄ່ຳ ໑໕ ຄ່ຳ ແລະ ໘ ຄ່ຳ ແຫ່ງປັກ” ຈຶ່ງປະຊຸມກັນໃນວັນ ໑໔ ຄ່ຳ ໑໕ ຄ່ຳ ແລະ ໘ ຄ່ຳ ແຫ່ງປັກ ແລ້ວນັ່ງນິ່ງ

ປະຊາຊົນເຂົ້າໄປຫາພິກຂຸເຫຼົ່ານັ້ນ ເພື່ອຟັງທຳ ປະຊາຊົນເຫຼົ່ານັ້ນພາກັນຕຳໜິ ປະນາມໂພນທະນາວ່າ “ເປັນຫຍັງ ພຣະສະມະນະເຊື້ອສາຍພຣະສາກຍບຸດທັງຫຼາຍປະຊຸມກັນໃນວັນ ໑໔ ຄ່ຳ ໑໕ ຄ່ຳ ແລະ ໘ ຄ່ຳ ແຫ່ງປັກແລ້ວ ຈຶ່ງນັ່ງນິ່ງເໝືອນໝູ°ປາກກືກນໍ ທຳມະດາ ວ່າຜູ້ປະຊຸມກັນກໍຄວນກ່າວທຳບໍ່ແມ່ນບໍ?

ພິກຂຸທັງຫຼາຍ ໄດ້ຍິນປະຊາຊົນເຫຼົ່ານັ້ນ ຕຳໜິ ປະນາມ ໂພນທະນາຢູ່ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ເລື້ອງຊົງອະນຸຍາດໃຫ້ກ່າວທຳໃນວັນປະຊຸມ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ປະຊຸມກັນກ່າວທຳໃນວັນ ໑໔ ຄ່ຳ ໑໕ ຄ່ຳ ແລະ ໘ ຄ່ຳ ແຫ່ງປັກ”

# ໓໓. ປາຕິໂມກຂຸດເທສານຸຊານະນາ
## ວ່າດ້ວຍການຊົງອະນຸຍາດປາຕິໂມກຂຸດເທດ
## ເລື້ອງພຣະຜູ້ມີພຣະພາກເຈົ້າຊົງຫຼີບຫຼີກຢູ່ໃນທີ່ສະຫງັດ

[໑໓໓] ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດຫຼີບຫຼີກຢູ່ໃນທີ່ສະຫງັດ ໄດ້ຊົງເກີດຄວາມຄຶດຂຶ້ນໃນພຣະຫະໄທແນວນີ້ວ່າ "ຖ້າຈັ່ງໃດ ເຮົາເພິ່ງອະນຸຍາດສິກຂາບົດທີ່ໄດ້ບັນຍັດໄວ້ແກ່ພິກຂຸທັງຫຼາຍ ໃຫ້ເປັນປາຕິໂມກຂຸດເທດຂອງພວກທ່ານ ປາຕິໂມກຂຸດເທດນັ້ນກໍຈັກເປັນອຸໂປສົດກໍາຂອງພວກທ່ານ

ເມື່ອເວລາແລງມາຮອດ ພຣະອົງສະເດັດອອກຈາກທີ່ວິເວກ ຊົງສະແດງທໍາມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາຫຼີບຫຼີກຢູ່ໃນທີ່ສະຫງັດໃນທີ່ນີ້ໄດ້ເກີດຄວາມຄຶດຂຶ້ນໃນໃຈແນວນີ້ວ່າ ຖ້າຈັ່ງໃດເຮົາເພິ່ງອະນຸຍາດສິກຂາບົດທີ່ໄດ້ບັນຍັດໄວ້ແກ່ພິກຂຸທັງຫຼາຍໃຫ້ເປັນປາຕິໂມກຂຸດເທດຂອງພວກທ່ານ ປາຕິໂມກຂຸດເທດນັ້ນກໍຈັກເປັນອຸໂປສົດກໍາຂອງພວກທ່ານ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຍົກປາຕິໂມກຂຶ້ນສະແດງ

ພິກຂຸທັງຫຼາຍ ກໍແລ ພວກທ່ານເພິ່ງຍົກຂຶ້ນສະແດງແນວນີ້
ພິກຂຸຜູ້ສະຫຼາດ ຜູ້ສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິກໍາມະວາຈາ ວ່າ

[໑໓໔] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມກັນແລ້ວ ສົງເພິ່ງສະແດງອຸໂປສົດ ເພິ່ງຍົກປາຕິໂມກຂຶ້ນສະແດງ ກໍອັນໃດນໍ ເປັນບຸບພະກິດຂອງສົງ ທ່ານທັງຫຼາຍເພິ່ງບອກປາຣິສຸດທິ ຂ້າພະເຈົ້າຈັກຍົກປາຕິໂມກຂຶ້ນສະແດງ ພວກເຮົາບັນດາທີ່ມີຢູ່ທັງໝົດຈົ່ງຟັງໃຫ້ດີ ຈົ່ງໃສ່ໃຈປາຕິໂມກນັ້ນ ທ່ານອົງໃດມີອາບັດ ທ່ານອົງນັ້ນເພິ່ງເປີດເຜີຍ ເມື່ອບໍ່ມີອາບັດເພິ່ງນິ່ງດ້ວຍຄວາມເປັນຜູ້ນິ່ງ ຂ້າພະເຈົ້າຈັກຮູ້ວ່າທ່ານທັງຫຼາຍເປັນຜູ້ບໍລິສຸດ ກໍການສູດປະກາດເຖິງ ໓ ຄັ້ງ ໃນບໍລິສັດແນວນີ້ເປັນເໝືອນການເປີດເຜີຍອາບັດຂອງພິກຂຸແຕ່ລະອົງທີ່ຖືກຖາມ ກໍເມື່ອກໍາລັງສູດປະກາດເຖິງຄັ້ງທີ ໓ ພິກຂຸໃດຣະນຶກໄດ້ ຍັງບໍ່ຍອມເປີດເຜີຍອາບັດທີ່ມີຢູ່ ສໍາປະຊານະມຸສາວາທະຍ່ອມມີແກ່ພິກຂຸອົງນັ້ນ ທ່ານທັງຫຼາຍ ກໍສໍາປະຊານະມຸສາວາດພຣະຜູ້ມີພຣະພາກເຈົ້າຕັດວ່າ ເປັນທໍາທີ່ເຮັດອັນຕະລາຍ ຍ້ອນແນວນັ້ນ ພິກຂຸຕ້ອງອາບັດແລ້ວຣະນຶກໄດ້ ຫວັງຄວາມບໍລິສຸດ ກໍເພິ່ງເປີດເຜີຍອາບັດທີ່ມີຢູ່ ຍ້ອນການເປີດເຜີຍອາບັດແລ້ວ ຄວາມຜາສຸກຍ່ອມມີແກ່ພິກຂຸອົງນັ້ນ

### ນິທານຸດເທສະວິພັງ

[໑໓໕] ຄໍາວ່າ ປາຕິໂມກ ນີ້ເປັນເບື້ອງຕົ້ນ ນີ້ເປັນປະທານ ນີ້ເປັນປະມຸກແຫ່ງກຸສົນທໍາທັງຫຼາຍ ຍ້ອນເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຮຽກວ່າ ປາຕິໂມກ

ຄຳວ່າ ທ່ານທັງຫຼາຍ ນີ້ເປັນຄຳກ່າວດ້ວຍຄວາມຮັກ ນີ້ເປັນຄຳກ່າວດ້ວຍຄວາມເຄົາລົບ ນີ້ເປັນຄຳຮຽກບຸກຄົນ ຜູ້ມີຄວາມເຄົາລົບ ແລະມີຄວາມຢຳເກງ ຍ້ອນເຫດນັ້ນ ພຣະຜູ້ມີພຣະພາກເຈົ້າ ຈຶ່ງຕັດວ່າ ທ່ານທັງຫຼາຍ

ຄຳວ່າ ຈັກຍົກຂຶ້ນສະແດງ ຄື ຈັກບອກ ຈັກສະແດງ ຈັກບັນຍັດ ຈັກເລີ່ມຕັ້ງ ຈັກເປີດເຜີຍ ຈັກຈຳແນກ ຈັກເຮັດໃຫ້ກະຈ່າງ ຈັກປະກາດ

ຄຳວ່າ ນັ້ນ ຕັດໝາຍເຖິງປາຕິໂມກ

ຄຳວ່າ ບັນດາທີ່ມີຢູ່ທັງໝົດ ຄວາມວ່າ ພິກຂຸໃນບໍລິສັດນັ້ນ ເປັນເຖຣະກຳຕາມ ເປັນນະວະກະກຳຕາມ ເປັນມັດຊິມະກຳຕາມ ມີຈຳນວນເທົ່າໃດ ພິກຂຸເຫຼົ່ານັ້ນ ພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງພິກຂຸທີ່ມີຢູ່ທັງໝົດ

ຄຳວ່າ ຈົ່ງຟັງໃຫ້ດີ ຄວາມວ່າ ຈົ່ງເຮັດໃຫ້ເປັນປະໂຫຍດ ເຮັດໄວ້ໃນໃຈ ລວບລວມເລື້ອງທັງໝົດດ້ວຍໃຈ

ຄຳວ່າ ຈົ່ງໃສ່ໃຈ ຄວາມວ່າ ຈົ່ງມີຈິດຕັ້ງໝັ້ນ ມີຈິດບໍ່ຟຸ້ງຊ່ານ ມີຈິດບໍ່ຊັດສ່າຍ ຕັ້ງໃຈຟັງ

ຄຳວ່າ ທ່ານອົງໃດມີອາບັດ ຄວາມວ່າ ພິກຂຸຜູ້ເປັນເຖຣະກຳຕາມ ເປັນນະວະກະກຳຕາມ ເປັນມັດຊິມະກຳຕາມ ມີອາບັດໂຕໃດໂຕໜຶ່ງ ໃນບັນດາອາບັດ ໕ ກອງ ຫຼື ມີອາບັດໂຕໃດໂຕໜຶ່ງໃນບັນດາອາບັດ ໗ ກອງ

ຄຳວ່າ ທ່ານອົງນັ້ນ ເພິ່ງເປີດເຜີຍ ຄວາມວ່າ ພິກຂຸອົງນັ້ນ ເພິ່ງສະແດງ ພິກຂຸອົງນັ້ນເພິ່ງເປີດເຜີຍ ພິກຂຸອົງນັ້ນ ເພິ່ງເຮັດໃຫ້ແຈ້ງ ພິກຂຸອົງນັ້ນເພິ່ງປະກາດໃນທ່າມກາງສົງ ໃນທ່າມກາງຄະນະ ຫຼື ຕໍ່ພິກຂຸອົງໃດອົງໜຶ່ງ

ອາບັດທີ່ຊື່ວ່າບໍ່ມີ ໄດ້ແກ່ ອາບັດທີ່ພິກຂຸບໍ່ໄດ້ລ່ວງລະເມີດ ຫຼື ວ່າ ຕ້ອງແຕ່ອອກແລ້ວ

ຄຳວ່າ ເພິ່ງນິ່ງ ຄື ເພິ່ງຢູ່ຊື່ໆ ບໍ່ເພິ່ງກ່າວ

ຄຳວ່າ ຂ້າພະເຈົ້າຈັກຮູ້ວ່າ ຯລຯ ເປັນຜູ້ບໍລິສຸດ ຄື ຈັກຮູ້ ຈັກຈື່ໄວ້

ຄຳວ່າ ເປັນເໝືອນການເປີດເຜີຍອາບັດຂອງພິກຂຸແຕ່ລະອົງທີ່ຖືກຖາມ ຄວາມວ່າບໍລິສັດນັ້ນເພິ່ງຮູ້ວ່າ ຈະຖາມເຮົາ ດັ່ງນີ້ ເໝືອນພິກຂຸອົງໜຶ່ງໄດ້ຖືກພິກຂຸອີກອົງໜຶ່ງຖາມ ກໍເພິ່ງຕອບ

ບໍລິສັດແບບນີ້ ຕັດໝາຍເຖິງພິກຂຸທີ່ຢູ່ໃນທີ່ປະຊຸມນັ້ນ ໆ

ຄຳວ່າ ການສູດປະກາດເຖິງ ໓ ຄັ້ງ  ຄວາມວ່າ ສູດປະກາດແມ່ນຄັ້ງທີ ໑ ສູດປະກາດແມ່ນຄັ້ງທີ ໒ ສູດປະກາດແມ່ນຄັ້ງທີ ໓

ຄຳວ່າ ຣະນຶກໄດ້ ຄື ຮູ້ຢູ່ ຈື່ໄດ້ຢູ່

ອາບັດທີ່ຊື່ວ່າມີຢູ່ ໄດ້ແກ່ ອາບັດທີ່ພິກຂຸລ່ວງລະເມີດແລ້ວ ຫຼື ທີ່ຕ້ອງແລ້ວຍັງບໍ່ໄດ້ອອກ

ຄຳວ່າ ຍັງບໍ່ຍອມເປີດເຜີຍ ຄວາມວ່າ ບໍ່ຍອມສະແດງ ບໍ່ຍອມເປີດເຜີຍ ບໍ່ຍອມເຮັດໃຫ້ຕື້ນ ບໍ່ຍອມປະກາດໃນທ່າມກາງສົງ ໃນທ່າມກາງຄະນະ ຫຼື ຕໍ່ພິກຂຸອົງໃດອົງໜຶ່ງ

ຄຳວ່າ ສຳປະຊານະມຸສາວາດ ຍ່ອມມີແກ່ພິກຂຸອົງນັ້ນ ຄື ເປັນອາບັດອັນໃດຍ້ອນສຳປະຊານະມຸສາວາດ ເປັນອາບັດທຸກກົດ

ຄຳວ່າ ພຣະຜູ້ມີພຣະພາກເຈົ້າຕັດວ່າ ເປັນທຳທີ່ເຮັດອັນຕະລາຍ ຄວາມວ່າ ເປັນທຳທີ່ເຮັດອັນຕະລາຍຕໍ່ອັນໃດ ເປັນທຳທີ່ເຮັດອັນຕະລາຍຕໍ່ການບັນລຸປະຖົມຊານ ເປັນທຳທີ່ເຮັດອັນຕະລາຍຕໍ່ການບັນລຸທຸຕິຍະຊານ ເປັນທຳທີ່ເຮັດອັນຕະລາຍຕໍ່ການບັນລຸຕະຕິຍະຊານ ເປັນທຳທີ່ເຮັດອັນຕະລາຍຕໍ່ການບັນລຸຈະຕຸດຖະຊານ ເປັນທຳທີ່ເຮັດອັນຕະລາຍຕໍ່ການບັນລຸຊານ ວິໂມກ ສະມາທິ ສະມາບັດ ເນກຂຳມະ ນິດສະຣະນະ ປະວິເວກ ກຸສົນທຳ

ຄຳວ່າ ຍ້ອນແນວນັ້ນ ຄື ຍ້ອນເຫດນັ້ນ

ຄຳວ່າ ຣະນຶກໄດ້ ຄື ຮູ້ຢູ່ ຈື່ໄດ້ຢູ່

ຄຳວ່າ ຫວັງຄວາມບໍລິສຸດ ຄື ປະສົງອອກຈາກອາບັດ ຕ້ອງການຄວາມມົດຈົດ

ອາບັດທີ່ຊື່ວ່າມີຢູ່ ໄດ້ແກ່ ອາບັດທີ່ພິກຂຸລ່ວງລະເມີດ ຫຼື ທີ່ຕ້ອງແລ້ວຍັງບໍ່ໄດ້ອອກ

ຄຳວ່າ ເພິ່ງເປີດເຜີຍ ຄວາມວ່າ ເພິ່ງເຮັດໃຫ້ແຈ້ງໃນທ່າມກາງສົງ ໃນທ່າມກາງຄະນະ ຫຼື ຕໍ່ພິກຂຸອົງໃດອົງໜຶ່ງ

ຄຳວ່າ ຍ້ອນເປີດເຜີຍອາບັດແລ້ວ ຄວາມຜາສຸກຍ່ອມມີແກ່ພິກຂຸອົງນັ້ນ ຄວາມວ່າ ຄວາມຜາສຸກຍ່ອມມີເພື່ອຫຍັງ? ຄວາມຜາສຸກຍ່ອມມີເພື່ອບັນລຸປະຖົມຊານ ຄວາມຜາສຸກຍ່ອມມີເພື່ອບັນລຸທຸຕິຍະຊານ ຄວາມຜາສຸກຍ່ອມມີເພື່ອບັນລຸຕະຕິຍະຊານ ຄວາມຜາສຸກຍ່ອມມີເພື່ອບັນລຸຈະຕຸດຖະຊານ ຄວາມຜາສຸກຍ່ອມມີເພື່ອບັນລຸຊານ ວິໂມກ ສະມາທິ ສະມາບັດ ເນກຂຳມະ ນິດສະຣະນະ ປະວິເວກ ກຸສົນທຳ

## ເລື້ອງພິກຂຸຍົກປາຕິໂມກຂຶ້ນສະແດງທຸກວັນ

[໑໓໖] ສະໄໝນັ້ນ ພິກຂຸທັງຫຼາຍຮູ້ວ່າ ພຣະຜູ້ມີພຣະພາກເຈົ້າ ຊົງອະນຸຍາດການຍົກປາຕິໂມກຂຶ້ນສະແດງໃນວັນອຸໂປສົດແລ້ວ ຈຶ່ງຍົກປາຕິໂມກຂຶ້ນສະແດງທຸກວັນ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ບໍ່ເພິ່ງຍົກປາຕິໂມກຂຶ້ນສະແດງທຸກວັນ ອົງໃດຍົກຂຶ້ນສະແດງ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຍົກປາຕິໂມກຂຶ້ນສະແດງໃນວັນອຸໂປສົດ

ຕໍ່ມາ ພິກຂຸທັງຫຼາຍຮູ້ວ່າ ພຣະຜູ້ມີພຣະພາກເຈົ້າ ຊົງອະນຸຍາດການຍົກປາຕິໂມກຂຶ້ນສະແດງໃນວັນອຸໂປສົດແລ້ວ ຈຶ່ງຍົກປາຕິໂມກຂຶ້ນສະແດງປັກລະ ໓ ຄັ້ງ ຄື ໃນວັນ ໑໔ ຄ່ຳ ວັນ ໑໕ ຄ່ຳ ແລະວັນ ໘ ຄ່ຳ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ເລື້ອງຊົງອະນຸຍາດໃຫ້ຍົກປາຕິໂມກຂຶ້ນສະແດງປັກລະຄັ້ງ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ບໍ່ເພິ່ງຍົກປາຕິໂມກຂຶ້ນສະແດງປັກລະ ໓ ຄັ້ງ ອົງໃດຍົກຂຶ້ນສະແດງ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຍົກປາຕິໂມກຂຶ້ນສະແດງປັກລະ ໑ ຄັ້ງ ຄື ໃນວັນ ໑໔ ຄ່ຳ ຫຼື ວັນ ໑໕ ຄ່ຳ"

## ເລື້ອງພຣະສັບພັກຄີຍົກປາຕິໂມກຂຶ້ນສະແດງແກ່ບໍລິສັດເທົ່າທີ່ມີຢູ່

ສະໄໝນັ້ນ ພວກພິກຂຸສັບພັກຄີຍົກປາຕິໂມກຂຶ້ນສະແດງແກ່ບໍລິສັດເທົ່າທີ່ມີຢູ່ ຄື ສະເພາະບໍລິສັດຂອງຕົນ ໆ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ເລື້ອງຊົງອະນຸຍາດໃຫ້ຍົກປາຕິໂມກຂຶ້ນສະແດງແກ່ພິກຂຸຜູ້ພ້ອມພຽງກັນ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ບໍ່ເພິ່ງຍົກປາຕິໂມກຂຶ້ນສະແດງສະເພາະບໍລິສັດຂອງຕົນ ອົງໃດຍົກຂຶ້ນສະແດງ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຍົກປາຕິໂມກຂຶ້ນສະແດງແກ່ພິກຂຸບໍລິສັດທັງຫຼາຍ ຜູ້ພ້ອມພຽງກັນ

## ເລື້ອງຊົງອະນຸຍາດຄວາມພ້ອມພຽງກຳນົດອາວາດດຽວ

ຕໍ່ມາ ພິກຂຸທັງຫຼາຍ ມີຄວາມຄິດຄຳນຶງວ່າ "ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດອຸໂປສົດກຳແກ່ພິກຂຸທັງຫຼາຍ ຜູ້ພ້ອມພຽງກັນ" ແລ້ວຄິດວ່າ "ຄວາມພ້ອມພຽງກັນມີກຳນົດພຽງທໍ່ໃດນໍ ມີພຽງອາວາດໜຶ່ງ ຫຼື ມີທັງແຜ່ນດິນ" ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຄວາມພ້ອມພຽງມີກຳນົດເຂດອາວາດດຽວທໍ່ນັ້ນ"

# ໗໐. ມະຫາກັບປິນະວັດຖຸ

## ວ່າດ້ວຍພຣະມະຫາກັບປິນະເຖຣະ

## ເລື້ອງມັດທະກຸດສີມະລຶຄະທາຍະວັນ

[໑໓໗] ສະໄໝນັ້ນ ທ່ານພຣະມະຫາກັບປິນະຢູ່ມັດທະກຸດສີ ມະລຶຄະທາຍະວັນ ເຂດນະຄອນຣາຊະຄື ຄັ້ງນັ້ນ ທ່ານຫຼີບຫຼີກຢູ່ໃນທີ່ສະຫງັດ ໄດ້ເກີດຄວາມຄິດຄຳນຶງຂຶ້ນໃນໃຈແບບນີ້ວ່າ "ເຮົາຄວນໄປລົງອຸໂປສົດບໍນໍ ຄວນໄປຮ່ວມສັງຄະກຳບໍນໍ ແທ້ຈິງເຮົາເປັນຜູ້ບໍລິສຸດດ້ວຍຄວາມບໍລິສຸດຢ່າງຍິ່ງແລ້ວ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຊາບຄວາມຄິດຄຳນຶງໃນໃຈຂອງທ່ານພຣະມະຫາກັບປິນະດ້ວຍພຣະຫະໄທຂອງພຣະອົງ ຊົງຫາຍໂຕໄປສູ່ພູເຂົາຄິດຊະກູດມາຜາກົດກົງໜ້າທ່ານພຣະມະຫາກັບປິນະທີ່ມັດທະກຸດສິມະລິຄະທາຍະວັນ ປຽບເໝືອນບຸຣຸດມີກຳລັງຢຽດແຂນອອກ ຫຼື ຄູ້ແຂນເຂົ້າສັນນັ້ນ ປະທັບນັ່ງເທິງອາສະນະທີ່ໄດ້ປູລາດໄວ້

ສ່ວນຝ່າຍທ່ານພຣະມະຫາກັບປິນະ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງໃນບ່ອນສົມຄວນ

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດກັບທ່ານພຣະມະຫາກັບປິນະຜູ້ນັ່ງໃນບ່ອນສົມຄວນວ່າ "ກັບປິນະ ທ່ານຫຼີບຫຼີກຢູ່ໃນທີ່ສະຫງັດ ໄດ້ເກີດຄວາມຄິດຄຳນຶງຂຶ້ນໃນໃຈແນວນີ້ວ່າ ເຮົາຄວນໄປລົງອຸໂປສົດບໍນໍ ຄວນໄປຮ່ວມສັງຄະກຳບໍນໍ ຍ້ອນວ່າເຮົາເປັນຜູ້ບໍລິສຸດດ້ວຍຄວາມບໍລິສຸດຢ່າງຍິ່ງແລ້ວ ແນວນີ້ແມ່ນບໍ?

ທ່ານພຣະມະຫາກັບປິນະທູນຮັບວ່າ "ແມ່ນແລ້ວ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິຊຸ ຖ້າພວກທ່ານບໍ່ສັກກາຣະ ບໍ່ເຄົາລົບ ບໍ່ນັບຖື ບໍ່ບູຊາເຊິ່ງອຸໂປສົດ ເມື່ອເປັນແນວນີ້ ແລ້ວໃຜນໍ? ຈັກສັກກາຣະ ເຄົາລົບ ນັບຖື ບູຊາເຊິ່ງອຸໂປສົດ ພິກຂຸ ທ່ານຈົ່ງໄປລົງອຸໂປສົດ ຈະບໍ່ໄປບໍ່ໄດ້ ທ່ານຈົ່ງໄປຮ່ວມສັງຄະກຳ ຈະບໍ່ໄປບໍ່ໄດ້

ທ່ານພຣະມະຫາກັບປິນະທູນຮັບພຣະດຳຣັດພຣະຜູ້ມີພຣະພາກເຈົ້າວ່າ "ໂດຍຂ້ານ້ອຍ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຊີ້ແຈ່ງໃຫ້ທ່ານພຣະມະຫາກັບປິນະເຫັນແຈ້ງຊວນໃຫ້ຢາກຮັບເອົາໄປປະຕິບັດ ຊຸກຍູ້ໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນລ່າເລີງດ້ວຍທຳມີກະຖາ ແລ້ວຊົງຫາຍໄປກົງໜ້າທ່ານພຣະມະຫາກັບປິນະໃນມັດທະກຸດສິມະລິຄະທາຍະວັນ ມາຜາກົດທີ່ພູເຂົາຄິດຊະກູດ ປຽບເໝືອນ ບຸຣຸດມີກຳລັງຢຽດແຂນອອກ ຫຼື ຄູ້ແຂນເຂົ້າສັນນັ້ນ

## ໗໑. ສີມານຸຊານະນາ

### ວ່າດ້ວຍຊົງອະນຸຍາດສີມາ

### ສົມມຸດສີມາແລະນິມິດແຫ່ງສີມາ

[໑໖໗] ຄັ້ງນັ້ນ ພິກຂຸທັງຫຼາຍ ໄດ້ມີຄວາມຄິດດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ວ່າ "ຄວາມພ້ອມພຽງມີກຳນົດເຂດພຽງອາວາດດຽວເທົ່ານັ້ນ" ແລ້ວຄິດວ່າ "ອາວາດໜຶ່ງມີການກຳນົດເຂດທີ່ໃດ" ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສົມມຸດສີມາ ພິກຂຸທັງຫຼາຍ ເພິ່ງສົມມຸດສີມາແນວນີ້

## ວິທີສົມມຸດສີມາ

ໃນເບື້ອງຕົ້ນເພິ່ງທັກນິມິດ ຄື

| | | | |
|---|---|---|---|
| ປັບພະຕະນິມິດ | (ນິມິດຄືພູເຂົາ) | ປາສານະນິມິດ | (ນິມິດຄືແຜ່ນຫີນ) |
| ວະນະນິມິດ | (ນິມິດຄືປ່າ) | ຣຸກຂະນິມິດ | (ນິມິດຄືຕົ້ນໄມ້) |
| ມັກຄະນິມິດ | (ນິມິດຄືຫົນທາງ) | ວຳມະກະນິມິດ | (ນິມິດຄືຈອມປວກ) |
| ນະທີນິມິດ | (ນິມິດຄືແມ່ນ້ຳ) | ອຸທະກະນິມິດ | (ນິມິດຄືນ້ຳ) |

ເມື່ອທັກນິມິດແລ້ວ ພິກຂຸຜູ້ສະຫຼາດ ຜູ້ສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

## ກຳມະວາຈາສົມມຸດສີມາ

[໑໓໙] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ນິມິດໄດ້ຣະບຸໄວ້ໂດຍຮອບພຽງໃດ ຖ້າສົງພ້ອມກັນແລ້ວ ເພິ່ງສົມມຸດສະມານະສັງວາດສີມາ ມີອຸໂປສົດດຽວກັນ ດ້ວຍນິມິດເຫຼົ່ານັ້ນ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ນິມິດໄດ້ຣະບຸໄວ້ໂດຍຮອບພຽງໃດ ສົງສົມມຸດສະມານະສັງວາດສີມາ ມີອຸໂປສົດດຽວກັນ ດ້ວຍນິມິດເຫຼົ່ານັ້ນ ທ່ານອົງໃດເຫັນດ້ວຍກັບການສົມມຸດສະມານະສັງວາດສີມາ ມີອຸໂປສົດດຽວກັນ ດ້ວຍນິມິດເຫຼົ່ານັ້ນ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ສະມານະສັງວາດສີມາ ມີອຸໂປສົດດຽວກັນ ສົງສົມມຸດແລ້ວ ດ້ວຍນິມິດເຫຼົ່ານັ້ນ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

## ເລື້ອງສົມມຸດສີມາໃຫຍ່ເກີນຂະໜາດ

[໑໔໐] ສະໄໝນັ້ນ ພວກພິກຂຸສັບພັກຄິຄິດວ່າ "ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດການສົມມຸດສີມາແລ້ວ" ຈຶ່ງສົມມຸດສີມາໃຫຍ່ເກີນໄປ ໔ ໂຍດແດ່ ໕ ໂຍດແດ່ ໖ ໂຍດແດ່ ພິກຂຸທັງຫຼາຍມາລົງອຸໂປສົດ ມາເຖິງເມື່ອກຳລັງຍົກປາຕິໂມກຂຶ້ນສະແດງກໍມີ ມາເຖິງເມື່ອຍົກຂຶ້ນສະແດງຈົບແລ້ວກໍມີ ນອນຄືນຢູ່ລະຫວ່າງທາງກໍມີ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ບໍ່ເພິ່ງສົມມຸດສີມາໃຫຍ່ເກີນໄປ ໔ ໂຍດແດ່ ໕ ໂຍດແດ່ ໖ ໂຍດແດ່ ອົງໃດສົມມຸດ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສົມມຸດສີມາປະມານ ໓ ໂຍດເປັນຢ່າງຍິ່ງ

### ເລື່ອງສົມມຸດນະທີປາຣະສີມາ (ສີມາກວມແມ່ນ້ຳ)

ສະໄໝນັ້ນ ພວກພິກຂຸສັບພັກຄີສົມມຸດນະທີປາຣະສີມາ ພິກຂຸທັງຫຼາຍ ມາລົງອຸໂປສົດ ຖືກນ້ຳພັດໄປກໍມີ ບາດຖືກນ້ຳພັດໄປກໍມີ ຈີວອນຖືກນ້ຳພັດໄປກໍມີ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ບໍ່ເພິ່ງສົມມຸດນະທີປາຣະສີມາ ອົງໃດສົມມຸດ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສົມມຸດນະທີປາຣະສີມາທີ່ມີເຮືອຈອດປະຈຳ ຫຼື ມີຂົວ ມີສະພານຖາວອນ

## ໗໘. ອຸໂປສະຖາຄາຣະກະຖາ

## ວ່າດ້ວຍໂຮງອຸໂປສົດ

### ເລື້ອງຍົກປາຕິໂມກຂຶ້ນສະແດງຕາມບໍລິເວນວິຫານ

[໑໘໑] ສະໄໝນັ້ນ ພິກຂຸທັງຫຼາຍ ຍົກປາຕິໂມກຂຶ້ນສະແດງຕາມບໍລິເວນວິຫານໂດຍບໍ່ກຳນົດທີ່ ພຣະອາຄັນຕຸກະທັງຫຼາຍບໍ່ຮູ້ວ່າ "ວັນນີ້ສົງຈະລົງອຸໂປສົດຢູ່ບ່ອນໃດ"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ບໍ່ເພິ່ງຍົກປາຕິໂມກຂຶ້ນສະແດງຕາມບໍລິເວນວິຫານໂດຍບໍ່ກຳນົດບ່ອນ ອົງໃດຍົກຂຶ້ນສະແດງ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສົມມຸດວິຫານ ເຮືອນມຸງແຖວດຽວ ປາສາດ ເຮືອນໂລ້ນ ຫຼື ຖ້ຳ ບ່ອນສົງຕ້ອງການໃຫ້ເປັນໂຮງອຸໂປສົດແລ້ວຈຶ່ງລົງອຸໂປສົດ

ພິກຂຸທັງຫຼາຍ ກໍແລ ເພິ່ງສົມມຸດໂຮງອຸໂປສົດແນວນີ້

ພິກຂຸຜູ້ສະຫຼາດ ຜູ້ສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາ ວ່າ

### ວິທີສົມມຸດໂຮງອຸໂປສົດແລະກຳມະວາຈາສົມມຸດໂຮງອຸໂປສົດ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມກັນແລ້ວ ສົງສົມມຸດວິຫານມີຊື່ນີ້ ໃຫ້ເປັນໂຮງອຸໂປສົດ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງສົມມຸດວິຫານມີຊື່ນີ້ໃຫ້ເປັນໂຮງອຸໂປສົດ ທ່ານອົງໃດ ເຫັນດ້ວຍກັບການສົມມຸດວິຫານມີຊື່ນີ້ໃຫ້ເປັນໂຮງອຸໂປສົດ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ວິຫານມີຊື່ນີ້ ສົງສົມມຸດໃຫ້ເປັນໂຮງອຸໂປສົດແລ້ວ ສົງເຫັນດ້ວຍ ຍ້ອນນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

## ເລື້ອງສົມມຸດໂຮງອຸໂປສົດ ໘ ບ່ອນໃນອາວາດດຽວກັນ

ສະໄໝນັ້ນ ໃນອາວາດແຫ່ງໜຶ່ງ ສົງສົມມຸດໂຮງອຸໂປສົດ ໘ ບ່ອນ ພິກຂຸທັງຫຼາຍ ປະຊຸມກັນໃນໂຮງອຸໂປສົດທັງ ໘ ບ່ອນດ້ວຍຕັ້ງໃຈວ່າ "ສົງຈັກລົງອຸໂປສົດໃນທີ່ນີ້ ສົງຈັກລົງອຸໂປສົດໃນທີ່ນີ້"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ໃນອາວາດແຫ່ງໜຶ່ງ ສົງບໍ່ເພິ່ງສົມມຸດໂຮງອຸໂປສົດ ໘ ບ່ອນ ພິກຂຸສົງໝູ່ໃດສົມມຸດ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຖອນໂຮງອຸໂປສົດບ່ອນໜຶ່ງແລ້ວ ຈຶ່ງລົງອຸໂປສົດໃນໂຮງອຸໂປສົດອີກບ່ອນໜຶ່ງ

## ວິທີຖອນໂຮງອຸໂປສົດແລະກຳມະວາຈາຖອນໂຮງອຸໂປສົດ

ພິກຂຸທັງຫຼາຍ ເພິ່ງຖອນໂຮງອຸໂປສົດແນວນີ້

ພິກຂຸຜູ້ສະຫຼາດ ຜູ້ສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາ ວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມກັນແລ້ວ ສົງເພິ່ງຖອນໂຮງອຸໂປສົດມີຊື່ນີ້ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງຖອນໂຮງອຸໂປສົດມີຊື່ນີ້ ທ່ານອົງໃດເຫັນດ້ວຍກັບການຖອນໂຮງອຸໂປສົດມີຊື່ນີ້ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ໂຮງອຸໂປສົດມີຊື່ນີ້ສົງຖອນແລ້ວ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

# ໗໓. ອຸໂປສະຖະປະມຸຂານຸຊານະນາ

## ວ່າດ້ວຍຊົງອະນຸຍາດພື້ນທີ່ທິດໜ້າໂຮງອຸໂປສົດ

## ເລື້ອງສົມມຸດໂຮງອຸໂປສົດນ້ອຍເກີນໄປ

[໑໔໘] ສະໄໝນັ້ນ ໃນອາວາດແຫ່ງໜຶ່ງ ສົງສົມມຸດໂຮງອຸໂປສົດນ້ອຍເກີນໄປ ເຖິງວັນອຸໂປສົດ ພິກຂຸສົງລົງປະຊຸມກັນຫຼາຍ ພິກຂຸທັງຫຼາຍຕ້ອງນັ່ງຟັງປາຕິໂມກໃນພື້ນທີ່ທີ່ບໍ່ໄດ້ສົມມຸດ

ພິກຂຸທັງຫຼາຍ ຈຶ່ງໄດ້ປຶກສາກັນດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ວ່າ ເພິ່ງສົມມຸດໂຮງອຸໂປສົດແລ້ວຈຶ່ງລົງອຸໂປສົດ ກໍພວກເຮົານັ່ງຟັງປາຕິໂມກໃນພື້ນທີ່ທີ່ບໍ່ໄດ້ສົມມຸດ ອຸໂປສົດເປັນອັນພວກເຮົາເຮັດແລ້ວບໍນໍ?"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ຍ້ອນເຫດທີ່ພິກຂຸນັ່ງໃນພື້ນທີ່ທີ່ສົມມຸດແລ້ວກໍຕາມ ຍັງບໍ່ໄດ້ສົມມຸດແລ້ວກໍຕາມຟັງປາຕິໂມກຢູ່ ອຸໂບສົດຍ່ອມເປັນອັນທ່ານໄດ້ເຮັດແລ້ວຢ່າງແນ່ນອນ ພິກຂຸທັງຫຼາຍ ຖ້າແນວນັ້ນ ສົງຈົ່ງສົມມຸດພື້ນທີ່ທິດໜ້າໂຮງອຸໂປສົດໃຫ້ໃຫຍ່ຂຶ້ນຕື່ມອີກເທົ່າທີ່ຕ້ອງການເທີ້ນ

## ວິທີສົມມຸດແລະກຳມະວາຈາສົມມຸດພື້ນທີ່ທິດໜ້າໃນໂຮງອຸໂປສົດ

ພິກຂຸທັງຫຼາຍ ເພິ່ງສົມມຸດພື້ນທີ່ທິດໜ້າໂຮງອຸໂປສົດແນວນີ້

ໃນເບື້ອງຕົ້ນເພິ່ງທັກນິມິດ ເມື່ອທັກນິມິດແລ້ວ ພິກຂຸຜູ້ສະຫຼາດ ຜູ້ສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ນິມິດຣະບຸໄວ້ໂດຍຮອບພຽງໃດ ຖ້າສົງພ້ອມກັນແລ້ວ ສົງເພິ່ງສົມມຸດພື້ນທີ່ທິດໜ້າໂຮງອຸໂປສົດດ້ວຍນິມິດເຫຼົ່ານັ້ນ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ນິມິດຣະບຸໄວ້ໂດຍຮອບພຽງໃດ ສົງສົມມຸດພື້ນທີ່ທິດໜ້າໂຮງອຸໂປສົດດ້ວຍນິມິດເຫຼົ່ານັ້ນ ທ່ານອົງໃດເຫັນດ້ວຍກັບການສົມມຸດພື້ນທີ່ທິດໜ້າໂຮງອຸໂປສົດດ້ວຍນິມິດເຫຼົ່ານັ້ນ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ພື້ນທີ່ທິດໜ້າໂຮງອຸໂປສົດສົງໄດ້ສົມມຸດດ້ວຍນິມິດເຫຼົ່ານັ້ນແລ້ວ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

## ເລື້ອງພິກຂຸນະວະກະລົງປະຊຸມກ່ອນ

ສະໄໝນັ້ນ ໃນອາວາດແຫ່ງໜຶ່ງ ເຖິງວັນອຸໂປສົດ ພິກຂຸຜູ້ນະວະກະທັງຫຼາຍລົງປະຊຸມກັນກ່ອນແລ້ວຫຼີກໄປດ້ວຍຄິດວ່າ "ພິກຂຸຜູ້ເປັນເຖຣະທັງຫຼາຍຍັງບໍ່ມາເລີຍ ອຸໂປສົດມີໃນເວລາວິການ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ໃນວັນອຸໂປສົດ ເຮົາອະນຸຍາດໃຫ້ພິກຂຸຜູ້ເຖຣະທັງຫຼາຍລົງປະຊຸມກ່ອນ

## ຊົງອະນຸຍາດໃຫ້ພິກຂຸຫຼາຍວັດລົງອຸໂປສົດຮ່ວມກັນ

ສະໄໝນັ້ນ ໃນນະຄອນຣາຊະຄຶ ອາວາດຫຼາຍແຫ່ງມີສີມາຮ່ວມກັນ ພິກຂຸທັງຫຼາຍໃນອາວາດເຫຼົ່ານັ້ນ ກ່າວແຍ້ງກັນວ່າ "ຂໍສົງຈົ່ງລົງອຸໂປສົດໃນອາວາດຂອງພວກເຮົາ ຂໍສົງຈົ່ງລົງອຸໂປສົດໃນອາວາດຂອງພວກເຮົາ"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ໃນນະຄອນຣາຊະຄືນີ້ ອາວາດຫຼາຍແຫ່ງມີສີມາຮ່ວມກັນ ພິກຂຸທັງຫຼາຍ ໃນອາວາດເຫຼົ່ານັ້ນກ່າວແຍ້ງກັນວ່າ ຂໍສົງຈົ່ງລົງອຸໂປສົດໃນອາວາດຂອງພວກເຮົາ ຂໍສົງຈົ່ງລົງອຸໂປສົດໃນອາວາດຂອງພວກເຮົາ ພິກຂຸທັງຫຼາຍ

ພິກຂຸເຫຼົ່ານັ້ນ ທຸກອົງຕ້ອງປະຊຸມລົງອຸໂປສົດໃນທີ່ແຫ່ງດຽວເທົ່ານັ້ນ ຫຼື ພິກຂຸຜູ້ເຖຣະຢູ່ໃນອາວາດໃດກໍຕ້ອງປະຊຸມລົງອຸໂປສົດໃນອາວາດນັ້ນ ສົງບໍ່ເພິ່ງແບ່ງພວກກັນລົງອຸໂປສົດ ພິກຂຸສົງໝູ່ໃດເຮັດ ຕ້ອງອາບັດທຸກກົດ

## ໗໔. ອະວິບປະວາດສີມານຸຊານະນາ

### ວ່າດ້ວຍຊົງອະນຸຍາດເຂດບໍ່ຢູ່ປາສະຈາກໄຕຣຈີວອນ

### ເລື້ອງນະຄອນຣາຊະຄື

[໑໔໓] ສະໄໝນັ້ນ ທ່ານພຣະມະຫາກັດສະປະເດີນທາງຈາກອັນທະກະວິນທະວິຫານມາສູ່ນະຄອນຣາຊະຄືເພື່ອລົງອຸໂປສົດ ລະຫວ່າງທາງຂະນະທີ່ກຳລັງຂ້າມແມ່ນ້ຳ ຖືກນ້ຳສາດໃສ່ໜ້ອຍໜຶ່ງເຮັດໃຫ້ຈີວອນຂອງທ່ານປຽກ ພິກຂຸທັງຫຼາຍ ໄດ້ກ່າວກັບທ່ານພຣະມະຫາກັດສະປະດັ່ງນີ້ວ່າ “ອາວຸໂສ ເປັນຫຍັງ ຈີວອນຂອງທ່ານຈຶ່ງປຽກນໍ”

ທ່ານພຣະມະຫາກັດສະປະກ່າວຕອບວ່າ “ທ່ານທັງຫຼາຍ ເຮົາເດີນທາງຈາກອັນທະກະວິນທະວິຫານມາສູ່ນະຄອນຣາຊະຄືເພື່ອລົງອຸໂປສົດໃນທີ່ນີ້ ລະຫວ່າງທາງຂະນະຂ້າມແມ່ນ້ຳຖືກນ້ຳສາດໃສ່ໜ້ອຍໜຶ່ງ ຍ້ອນແນວນັ້ນ ຈີວອນຂອງເຮົາຈຶ່ງປຽກ”

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ສະມານະສັງວາດສີມາ ມີອຸໂປສົດດຽວກັນບ່ອນໃດທີ່ສົງສົມມຸດແລ້ວ ສົງກໍຈົ່ງສົມມຸດສີມານັ້ນໃຫ້ເປັນແດນ ບໍ່ຢູ່ປາສະຈາກໄຕຣຈີວອນ

### ວິທີສົມມຸດແລະກຳມະວາຈາສົມມຸດແດນບໍ່ຢູ່ປາສະຈາກໄຕຣຈີວອນ

ພິກຂຸທັງຫຼາຍ ເພິ່ງສົມມຸດແດນບໍ່ຢູ່ປາສະຈາກໄຕຣຈີວອນແນວນີ້

ພິກຂຸຜູ້ສະຫຼາດ ຜູ້ສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສະມານະສັງວາດສີມາ ມີອຸໂປສົດດຽວກັນບ່ອນໃດທີ່ສົງສົມມຸດແລ້ວ ສົງເພິ່ງສົມມຸດສະມານະສັງວາດສີມາມີອຸໂປສົດດຽວກັນນັ້ນໃຫ້ເປັນແດນບໍ່ຢູ່ປາສະຈາກໄຕຣຈີວອນ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສະມານະສັງວາດສີມາ ມີອຸໂປສົດດຽວກັນບ່ອນ

ໃດທີ່ສົງສົມມຸດແລ້ວ ສົງເພິ່ງສົມມຸດສະມານະສັງວາດສີມານີອຸໂປສົດດຽວກັນນັ້ນໃຫ້ເປັນແດນບໍ່ຢູ່ປາສະຈາກໄຕຣຈີວອນ ທ່ານອົງໃດເຫັນດ້ວຍກັບການສົມມຸດສະມານະສັງວາດສີມານີອຸໂປສົດດຽວກັນນັ້ນໃຫ້ເປັນແດນບໍ່ຢູ່ປາສະຈາກໄຕຣຈີວອນ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ສະມານະສັງວາດສີມານີອຸໂປສົດດຽວກັນນັ້ນ ສົງໄດ້ສົມມຸດໃຫ້ເປັນແດນບໍ່ຢູ່ປາສະຈາກໄຕຣຈີວອນແລ້ວ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

ສະໄໝນັ້ນ ພິກຂຸທັງຫຼາຍຮູ້ວ່າ ພຣະຜູ້ມີພຣະພາກເຈົ້າ ຊົງອະນຸຍາດການສົມມຸດແດນບໍ່ຢູ່ປາສະຈາກໄຕຣຈີວອນແລ້ວ ຈຶ່ງເກັບຈີວອນທັງຫຼາຍໄວ້ໃນບໍລິເວນໝູ່ບ້ານ ຈີວອນເຫຼົ່ານັ້ນສູນຫາຍແດ່ ຖືກໄຟໄໝ້ແດ່ ຖືກໜູກັດແດ່

ພິກຂຸທັງຫຼາຍ ຈຶ່ງມີຜ້າທີ່ບໍ່ດີ ມີແຕ່ຈີວອນເກົ່າ ໆ ພິກຂຸທັງຫຼາຍ ກ່າວແນວນີ້ວ່າ ທ່ານທັງຫຼາຍ ເຫດໃດ ພວກທ່ານຈຶ່ງມີແຕ່ຜ້າບໍ່ດີ ມີແຕ່ຈີວອນເກົ່າ ໆ

ພິກຂຸທັງຫຼາຍ ຈຶ່ງຕອບວ່າ "ທ່ານທັງຫຼາຍ ພວກເຮົາຮູ້ວ່າ ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດການສົມມຸດແດນບໍ່ຢູ່ປາສະຈາກໄຕຣຈີວອນແລ້ວ ຈຶ່ງເກັບຈີວອນທັງຫຼາຍໄວ້ໃນບໍລິເວນໝູ່ບ້ານ ຍ້ອນເຫດນີ້ ຈີວອນເຫຼົ່ານັ້ນເສຍຫາຍແດ່ ຖືກໄຟໄໝ້ແດ່ ຖືກໜູກັດແດ່

ຍ້ອນເຫດນັ້ນ ພວກເຮົາຈຶ່ງມີຜ້າບໍ່ດີ ມີແຕ່ຈີວອນເກົ່າ ໆ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ເລື້ອງສົມມຸດແດນບໍ່ຢູ່ປາສະຈາກໄຕຣຈີວອນ

## (ຕິຈີວະຣາວິບປະວາດ)

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ສະມານະສັງວາດສີມານີອຸໂປສົດດຽວກັນບ່ອນໃດທີ່ສົງສົມມຸດແລ້ວ ສົງຈົ່ງສົມມຸດສີມານັ້ນ ໃຫ້ເປັນແດນບໍ່ຢູ່ປາສະຈາກໄຕຣຈີວອນເວັ້ນໝູ່ບ້ານ ແລະອຸປະຈາຣະແຫ່ງໝູ່ບ້ານ

## ວິທີສົມມຸດແລະກຳມະວາຈາສົມມຸດ

## ຕິຈີວະຣາວິບປະວາດສີມາເວັ້ນບ້ານແລະອຸປະຈາຣະບ້ານ

ພິກຂຸທັງຫຼາຍ ເພິ່ງສົມມຸດແດນບໍ່ຢູ່ປາສະຈາກໄຕຣຈີວອນ ເວັ້ນໝູ່ບ້ານແລະອຸປະຈາຣະໝູ່ບ້ານແນວນີ້

ພິກຂຸຜູ້ສະຫຼາດ ຜູ້ສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາ ວ່າ

[໑໔໔] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສະມານະສັງວາດສີມາມີອຸໂປສົດດຽວກັນບ່ອນໃດທີ່ສົງສົມມຸດແລ້ວ ຖ້າສົງພ້ອມກັນແລ້ວ ເພິ່ງສົມມຸດສີມານັ້ນໃຫ້ເປັນແດນບໍ່ຢູ່ປາສະຈາກໄຕຣຈີວອນ ເວັ້ນໝູ່ບ້ານ ແລະອຸປະຈາຣະໝູ່ບ້ານ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສະມານະສັງວາດສີມາມີອຸໂປສົດດຽວກັນບ່ອນໃດທີ່ສົງສົມມຸດແລ້ວ ສົງສົມມຸດສີມານັ້ນໃຫ້ເປັນແດນບໍ່ຢູ່ປາສະຈາກໄຕຣຈີວອນ ເວັ້ນໝູ່ບ້ານແລະອຸປະຈາຣະໝູ່ບ້ານ ທ່ານອົງໃດເຫັນດ້ວຍກັບການສົມມຸດສີມານັ້ນໃຫ້ເປັນແດນບໍ່ຢູ່ປາສະຈາກໄຕຣຈີວອນ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ສີມານັ້ນ ສົງໄດ້ສົມມຸດໃຫ້ເປັນແດນບໍ່ຢູ່ປາສະຈາກໄຕຣຈີວອນ ເວັ້ນໝູ່ບ້ານແລະອຸປະຈາຣະໝູ່ບ້ານແລ້ວ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

## ໗໕. ສີມາສະມູຫະນະນາ

### ວ່າດ້ວຍການຖອນສີມາ

### ເລື້ອງສົມມຸດສະມານະສັງວາດສີມາກ່ອນ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ພິກຂຸເມື່ອຈະສົມມຸດສີມາ ເພິ່ງສົມມຸດສະມານະສັງວາດສີມາກ່ອນ ເພິ່ງສົມມຸດແດນບໍ່ຢູ່ປາສະຈາກໄຕຣຈີວອນໃນພາຍຫຼັງ ພິກຂຸທັງຫຼາຍ ເມື່ອຈະຖອນສີມາ ເພິ່ງຖອນແດນບໍ່ຢູ່ປາສະຈາກໄຕຣຈີວອນກ່ອນ ເພິ່ງຖອນສະມານະສັງວາດສີມາໃນພາຍຫຼັງ

### ວິທີຖອນແລະກຳມະວາຈາຖອນແດນບໍ່ຢູ່ປາສະຈາກໄຕຣຈີວອນ

ພິກຂຸທັງຫຼາຍ ເພິ່ງຖອນແດນບໍ່ຢູ່ປາສະຈາກໄຕຣຈີວອນແນວນີ້

ພິກຂຸຜູ້ສະຫຼາດ ຜູ້ສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາ ວ່າ

[໑໔໕] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ແດນບໍ່ຢູ່ປາສະຈາກໄຕຣຈີວອນແຫ່ງໃດທີ່ສົງສົມມຸດໄວ້ແລ້ວ ຖ້າສົງພ້ອມກັນແລ້ວ ສົງເພິ່ງຖອນແດນບໍ່ຢູ່ປາສະຈາກໄຕຣຈີວອນນັ້ນ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ແດນບໍ່ຢູ່ປາສະຈາກໄຕຣຈີວອນແຫ່ງໃດ ສົງສົມມຸດໄວ້ແລ້ວ ສົງຖອນແດນບໍ່ຢູ່ປາສະຈາກໄຕຣຈີວອນແຫ່ງນັ້ນ ທ່ານອົງໃດເຫັນດ້ວຍກັບການ

ຖອນແດນ ບໍ່ຢູ່ປາສະຈາກໄຕຣຈີວອນນັ້ນ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແດນບໍ່ຢູ່ປາສະຈາກໄຕຣຈີວອນແຫ່ງນີ້ ສົງຖອນແລ້ວ ສົງເຫັນດ້ວຍ ຍ້ອນແນວນັ້ນ ຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

## ເລື້ອງຖອນສະມານະສັງວາດສີມາພາຍຫຼັງ

## ວິທີຖອນແລະກຳມະວາຈາຖອນສະມານະສັງວາດສີມາ

ພິກຂຸທັງຫຼາຍ ເພິ່ງຖອນສະມານະວາດສີມາແນວນີ້
ພິກຂຸຜູ້ສະຫຼາດ ຜູ້ສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາ ວ່າ

[໑໔໖] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສະມານະສັງວາດສີມາມີອຸໂປສົດດຽວກັນບ່ອນໃດທີ່ສົງສົມມຸດແລ້ວ ຖ້າສົງພ້ອມກັນແລ້ວເພິ່ງຖອນສະມານະສັງວາດສີມາມີອຸໂປສົດດຽວກັນນັ້ນ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສະມານະສັງວາດສີມາມີອຸໂປສົດດຽວກັນບ່ອນໃດທີ່ສົງສົມມຸດແລ້ວ ສົງຖອນສະມານະສັງວາດສີມາມີອຸໂປສົດດຽວກັນນັ້ນ ທ່ານອົງໃດເຫັນດ້ວຍກັບການຖອນສະມານະສັງວາດສີມາມີອຸໂປສົດດຽວກັນນັ້ນ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ສະມານະສັງວາດສີມາມີອຸໂປສົດດຽວກັນນັ້ນ ສົງຖອນແລ້ວ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

# ໗໖. ຄາມະສີມາທິ

## ວ່າດ້ວຍຄາມະສີມາເປັນຕົ້ນ

### ອະພັດທະສີມາ

[໑໔໗] ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເມື່ອສີມາທີ່ສົງຍັງບໍ່ໄດ້ສົມມຸດຍັງບໍ່ໄດ້ກຳນົດສີມາ ພິກຂຸສົງຢູ່ອາໄສໝູ່ບ້ານ ຫຼື ນິຄົມໃດ ເຂດຂອງໝູ່ບ້ານນັ້ນ ເປັນຄາມະສີມາແດ່ ເຂດຂອງນິຄົມນັ້ນເປັນນິຄົມສີມາແດ່ ສີມານີ້ໃນໝູ່ບ້ານ ຫຼື ນິຄົມທັງສອງນັ້ນ ເປັນສະມານະສັງວາດ ມີອຸໂປສົດດຽວກັນ

ພິກຂຸທັງຫຼາຍ ຖ້າໃນປ່າບໍ່ມີໝູ່ບ້ານຊົ່ວໄລຍະ ໆ ອັບພັນດອນໂດຍຮອບ ສີມານີ້ໃນປ່ານັ້ນ ເປັນສະມານະສັງວາດ ມີອຸໂປສົດດຽວກັນ

## ເລື້ອງອຸທະກຸກເຂປະສີມາໃນແມ່ນ້ຳເປັນຕົ້ນ

ພິກຂຸທັງຫຼາຍ ແມ່ນ້ຳທັງໝົດບໍ່ຈັດເປັນສີມາ ທະເລທັງໝົດບໍ່ຈັດເປັນສີມາ ສະເກີດຂຶ້ນເອງທັງໝົດບໍ່ຈັດເປັນສີມາ

ພິກຂຸທັງຫຼາຍ ໃນແມ່ນ້ຳ ໃນທະເລ ຫຼື ໃນສະເກີດຂຶ້ນເອງ ຊົ່ວລະຍະຊາຍມີສັນຖານປານກາງ ວິດນ້ຳສາດໄປໂດຍຮອບເປັນອຸທະກຸກເຂປະສີມາ ສີມານີ້ໃນໜ້ານ້ຳເຫຼົ່ານັ້ນ ເປັນສະມານະສັງວາດ ມີອຸໂປສົດດຽວກັນ

## ເລື້ອງສີມາຄາບກ່ຽວ

[໑໔໗] ສະໄໝນັ້ນ ພວກພິກຂຸສັບພັກຄີສົມມຸດສີມາຄາບກ່ຽວສີມາ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ສີມາທີ່ພິກຂຸເຫຼົ່າໃດສົມມຸດໄວ້ກ່ອນແລ້ວ ກຳນັ້ນຂອງພິກຂຸເຫຼົ່ານັ້ນເປັນກຳທີ່ຖືກຕ້ອງ ບໍ່ກຳເຣິບ ຄວນແກ່ຖານະ ສີມາທີ່ພິກຂຸເຫຼົ່າໃດສົມມຸດໃນພາຍຫຼັງ ກຳນັ້ນຂອງພິກຂຸເຫຼົ່ານັ້ນບໍ່ຖືກຕ້ອງ ກຳເຣິບໄດ້ບໍ່ຄວນແກ່ຖານະ ພິກຂຸທັງຫຼາຍ ບໍ່ເພິ່ງສົມມຸດສີມາຄາບກ່ຽວສີມາ ພິກຂຸສົງໝູ່ໃດສົມມຸດຄາບກ່ຽວກັນ ຕ້ອງອາບັດທຸກກົດ

## ສົມມຸດສີມາທັບສີມາ

ສະໄໝນັ້ນ ພວກພິກຂຸສັບພັກຄີສົມມຸດສີມາທັບສີມາ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ສີມາທີ່ພິກຂຸເຫຼົ່າໃດສົມມຸດໄວ້ກ່ອນແລ້ວ ກຳນັ້ນຂອງພິກຂຸເຫຼົ່ານັ້ນເປັນກຳທີ່ຖືກຕ້ອງ ບໍ່ກຳເຣິບ ຄວນແກ່ຖານະ ສີມາທີ່ພິກຂຸເຫຼົ່າໃດສົມມຸດໃນພາຍຫຼັງ ກຳນັ້ນຂອງພິກຂຸເຫຼົ່ານັ້ນບໍ່ຖືກຕ້ອງ ກຳເຣິບໄດ້ ບໍ່ຄວນແກ່ຖານະ ພິກຂຸທັງຫຼາຍ ບໍ່ເພິ່ງສົມມຸດສີມາທັບສີມາ ພິກຂຸສົງໝູ່ໃດສົມມຸດທັບ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸສົງຈະສົມມຸດສີມາ ເວັ້ນບ່ອນວ່າງໃນລະຫວ່າງສີມາແລ້ວຈຶ່ງສົມມຸດສີມາ

# ໗໑. ອຸໂປສະຖະເພທາທິ

## ວ່າດ້ວຍປະເພດແຫ່ງວັນອຸໂປສົດເປັນຕົ້ນ

### ເລື້ອງປະເພດແຫ່ງວັນອຸໂປສົດ

[໑໔໗] ຄັ້ງນັ້ນ ພິກຂຸທັງຫຼາຍໄດ້ມີການສົນທະນາກັນດັ່ງນີ້ວ່າ “ວັນອຸໂປສົດມີທໍ່ໃດ” ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ວັນອຸໂປສົດນີ້ມີ ໒ ວັນ ຄື ວັນ ໑໔ ຄ່ຳ ແລະວັນ ໑໕ ຄ່ຳ ພິກຂຸທັງຫຼາຍ ວັນອຸໂປສົດມີ ໒ ວັນເທົ່ານີ້ແລ”

### ເລື້ອງອາການທີ່ລົງອຸໂປສົດ

ຄັ້ງນັ້ນ ພິກຂຸທັງຫຼາຍໄດ້ມີການສົນທະນາກັນດັ່ງນີ້ວ່າ “ການລົງອຸໂປສົດມີທໍ່ໃດນໍ” ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ການລົງອຸໂປສົດນີ້ມີ ໔ ຢ່າງ ຄື

໑. ການລົງອຸໂປສົດ ແບ່ງພວກ ໂດຍບໍ່ຊອບທຳ
໒. ການລົງອຸໂປສົດ ພ້ອມພຽງກັນ ໂດຍບໍ່ຊອບທຳ
໓. ການລົງອຸໂປສົດ ແບ່ງພວກ ໂດຍຊອບທຳ
໔. ການລົງອຸໂປສົດ ພ້ອມພຽງກັນ ໂດຍຊອບທຳ

ພິກຂຸທັງຫຼາຍ ໃນການລົງອຸໂປສົດ ໔ ຢ່າງນັ້ນ ການລົງອຸໂປສົດໃດແບ່ງພວກໂດຍບໍ່ຊອບທຳການລົງອຸໂປສົດແນວນັ້ນ ບໍ່ເພິ່ງເຮັດແລະເຮົາບໍ່ອະນຸຍາດການລົງອຸໂປສົດແນວນັ້ນ

ການລົງອຸໂປສົດໃດພ້ອມພຽງກັນໂດຍບໍ່ຊອບທຳ ການລົງອຸໂປສົດແນວນັ້ນ ບໍ່ເພິ່ງເຮັດແລະເຮົາບໍ່ອະນຸຍາດການລົງອຸໂປສົດແນວນັ້ນ

ການລົງອຸໂປສົດໃດແບ່ງພວກໂດຍຊອບທຳ ການລົງອຸໂປສົດແນວນັ້ນ ບໍ່ເພິ່ງເຮັດແລະເຮົາບໍ່ອະນຸຍາດການລົງອຸໂປສົດແນວນັ້ນ

ການລົງອຸໂປສົດໃດພ້ອມພຽງກັນ ໂດຍຊອບທຳ ການລົງອຸໂປສົດແນວນັ້ນ ເພິ່ງເຮັດແລະເຮົາອະນຸຍາດການລົງອຸໂປສົດແນວນັ້ນ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ພວກທ່ານເພິ່ງຕັ້ງໃຈຮູ້ໄວ້ວ່າ ຈັກລົງອຸໂປສົດກຳຊະນິດທີ່ພ້ອມພຽງກັນໂດຍຊອບທຳ ດັ່ງນີ້ ພວກທ່ານເພິ່ງຕັ້ງໃຈຮູ້ໄວ້ແນວນີ້ແລ

# ໗໘. ສັງຂິຕະປາຕິໂມກຂຸດເທສາທິ

## ວ່າດ້ວຍການຍົກປາຕິໂມກຂຶ້ນສະແດງໂດຍຫຍໍ້ເປັນຕົ້ນ

## ເລື້ອງປະເພດແຫ່ງປາຕິໂມກຂຸດເທດ

[໑໕໐] ຄັ້ງນັ້ນ ພິກຂຸທັງຫຼາຍໄດ້ມີຄວາມສົງໄສວ່າ "ການຍົກປາຕິໂມກຂຶ້ນສະແດງ ມີທີ່ໃດນໍ" ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ການຍົກປາຕິໂມກຂຶ້ນສະແດງນີ້ມີ ໕ ແບບ ຄື

໑. ພິກຂຸຍົກນິທານຂຶ້ນສະແດງຈົບແລ້ວ ເພິ່ງສູດອຸດເທດທີ່ເຫຼືອດ້ວຍສູດບົດ ນີ້ເປັນການຍົກປາຕິໂມກແບບທີ ໑
໒. ຍົກນິທານຂຶ້ນສະແດງ ຍົກປາຣາຊິກ ໔ ຂຶ້ນສະແດງຈົບແລ້ວ ເພິ່ງສູດອຸດເທດທີ່ເຫຼືອດ້ວຍສູດບົດ ນີ້ເປັນການຍົກປາຕິໂມກແບບທີ ໒
໓. ຍົກນິທານຂຶ້ນສະແດງ ຍົກປາຣາຊິກ ໔ ຂຶ້ນສະແດງ ຍົກສັງຄາທິເສດ ໑໓ ຂຶ້ນສະແດງຈົບແລ້ວ ເພິ່ງສູດອຸດເທດທີ່ເຫຼືອດ້ວຍສູດບົດ ນີ້ເປັນການຍົກປາຕິໂມກແບບທີ ໓
໔. ຍົກນິທານຂຶ້ນສະແດງ ຍົກປາຣາຊິກ ໔ ຂຶ້ນສະແດງ ຍົກສັງຄາທິເສດ ໑໓ ຂຶ້ນສະແດງ ຍົກອະນິຍົດ ໒ ຂຶ້ນສະແດງຈົບແລ້ວ ເພິ່ງສູດອຸດເທດທີ່ເຫຼືອດ້ວຍສູດບົດນີ້ເປັນການຍົກປາຕິໂມກແບບທີ ໔
໕. ຍົກຂຶ້ນສະແດງໂດຍພິສະດານທັງໝົດ ນີ້ເປັນການຍົກປາຕິໂມກຂຶ້ນສະແດງແບບທີ ໕ ພິກຂຸທັງຫຼາຍ ການຍົກປາຕິໂມກຂຶ້ນສະແດງມີ ໕ ແບບເຫຼົ່ານີ້ແລ

## ຊົງຫ້າມຍົກປາຕິໂມກຂຶ້ນສະແດງໂດຍຫຍໍ້

ສະໄໝນັ້ນ ພິກຂຸທັງຫຼາຍຮູ້ວ່າ "ພຣະຜູ້ມີພຣະພາກເຈົ້າ ຊົງອະນຸຍາດການຍົກປາຕິໂມກຂຶ້ນສະແດງໂດຍຫຍໍ້" ຈຶ່ງຍົກປາຕິໂມກຂຶ້ນສະແດງໂດຍຫຍໍ້ທຸກຄັ້ງ ພິກຂຸທັງຫຼາຍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ບໍ່ເພິ່ງຍົກປາຕິໂມກຂຶ້ນສະແດງໂດຍຫຍໍ້ ພິກຂຸສົງໝູ່ໃດຍົກຂຶ້ນສະແດງ ຕ້ອງອາບັດທຸກກົດ

## ເລື້ອງຊົງອະນຸຍາດໃຫ້ຍົກປາຕິໂມກຂຶ້ນສະແດງໂດຍຫຍໍ້

## ເມື່ອຄົນປ່າມາສາລະວັນ

ສະໄໝນັ້ນ ໃນອາວາດແຫ່ງໜຶ່ງໃນແຄວ້ນໂກສົນ ໃນວັນອຸໂປສົດນັ້ນ ມີຄົນປ່າມາສາລະວັນ ພິກຂຸທັງຫຼາຍ ບໍ່ອາດຈະຍົກປາຕິໂມກຂຶ້ນສະແດງໂດຍພິສະດານ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຍົກປາຕິໂມກຂຶ້ນສະແດງໂດຍຫຍໍ້ ເມື່ອມີອັນຕະລາຍ"

## ເລື້ອງອັນຕະລາຍ ໑໐ ປະການ

ສະໄໝນັ້ນ ພວກພິກຂຸສັບພັກຄີຍົກປາຕິໂມກຂຶ້ນສະແດງໂດຍຫຍໍ້ ເມື່ອບໍ່ມີອັນຕະລາຍ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເມື່ອບໍ່ມີອັນຕະລາຍ ບໍ່ເພິ່ງຍົກປາຕິໂມກຂຶ້ນສະແດງໂດຍຫຍໍ້ ພິກຂຸສົງໝູ່ໃດຍົກຂຶ້ນສະແດງ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເມື່ອມີອັນຕະລາຍ ເຮົາອະນຸຍາດໃຫ້ຍົກປາຕິໂມກຂຶ້ນສະແດງໂດຍຫຍໍ້

ໃນເລື້ອງຍົກປາຕິໂມກຂຶ້ນສະແດງໂດຍຫຍໍ້ນັ້ນ ອັນຕະລາຍທັງຫຼາຍ ມີດັ່ງຕໍ່ໄປນີ້ ຄື

| | |
|---|---|
| ໑. ພຣະຣາຊາສະເດັດມາ | ໒. ໂຈນມາປຸ້ນ |
| ໓. ໄຟໄໝ້ | ໔. ນ້ຳຖ້ວມມາ |
| ໕. ຄົນມາຫຼາຍ | ໖. ຜີເຂົ້າສິງພິກຂຸ |
| ໗. ສັດຮ້າຍເຂົ້າມາ | ໘. ງູຮ້າຍເລືອເຂົ້າມາ |
| ໙. ພິກຂຸຈັກເສຍຊີວິດ | ໑໐. ມີອັນຕະລາຍແກ່ພົມມະຈັນ |

ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຍົກປາຕິໂມກຂຶ້ນສະແດງໂດຍຫຍໍ້ໃນເມື່ອມີອັນຕະລາຍແນວນີ້ ເມື່ອບໍ່ມີອັນຕະລາຍ ໃຫ້ຍົກຂຶ້ນສະແດງໂດຍພິສະດານ

## ເລື້ອງຊົງອະນຸຍາດພິກຂຸເຖຣະສະແດງທຳໂດຍບໍ່ຕ້ອງໄດ້ຮັບອາຣາດທະນາ

ສະໄໝນັ້ນ ພວກພິກຂຸສັບພັກຄີບໍ່ໄດ້ຮັບອາຣາດທະນາກໍສະແດງທຳໃນທ່າມກາງສົງ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ໄດ້ຮັບອາຣາດທະນາບໍ່ເພິ່ງສະແດງທຳໃນທ່າມກາງສົງ ອົງໃດສະແດງ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ເຖຣະສະແດງທຳເອງ ຫຼື ໃຫ້ອາຣາດທະນາພິກຂຸອື່ນສະແດງແທນ

# ກ໙. ວິນະຍະປຸດສະນະກະຖາ

## ວ່າດ້ວຍການຖາມພຣະວິໄນ

## ເລື້ອງຖາມພຣະວິໄນທ່າມກາງສົງຕ້ອງໄດ້ຮັບສົມມຸດກ່ອນ

[໑໕໑] ສະໄໝນັ້ນ ພວກສັບພັກຄີຍັງບໍ່ໄດ້ຮັບສົມມຸດກໍຖາມພຣະວິໄນໃນທ່າມກາງສົງ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸຍັງບໍ່ໄດ້ຮັບສົມມຸດບໍ່ເພິ່ງຖາມວິໄນໃນທ່າມກາງສົງ ອົງໃດຖາມ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ໄດ້ຮັບສົມມຸດຖາມວິໄນໃນທ່າມກາງສົງໄດ້

## ວິທີສົມມຸດເປັນຜູ້ຖາມ

ພິກຂຸທັງຫຼາຍ ກໍແລ ເພິ່ງສົມມຸດແນວນີ້

ຕົນເອງສົມມຸດຕົນເອງກໍໄດ້ ພິກຂຸອົງໜຶ່ງສົມມຸດພິກຂຸອີກອົງໜຶ່ງກໍໄດ້ແນວໃດນໍ ຊື່ວ່າຕົນເອງສົມມຸດຕົນເອງ ຄື ພິກຂຸຜູ້ສະຫຼາດ ຜູ້ສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິກຳມະວາຈາວ່າ

## ກຳມະວາຈາສົມມຸດຕົນເອງ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມກັນແລ້ວ ຂ້າພະເຈົ້າຂໍຖາມ
ພຣະວິໄນກັບທ່ານຜູ້ມີຊື່ນີ້ແນວນີ້ ຊື່ວ່າຕົນເອງສົມມຸດຕົນເອງ
ແນວໃດນໍ ຊື່ວ່າພິກຂຸອົງໜຶ່ງສົມມຸດພິກຂຸອີກອົງໜຶ່ງ
ຄື ພິກຂຸຜູ້ສະຫຼາດ ຜູ້ສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິກຳມະວາຈາ ວ່າ

## ກຳມະວາຈາສົມມຸດຜູ້ອື່ນ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມກັນແລ້ວ ຂໍຜູ້ມີຊື່ນີ້ຖາມ
ພຣະວິໄນກັບທ່ານຜູ້ມີຊື່ນີ້ແນວນີ້ ຊື່ວ່າພິກຂຸອົງໜຶ່ງສົມມຸດພິກຂຸອີກອົງໜຶ່ງ

### ເລື້ອງຄຸກຄາມຈະຂ້າ

ສະໄໝນັ້ນ ພວກພິກຂຸຜູ້ມີສີນດີງາມ ໄດ້ຮັບສົມມຸດແລ້ວ ຈຶ່ງຖາມພຣະວິໄນໃນທ່າມກາງສົງ ພວກພິກຂຸສັບພັກຄີໄດ້ອາຄາດ ແຄ້ນເຄືອງ ຄຸກຄາມຈະຂ້າ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸແມ່ນໄດ້ຮັບສົມມຸດແລ້ວ ກວດເບິ່ງບໍລິສັດ ພິຈາລະນາບຸກຄົນແລ້ວຈຶ່ງຖາມພຣະວິໄນໃນທ່າມກາງສົງ

## ໓໐. ວິນະຍະວິສັດຊະນະກະຖາ

### ວ່າດ້ວຍການວິສັດຊະນາພຣະວິໄນ

### ເລື້ອງພຣະສັບພັກຄີວິສັດຊະນາພຣະວິໄນ

[໑໕໘] ສະໄໝນັ້ນ ພວກພິກຂຸສັບພັກຄີຍັງບໍ່ໄດ້ຮັບສົມມຸດ ກໍວິສັດຊະນາພຣະວິໄນໃນທ່າມກາງສົງ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸຜູ້ບໍ່ໄດ້ຮັບສົມມຸດ ບໍ່ເພິ່ງວິສັດຊະນາວິໄນໃນທ່າມກາງສົງ ອົງໃດວິສັດຊະນາ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ໄດ້ຮັບສົມມຸດ ວິສັດຊະນາພຣະວິໄນໃນທ່າມກາງສົງໄດ້

### ວິທີສົມມຸດເປັນຜູ້ວິສັດຊະນາ

ພິກຂຸທັງຫຼາຍ ກໍແລ ເພິ່ງສົມມຸດແນວນີ້

ຕົນເອງສົມມຸດຕົນເອງກໍໄດ້ ພິກຂຸອື່ນສົມມຸດພິກຂຸອື່ນກໍໄດ້

ແນວໃດນໍ ຊື່ວ່າ ຕົນເອງສົມມຸດຕົນເອງ

ຄື ພິກຂຸຜູ້ສະຫຼາດ ຜູ້ສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິກຳມະວາຈາວ່າ

### ກຳມະວາຈາສົມມຸດຕົນ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມກັນແລ້ວ ຂ້າພະເຈົ້າອັນຜູ້ມີຊື່ນີ້ຖາມພຣະວິໄນແລ້ວ ຂໍວິສັດຊະນາແນວນີ້ ຊື່ວ່າ ຕົນເອງສົມມຸດຕົນເອງ

ແນວໃດນໍ ຊື່ວ່າພິກຂຸອົງໜຶ່ງສົມມຸດພິກຂຸອີກອົງໜຶ່ງ

ຄື ພິກຂຸຜູ້ສະຫຼາດ ຜູ້ສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິກຳມະວາຈາວ່າ

## ກຳມະວາຈາສົມມຸດຜູ້ອື່ນ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມກັນແລ້ວ ຜູ້ມີຊື່ນີ້ອັນຜູ້ມີຊື່ນີ້ຖາມພຣະວິໄນ ເພິ່ງວິສັດຊະນາແນວນີ້ ຊື່ວ່າພິກຂຸອົງໜຶ່ງສົມມຸດພິກຂຸອີກອົງໜຶ່ງ

## ເລື້ອງຄຸກຄາມຈະຂ້າເລື້ອງທີ ໔

ສະໄໝນັ້ນ ພວກພິກຂຸຜູ້ມີສີນດີງາມໄດ້ຮັບສົມມຸດແລ້ວ ວິສັດຊະນາພຣະວິໄນໃນທ່າມກາງສົງ ພວກສັບພັກຄີໄດ້ອາຄາດ ແຄ້ນເຄືອງ ຄຸກຄາມຈະຂ້າ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸແມ່ນໄດ້ຮັບສົມມຸດແລ້ວ ກວດເບິ່ງບໍລິສັດ ພິຈາລະນາບຸກຄົນແລ້ວ ຈຶ່ງວິສັດຊະນາພຣະວິໄນໃນທ່າມກາງສົງ

# ໓໑. ໂຈທະນາກະຖາ

## ວ່າດ້ວຍການຟ້ອງຮ້ອງ

## ເລື້ອງໂຈດດ້ວຍອາບັດ

[໑໕໓] ສະໄໝນັ້ນ ພວກພິກຂຸສັບພັກຄີໂຈດພິກຂຸຜູ້ຍັງບໍ່ໃຫ້ໂອກາດດ້ວຍອາບັດ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ບໍ່ເພິ່ງໂຈດພິກຂຸຜູ້ຍັງບໍ່ໄດ້ໃຫ້ໂອກາດດ້ວຍອາບັດ ອົງໃດໂຈດ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໂຈດ ຂໍໃຫ້ຈຳເລີຍໃຫ້ໂອກາດ ດ້ວຍຄຳວ່າ ຂໍທ່ານຈົ່ງໃຫ້ໂອກາດ ເຮົາຕ້ອງການຈະເວົ້າກັບທ່ານ ດັ່ງນີ້ແລ້ວຈຶ່ງໂຈດດ້ວຍອາບັດ

## ເລື້ອງຂໍໂອກາດກ່ອນໂຈດ

ສະໄໝນັ້ນ ພິກຂຸທັງຫຼາຍ ຜູ້ມີສີນດີງາມ ໄດ້ຂໍໃຫ້ພວກພິກຂຸສັບພັກຄີໃຫ້ໂອກາດແລ້ວໂຈດດ້ວຍອາບັດ ພວກພິກຂຸສັບພັກຄີໄດ້ອາຄາດ ແຄ້ນເຄືອງ ຄຸກຄາມຈະຂ້າ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໂຈດແມ່ນເມື່ອຈຳເລີຍໃຫ້ໂອກາດແລ້ວ ພິຈາລະນາເບິ່ງບຸກຄົນກ່ອນ ຈຶ່ງໂຈດດ້ວຍອາບັດກ່ອນ ຂໍໂອກາດຕ້ອງພິຈາລະນາເບິ່ງບຸກຄົນ"

ສະໄໝນັ້ນ ພວກພິກຂຸສັບພັກຄີຄິດວ່າ "ພິກຂຸທັງຫຼາຍ ຜູ້ມີສິນດີງາມ ຂໍໃຫ້ພວກເຮົາໃຫ້ໂອກາດກ່ອນ" ແລ້ວຟ້າວຂໍໂອກາດໃນເລື້ອງທີ່ບໍ່ເປັນເລື້ອງ ບໍ່ມີເຫດອັນຄວນ ເພື່ອພິກຂຸທັງຫຼາຍ ຜູ້ບໍລິສຸດບໍ່ມີອາບັດ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ບໍ່ເພິ່ງຂໍໂອກາດໃນເລື້ອງທີ່ບໍ່ເປັນເລື້ອງບໍ່ມີເຫດອັນຄວນ ເພື່ອພິກຂຸທັງຫຼາຍ ຜູ້ບໍລິສຸດບໍ່ມີອາບັດ ອົງໃດຂໍຕ້ອງອາບັດທຸກກົດ

ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິຈາລະນາເບິ່ງບຸກຄົນກ່ອນຈຶ່ງຂໍໂອກາດ

# ໗໔. ອະທຳມະກຳມະປະຕິກະໂກສະນາທິ

## ວ່າດ້ວຍການຄັດຄ້ານເຮັດກຳທີ່ບໍ່ຊອບທຳເປັນຕົ້ນ

## ເລື້ອງຊົງອະນຸຍາດຄັດຄ້ານກຳທີ່ບໍ່ຊອບທຳ

[໑໕໔] ສະໄໝນັ້ນ ພວກພິກຂຸສັບພັກຄີເຮັດສັງຄະກຳທີ່ບໍ່ຖືກຕ້ອງໃນທ່າມກາງສົງ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ບໍ່ເພິ່ງເຮັດກຳທີ່ບໍ່ຖືກຕ້ອງໃນທ່າມກາງສົງ ອົງໃດເຮັດ ຕ້ອງອາບັດທຸກກົດ

ພວກພິກຂຸສັບພັກຄີຍັງເຮັດກຳທີ່ບໍ່ຖືກຕ້ອງຢູ່ຄືເກົ່າ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຄັດຄ້ານໃນເມື່ອພິກຂຸເຮັດກຳທີ່ບໍ່ຖືກຕ້ອງ

ສະໄໝຕໍ່ມາ ພິກຂຸທັງຫຼາຍຜູ້ມີສິນດີງາມ ພາກັນຄັດຄ້ານໃນເມື່ອພວກພິກຂຸສັບພັກຄີເຮັດກຳທີ່ບໍ່ຖືກຕ້ອງ ພວກພິກຂຸສັບພັກຄີໄດ້ອາຄາດ ແຄ້ນເຄືອງ ຄຸກຄາມຈະຂ້າ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ເລື້ອງພິກຂຸ ໔-໕ ອົງສະແດງຄວາມເຫັນ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສະແດງຄວາມເຫັນໄດ້ ພິກຂຸທັງຫຼາຍ ສະແດງຄວາມເຫັນໃນສຳນັກຂອງພວກພິກຂຸສັບພັກຄີເຫຼົ່ານັ້ນ ພວກພິກຂຸສັບພັກຄີໄດ້ອາຄາດ ແຄ້ນເຄືອງ ຄຸກຄາມຈະຂ້າ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸ ໔-໕ ອົງຄັດ

ຄ້ານ ໃຫ້ພິກຂຸ ໔-໕ ອົງສະແດງຄວາມເຫັນ ໃຫ້ພິກຂຸອົງດຽວອະທິຖານໃຈວ່າ ເຮົາບໍ່ເຫັນດ້ວຍກັບກຳນັ້ນ

## ເລື້ອງຈົງໃຈຍົກປາຕິໂມກຂຶ້ນສະແດງບໍ່ໃຫ້ໄດ້ຍິນ

ສະໄໝນັ້ນ ພວກພິກຂຸສັບພັກຄີເມື່ອຍົກປາຕິໂມກຂຶ້ນສະແດງຈົງໃຈບໍ່ສູດໃຫ້ໄດ້ຍິນໃນທ່າມກາງສົງ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸຜູ້ເມື່ອຈະຍົກປາຕິໂມກຂຶ້ນສະແດງ ບໍ່ເພິ່ງຈົງໃຈສູດບໍ່ໃຫ້ໄດ້ຍິນ ອົງໃດສູດບໍ່ໃຫ້ໄດ້ຍິນ ຕ້ອງອາບັດທຸກກົດ

ສະໄໝຕໍ່ມາ ທ່ານພຣະອຸທາຍີເປັນຜູ້ຍົກປາຕິໂມກຂຶ້ນສະແດງໃນທ່າມກາງສົງ ມີສຽງເຄືອເໝືອນສຽງກາ ຈຶ່ງມີຄວາມຄິດດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ວ່າ ພິກຂຸຜູ້ຍົກປາຕິໂມກຂຶ້ນສະແດງຕ້ອງສູດໃຫ້ໄດ້ຍິນທົ່ວກັນ ສ່ວນເຮົາມີສຽງເຄືອເໝືອນສຽງກາ ເຮົາຈະເພິ່ງປະຕິບັດແນວໃດນໍ"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

## ເລື້ອງພະຍາຍາມຍົກປາຕິໂມກຂຶ້ນສະແດງ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ຍົກປາຕິໂມກຂຶ້ນສະແດງພະຍາຍາມດ້ວຍຕັ້ງໃຈວ່າ ຈະສູດໃຫ້ໄດ້ຍິນຊັດຖ້ອຍຊັດຄຳ ເມື່ອພະຍາຍາມ ບໍ່ຕ້ອງອາບັດ

## ເລື້ອງຍົກປາຕິໂມກຂຶ້ນສະແດງໃນບໍລິສັດທີ່ມີຄະລິຫັດ

ສະໄໝນັ້ນ ພຣະເທວະທັດຍົກປາຕິໂມກຂຶ້ນສະແດງໃນບໍລິສັດທີ່ມີຄະລິຫັດຢູ່ນຳ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ບໍ່ເພິ່ງຍົກປາຕິໂມກຂຶ້ນສະແດງໃນບໍລິສັດທີ່ມີຄະລິຫັດຢູ່ນຳ ອົງໃດຍົກຂຶ້ນສະແດງ ຕ້ອງອາບັດທຸກກົດ

## ເລື້ອງຍົກປາຕິໂມກຂຶ້ນສະແດງໂດຍບໍ່ໄດ້ຮັບອາຣາດທະນາ

ສະໄໝນັ້ນ ພວກພິກຂຸສັບພັກຄີບໍ່ໄດ້ຮັບອາຣາດທະນາ ກໍຍົກປາຕິໂມກຂຶ້ນສະແດງໃນທ່າມກາງສົງ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ໄດ້ຮັບອາຣາດທະນາ ບໍ່ເພິ່ງຍົກປາຕິໂມກຂຶ້ນສະແດງໃນທ່າມກາງສົງ ອົງໃດຍົກຂຶ້ນສະແດງ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດປາຕິໂມກໃຫ້ເປັນໜ້າທີ່ຂອງພຣະເຖຣະ

# ໗໓. ປາຕິໂມກຂຸດເທສະກະອັດເຊສະນາທິ

## ວ່າດ້ວຍການອາຣາດທະນາຜູ້ຍົກປາຕິໂມກຂຶ້ນສະແດງເປັນຕົ້ນ

## ເລື້ອງພິກຂຸຊາວເມືອງໂຈທະນາວັດຖຸບໍ່ຮູ້ຈັກອຸໂປສົດ

[໑໕໕] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນນະຄອນຣາຊະຄືຕາມພຣະປະສົງ ແລ້ວໄດ້ສະເດັດຈາຣິກໄປທາງເມືອງໂຈທະນາວັດຖຸ ສະເດັດຈາຣິກໄປໂດຍລຳດັບຈົນເຖິງເມືອງໂຈທະນາວັດຖຸ

ສະໄໝນັ້ນ ໃນອາວາດແຫ່ງໜຶ່ງ ມີພິກຂຸຢູ່ຫຼາຍອົງ ບັນດາພິກຂຸເຫຼົ່ານັ້ນ ພິກຂຸຜູ້ເຖຣະເປັນຜູ້ຈົ໋າ ບໍ່ສະຫຼາດ ບໍ່ຮູ້ຈັກອຸໂປສົດ ຫຼື ວິທີລົງອຸໂປສົດ ຫຼື ປາຕິໂມກ ຫຼື ວິທີການ ຍົກປາຕິໂມກຂຶ້ນສະແດງ

ສະໄໝນັ້ນ ພິກຂຸເຫຼົ່ານັ້ນ ມີຄວາມຄິດດັ່ງນີ້ວ່າ “ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດໄວ້ວ່າ ປາຕິໂມກເປັນໜ້າທີ່ຂອງພຣະເຖຣະ ກໍພຣະເຖຣະຂອງພວກເຮົາອົງນີ້ເປັນຜູ້ໂງ່ຈົ໋າ ບໍ່ສະຫຼາດ ບໍ່ຮູ້ຈັກອຸໂປສົດ ຫຼື ວິທີລົງອຸໂປສົດ ຫຼື ປາຕິໂມກ ຫຼື ວິທີຍົກປາຕິໂມກຂຶ້ນສະແດງ ພວກເຮົາຈະເພິ່ງປະຕິບັດແນວໃດນໍ” ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ບັນດາພິກຂຸເຫຼົ່ານັ້ນ ພິກຂຸອົງໃດເປັນຜູ້ສະຫຼາດສາມາດ ເຮົາອະນຸຍາດປາຕິໂມກໃຫ້ເປັນໜ້າທີ່ຂອງພິກຂຸອົງນັ້ນ

## ເລື້ອງພິກຂຸຫຼາຍອົງບໍ່ຮູ້ຈັກອຸໂປສົດ

ສະໄໝນັ້ນ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸຢູ່ນຳກັນຫຼາຍອົງ ລ້ວນເປັນຜູ້ໂງ່ຈົ໋າ ບໍ່ສະຫຼາດ ພິກຂຸເຫຼົ່ານັ້ນ ບໍ່ຮູ້ຈັກອຸໂປສົດ ຫຼື ວິທີລົງອຸໂປສົດ ຫຼື ປາຕິໂມກ ຫຼື ວິທີຍົກປາຕິໂມກຂຶ້ນສະແດງ ຈຶ່ງອາຣາດທະນາພຣະເຖຣະວ່າ “ນິມົນພຣະເຖຣະຍົກປາຕິໂມກຂຶ້ນສະແດງເທີ້ນ ຂ້ານ້ອຍ”

ພຣະເຖຣະນັ້ນກ່າວແນວນີ້ວ່າ “ທ່ານທັງຫຼາຍ ເຮົາຍົກປາຕິໂມກຂຶ້ນສະແດງບໍ່ໄດ້ ພິກຂຸເຫຼົ່ານັ້ນຈຶ່ງອາຣາດທະນາພຣະເຖຣະອົງທີ ໒ ວ່າ “ນິມົນພຣະເຖຣະຍົກປາຕິໂມກຂຶ້ນສະແດງເທີ້ນ ຂ້ານ້ອຍ” ແມ່ນທ່ານກໍຕອບແນວນີ້ວ່າ “ທ່ານທັງຫຼາຍ ເຮົາຍົກປາຕິໂມກຂຶ້ນສະແດງບໍ່ໄດ້”

ພິກຂຸເຫຼົ່ານັ້ນ ຈຶ່ງອາຣາດທະນາພຣະເຖຣະອົງທີ ໓ ວ່າ “ນິມົນທ່ານຍົກປາຕິໂມກຂຶ້ນ

ສະແດງເທີ້ນ ຂ້ານ້ອຍ"  ແມ່ນທ່ານກໍຕອບແນວນີ້ວ່າ "ທ່ານທັງຫຼາຍ ເຮົາຍົກປາຕິໂມກຂຶ້ນສະແດງບໍ່ໄດ້ ພິກຂຸເຫຼົ່ານັ້ນ ໄດ້ອາຣາດທະນາຈົນເຖິງພຣະຜູ້ເປັນນະວະກະໃນສົງໂດຍອຸບາຍນັ້ນວ່າ ທ່ານຈົ່ງຍົກປາຕິໂມກຂຶ້ນສະແດງເທີ້ນ"  ແມ່ນພຣະນະວະກະນັ້ນກໍຕອບແນວນີ້ວ່າ "ຂ້ານ້ອຍຍົກ ປາຕິໂມກຂຶ້ນສະແດງບໍ່ໄດ້ ຂ້ານ້ອຍ" ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸຢູ່ນຳກັນຫຼາຍອົງ  ລ້ວນເປັນຜູ້ໂງ່ຈ້ຳ ບໍ່ສະຫຼາດ ພິກຂຸເຫຼົ່ານັ້ນບໍ່ຮູ້ຈັກອຸໂປສົດ ຫຼື ວິທີລົງອຸໂປສົດ ຫຼື ປາຕິໂມກ ຫຼື ວິທີຍົກປາຕິໂມກຂຶ້ນສະແດງ ຈຶ່ງອາຣາດທະນາພຣະເຖຣະວ່າ ນິມົນພຣະເຖຣະຍົກປາຕິໂມກຂຶ້ນສະແດງເທີ້ນ ຂ້ານ້ອຍ ພຣະເຖຣະນັ້ນກ່າວແນວນີ້ວ່າ ທ່ານທັງຫຼາຍ ເຮົາຍົກປາຕິໂມກຂຶ້ນສະແດງບໍ່ໄດ້ ພິກຂຸເຫຼົ່ານັ້ນ ຈຶ່ງອາຣາດທະນາພຣະເຖຣະອົງທີ ໒ ວ່າ ນິມົນຍົກປາຕິໂມກຂຶ້ນສະແດງເທີ້ນ ຂ້ານ້ອຍ ແມ່ນພຣະເຖຣະອົງທີ ໒ ນັ້ນກໍກ່າວແນວນີ້ວ່າ ທ່ານທັງຫຼາຍ ເຮົາຍົກປາຕິໂມກຂຶ້ນສະແດງບໍ່ໄດ້ ພິກຂຸເຫຼົ່ານັ້ນຈຶ່ງອາຣາດທະນາພຣະເຖຣະອົງທີ ໓ ວ່າ ນິມົນພຣະເຖຣະຍົກປາຕິໂມກຂຶ້ນສະແດງເທີ້ນ ຂ້ານ້ອຍ ແມ່ນພຣະເຖຣະອົງທີ ໓ ກໍກ່າວແນວນີ້ວ່າ ທ່ານທັງຫຼາຍ ເຮົາຍົກປາຕິໂມກຂຶ້ນສະແດງບໍ່ໄດ້ ພິກຂຸເຫຼົ່ານັ້ນໄດ້ອາຣາດທະນາຈົນເຖິງພຣະຜູ້ເປັນນະວະກະໃນສົງໂດຍອຸບາຍນັ້ນວ່າ ທ່ານຈົ່ງຍົກປາຕິໂມກຂຶ້ນສະແດງເທີ້ນ ແມ່ນພຣະນະວະກະນັ້ນກໍຕອບແນວນີ້ວ່າ ຂ້ານ້ອຍຍົກປາຕິໂມກຂຶ້ນສະແດງບໍ່ໄດ້ ຂ້ານ້ອຍ

## ເລື້ອງສົ່ງພິກຂຸໄປຮຽນປາຕິໂມກພໍຈະກັບມາທັນໃນວັນນັ້ນ

ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນເພິ່ງສົ່ງພິກຂຸອົງໜຶ່ງໄປສູ່ອາວາດໃກ້ຄຽງ ພໍຈະກັບມາທັນໃນວັນນັ້ນໄດ້ ດ້ວຍສັ່ງວ່າ "ທ່ານ ທ່ານຈົ່ງໄປຮຽນປາຕິໂມກໂດຍຫຍໍ້ ຫຼື ໂດຍພິສະດານມາເທີ້ນ"

ຕໍ່ມາ ພິກຂຸທັງຫຼາຍໄດ້ມີຄວາມຄິດດັ່ງນີ້ວ່າ "ຈະສົ່ງພິກຂຸອົງໃດໄປນໍ" ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ເຖຣະບັນຊາພິກຂຸຜູ້ນະວະກະໄປ"

ພິກຂຸນະວະກະທັງຫຼາຍ ຖືກພິກຂຸເຖຣະບັນຊາແລ້ວບໍ່ຍອມໄປ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເປັນໄຂ້ຖືກພຣະເຖຣະບັນຊາແລ້ວຈະບໍ່ໄປບໍ່ໄດ້ ອົງໃດບໍ່ໄປ ຕ້ອງອາບັດທຸກກົດ

# ໗໔. ປັກຂະຄະນະນາທິອຸກຄະທະນານຸຊານະນາ

## ວ່າດ້ວຍຊົງອະນຸຍາດໃຫ້ຮຽນວິທີນັບປັກເປັນຕົ້ນ

### ເລື້ອງວິທີການນັບປັກ

[໑໕໖] ເມື່ອພຣະຜູ້ມີພຣະພາກເຈົ້າປະທັບຢູ່ ເມືອງໂຈທະນາວັດຖຸຕາມພຣະອັດທະຍາໄສແລ້ວ ກໍສະເດັດກັບມາໃນເມືອງຣາຊະຄຶອິກຄືເກົ່າ ສະໄໝນັ້ນ ພວກຊາວບ້ານຖາມພິກຂຸທັງຫຼາຍ ທີ່ກຳລັງທ່ຽວບິນທະບາດວ່າ "ຄູບາ ມື້ນີ້ຈັກຄ່ຳແລ້ວ ຂ້ານ້ອຍ?"

ພິກຂຸທັງຫຼາຍ ຕອບແນວນີ້ວ່າ "ທ່ານທັງຫຼາຍ ພວກອາດຕະມາບໍ່ຮູ້"

ພວກຊາວບ້ານພາກັນຕຳໜິ ປະນາມ ໂພນທະນາວ່າ "ແມ່ນພຽງການນັບຄ່ຳ ພຣະສະມະນະເຊື້ອສາຍພຣະສາກະຍະບຸດເຫຼົ່ານີ້ຍັງບໍ່ຮູ້ ເຮັດແນວໃດ ຈຶ່ງຈັກຮູ້ທຳຢ່າງອື່ນໄດ້ນໍ?" ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຮຽນວິທີການນັບຄ່ຳ

ຕໍ່ມາ ພິກຂຸທັງຫຼາຍໄດ້ມີຄວາມຄິດດັ່ງນີ້ວ່າ "ພິກຂຸອົງໃດນໍ ຄວນຮຽນວິທີການນັບຄ່ຳຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸທຸກ ໆ ອົງຮຽນວິທີການນັບຄ່ຳ

### ເລື້ອງຊົງອະນຸຍາດໃຫ້ນັບພິກຂຸໃນວັນອຸໂປສົດ

[໑໕໗] ສະໄໝນັ້ນ ພວກຊາວບ້ານຖາມພິກຂຸທັງຫຼາຍທີ່ກຳລັງທ່ຽວບິນທະບາດວ່າ ພິກຂຸມີຈຳນວນທໍ່ໃດ ຂ້ານ້ອຍ

ພິກຂຸທັງຫຼາຍຕອບແນວນີ້ວ່າ "ທ່ານທັງຫຼາຍ ພວກອາດຕະມາບໍ່ຮູ້"

ພວກຊາວບ້ານພາກັນຕຳໜິ ປະນາມ ໂພນທະນາວ່າ "ແມ່ນພວກກັນເອງ ພຣະສະມະນະເຊື້ອສາຍພຣະສາກະຍະບຸດເຫຼົ່ານີ້ຍັງບໍ່ຮູ້ ເຮັດແນວໃດ ຈັກຮູ້ທຳຢ່າງອື່ນໄດ້ນໍ?"ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ນັບພິກຂຸ

ຕໍ່ມາ ພິກຂຸທັງຫຼາຍໄດ້ມີຄວາມຄິດດັ່ງນີ້ວ່າ "ເມື່ອໃດນໍ ເຮົາຄວນນັບພິກຂຸ" ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ໃນວັນອຸໂປສົດ ເຮົາອະນຸຍາດໃຫ້ນັບພິກຂຸດ້ວຍການຮຽກຊື່ ຫຼື ໃຫ້ຈັບສະຫຼາກ

## ເລື້ອງໄປບິນທະບາດໃນໝູ່ບ້ານໄກ

[໑໕໗] ສະໄໝນັ້ນ ພິກຂຸທັງຫຼາຍບໍ່ຮູ້ວ່າ "ວັນນີ້ເປັນວັນອຸໂປສົດ" ໄປບິນທະບາດ ຍັງໝູ່ບ້ານໄກ ມາເຖິງເມື່ອສົງກຳລັງຍົກປາຕິໂມກຂຶ້ນສະແດງແດ່ ເມື່ອໃກ້ຈະຍົກຂຶ້ນສະແດງຈົບແດ່ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ບອກວ່າ ວັນນີ້ເປັນວັນອຸໂປສົດ

ຕໍ່ມາ ພິກຂຸທັງຫຼາຍໄດ້ມີຄວາມຄິດດັ່ງນີ້ວ່າ "ພິກຂຸອົງໃດນໍ ຄວນບອກ" ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ເຖຣະບອກແຕ່ເຊົ້າມືດ

## ເລື້ອງຄຶດບໍ່ໄດ້

ສະໄໝຕໍ່ມາ ພຣະເຖຣະອົງໜຶ່ງ ເວລາເຊົ້າມືດ ກໍຄຶດບໍ່ໄດ້ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ບອກແມ່ນໃນເວລາພັດຕະການ

ແມ່ນໃນເວລາພັດການ ພຣະເຖຣະກໍນຶກບໍ່ໄດ້ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ບອກໃນເວລາທີ່ຄຶດຂຶ້ນໄດ້

# ໗໔. ປຸບພະກະຣະນານຸຊານະນາ

## ວ່າດ້ວຍຊົງອະນຸຍາດບຸບພະກອນ

## ເລື້ອງບຸບພະກອນແລະບຸບພະກິດໃນໂຮງອຸໂປສົດ

[໑໕໘] ສະໄໝນັ້ນ ໃນອາວາດແຫ່ງໜຶ່ງ ໃນໂຮງອຸໂປສົດ ພວກພິກຂຸອາຄັນຕຸກະພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸທັງຫຼາຍຈຶ່ງບໍ່ປັດກວາດໂຮງອຸໂປສົດກັນນໍ" ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ປັດກວາດໂຮງອຸໂປສົດ"

ຕໍ່ມາ ພິກຂຸທັງຫຼາຍໄດ້ມີຄວາມຄິດດັ່ງນີ້ວ່າ "ພິກຂຸອົງໃດນໍ ຄວນປັດກວາດໂຮງອຸໂປສົດ" ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸເຖຣະໃຊ້ພິກຂຸນະວະກະ"

ພິກຂຸນະວະກະທັງຫຼາຍ ຖືກພິກຂຸເຖຣະໃຊ້ແລ້ວ ກໍບໍ່ຍອມປັດກວາດ ພິກຂຸທັງຫຼາຍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເປັນໄຂ້ຖືກພິກຂຸເຖຣະໃຊ້ແລ້ວຈະບໍ່ປັດກວາດບໍ່ໄດ້ ອົງໃດບໍ່ປັດກວາດ ຕ້ອງອາບັດທຸກກົດ

## ເລື້ອງປູອາສະນະແລະໄຕ້ປະທີບເປັນຕົ້ນ

[໑໒໐] ສະໄໝນັ້ນ ໃນໂຮງອຸໂປສົດ ບໍ່ມີໃຜປູອາສະນະໄວ້ ພິກຂຸທັງຫຼາຍພາກັນນັ່ງຢູ່ພື້ນດິນໂຕແລະຈີວອນເປື້ອນຝຸ່ນ ພິກຂຸທັງຫຼາຍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ປູອາສະນະໃນໂຮງອຸໂປສົດ"

ຕໍ່ມາ ພິກຂຸທັງຫຼາຍໄດ້ມີຄວາມວິຕົກວ່າ ພິກຂຸອົງໃດນໍ ຄວນປູອາສະນະໃນໂຮງອຸໂປສົດ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸເຖຣະໃຊ້ພິກຂຸນະວະກະ"

ພິກຂຸນະວະກະທັງຫຼາຍ ຖືກພິກຂຸເຖຣະໃຊ້ແລ້ວບໍ່ຍອມປູ ພິກຂຸທັງຫຼາຍຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເປັນໄຂ້ຖືກພິກຂຸເຖຣະໃຊ້ແລ້ວຈະບໍ່ປູບໍ່ໄດ້ ອົງໃດບໍ່ປູ ຕ້ອງອາບັດທຸກກົດ

[໑໒໑] ສະໄໝນັ້ນ ໃນໂຮງອຸໂປສົດ ບໍ່ໄຕ້ປະທີບໄວ້ ພິກຂຸທັງຫຼາຍ ຢຽບກາຍກັນແດ່ຈີວອນແດ່ ໃນທີ່ມືດ

ພິກຂຸທັງຫຼາຍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໄຕ້ປະທີບໃນໂຮງອຸໂປສົດ"

ຕໍ່ມາ ພິກຂຸທັງຫຼາຍໄດ້ມີຄວາມຄິດດັ່ງນີ້ວ່າ "ພິກຂຸອົງໃດນໍ ເພິ່ງໄຕ້ປະທີບໃນໂຮງອຸໂປສົດ" ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸເຖຣະໃຊ້ພິກຂຸນະວະກະ"

ພິກຂຸນະວະກະທັງຫຼາຍ ຖືກພິກຂຸເຖຣະໃຊ້ແລ້ວ ກໍບໍ່ຍອມໄຕ້ປະທີບພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເປັນໄຂ້ຖືກພິກຂຸເຖຣະໃຊ້ແລ້ວຈະບໍ່ໄຕ້ປະທີບບໍ່ໄດ້ ອົງໃດບໍ່ໄຕ້ປະທີບ ຕ້ອງອາບັດທຸກກົດ"

[໑໖໔] ສະໄໝນັ້ນ ໃນອາວາດແຫ່ງໜຶ່ງ ພວກພິກຂຸທີ່ຢູ່ໃນອາວາດບໍ່ຈັດນ້ຳສັນນ້ຳໃຊ້ໄວ້ ພຣະອາຄັນຕຸກະພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸທີ່ຢູ່ໃນອາວາດບໍ່ຈັດນ້ຳສັນນ້ຳໃຊ້ໄວ້ນໍ" ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຈັດນ້ຳສັນນ້ຳໃຊ້ໄວ້

ຕໍ່ມາ ພິກຂຸທັງຫຼາຍໄດ້ມີຄວາມຄິດດັ່ງນີ້ວ່າ "ພິກຂຸອົງໃດນໍ ເພິ່ງຈັດນ້ຳສັນນ້ຳໃຊ້ໄວ້" ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸເຖຣະໃຊ້ພິກຂຸນະວະກະ"

ພິກຂຸນະວະກະທັງຫຼາຍຖືກພິກຂຸເຖຣະໃຊ້ແລ້ວ ບໍ່ຍອມຈັດນ້ຳສັນນ້ຳໃຊ້ໄວ້ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເປັນໄຂ້ຖືກພິກຂຸເຖຣະໃຊ້ແລ້ວຈະບໍ່ຈັດບໍ່ໄດ້ ອົງໃດບໍ່ຈັດ ຕ້ອງອາບັດທຸກກົດ"

## ໗໖. ທິສັງຄະມິກາທິວັດຖຸ

## ວ່າດ້ວຍພິກຂຸໄປສູ່ທິດເປັນຕົ້ນ

## ເລື້ອງພິກຂຸຈະໄປໄສຕ້ອງບອກລາກ່ອນ

[໑໖໑] ສະໄໝນັ້ນ ພວກພິກຂຸຫຼາຍອົງນຳກັນເປັນຜູ້ໂງ່ຈ້າ ບໍ່ສະຫຼາດ ໄປສູ່ທິດ ບໍ່ບອກລາພຣະອຸປັດຊາອາຈານ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ພິກຂຸຫຼາຍອົງເປັນຜູ້ໂງ່ຈ້າ ບໍ່ສະຫຼາດ ໄປສູ່ທິດ ບໍ່ບອກລາອຸປັດຊາອາຈານ ພິກຂຸທັງຫຼາຍ ອຸປັດຊາອາຈານ ເພິ່ງຖາມພິກຂຸເຫຼົ່ານັ້ນວ່າ ພວກທ່ານຈະໄປໄສກັນ ໄປກັບຜູ້ໃດ?"

ຖ້າພິກຂຸເຫຼົ່ານັ້ນ ເປັນຜູ້ໂງ່ຈ້າບໍ່ສະຫຼາດ ອ້າງເຖິງພິກຂຸເຫຼົ່າອື່ນທີ່ໂງ່ຈ້າບໍ່ສະຫຼາດຄືກັນ ພຣະອຸປັດຊາອາຈານບໍ່ເພິ່ງອະນຸຍາດ ຖ້າອະນຸຍາດ ຕ້ອງອາບັດທຸກກົດ

ອັນໜຶ່ງ ຖ້າພວກທ່ານເປັນຜູ້ໂງ່ຈ້າບໍ່ສະຫຼາດ ພຣະອຸປັດຊາອາຈານຍັງບໍ່ອະນຸຍາດ ຖ້າຍັງຂືນໄປ ຕ້ອງອາບັດທຸກກົດ

## ເລື້ອງຄວນສົງເຄາະພິກຂຸຜູ້ເປັນພະຫູສູດ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ຢູ່ໃນອາວາດແຫ່ງໜຶ່ງ ພິກຂຸຫຼາຍອົງເປັນຜູ້ໂງ່ຈ້າ ບໍ່ສະຫຼາດ ບໍ່ຮູ້ຈັກອຸໂປສົດ ຫຼື ວິທີລົງອຸໂປສົດ ຫຼື ປາຕິໂມກ ຫຼື ວິທີຍົກປາຕິໂມກຂຶ້ນສະແດງ ພິກຂຸອົງອື່ນເປັນພະຫູສູດ ຊ່ຽວຊານປະຣິຍັດ (ອາຄະຕາຄົມ) ຊົງທຳ ຊົງວິໄນ ຊົງມາຕິກາ ເປັນບັນດິດ ສະຫຼາດ ມີປັນຍາ ມີຄວາມລະອາຍ ມີຄວາມລະມັດລະວັງ ໃຝ່ການສຶກສາ ມາໃນອາວາດນັ້ນ ພິກຂຸພະຫູສູດນັ້ນອັນພິກຂຸເຫຼົ່ານັ້ນເພິ່ງສົງເຄາະ ອະນຸເຄາະ ໂອພາປາໄສ ບຳລຸງດ້ວຍຜົງແປ້ງ ດິນໜຽວ ໄມ້ຖູແຂ້ວ ນ້ຳບ້ວນປາກ ຖ້າບໍ່ສົງເຄາະ ອະນຸເຄາະ ໂອພາປາໄສ ບຳລຸງດ້ວຍຜົງແປ້ງ ດິນໜຽວ ໄມ້ຖູແຂ້ວ ນ້ຳບ້ວນປາກ ຕ້ອງອາບັດທຸກກົດ

## ເລື້ອງສົ່ງພິກຂຸໄປພໍຈະກັບມາທັນໃນວັນນັ້ນ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ພິກຂຸຢູ່ນຳກັນຫຼາຍອົງ ເປັນຜູ້ໂງ່ຈ້າບໍ່ສະຫຼາດ ບໍ່ຮູ້ຈັກອຸໂປສົດ ຫຼື ວິທີລົງອຸໂປສົດ ຫຼື ປາຕິໂມກ ຫຼື ວິທີຍົກປາຕິໂມກຂຶ້ນສະແດງ ພິກຂຸເຫຼົ່ານັ້ນ ເພິ່ງສົ່ງພິກຂຸອົງໜຶ່ງໄປສູ່ອາວາດໃກ້ຄຽງ ພໍຈະກັບມາທັນໃນວັນນັ້ນ ດ້ວຍສັ່ງວ່າ ທ່ານ ທ່ານຈົ່ງໄປຮຽນປາຕິໂມກໂດຍຫຍໍ້ ຫຼື ໂດຍພິສະດານມາເທີ້ນ ຖ້າໄດ້ແນວນັ້ນ ນັ້ນເປັນການດີ ຖ້າບໍ່ໄດ້ ພິກຂຸເຫຼົ່ານັ້ນທຸກອົງ ເພິ່ງໄປສູ່ອາວາດທີ່ມີພິກຂຸຮູ້ອຸໂປສົດ ຫຼື ວິທີລົງອຸໂປສົດ ຫຼື ປາຕິໂມກ ຫຼື ວິທີສູດປາຕິໂມກ ຖ້າບໍ່ໄປ ຕ້ອງອາບັດທຸກກົດ

## ເລື້ອງຈຳພັນສາໃນອາວາດທີ່ມີຜູ້ຍົກປາຕິໂມກຂຶ້ນສະແດງໄດ້

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ພິກຂຸຢູ່ຈຳພັນສາຫຼາຍອົງເປັນຜູ້ໂງ່ຈ້າບໍ່ສະຫຼາດ ບໍ່ຮູ້ຈັກອຸໂປສົດ ຫຼື ວິທີລົງອຸໂປສົດ ຫຼື ປາຕິໂມກ ຫຼື ວິທີຍົກປາຕິໂມກຂຶ້ນສະແດງ ພິກຂຸເຫຼົ່ານັ້ນ ເພິ່ງສົ່ງພິກຂຸອົງໜຶ່ງໄປສູ່ອາວາດໃກ້ຄຽງ ພໍຈະກັບມາທັນໃນວັນນັ້ນ ດ້ວຍສັ່ງວ່າ "ທ່ານ ທ່ານຈົ່ງໄປຮຽນປາຕິໂມກໂດຍຫຍໍ້ ຫຼື ໂດຍພິສະດານມາເທີ້ນ" ຖ້າໄດ້ແນວນັ້ນ ນັ້ນເປັນການດີ ຖ້າບໍ່ໄດ້ ເພິ່ງສົ່ງພິກຂຸອົງໜຶ່ງໄປຊົ່ວເວລາ ໗ ວັນ ດ້ວຍສັ່ງວ່າ "ທ່ານ ທ່ານຈົ່ງໄປຮຽນປາຕິໂມກໂດຍຫຍໍ້ ຫຼື ໂດຍພິສະດານມາເທີ້ນ" ຖ້າໄດ້ແນວນັ້ນ ນັ້ນເປັນການດີ ຖ້າບໍ່ໄດ້ ພິກຂຸເຫຼົ່ານັ້ນ ບໍ່ເພິ່ງຈຳພັນສາຢູ່ໃນອາວາດນັ້ນ ຖ້າຈຳພັນສາຢູ່ ຕ້ອງອາບັດທຸກກົດ

# ໗໓. ປາຣິສຸດທິທານະກະຖາ

## ວ່າດ້ວຍການມອບປາຣິສຸດທິ

## ເລື້ອງພິກຂຸໄຂ້ມອບປາຣິສຸດທິ

[໑໖໔] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພວກທ່ານຈົ່ງປະຊຸມກັນ ສົງຈັກລົງອຸໂປສົດ

ເມື່ອພຣະອົງຕັດແນວນີ້ ພິກຂຸອົງໜຶ່ງໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ ມີພິກຂຸເປັນໄຂ້ຢູ່ ຂ້ານ້ອຍ ພິກຂຸຜູ້ເປັນໄຂ້ນັ້ນ ມາບໍ່ໄດ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ເປັນໄຂ້ມອບປາຣິສຸດທິ

ພິກຂຸທັງຫຼາຍ ກໍແລ ພິກຂຸຜູ້ເປັນໄຂ້ເພິ່ງມອບປາຣິສຸດທິແນວນີ້

ພິກຂຸອົງຜູ້ເປັນໄຂ້ນັ້ນ ເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢ່ອງຢໍ້ປະນົມມື ກ່າວແນວນີ້ວ່າ "ຂ້າພະເຈົ້າຂໍມອບປາຣິສຸດທິ ທ່ານຈົ່ງນຳປາຣິສຸດທິຂອງຂ້າພະເຈົ້າໄປ ຈົ່ງບອກປາຣິສຸດທິຂອງຂ້າພະເຈົ້າ

ພິກຂຸຜູ້ມອບປາຣິສຸດທິໃຫ້ພິກຂຸຜູ້ຮັບມອບປາຣິສຸດທິຮູ້ດ້ວຍກາຍ ໃຫ້ຮູ້ດ້ວຍວາຈາ ໃຫ້ຮູ້ດ້ວຍກາຍແລະວາຈາ ປາຣິສຸດທິເປັນອັນພິກຂຸໄຂ້ມອບໃຫ້ແລ້ວ ພິກຂຸຜູ້ມອບປາຣິສຸດທິບໍ່ໃຫ້ພິກຂຸຜູ້ຮັບມອບປາຣິສຸດທິຮູ້ດ້ວຍກາຍບໍ່ໃຫ້ຮູ້ດ້ວຍວາຈາ ບໍ່ໃຫ້ຮູ້ດ້ວຍກາຍແລະວາຈາ ປາຣິສຸດທິເປັນອັນພິກຂຸໄຂ້ຍັງບໍ່ໄດ້ມອບ ຖ້າໄດ້ແນວນັ້ນ ນັ້ນເປັນການດີ ຖ້າບໍ່ໄດ້ ພິກຂຸທັງຫຼາຍເພິ່ງໃຊ້ຕຽງ ຫຼື ຕັ່ງຫາມພິກຂຸໄຂ້ມາໃນທ່າມກາງສົງແລ້ວລົງອຸໂປສົດ

ພິກຂຸທັງຫຼາຍ ຖ້າພວກພິກຂຸຜູ້ພະຍາບານພິກຂຸໄຂ້ໄດ້ປຶກສາກັນ ດັ່ງນີ້ວ່າ ຖ້າພວກເຮົາຈັກຍ້າຍພິກຂຸໄຂ້ ອາການໄຂ້ຈັກກຳເຣີບໜັກຂຶ້ນ ຫຼື ພິກຂຸໄຂ້ຈັກເຖິງແກ່ມໍຣະນະພາບ ບໍ່ເພິ່ງຍ້າຍພິກຂຸໄຂ້ ສົງເພິ່ງໄປລົງອຸໂປສົດໃນສຳນັກພິກຂຸໄຂ້ນັ້ນ ແຕ່ສົງບໍ່ເພິ່ງແບ່ງພວກກັນເຮັດອຸໂປສົດ ຖ້າແບ່ງພວກກັນເຮັດ ຕ້ອງອາບັດທຸກກົດ

ພິກຂຸທັງຫຼາຍ ເມື່ອພິກຂຸໄຂ້ໄດ້ມອບປາຣິສຸດທິແລ້ວ ຖ້າພິກຂຸຜູ້ນຳປາຣິສຸດທິປົບໄປຈາກທີ່ນັ້ນ ພິກຂຸໄຂ້ເພິ່ງມອບປາຣິສຸດທິແກ່ພິກຂຸອົງອື່ນ

ພິກຂຸທັງຫຼາຍ ເມື່ອພິກຂຸໄຂ້ໄດ້ມອບປາຣິສຸດທິແລ້ວ ຖ້າພິກຂຸຜູ້ນຳປາຣິສຸດທິ ສິກອອກ

ໄປໃນບ່ອນນັ້ນ ຯລຯ ມໍຣະນະພາບ ຯລຯ ປະຕິນຍາເປັນສາມະເນນ ຯລຯ ປະຕິນຍາເປັນຜູ້ບອກລາສິກຂາ ຯລຯ ປະຕິນຍາເປັນຜູ້ຕ້ອງອັນຕິມະວັດຖຸ[๑] ຯລຯ ປະຕິນຍາເປັນຜູ້ວິກົນຈະລິດ ຯລຯ ປະຕິນຍາເປັນຜູ້ມີຈິດຟຸ້ງຊ່ານ ຯລຯ ປະຕິນຍາເປັນຜູ້ກະສັບກະສ່າຍຍ້ອນເວທະນາ ຯລຯ ປະຕິນຍາເປັນຜູ້ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ເຫັນອາບັດ ຯລຯ ປະຕິນຍາເປັນຜູ້ຖືກສົງລົງອຸກເຂປະນີຍະກຳ ຍ້ອນບໍ່ເຮັດຄືນອາບັດ ຯລຯ ປະຕິນຍາເປັນຜູ້ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ຯລຯ ປະຕິນຍາເປັນບັນເດາະ ຯລຯ ປະຕິນຍາເປັນໄຖຍະສັງວາດ[๑] ຯລຯ ປະຕິນຍາເປັນຜູ້ເຂົ້າຮີດເດຍຣະຖີ ຯລຯ ປະຕິນຍາເປັນສັດເດຍຣັດສານ ຯລຯ ປະຕິນຍາເປັນຜູ້ຂ້າມານດາ ຯລຯ ປະຕິນຍາເປັນຜູ້ຂ້າບິດາ ຯລຯ ປະຕິນຍາເປັນຜູ້ຂ້າພຣະອະຣະຫັນ ຯລຯ ປະຕິນຍາເປັນຜູ້ປະທຸດສະຮ້າຍພິກຂຸນີ ຯລຯ ປະຕິນຍາເປັນຜູ້ທຳລາຍສົງ ຯລຯ ປະຕິນຍາເປັນຜູ້ທຳຮ້າຍພຣະສາດສະດາຈົນຫໍ້ພຣະໂລຫິດ ຯລຯ ປະຕິນຍາເປັນອຸພະໂຕພະຍັນຊະນະກະ[๔] ພິກຂຸໄຂ້ເພິ່ງມອບປາຣິສຸດທິແກ່ອົງອື່ນ

ພິກຂຸທັງຫຼາຍ ເມື່ອພິກຂຸໄຂ້ໄດ້ມອບປາຣິສຸດທິແລ້ວ ຖ້າພິກຂຸຜູ້ນຳປາຣິສຸດທິປົບໄປໃນລະຫວ່າງທາງ ປາຣິສຸດທິເປັນອັນຍັງບໍ່ໄດ້ນຳມາ

ພິກຂຸທັງຫຼາຍ ເມື່ອພິກຂຸໄຂ້ໄດ້ມອບປາຣິສຸດທິແລ້ວ ຖ້າພິກຂຸຜູ້ນຳປາຣິສຸດທິສິກອອກໄປໃນລະຫວ່າງທາງ ຯລຯ ປະຕິຍານເປັນອຸພະໂຕພະຍັນຊະນະກະ ປາຣິສຸດທິເປັນອັນຍັງບໍ່ໄດ້ນຳມາ

ພິກຂຸທັງຫຼາຍ ເມື່ອພິກຂຸໄຂ້ໄດ້ມອບປາຣິສຸດທິແລ້ວ ຖ້າພິກຂຸຜູ້ນຳປາຣິສຸດທິເຂົ້າທີ່ປະຊຸມສົງແລ້ວປົບໄປ ປາຣິສຸດທິເປັນອັນນຳມາແລ້ວ

ພິກຂຸທັງຫຼາຍ ເມື່ອພິກຂຸໄຂ້ໄດ້ມອບປາຣິສຸດທິແລ້ວ ຖ້າພິກຂຸຜູ້ນຳປາຣິສຸດທິເຂົ້າທີ່ປະຊຸມສົງແລ້ວສິກອອກໄປ ຯລຯ ປະຕິຍານເປັນອຸພະໂຕພະຍັນຊະນະກະ ປາຣິສຸດທິເປັນອັນນຳມາແລ້ວ

ພິກຂຸທັງຫຼາຍ ເມື່ອພິກຂຸໄຂ້ໄດ້ມອບປາຣິສຸດທິແລ້ວ ຖ້າພິກຂຸຜູ້ນຳປາຣິສຸດທິເຂົ້າທີ່ປະຊຸມສົງແລ້ວຫຼັບຢູ່ບໍ່ໄດ້ບອກ ເຜີໄປບໍ່ໄດ້ບອກ ເຂົ້າສະມາບັດບໍ່ໄດ້ບອກປາຣິສຸດທິ ເປັນອັນນຳມາແລ້ວ ພິກຂຸຜູ້ນຳປາຣິສຸດທິບໍ່ຕ້ອງອາບັດ

ພິກຂຸທັງຫຼາຍ ເມື່ອພິກຂຸໄຂ້ໄດ້ມອບປາຣິສຸດທິແລ້ວ ຖ້າພິກຂຸຜູ້ນຳປາຣິສຸດທິເຂົ້າທີ່ປະຊຸມສົງແລ້ວ ຈົງໃຈບໍ່ບອກ ປາຣິສຸດທິເປັນອັນນຳມາແລ້ວ ແຕ່ພິກຂຸຜູ້ນຳປາຣິສຸດທິຕ້ອງອາບັດທຸກກົດ

# ໗໗. ສັນທະທານະກະຖາ

## ວ່າດ້ວຍການມອບສັນທະ

## ເລື້ອງເຮັດກຳທີ່ຈະຕ້ອງເຮັດ

[໑໙໔] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພວກທ່ານຈົ່ງປະຊຸມກັນ ສົງຈັກເຮັດກຳ

ເມື່ອພຣະອົງຕັດແນວນີ້ ພິກຂຸອົງໜຶ່ງໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ ມີພິກຂຸເປັນໄຂ້ຢູ່ ຂ້ານ້ອຍ ພິກຂຸຜູ້ໄຂ້ນັ້ນມາບໍ່ໄດ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸໄຂ້ມອບສັນທະ

## ວິທີມອບສັນທະ

ພິກຂຸທັງຫຼາຍ ກໍແລ ພິກຂຸຜູ້ເປັນໄຂ້ເພິ່ງມອບສັນທະແນວນີ້

ພິກສຸຜູ້ເປັນໄຂ້ນັ້ນ ເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢ່ອງຢໍ້ ປະນົມມື ກ່າວແນວນີ້ວ່າ ຂ້າພະເຈົ້າຂໍມອບສັນທະ ທ່ານຈົ່ງນຳສັນທະຂອງຂ້າພະເຈົ້າໄປ ຈົ່ງບອກສັນທະຂອງຂ້າພະເຈົ້າ

ພິກຂຸຜູ້ມອບສັນທະໃຫ້ພິກຂຸຜູ້ຮັບມອບສັນທະຮູ້ດ້ວຍກາຍ ໃຫ້ຮູ້ດ້ວຍວາຈາ ໃຫ້ຮູ້ດ້ວຍກາຍແລະວາຈາ ສັນທະເປັນອັນມອບໃຫ້ແລ້ວ ພິກຂຸຜູ້ມອບສັນທະບໍ່ໃຫ້ພິກຂຸຜູ້ຮັບມອບສັນທະຮູ້ດ້ວຍກາຍ ບໍ່ໃຫ້ຮູ້ດ້ວຍວາຈາ ບໍ່ໃຫ້ຮູ້ດ້ວຍກາຍ ແລະວາຈາ ສັນທະເປັນອັນຍັງບໍ່ໄດ້ມອບຖ້າໄດ້ແນວນັ້ນ ນັ້ນເປັນການດີ ຖ້າບໍ່ໄດ້ ພິກຂຸທັງຫຼາຍເພິ່ງໃຊ້ຕຽງ ຫຼື ຕັ່ງຫາມພິກຂຸໄຂ້ມາໃນທ່າມກາງສົງແລ້ວເຮັດກຳ

ພິກຂຸທັງຫຼາຍ ຖ້າພວກພິກຂຸຜູ້ພະຍາບານພິກຂຸໄຂ້ໄດ້ປຶກສາກັນ ດັ່ງນີ້ວ່າ ຖ້າພວກເຮົາຈັກຍ້າຍພິກຂຸໄຂ້ ອາການໄຂ້ຈັກກຳເຣີບໜັກຂຶ້ນ ຫຼື ພິກຂຸໄຂ້ຈັກເຖິງແກ່ມໍຣະນະພາບ ບໍ່ເພິ່ງຍ້າຍພິກຂຸໄຂ້ ສົງເພິ່ງໄປເຮັດກຳໃນສຳນັກພິກຂຸໄຂ້ນັ້ນ ແຕ່ສົງບໍ່ເພິ່ງແບ່ງພວກກັນເຮັດກຳ ຖ້າແບ່ງພວກກັນເຮັດ ຕ້ອງອາບັດທຸກກົດ

ພິກຂຸທັງຫຼາຍ ເມື່ອພິກຂຸໄຂ້ໄດ້ມອບສັນທະແລ້ວ ຖ້າພິກຂຸຜູ້ນຳສັນທະປີບໄປຈາກທີ່ນັ້ນ ພິກຂຸໄຂ້ເພິ່ງມອບສັນທະແກ່ພິກຂຸອົງອື່ນ

ພິກຂຸທັງຫຼາຍ ເມື່ອພິກຂຸໄຂ້ໄດ້ມອບສັນທະແລ້ວ ຖ້າພິກຂຸຜູ້ນຳສັນທະສິກອອກໄປໃນທີ່ນັ້ນ ຯລຯ ມໍຣະນະພາບ ຯລຯ ປະຕິນຍາເປັນສາມະເນນ ຯລຯ ປະຕິນຍາເປັນຜູ້ບອກລາສິກຂາ ຯລຯ ປະຕິນຍາເປັນຜູ້ຕ້ອງອັນຕິມະວັດຖຸ ຯລຯ ປະຕິນຍາເປັນຜູ້ວິກົນຈະລິດ ຯລຯ ປະຕິນຍາເປັນຜູ້ມີຈິດຟຸ້ງຊ່ານ ຯລຯ ປະຕິນຍາເປັນຜູ້ກະສັບກະສ່າຍຍ້ອນເວທະນາ ຯລຯ ປະຕິນຍາເປັນຜູ້ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ເຫັນອາບັດ ຯລຯ ປະຕິນຍາເປັນຜູ້ຖືກສົງລົງອຸກເຂປະນີຍະກຳ ຍ້ອນບໍ່ເຮັດຄືນອາບັດ ຯລຯ ປະຕິນຍາເປັນຜູ້ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ຯລຯ ປະຕິນຍາເປັນບັນເດາະ ຯລຯ ປະຕິນຍາເປັນໄຖຍະສັງວາດ ຯລຯ  ປະຕິນຍາເປັນຜູ້ເຂົ້າຮີດເດຍຣະຖີ ຯລຯ ປະຕິນຍາເປັນສັດເດຍຣັດສານ ຯລຯ ປະຕິນຍາເປັນຜູ້ຂ້າມານດາ ຯລຯ ປະຕິນຍາເປັນຜູ້ຂ້າບິດາ ຯລຯ ປະຕິນຍາເປັນຜູ້ຂ້າພຣະອະຣະຫັນ ຯລຯ ປະຕິນຍາເປັນຜູ້ປະທຸດສະຮ້າຍພິກຂຸນີ ຯລຯ ປະຕິນຍາເປັນຜູ້ທຳລາຍສົງ ຯລຯ ປະຕິນຍາເປັນຜູ້ທຳຮ້າຍພຣະສາດສະດາຈົນຫໍ້ພຣະໂລຫິດ ຯລຯ ປະຕິນຍາເປັນອຸພະໂຕພະຍັນຊະນະກະ ພິກຂຸໄຂ້ເພິ່ງມອບສັນທະແກ່ພິກຂຸອົງອື່ນ

ພິກຂຸທັງຫຼາຍ ເມື່ອພິກຂຸໄຂ້ໄດ້ມອບສັນທະແລ້ວ ຖ້າພິກຂຸຜູ້ນຳສັນທະປົບໄປໃນລະຫວ່າງທາງ ສັນທະເປັນອັນຍັງບໍ່ໄດ້ນຳມາ

ພິກຂຸທັງຫຼາຍ ເມື່ອພິກຂຸໄຂ້ໄດ້ມອບສັນທະແລ້ວ ຖ້າພິກຂຸຜູ້ນຳສັນທະສິກອອກໄປໃນລະຫວ່າງທາງ ຯລຯ ປະຕິຍານເປັນອຸພະໂຕພະຍັນຊະນະກະ ສັນທະເປັນອັນຍັງບໍ່ໄດ້ນຳມາ

ພິກຂຸທັງຫຼາຍ ເມື່ອພິກຂຸໄຂ້ໄດ້ມອບສັນທະແລ້ວ ຖ້າພິກຂຸຜູ້ນຳສັນທະເຂົ້າທີ່ປະຊຸມສົງແລ້ວປົບໄປ ສັນທະເປັນອັນນຳມາແລ້ວ

ພິກຂຸທັງຫຼາຍ ເມື່ອພິກຂຸໄຂ້ໄດ້ມອບສັນທະແລ້ວ ຖ້າພິກຂຸຜູ້ນຳສັນທະເຂົ້າທີ່ປະຊຸມສົງແລ້ວສິກອອກໄປ ຯລຯ ປະຕິຍານເປັນອຸພະໂຕພະຍັນຊະນະກະ ສັນທະເປັນອັນນຳມາແລ້ວ

ພິກຂຸທັງຫຼາຍ ເມື່ອພິກຂຸໄຂ້ໄດ້ມອບສັນທະແລ້ວ ຖ້າພິກຂຸຜູ້ນຳສັນທະເຂົ້າທີ່ປະຊຸມສົງແລ້ວຫຼັບຢູ່ບໍ່ໄດ້ບອກ ເຜີໄປບໍ່ໄດ້ບອກ ເຂົ້າສະມາບັດບໍ່ໄດ້ບອກ ສັນທະເປັນອັນນຳມາແລ້ວ ພິກຂຸຜູ້ນຳສັນທະບໍ່ຕ້ອງອາບັດ

ພິກຂຸທັງຫຼາຍ ເມື່ອພິກຂຸໄຂ້ໄດ້ມອບສັນທະແລ້ວ ຖ້າພິກຂຸຜູ້ນຳສັນທະເຂົ້າທີ່ປະຊຸມສົງແລ້ວ ຈົງໃຈບໍ່ບອກ ສັນທະເປັນອັນນຳມາແລ້ວ ແຕ່ພິກຂຸຜູ້ນຳສັນທະຕ້ອງອາບັດທຸກກົດ

ພິກຂຸທັງຫຼາຍ ໃນວັນອຸໂປສົດ ເຮົາອະນຸຍາດໃຫ້ພິກຂຸຜູ້ມອບປາຣິສຸດທິໃຫ້ມອບສັນທະດ້ວຍ ເມື່ອສົງມີກິດຈຳຕ້ອງເຮັດ

## ໗໙. ຍາຕະກາທິກະທະນະກະຖາ

### ວ່າດ້ວຍພວກຍາດເປັນຕົ້ນຈັບພິກຂຸ

### ເລື້ອງພິກຂຸຖືກພວກຍາດຕິພີນ້ອງເປັນຕົ້ນຈັບໄວ້

[໑໗໙] ສະໄໝນັ້ນ ໃນວັນອຸໂປສົດນັ້ນ ໝູ່ຍາດໄດ້ຈັບພິກຂຸອົງໜຶ່ງໄວ້ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ໃນວັນອຸໂປສົດນັ້ນ ໝູ່ຍາດໄດ້ຈັບພິກຂຸໄວ້ ພິກຂຸທັງຫຼາຍ ເພິ່ງກ່າວກັບໝູ່ຍາດນັ້ນແນວນີ້ວ່າ ທ່ານທັງຫຼາຍ ກະລຸນາປ່ອຍພິກຂຸນີ້ໄວ້ຈັກໜ້ອຍ ຈົນກວ່າພິກຂຸນີ້ຈະລົງອຸໂປສົດສຳເລັດກ່ອນເທີ້ນ ຖ້າໄດ້ແນວນັ້ນ ນັ້ນເປັນການດີ

ຖ້າບໍ່ໄດ້ ພິກຂຸທັງຫຼາຍ ເພິ່ງກ່າວກັບຍາດເຫຼົ່ານັ້ນແນວນີ້ວ່າ ທ່ານທັງຫຼາຍ ກະລຸນາຖ້າໃນບ່ອນສົມຄວນຈັກໜ້ອຍຈົນກວ່າພິກຂຸນີ້ຈະມອບປາຣິສຸດທິສຳເລັດກ່ອນເທີ້ນ ຖ້າໄດ້ແນວນັ້ນ ນັ້ນເປັນການດີ

ຖ້າບໍ່ໄດ້ ພິກຂຸທັງຫຼາຍ ເພິ່ງກ່າວກັບຍາດເຫຼົ່ານັ້ນແນວນີ້ວ່າ ທ່ານທັງຫຼາຍ ກະລຸນານຳພິກຂຸນີ້ໄປໄວ້ນອກສີມາຈັກໜ້ອຍ ຈົນກວ່າສົງຈະລົງອຸໂປສົດສຳເລັດເທີ້ນ ຖ້າໄດ້ແນວນັ້ນ ນັ້ນເປັນການດີ

ຖ້າບໍ່ໄດ້ແນວນັ້ນ ສົງບໍ່ເພິ່ງແບ່ງພວກກັນລົງອຸໂປສົດ ຖ້າແບ່ງພວກກັນລົງ ຕ້ອງອາບັດທຸກກົດ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນວັນອຸໂປສົດນັ້ນ ພຣະຣາຊາທັງຫຼາຍ ຊົງຈັບພິກຂຸໄວ້ ຯລຯ ພວກໂຈນຈັບໄວ້ ຯລຯ ພວກນັກເລງຈັບໄວ້ ຯລຯ ພວກພິກຂຸທີ່ເປັນສັດຕູກັນຈັບໄວ້ ພິກຂຸທັງຫຼາຍ ເພິ່ງກ່າວກັບພວກພິກຂຸທີ່ເປັນສັດຕູກັນນັ້ນແນວນີ້ວ່າ ທ່ານທັງຫຼາຍ ກະລຸນາປ່ອຍພິກຂຸນີ້ໄວ້ຈັກໜ້ອຍຈົນກວ່າພິກຂຸນີ້ຈະລົງອຸໂປສົດສຳເລັດເທີ້ນ ຖ້າໄດ້ແນວນັ້ນ ນັ້ນເປັນການດີ

ຖ້າບໍ່ໄດ້ ພິກຂຸທັງຫຼາຍ ເພິ່ງກ່າວກັບພວກພິກຂຸທີ່ເປັນສັດຕູກັນນັ້ນແນວນີ້ວ່າ "ທ່ານທັງຫຼາຍ ກະລຸນາ ຖ້າໃນບ່ອນສົມຄວນຈັກໜ້ອຍ ຈົນກວ່າພິກຂຸນີ້ຈະມອບປາຣິສຸດທິສຳເລັດກ່ອນເທີ້ນ ຖ້າໄດ້ແນວນັ້ນ ນັ້ນເປັນການດີ

ຖ້າບໍ່ໄດ້ ພິກຂຸທັງຫຼາຍເພິ່ງກ່າວກັບພວກພິກຂຸທີ່ເປັນສັດຕູກັນນັ້ນແນວນີ້ວ່າ ທ່ານທັງຫຼາຍ ກະລຸນານໍາພິກຂຸນີ້ໄປໄວ້ນອກສີມາຈັກໜ້ອຍຈົນກວ່າສົງຈະລົງອຸໂປສົດສໍາເລັດກ່ອນເທີ້ນ ຖ້າໄດ້ແນວນັ້ນ ນັ້ນເປັນການດີ

ຖ້າບໍ່ໄດ້ແນວນັ້ນ ສົງບໍ່ເພິ່ງແບ່ງພວກກັນລົງອຸໂປສົດເດັດຂາດ ຖ້າແບ່ງພວກກັນລົງຕ້ອງອາບັດທຸກກົດ

# ໗໐. ອຸມມັດຕະກະສະມະຕິ

## ວ່າດ້ວຍການສົມມຸດພິກຂຸວິກົນຈະລິດ

[໑໖໗] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍພວກທ່ານຈົ່ງປະຊຸມກັນ ສົງມີກິດຈໍາຕ້ອງເຮັດເມື່ອພຣະອົງຕັດແນວນີ້ ພິກຂຸອົງໜຶ່ງໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ ມີພິກຂຸວິກົນຈະລິດຊື່ວ່າ ຄັກຄະຢູ່ ຂ້ານ້ອຍ ພິກຂຸຄັກຄະນັ້ນມາບໍ່ໄດ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸວິກົນຈະລິດນີ້ມີ ໔ ປະເພດ ຄື

໑. ພິກຂຸວິກົນຈະລິດ ຣະນຶກອຸໂປສົດໄດ້ແດ່ ຣະນຶກບໍ່ໄດ້ແດ່ ຣະນຶກສັງຄະກໍາໄດ້ແດ່ ຣະນຶກບໍ່ໄດ້ແດ່ ຣະນຶກບໍ່ໄດ້ເລີຍແດ່

໔. ພິກຂຸວິກົນຈະລິດມາອຸໂປສົດແດ່ ບໍ່ມາແດ່ ມາສັງຄະກໍາແດ່ ບໍ່ມາແດ່ ບໍ່ມາເລີຍແດ່

ພິກຂຸທັງຫຼາຍ ບັນດາພິກຂຸວິກົນຈະລິດ ໔ ປະເພດນັ້ນ ອົງໃດທີ່ຍັງຣະນຶກອຸໂປສົດໄດ້ກໍຕາມ ຣະນຶກບໍ່ໄດ້ກໍຕາມ ຣະນຶກສັງຄະກໍາໄດ້ກໍຕາມ ຣະນຶກບໍ່ໄດ້ກໍຕາມ ມາອຸໂປສົດກໍຕາມ ບໍ່ມາກໍຕາມ ມາສັງຄະກໍາກໍຕາມ ບໍ່ມາກໍຕາມ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ອຸມມັດຕະກະສົມມຸດແກ່ພິກຂຸວິກົນຈະລິດທີ່ເປັນແນວນັ້ນ

## ວິທີໃຫ້ອຸມມັດຕະກະສົມມຸດແລະກໍາມະວາຈາໃຫ້ອຸມມັດຕະກະສົມມຸດ

ພິກຂຸທັງຫຼາຍ ກໍແລ ເພິ່ງໃຫ້ອຸມມັດຕະກະສົມມຸດແນວນີ້

ພິກຂຸຜູ້ສະຫຼາດ ຜູ້ສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກໍາມະວາຈາ ວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຄັກຄະເປັນຜູ້ວິກົນຈະລິດ ຣະນຶກອຸໂປສົດໄດ້ແດ່ ຣະນຶກບໍ່ໄດ້ແດ່ ຣະນຶກສັງຄະກໍາໄດ້ແດ່ ຣະນຶກບໍ່ໄດ້ແດ່ ມາອຸໂປສົດແດ່ ບໍ່ມາແດ່ ມາສັງຄະກໍາແດ່ ບໍ່ມາແດ່ ຖ້າສົງພ້ອມກັນແລ້ວ ສົງເພິ່ງໃຫ້ອຸມມັດຕະກະສົມມຸດແກ່ພິກຂຸຄັກຄະຜູ້

ວິກົນຈະລິດ ຄື ພິກຂຸຄັກຄະຣະນຶກອຸໂປສົດໄດ້ກໍຕາມ ຣະນຶກບໍ່ໄດ້ກໍຕາມ ຣະນຶກສັງຄະກຳໄດ້ກໍຕາມ ຣະນຶກບໍ່ໄດ້ກໍຕາມ ມາອຸໂປສົດກໍຕາມ ບໍ່ມາກໍຕາມ ມາສັງຄະກຳກໍຕາມ ບໍ່ມາກໍຕາມ ສົງພ້ອມພິກຂຸຄັກຄະ ຫຼື ເວັ້ນພິກຂຸຄັກຄະ ລົງອຸໂປສົດກໍໄດ້ ເຮັດສັງຄະກຳກໍໄດ້ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຄັກຄະເປັນຜູ້ວິກົນຈະລິດ ຣະນຶກອຸໂປສົດໄດ້ແດ່ ຣະນຶກບໍ່ໄດ້ແດ່ ຣະນຶກສັງຄະກຳໄດ້ແດ່ ຣະນຶກບໍ່ໄດ້ແດ່ ມາອຸໂປສົດແດ່ ບໍ່ມາແດ່ ມາສັງຄະກຳແດ່ ບໍ່ມາແດ່ ຖ້າສົງພ້ອມກັນແລ້ວ ສົງເພິ່ງໃຫ້ອຸມມັດຕະກະສົມມຸດແກ່ພິກຂຸຄັກຄະຜູ້ວິກົນຈະລິດ ຄື ພິກຂຸຄັກຄະຣະນຶກອຸໂປສົດໄດ້ກໍຕາມ ຣະນຶກບໍ່ໄດ້ກໍຕາມ ຣະນຶກສັງຄະກຳໄດ້ກໍຕາມ ຣະນຶກບໍ່ໄດ້ກໍຕາມ ມາອຸໂປສົດກໍຕາມ ບໍ່ມາກໍຕາມ ມາສັງຄະກຳກໍຕາມ ບໍ່ມາກໍຕາມ ສົງພ້ອມພິກຂຸຄັກຄະ ຫຼື ເວັ້ນພິກຂຸຄັກຄະ ເຮັດອຸໂປສົດກໍໄດ້ ເຮັດສັງຄະກຳກໍໄດ້ ທ່ານອົງໃດເຫັນດ້ວຍກັບການໃຫ້ອຸມມັດຕະກະສົມມຸດແກ່ພິກຂຸຄັກຄະຜູ້ວິກົນຈະລິດ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ອຸມມັດຕະກະສົມມຸດສົງໄດ້ໃຫ້ແລ້ວ ແກ່ພິກຂຸຄັກຄະຜູ້ວິກົນຈະລິດ ຄື ພິກຂຸຄັກຄະຣະນຶກອຸໂປສົດໄດ້ກໍຕາມ ຣະນຶກບໍ່ໄດ້ກໍຕາມ ຣະນຶກສັງຄະກຳໄດ້ກໍຕາມ ຣະນຶກບໍ່ໄດ້ກໍຕາມ ມາອຸໂປສົດກໍຕາມ ບໍ່ມາກໍຕາມ ມາສັງຄະກຳກໍຕາມ ບໍ່ມາກໍຕາມ ສົງພ້ອມພິກຂຸຄັກຄະ ຫຼື ເວັ້ນພິກຂຸຄັກຄະ ລົງອຸໂປສົດກໍໄດ້ ເຮັດສັງຄະກຳກໍໄດ້ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

## ໗໑. ສັງຄຸໂປສະຖາທີປະເພທະ

### ວ່າດ້ວຍປະເພດແຫ່ງອຸໂປສົດມີອຸໂປສົດເປັນການສົງເປັນຕົ້ນ

### ເລື້ອງພິກຂຸ ໔ ອົງ ໓ ອົງ ໒ ອົງ ແລະ ໑ ອົງ

### ລົງອຸໂປສົດ ໓ ຢ່າງ ຕາມລຳດັບ

### ເລື້ອງພິກຂຸ ໔ ອົງ ຍົກປາຕິກໂມກຂຶ້ນສະແດງ

[໑໖໘] ສະໄໝນັ້ນ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸຢູ່ນຳກັນ ໔ ອົງ ພິກຂຸເຫຼົ່ານັ້ນໄດ້ມີການສົນທະນາກັນດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ວ່າ ພິກຂຸເພິ່ງລົງອຸໂປສົດ ດັ່ງນີ້ ກໍພວກເຮົາມີພຽງ ໔ ອົງ ຈະເພິ່ງລົງອຸໂປສົດແນວໃດນໍ" ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸ ໔ ອົງ ຍົກປາຕິໂມກຂຶ້ນສະແດງ

## ເລື້ອງພິກຂຸ ໓ ອົງ ເຮັດປາຣິສຸດທິອຸໂປສົດ

ສະໄໝນັ້ນ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸຢູ່ນໍາກັນ ໓ ອົງພິກຂຸເຫຼົ່ານັ້ນໄດ້ມີການສົນທະນາກັນດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດໃຫ້ພິກຂຸ ໔ ອົງ ຍົກປາຕິໂມກຂຶ້ນສະແດງ ກໍພວກເຮົາມີພຽງ ໓ ອົງ ຈະເພິ່ງລົງອຸໂປສົດແນວໃດນໍ" ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸ ໓ ອົງ ເຮັດປາຣິສຸດທິອຸໂປສົດ

## ວິທີເຮັດປາຣິສຸດທິອຸໂປສົດສໍາລັບພິກຂຸ ໓ ອົງແລະກໍາມະວາຈາ

ພິກຂຸທັງຫຼາຍ ກໍແລ ເພິ່ງເຮັດປາຣິສຸດທິອຸໂປສົດແນວນີ້

ພິກຂຸຜູ້ສະຫຼາດ ຜູ້ສາມາດເພິ່ງປະກາດໃຫ້ພິກຂຸທັງຫຼາຍຮູ້ວ່າ

ທ່ານທັງຫຼາຍຈົ່ງຟັງຂ້າພະເຈົ້າ ວັນນີ້ເປັນວັນອຸໂປສົດ ໑໕ ຄໍ່າ ຖ້າທ່ານທັງຫຼາຍພ້ອມກັນແລ້ວ ເຮົາທັງຫຼາຍເພິ່ງເຮັດປາຣິສຸດທິອຸໂປສົດແກ່ກັນແລະກັນ

ພິກຂຸຜູ້ເຖຣະເພິ່ງຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢ່ອງຍໍ້ ປະນົມມື ບອກພິກຂຸເຫຼົ່ານັ້ນແນວນີ້ວ່າ

## ຄໍາບອກປາຣິສຸດທິສໍາລັບພິກຂຸມີພັນສາແກ່ກວ່າ

ທ່ານທັງຫຼາຍ ເຮົາເປັນຜູ້ບໍລິສຸດແລ້ວ ຂໍທ່ານທັງຫຼາຍຈົ່ງຈື່ເຮົາວ່າ ເປັນຜູ້ບໍລິສຸດ

ທ່ານທັງຫຼາຍ ເຮົາເປັນຜູ້ບໍລິສຸດແລ້ວ ຂໍທ່ານທັງຫຼາຍຈົ່ງຈື່ເຮົາວ່າ ເປັນຜູ້ບໍລິສຸດ

ທ່ານທັງຫຼາຍ ເຮົາເປັນຜູ້ບໍລິສຸດແລ້ວ ຂໍທ່ານທັງຫຼາຍຈົ່ງຈື່ເຮົາວ່າ ເປັນຜູ້ບໍລິສຸດ

ພິກຂຸຜູ້ນະວະກະເພິ່ງຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢ່ອງຍໍ້ ປະນົມມື ບອກພິກຂຸເຫຼົ່ານັ້ນແນວນີ້ວ່າ

## ຄໍາບອກປາຣິສຸດທິສໍາລັບພິກຂຸມີພັນສາອ່ອນກວ່າ

ທ່ານຜູ້ຈະເລີນທັງຫຼາຍ ຂ້ານ້ອຍເປັນຜູ້ບໍລິສຸດ ຂໍທ່ານທັງຫຼາຍຈົ່ງຈື່ຂ້ານ້ອຍວ່າ ເປັນຜູ້ບໍລິສຸດ

ທ່ານຜູ້ຈະເລີນທັງຫຼາຍ ຂ້ານ້ອຍເປັນຜູ້ບໍລິສຸດ ຂໍທ່ານທັງຫຼາຍຈົ່ງຈື່ຂ້ານ້ອຍວ່າ ເປັນຜູ້ບໍລິສຸດ

ທ່ານຜູ້ຈະເລີນທັງຫຼາຍ ຂ້ານ້ອຍເປັນຜູ້ບໍລິສຸດ ຂໍທ່ານທັງຫຼາຍຈົ່ງຈື່ຂ້ານ້ອຍວ່າ ເປັນຜູ້ບໍລິສຸດ

ສະໄໝນັ້ນ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸຢູ່ນຳກັນ ໔ ອົງ ພິກຂຸເຫຼົ່ານັ້ນມີຄວາມຄິດດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດໃຫ້ພິກຂຸ ໔ ອົງ ຍົກປາຕິໂມກຂຶ້ນສະແດງ ໃຫ້ພິກຂຸ ໓ ອົງເຮັດປາຣິສຸດທິອຸໂປສົດ ກໍພວກເຮົາມີພຽງ ໔ ອົງ ຈະເພິ່ງລົງອຸໂປສົດ ແນວໃດນໍ" ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸ ໔ ອົງ ເຮັດປາຣິສຸດທິອຸໂປສົດ ວິທີເຮັດປາຣິສຸດທິອຸໂປສົດສຳລັບພິກຂຸ ໔ ອົງ

ພິກຂຸທັງຫຼາຍ ກໍແລ ເພິ່ງເຮັດປາຣິສຸດທິອຸໂປສົດແນວນີ້

ພິກຂຸຜູ້ເຖຣະເພິ່ງຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢ່ອງຍໍ້ ປະນົມມື

ບອກພິກຂຸຜູ້ນະວະກະແນວນີ້ ວ່າ

## ຄຳບອກປາຣິສຸດທິສຳລັບພິກຂຸມີພັນສາແກ່ກວ່າ

ທ່ານ ເຮົາເປັນຜູ້ບໍລິສຸດ ຂໍທ່ານທັງຫຼາຍ ຈົ່ງຈື່ເຮົາວ່າ ເປັນຜູ້ບໍລິສຸດ
ທ່ານ ເຮົາເປັນຜູ້ບໍລິສຸດ ຂໍທ່ານທັງຫຼາຍ ຈົ່ງຈື່ເຮົາວ່າ ເປັນຜູ້ບໍລິສຸດ
ທ່ານ ເຮົາເປັນຜູ້ບໍລິສຸດ ຂໍທ່ານທັງຫຼາຍ ຈົ່ງຈື່ເຮົາວ່າ ເປັນຜູ້ບໍລິສຸດ

ພິກຂຸຜູ້ນະວະກະເພິ່ງຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢ່ອງຍໍ້ ປະນົມມື ບອກພິກຂຸຜູ້ເຖຣະແນວນີ້ ວ່າ

## ຄຳບອກປາຣິສຸດທິສຳລັບພິກຂຸມີພັນສາອ່ອນກວ່າ

ທ່ານຜູ້ຈະເລີນ ຂ້ານ້ອຍເປັນຜູ້ບໍລິສຸດ ຂໍທ່ານຈົ່ງຈື່ຂ້ານ້ອຍວ່າ ເປັນຜູ້ບໍລິສຸດ
ທ່ານຜູ້ຈະເລີນ ຂ້ານ້ອຍເປັນຜູ້ບໍລິສຸດ ຂໍທ່ານຈົ່ງຈື່ຂ້ານ້ອຍວ່າ ເປັນຜູ້ບໍລິສຸດ
ທ່ານຜູ້ຈະເລີນ ຂ້ານ້ອຍເປັນຜູ້ບໍລິສຸດ ຂໍທ່ານຈົ່ງຈື່ຂ້ານ້ອຍວ່າ ເປັນຜູ້ບໍລິສຸດ

# ເລື້ອງພິກຂຸອົງດຽວອະທິຖານອຸໂປສົດ

ສະໄໝນັ້ນ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸຢູ່ອົງດຽວ ພິກຂຸນັ້ນມີຄວາມຄິດດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດໃຫ້ພິກຂຸ ໔ ອົງ ຍົກປາຕິໂມກຂຶ້ນສະແດງ ໃຫ້ພິກຂຸ ໓ ອົງເຮັດປາຣິສຸດທິອຸໂປສົດ ໃຫ້ພິກຂຸ ໔ ອົງເຮັດປາຣິສຸດທິອຸໂປສົດ ກໍເຮົາຢູ່ພຽງອົງດຽວ ຈະເພິ່ງລົງອຸໂປສົດແນວໃດນໍ"

ພິກຂຸນັ້ນ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າ ໃຫ້ຊົງຊາບພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸຢູ່ອົງດຽວ

ພິກຂຸນັ້ນເພິ່ງປັດກວາດສະຖານທີ່ທີ່ພິກຂຸທັງຫຼາຍຕ້ອງກັບມາ ຄືໂຮງສັນ ຫຼື ມົນດົບ ຫຼື ເຫງົ້າໄມ້ ກໍຕາມ ແລ້ວຕັ້ງນ້ຳສັນນ້ຳໃຊ້ ປູອາສະນະ ໄຕ້ປະທີບ ແລ້ວນັ່ງຢູ່ ຖ້າມີພິກຂຸເຫຼົ່າອື່ນມາ ເພິ່ງລົງ ອຸໂປສົດກັບພິກຂຸເຫຼົ່ານັ້ນ ຖ້າບໍ່ມີມາ ເພິ່ງອະທິຖານວ່າ ວັນນີ້ເປັນວັນອຸໂປສົດຂອງເຮົາ ຖ້າບໍ່ ອະທິຖານ ຕ້ອງອາບັດທຸກກົດ

ພິກຂຸທັງຫຼາຍ ໃນອາວາດທີ່ມີພິກຂຸຢູ່ ໔ ອົງ ບໍ່ເພິ່ງນຳປາຣິສຸດທິຂອງພິກຂຸອົງໜຶ່ງມາ ແລ້ວອີກ ໓ ອົງຍົກປາຕິໂມກຂຶ້ນສະແດງ ຖ້າຍົກຂຶ້ນສະແດງ ຕ້ອງອາບັດທຸກກົດ

ພິກຂຸທັງຫຼາຍ ໃນອາວາດທີ່ມີພິກຂຸຢູ່ ໓ ອົງ ບໍ່ເພິ່ງນຳປາຣິສຸດທິຂອງພິກຂຸອົງໜຶ່ງມາ ແລ້ວ ອີກ ໒ ອົງເຮັດປາຣິສຸດທິອຸໂປສົດ ຖ້າເຮັດ ຕ້ອງອາບັດທຸກກົດ

ພິກຂຸທັງຫຼາຍ ໃນອາວາດທີ່ມີພິກຂຸຢູ່ ໒ ອົງ ບໍ່ເພິ່ງນຳປາຣິສຸດທິຂອງພິກຂຸອົງໜຶ່ງມາ ແລ້ວ ອີກອົງໜຶ່ງອະທິຖານ ຖ້າອະທິຖານ ຕ້ອງອາບັດທຸກກົດ

# ໗໒. ອາປັດຕິປະຕິກຳມະວິທີ

## ວ່າດ້ວຍວິທີແກ້ໄຂອາບັດ

## ເລື້ອງພິກຂຸຕ້ອງອາບັດໃນວັນອຸໂປສົດ

[໑໖໙] ສະໄໝນັ້ນ ພິກຂຸອົງໜຶ່ງຕ້ອງອາບັດໃນວັນອຸໂປສົດນັ້ນ ພິກຂຸນັ້ນໄດ້ມີຄວາມຄິດ ດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ວ່າ ພິກຂຸມີອາບັດຕິດໂຕບໍ່ເພິ່ງລົງອຸໂປສົດ ດັ່ງນີ້ ກໍເຮົາຕ້ອງອາບັດແລ້ວ ຈະເພິ່ງປະຕິບັດແນວໃດນໍ"

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ໃນວັນອຸໂປສົດນັ້ນ ພິກ ຂຸຕ້ອງອາບັດ ພິກຂຸນັ້ນເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢ່ອງຍໍ້ ປະນົມມືກ່າວແນວນີ້ວ່າ ເຮົາຕ້ອງອາບັດຊື່ນີ້ ຂໍສະແດງຄືນອາບັດນັ້ນ ຂ້ານ້ອຍ

ພິກຂຸຜູ້ຮັບເພິ່ງຖາມວ່າ "ທ່ານເຫັນແມ່ນບໍ?

ພິກຂຸຜູ້ສະແດງເພິ່ງຕອບວ່າ "ຂ້ານ້ອຍ ເຫັນ"

ພິກຂຸຜູ້ຮັບເພິ່ງຖາມວ່າ "ທ່ານເພິ່ງສັງລວມຕໍ່ໄປ

## ບໍ່ແນ່ໃຈໃນອາບັດ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນວັນອຸໂປສົດນັ້ນ ພິກຂຸມີຄວາມບໍ່ແນ່ໃຈໃນອາບັດ ພິກຂຸນັ້ນ ເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢ່ອງຍໍ້ປະ

ນິມມີກ່າວແນວນີ້ວ່າ "ເຮົາມີຄວາມບໍ່ແນ່ໃຈໃນອາບັດມີຊື່ນີ້ ເຮົາເມື່ອໝົດຄວາມບໍ່ແນ່ໃຈ ຈັກເຮັດຄືນອາບັດນັ້ນ ແລ້ວລົງອຸໂປສົດ ຟັງປາຕິໂມກ ແຕ່ບໍ່ເພິ່ງເຮັດອັນຕະລາຍຕໍ່ອຸໂປສົດ ຍ້ອນຂໍ້ນັ້ນເປັນປັດໄຈ

## ເລື້ອງສະແດງສະພາຄາບັດ

ສະໄໝນັ້ນ ພວກພິກຂຸສັບພັກຄີສະແດງສະພາຄາບັດ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ບໍ່ເພິ່ງສະແດງສະພາຄາບັດ ອົງໃດສະແດງ ຕ້ອງອາບັດທຸກກົດ

ສະໄໝຕໍ່ມາ ພວກພິກຂຸສັບພັກຄີຮັບການສະແດງສະພາຄາບັດ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ບໍ່ເພິ່ງຮັບການສະແດງສະພາຄາບັດ ອົງໃດຮັບ ຕ້ອງອາບັດທຸກກົດ

# ໖໓. ອາປັດຕິອາວິກະຣະນະວິທີ

## ວ່າດ້ວຍວິທີເປີດເຜີຍອາບັດ

## ເລື້ອງຣະນຶກອາບັດໄດ້ເມື່ອຈະຍົກປາຕິໂມກຂຶ້ນສະແດງ

[໑໗໐] ສະໄໝນັ້ນ ພິກຂຸອົງໜຶ່ງຣະນຶກອາບັດໄດ້ ເມື່ອກຳລັງຍົກປາຕິໂມກຂຶ້ນສະແດງ ພິກຂຸນັ້ນມີຄວາມຄິດດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ວ່າ ພິກຂຸມີອາບັດຕິດໂຕບໍ່ເພິ່ງລົງອຸໂປສົດ ດັ່ງນີ້ ກໍເຮົາຕ້ອງອາບັດແລ້ວ ຈະເພິ່ງປະຕິບັດແນວໃດນໍ" ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ເມື່ອກຳລັງຍົກປາຕິໂມກຂຶ້ນສະແດງ ພິກຂຸຣະນຶກອາບັດໄດ້ ພິກຂຸນັ້ນ ເພິ່ງບອກພິກຂຸໃກ້ຄຽງແນວນີ້ວ່າ ເຮົາຕ້ອງອາບັດຊື່ນີ້ ເຮົາລຸກຈາກທີ່ນີ້ແລ້ວ ຈັກເຮັດຄືນອາບັດນັ້ນ ແລ້ວລົງອຸໂປສົດ ຟັງປາຕິໂມກ ແຕ່ບໍ່ເພິ່ງເຮັດອັນຕະລາຍຕໍ່ອຸໂປສົດ ຍ້ອນຂໍ້ນັ້ນເປັນປັດໄຈ

## ເມື່ອກຳລັງຍົກປາຕິໂມກຂຶ້ນສະແດງບໍ່ແນ່ໃຈໃນອາບັດ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸມີຄວາມບໍ່ແນ່ໃຈໃນອາບັດ ເມື່ອກຳລັງຍົກປາຕິໂມກຂຶ້ນສະແດງ ພິກຂຸນັ້ນ ເພິ່ງບອກພິກຂຸໃກ້ຄຽງແນວນີ້ວ່າ ເຮົາມີຄວາມບໍ່ແນ່ໃຈໃນອາບັດມີ

ຊື່ນີ້ ເຮົາເມື່ອໝົດຄວາມບໍ່ແນ່ໃຈຈັກເຮັດຄືນອາບັດນັ້ນແລ້ວລົງອຸໂປສົດ ຟັງປາຕິໂມກ ແຕ່ບໍ່ເຮັດອັນຕະລາຍຕໍ່ອຸໂປສົດ ຍ້ອນຂໍ້ນັ້ນເປັນປັດໄຈ

# ໗໔. ສະພາຄາປັດຕິປະຕິກຳມະວິທີ

## ວ່າດ້ວຍວິທີແກ້ໄຂສະພາຄາບັດ

## ເລື້ອງສົງທັງໝົດຕ້ອງສະພາຄາບັດ

[໑໗໑] ສະໄໝນັ້ນ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ສົງທັງໝົດຕ້ອງສະພາຄາບັດ ພິກຂຸເຫຼົ່ານັ້ນ ປຶກສາກັນດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ວ່າ ພິກຂຸບໍ່ເພິ່ງສະແດງສະພາຄາບັດ ບໍ່ເພິ່ງຮັບການສະແດງສະພາຄາບັດ ກໍສົງທັງໝົດນີ້ຕ້ອງສະພາຄາບັດແລ້ວ ພວກເຮົາຈະເພິ່ງປະຕິບັດແນວໃດນໍ" ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ສົງທັງໝົດຕ້ອງສະພາຄາບັດ ພິກຂຸເຫຼົ່ານັ້ນ ເພິ່ງສົ່ງພິກຂຸອົງໜຶ່ງໄປສູ່ອາວາດໃກ້ຄຽງພໍຈະກັບມາທັນໃນວັນນັ້ນ ດ້ວຍສັ່ງວ່າ ທ່ານ ທ່ານຈົ່ງໄປເຮັດຄືນອາບັດນັ້ນມາເທີ້ນ ພວກເຮົາຈັກເຮັດຄືນອາບັດໃນສຳນັກຂອງທ່ານ" ຖ້າໄດ້ແນວນີ້ ນັ້ນເປັນການດີ ຖ້າບໍ່ໄດ້ ພິກຂຸຜູ້ສະຫຼາດ ຜູ້ສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິກຳມະວາຈາວ່າ

## ຍັດຕິກຳມະວາຈາ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງທັງໝົດນີ້ຕ້ອງສະພາຄາບັດແລ້ວ ເມື່ອພົບພິກຂຸອົງອື່ນຜູ້ບໍລິສຸດບໍ່ມີອາບັດ ກໍຈັກເຮັດຄືນອາບັດນັ້ນໃນສຳນັກຂອງພິກຂຸອົງນັ້ນດັ່ງນີ້ ແລ້ວລົງອຸໂປສົດ ຍົກພຣະປາຕິໂມກຂຶ້ນສະແດງ ແຕ່ຕ້ອງບໍ່ເຮັດອັນຕະລາຍຕໍ່ອຸໂປສົດ ຍ້ອນຂໍ້ນັ້ນເປັນປັດໄຈ

## ສົງທັງໝົດບໍ່ແນ່ໃຈໃນສະພາຄາບັດ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ສົງທັງໝົດບໍ່ແນ່ໃຈໃນສະພາຄາບັດ ພິກຂຸຜູ້ສະຫຼາດ ຜູ້ສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິກຳມະວາຈາວ່າ

## ປັດຕິກຳມະວາຈາ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງທັງໝົດນີ້ມີຄວາມບໍ່ແນ່ໃຈໃນສະພາຄາບັດ ເມື່ອໝົດຄວາມບໍ່ແນ່ໃຈ ກໍຈັກເຮັດຄືນອາບັດນັ້ນ ດັ່ງນີ້ ແລ້ວລົງອຸໂປສົດ ຍົກພຣະປາຕິໂມກ ຂຶ້ນສະແດງ ແຕ່ຕ້ອງບໍ່ເຮັດອັນຕະລາຍຕໍ່ອຸໂປສົດ ຍ້ອນຂໍ້ນັ້ນ ເປັນປັດໄຈ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ສົງເຂົ້າຈຳພັນສາໃນອາວາດແຫ່ງໜຶ່ງຕ້ອງສະພາ ຄາບັດ ພິກຂຸເຫຼົ່ານັ້ນ ເພິ່ງສົ່ງພິກຂຸອົງໜຶ່ງໄປສູ່ອາວາດໃກ້ຄຽງພໍຈະກັບມາທັນໃນວັນນັ້ນ ດ້ວຍ ສັ່ງວ່າ ທ່ານ ທ່ານຈົ່ງໄປເຮັດຄືນອາບັດນັ້ນມາເທີ້ນ ພວກເຮົາຈັກເຮັດຄືນອາບັດນັ້ນໃນສຳນັກ ຂອງທ່ານ ຖ້າໄດ້ແນວນີ້ ນັ້ນເປັນການດີ ຖ້າບໍ່ໄດ້ ເພິ່ງສົ່ງພິກຂຸອົງໜຶ່ງ ໄປພາຍໃນເວລາ ໗ ວັນ ດ້ວຍສັ່ງວ່າ ທ່ານ ທ່ານຈົ່ງໄປເຮັດຄືນອາບັດນັ້ນມາເທີ້ນ ພວກເຮົາ ຈັກເຮັດຄືນ ອາບັດນັ້ນ ໃນສຳນັກຂອງທ່ານ”

## ເລື້ອງບໍ່ຮູ້ຈັກຊື່ແລະໂຄດອາບັດ

ສະໄໝນັ້ນ ໃນອາວາດແຫ່ງໜຶ່ງ ສົງທັງໝົດຕ້ອງສະພາຄາບັດ ສົງໝູ່ນັ້ນບໍ່ຮູ້ຈັກຊື່ແລະ ໂຄດ°ຂອງອາບັດນັ້ນ ພິກຂຸອົງອື່ນເປັນພະຫູສູດ ຊຳນານປະຣິຍັດ ຊົງທຳ ຊົງວິໄນ ຊົງມາຕິກາ ເປັນບັນດິດ ສະຫຼາດ ມີປັນຍາ ມີຄວາມລະອາຍ ມີຄວາມຣະມັດລະວັງ ໃຝ່ການສຶກສາ ມາໃນ ອາວາດນັ້ນ ພິກຂຸອົງໜຶ່ງ ເຂົ້າໄປຫາພິກຂຸພະຫູສູດອົງນັ້ນຮຽນຖາມວ່າ “ພິກຂຸອົງໃດເຮັດແນວນີ້ ແລະແນວນີ້ ພິກຂຸອົງນັ້ນ ຕ້ອງອາບັດຊື່ຫຍັງ ຂ້ານ້ອຍ”

ພິກຂຸພະຫູສູດຕອບວ່າ “ທ່ານ ພິກຂຸອົງໃດເຮັດແນວນີ້ ແລະແນວນີ້ ພິກຂຸອົງນັ້ນຕ້ອງ ອາບັດຊື່ນີ້ ທ່ານຕ້ອງອາບັດຊື່ນີ້ແລ້ວ ຈົ່ງເຮັດຄືນອາບັດນັ້ນສາ”

ພິກຂຸນັ້ນ ກ່າວແນວນີ້ວ່າ “ບໍ່ແມ່ນແຕ່ເຮົາອົງດຽວເທົ່ານັ້ນທີ່ຕ້ອງອາບັດນີ້ ຂ້ານ້ອຍ ສົງ ໝູ່ນີ້ທັງໝົດຕ້ອງອາບັດນີ້”

ພິກຂຸພະຫູສູດນັ້ນກ່າວແນວນີ້ວ່າ “ທ່ານ ພິກຂຸອົງອື່ນຕ້ອງອາບັດກໍຕາມ ບໍ່ຕ້ອງອາບັດກໍ ຕາມ ຈະຊ່ອຍອັນໃດທ່ານໄດ້ ທ່ານຈົ່ງອອກຈາກອາບັດຂອງຕົນເທີ້ນ”

ຕໍ່ມາ ພິກຂຸນັ້ນກໍໄດ້ເຮັດຄືນອາບັດນັ້ນຕາມຄຳຂອງພິກຂຸພະຫູສູດອົງນັ້ນ ແລ້ວເຂົ້າໄປ ຫາພິກຂຸເຫຼົ່ານັ້ນ ຮຽນຊີ້ແຈ່ງວ່າ “ທ່ານທັງຫຼາຍ ຮູ້ມາວ່າ ພິກຂຸອົງໃດເຮັດແນວນີ້ ແລະແນວນີ້ ພິກຂຸອົງນັ້ນ ຕ້ອງອາບັດຊື່ນີ້ ທ່ານທັງຫຼາຍຕ້ອງອາບັດຊື່ນີ້ແລ້ວ ຈົ່ງເຮັດຄືນອາບັດນັ້ນສາ”

ພິກຂຸເຫຼົ່ານັ້ນ ບໍ່ປາຖະໜາຈະເຮັດຄືນອາບັດນັ້ນຕາມຄຳຂອງພິກຂຸອົງນັ້ນ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ສົງທັງໝົດຕ້ອງສະພາຄາບັດ ສົງໝູ່ນັ້ນ ບໍ່ຮູ້ຈັກຊື່ແລະໂຄດຂອງອາບັດນັ້ນ ພິກຂຸອົງອື່ນເປັນພະຫູສູດ ຊໍານານໃນປະຣິຍັດ ຊົງທໍາ ຊົງວິໄນ ຊົງມາຕິກາ ເປັນບັນດິດ ສະຫຼາດ ມີປັນຍາ ມີຄວາມລະອາຍ ມີຄວາມລະມັດລະວັງ ໃຝ່ການສຶກສາ ມາໃນອາວາດນັ້ນ

ພິກຂຸອົງໜຶ່ງ ເຂົ້າໄປຫາພິກຂຸພະຫູສູດອົງນັ້ນຮຽນຖາມວ່າ ພິກຂຸອົງໃດເຮັດແນວນີ້ແລະແນວນີ້ ພິກຂຸອົງນັ້ນຕ້ອງອາບັດຊື່ຫຍັງ ຂ້ານ້ອຍ”

ພິກຂຸພະຫູສູດກ່າວແນວນີ້ວ່າ “ທ່ານ ພິກຂຸອົງໃດເຮັດແນວນີ້ແລະແນວນີ້ ພິກຂຸອົງນັ້ນຕ້ອງອາບັດຊື່ນີ້ ທ່ານຕ້ອງອາບັດຊື່ນີ້ແລ້ວ ຈົ່ງເຮັດຄືນອາບັດນັ້ນສາ”

ພິກຂຸນັ້ນກ່າວແນວນີ້ວ່າ “ບໍ່ແມ່ນແຕ່ເຮົາອົງດຽວເທົ່ານັ້ນທີ່ຕ້ອງອາບັດນີ້ ຂ້ານ້ອຍ ສົງຄະນະນີ້ ທັງໝົດຕ້ອງອາບັດນີ້”

ພິກຂຸພະຫູສູດນັ້ນ ກ່າວແນວນີ້ວ່າ “ທ່ານ ພິກຂຸອົງອື່ນຕ້ອງອາບັດກໍຕາມ ບໍ່ຕ້ອງອາບັດກໍຕາມ ຈະຊ່ອຍອັນໃດທ່ານໄດ້ ທ່ານຈົ່ງອອກຈາກອາບັດຂອງຕົນເທີ້ນ”

ພິກຂຸທັງຫຼາຍ ຖ້າພິກຂຸອົງນັ້ນໄດ້ເຮັດຄືນອາບັດນັ້ນຕາມຄໍາຂອງພິກຂຸພະຫູສູດອົງນັ້ນແລ້ວເຂົ້າໄປຫາພິກຂຸເຫຼົ່ານັ້ນຮຽນຊີ້ແຈ່ງວ່າ “ທ່ານທັງຫຼາຍ ຮູ້ມາວ່າ ພິກຂຸອົງໃດເຮັດແນວນີ້ແລະແນວນີ້ ພິກຂຸອົງນັ້ນຕ້ອງອາບັດຊື່ນີ້ ທ່ານທັງຫຼາຍ ຕ້ອງອາບັດຊື່ນີ້ແລ້ວ ຈົ່ງເຮັດຄືນອາບັດນັ້ນສາ”

ພິກຂຸທັງຫຼາຍ ຖ້າພິກຂຸເຫຼົ່ານັ້ນ ຈະເພິ່ງເຮັດຄືນອາບັດນັ້ນຕາມຄໍາຂອງພິກຂຸອົງນັ້ນແນວນີ້ ນັ້ນເປັນການດີ ຖ້າບໍ່ເຮັດຄືນ ພິກຂຸອົງນັ້ນ ບໍ່ເພິ່ງວ່າກ່າວພິກຂຸເຫຼົ່ານັ້ນ ຜູ້ບໍ່ປາຖະໜາຈະເຮັດຄືນ

**ໂຈທະນາວັດຖຸພານະວານ ຈົບ**

# ໗໕. ອະນາປັດຕິປັນນະຣະສະກະ

## ວ່າດ້ວຍການລົງອຸໂປສົດໂດຍບໍ່ຕ້ອງອາບັດ ໑໕ ກໍລະນີ

[໑໗໔] ສະໄໝນັ້ນ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນບໍ່ຮູ້ວ່າ “ຍັງມີພິກຂຸ ທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່”

ພິກຂຸເຫຼົ່ານັ້ນ ມີຄວາມສຳຄັນວ່າເປັນທຳ ເປັນວິໄນ ຍັງແບ່ງພວກກັນຢູ່ ແຕ່ສຳຄັນ ວ່າເປັນຜູ້ພ້ອມພຽງ ໄດ້ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ເມື່ອພິກຂຸເຫຼົ່ານັ້ນ ກຳລັງຍົກປາຕິໂມກຂຶ້ນສະແດງ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນບໍ່ຮູ້ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່"

ພິກຂຸເຫຼົ່ານັ້ນ ມີຄວາມສຳຄັນວ່າເປັນທຳ ເປັນວິໄນ ຍັງແບ່ງພວກກັນຢູ່ ແຕ່ສຳຄັນ ວ່າເປັນຜູ້ພ້ອມພຽງ ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ເມື່ອພິກຂຸເຫຼົ່ານັ້ນ ກຳລັງຍົກປາຕິໂມກຂຶ້ນສະແດງ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນເພິ່ງຍົກປາຕິໂມກຂຶ້ນສະແດງໃໝ່ ພວກພິກຂຸຜູ້ຍົກຂຶ້ນສະແດງ ບໍ່ຕ້ອງອາບັດ (໑)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນບໍ່ຮູ້ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່"

ພິກຂຸເຫຼົ່ານັ້ນ ມີຄວາມສຳຄັນວ່າເປັນທຳ ເປັນວິໄນ ຍັງແບ່ງພວກກັນຢູ່ ແຕ່ສຳຄັນ ວ່າເປັນຜູ້ພ້ອມພຽງລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ເມື່ອພິກຂຸເຫຼົ່ານັ້ນກຳລັງຍົກປາຕິໂມກຂຶ້ນສະແດງ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ປາຕິໂມກທີ່ພິກຂຸເຫຼົ່ານັ້ນຍົກຂຶ້ນສະແດງແລ້ວ ເປັນອັນຍົກຂຶ້ນສະແດງດີແລ້ວ ພວກພິກຂຸຜູ້ມາພາຍຫຼັງເພິ່ງຟັງອຸດເທດທີ່ເຫຼືອ ພວກພິກຂຸຜູ້ຍົກຂຶ້ນສະແດງ ບໍ່ຕ້ອງອາບັດ (໒)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນບໍ່ຮູ້ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່"

ພິກຂຸເຫຼົ່ານັ້ນ ມີຄວາມສຳຄັນວ່າເປັນທຳ ເປັນວິໄນ ຍັງແບ່ງພວກກັນຢູ່ ແຕ່ສຳຄັນ ວ່າເປັນຜູ້ພ້ອມພຽງລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ເມື່ອພິກຂຸເຫຼົ່ານັ້ນ ກຳລັງຍົກປາຕິໂມກຂຶ້ນສະແດງ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ປາຕິໂມກທີ່ພິກຂຸເຫຼົ່ານັ້ນ ຍົກຂຶ້ນສະແດງແລ້ວ ເປັນອັນຍົກຂຶ້ນສະແດງດີແລ້ວ ພວກພິກຂຸຜູ້ມາພາຍຫຼັງເພິ່ງຟັງອຸດເທດທີ່ເຫຼືອ ພວກພິກຂຸຜູ້ຍົກຂຶ້ນສະແດງ ບໍ່ຕ້ອງອາບັດ (໓)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນບໍ່ຮູ້ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່"

ພິກຂຸເຫຼົ່ານັ້ນ ມີຄວາມສຳຄັນວ່າເປັນທຳ ເປັນວິໄນ ຍັງແບ່ງພວກກັນຢູ່ ແຕ່ສຳຄັນ ວ່າເປັນຜູ້ພ້ອມພຽງ ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ພໍພິກຂຸເຫຼົ່ານັ້ນ ຍົກປາຕິໂມກຂຶ້ນສະແດງຈົບ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນເພິ່ງຍົກປາຕິໂມກຂຶ້ນສະແດງໃໝ່ ພວກພິກຂຸຜູ້ຍົກຂຶ້ນສະແດງ ບໍ່ຕ້ອງອາບັດ (໔)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນບໍ່ຮູ້ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່"

ພິກຂຸເຫຼົ່ານັ້ນ ມີຄວາມສຳຄັນວ່າເປັນທຳ ເປັນວິໄນ ຍັງແບ່ງພວກກັນຢູ່ ແຕ່ສຳຄັນ ວ່າເປັນຜູ້ພ້ອມພຽງ ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ພໍພິກຂຸເຫຼົ່ານັ້ນຍົກປາຕິໂມກຂຶ້ນສະແດງຈົບ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ປາຕິໂມກທີ່ພິກຂຸເຫຼົ່ານັ້ນຍົກຂຶ້ນສະແດງແລ້ວ ເປັນອັນຍົກຂຶ້ນສະແດງດີແລ້ວ ພວກພິກຂຸຜູ້ມາພາຍຫຼັງເພິ່ງບອກປາຣິສຸດທິໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸຜູ້ຍົກຂຶ້ນສະແດງບໍ່ຕ້ອງອາບັດ (໕)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນບໍ່ຮູ້ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່"

ພິກຂຸເຫຼົ່ານັ້ນ ມີຄວາມສຳຄັນວ່າເປັນທຳ ເປັນວິໄນ ຍັງແບ່ງພວກກັນຢູ່ ແຕ່ສຳຄັນ ວ່າເປັນຜູ້ພ້ອມພຽງ ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ພໍພິກຂຸເຫຼົ່ານັ້ນ ຍົກປາຕິໂມກຂຶ້ນສະແດງຈົບ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ປາຕິໂມກທີ່ພິກຂຸເຫຼົ່ານັ້ນ ຍົກຂຶ້ນສະແດງແລ້ວ ເປັນອັນຍົກຂຶ້ນສະແດງດີແລ້ວ ພວກພິກຂຸຜູ້ມາພາຍຫຼັງເພິ່ງບອກປາຣິສຸດທິໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸຜູ້ຍົກຂຶ້ນສະແດງບໍ່ຕ້ອງອາບັດ (໖)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນບໍ່ຮູ້ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່"

ພິກຂຸເຫຼົ່ານັ້ນ ມີຄວາມສຳຄັນວ່າເປັນທຳ ເປັນວິໄນ ຍັງແບ່ງພວກກັນຢູ່ ແຕ່ສຳຄັນ ວ່າ

ເປັນຜູ້ພ້ອມພຽງ ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ພໍພິກຂຸເຫຼົ່ານັ້ນ ຍົກປາຕິໂມກຂຶ້ນສະແດງຈົບ ບໍລິສັດຍັງບໍ່ທັນລຸກຂຶ້ນ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນ ມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນເພິ່ງຍົກປາຕິໂມກຂຶ້ນສະແດງໃໝ່ ພວກພິກຂຸຜູ້ຍົກຂຶ້ນສະແດງບໍ່ຕ້ອງອາບັດ (໗)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນບໍ່ຮູ້ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່"

ພິກຂຸເຫຼົ່ານັ້ນມີຄວາມສຳຄັນວ່າເປັນທຳ ເປັນວິໄນ ຍັງແບ່ງພວກກັນຢູ່ ແຕ່ສຳຄັນ ວ່າເປັນຜູ້ພ້ອມພຽງ ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ພໍພິກຂຸເຫຼົ່ານັ້ນ ຍົກປາຕິໂມກຂຶ້ນສະແດງຈົບ ບໍລິສັດຍັງບໍ່ທັນລຸກຂຶ້ນ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ປາຕິໂມກທີ່ພິກຂຸເຫຼົ່ານັ້ນ ຍົກຂຶ້ນສະແດງແລ້ວ ເປັນອັນຍົກຂຶ້ນສະແດງດີແລ້ວ ພວກພິກຂຸຜູ້ມາພາຍຫຼັງເພິ່ງບອກປາຣິສຸດທິໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸຜູ້ຍົກຂຶ້ນສະແດງບໍ່ຕ້ອງອາບັດ (໘)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນບໍ່ຮູ້ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່"

ພິກຂຸເຫຼົ່ານັ້ນ ມີຄວາມສຳຄັນວ່າເປັນທຳ ເປັນວິໄນ ຍັງແບ່ງພວກກັນຢູ່ ແຕ່ສຳຄັນວ່າເປັນຜູ້ພ້ອມພຽງ ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ພໍພິກຂຸເຫຼົ່ານັ້ນ ຍົກປາຕິໂມກຂຶ້ນສະແດງຈົບ ບໍລິສັດຍັງບໍ່ທັນລຸກຂຶ້ນ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນ ມາເຖິງມີຈຳນວນໜ້ອຍກວ່າ ປາຕິໂມກທີ່ພິກຂຸເຫຼົ່ານັ້ນຍົກຂຶ້ນສະແດງແລ້ວ ເປັນອັນຍົກຂຶ້ນສະແດງດີແລ້ວ ພວກພິກຂຸຜູ້ມາພາຍຫຼັງ ເພິ່ງບອກປາຣິສຸດທິໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸຜູ້ຍົກຂຶ້ນສະແດງບໍ່ຕ້ອງອາບັດ (໙)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນບໍ່ຮູ້ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່"

ພິກຂຸເຫຼົ່ານັ້ນ ມີຄວາມສຳຄັນວ່າເປັນທຳ ເປັນວິໄນ ຍັງແບ່ງພວກກັນຢູ່ ແຕ່ສຳຄັນ ວ່າເປັນຜູ້ພ້ອມພຽງ ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ພໍພິກຂຸເຫຼົ່ານັ້ນ ຍົກປາຕິໂມກຂຶ້ນສະແດງຈົບ ບໍລິສັດລຸກຂຶ້ນບາງສ່ວນ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳ

ນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນ ເພິ່ງຍົກປາຕິໂມກຂຶ້ນສະແດງໃໝ່ ພວກພິກຂຸຜູ້ຍົກຂຶ້ນສະແດງ ບໍ່ຕ້ອງອາບັດ (໑໐)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນບໍ່ຮູ້ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່"

ພິກຂຸເຫຼົ່ານັ້ນ ມີຄວາມສຳຄັນວ່າເປັນທຳ ເປັນວິໄນ ຍັງແບ່ງພວກກັນຢູ່ ແຕ່ສຳຄັນ ວ່າເປັນຜູ້ພ້ອມພຽງ ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ພໍພິກຂຸເຫຼົ່ານັ້ນ ຍົກປາຕິໂມກຂຶ້ນສະແດງຈົບ ບໍລິສັດລຸກຂຶ້ນແດ່ບາງສ່ວນ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ປາຕິໂມກທີ່ພິກຂຸເຫຼົ່ານັ້ນຍົກຂຶ້ນສະແດງແລ້ວ ເປັນອັນຍົກຂຶ້ນສະແດງດີແລ້ວ ພວກພິກຂຸຜູ້ມາພາຍຫຼັງ ເພິ່ງບອກປາຣິສຸດທິໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸຜູ້ຍົກຂຶ້ນສະແດງບໍ່ຕ້ອງອາບັດ (໑໑)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນບໍ່ຮູ້ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່"

ພິກຂຸເຫຼົ່ານັ້ນ ມີຄວາມສຳຄັນວ່າເປັນທຳ ເປັນວິໄນ ຍັງແບ່ງພວກກັນຢູ່ ແຕ່ສຳຄັນ ວ່າເປັນຜູ້ພ້ອມພຽງ ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ພໍພິກຂຸເຫຼົ່ານັ້ນ ຍົກປາຕິໂມກຂຶ້ນສະແດງຈົບ ບໍລິສັດລຸກຂຶ້ນແດ່ບາງສ່ວນ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ປາຕິໂມກທີ່ພິກຂຸເຫຼົ່ານັ້ນຍົກຂຶ້ນສະແດງແລ້ວ ເປັນອັນຍົກຂຶ້ນສະແດງດີແລ້ວ ພວກພິກຂຸຜູ້ມາພາຍຫຼັງ ເພິ່ງບອກປາຣິສຸດທິໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸຜູ້ຍົກຂຶ້ນສະແດງບໍ່ຕ້ອງອາບັດ (໑໔)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນບໍ່ຮູ້ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່"

ພິກຂຸເຫຼົ່ານັ້ນ ມີຄວາມສຳຄັນວ່າເປັນທຳ ເປັນວິໄນ ຍັງແບ່ງພວກກັນຢູ່ ແຕ່ສຳຄັນ ວ່າເປັນຜູ້ພ້ອມພຽງ ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ພໍພິກຂຸເຫຼົ່ານັ້ນ ຍົກປາຕິໂມກຂຶ້ນສະແດງຈົບ ບໍລິສັດລຸກຂຶ້ນທັງໝົດ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນ ມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນເພິ່ງຍົກປາຕິໂມກຂຶ້ນສະແດງໃໝ່ ພວກພິກຂຸຜູ້ຍົກຂຶ້ນສະແດງ ບໍ່ຕ້ອງອາບັດ (໑໓)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນບໍ່ຮູ້ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່"

ພິກຂຸເຫຼົ່ານັ້ນ ມີຄວາມສຳຄັນວ່າເປັນທຳ ເປັນວິໄນ ຍັງແບ່ງພວກກັນຢູ່ ແຕ່ສຳຄັນວ່າເປັນຜູ້ພ້ອມພຽງ ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ພໍພິກຂຸເຫຼົ່ານັ້ນ ຍົກປາຕິໂມກຂຶ້ນສະແດງຈົບ ບໍລິສັດລຸກຂຶ້ນທັງໝົດ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນ ມາເຖິງ ມີຈຳນວນເທົ່າກັນ ປາຕິໂມກທີ່ພິກຂຸເຫຼົ່ານັ້ນ ຍົກຂຶ້ນສະແດງແລ້ວ ເປັນອັນຍົກຂຶ້ນສະແດງດີແລ້ວ ພວກພິກຂຸຜູ້ມາພາຍຫຼັງເພິ່ງບອກປາຣິສຸດທິໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸຜູ້ຍົກຂຶ້ນສະແດງບໍ່ຕ້ອງອາບັດ (໑໔)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນບໍ່ຮູ້ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່"

ພິກຂຸເຫຼົ່ານັ້ນ ມີຄວາມສຳຄັນວ່າເປັນທຳ ເປັນວິໄນ ຍັງແບ່ງພວກກັນຢູ່ ແຕ່ສຳຄັນ ວ່າເປັນຜູ້ພ້ອມພຽງ ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ພໍພິກຂຸເຫຼົ່ານັ້ນ ຍົກປາຕິໂມກຂຶ້ນສະແດງຈົບ ບໍລິສັດລຸກຂຶ້ນທັງໝົດ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນ ມາເຖິງ ມີຈຳນວນໜ້ອຍກວ່າ ປາຕິໂມກທີ່ພິກຂຸເຫຼົ່ານັ້ນ ຍົກຂຶ້ນສະແດງແລ້ວ ເປັນອັນຍົກຂຶ້ນສະແດງດີແລ້ວພວກພິກຂຸຜູ້ມາພາຍຫຼັງ ເພິ່ງບອກປາຣິສຸດທິໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸຜູ້ຍົກຂຶ້ນສະແດງບໍ່ຕ້ອງອາບັດ (໑໕)

**ອະນາປັດຕິປັນນະຣະສະກະ ຈົບ**

# ໗໓. ວັກຄາວັກຄະສັນຍີປັນນະຣະສະກະ

## ວ່າດ້ວຍແບ່ງພວກກັນຢູ່ແລະສຳຄັນວ່າແບ່ງພວກກັນ ໑໕ ກໍລະນີ

[໑໗໓] ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ຍັງບໍ່ໄດ້ມາມີຢູ່"

ພິກຂຸເຫຼົ່ານັ້ນ ມີຄວາມສຳຄັນວ່າເປັນທຳ ເປັນວິໄນ ແບ່ງພວກກັນຢູ່ ແລະສຳຄັນວ່າເປັນຜູ້ແບ່ງພວກກັນ ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ເມື່ອພິກຂຸເຫຼົ່ານັ້ນ ກຳລັງຍົກປາຕິ

ໂມກຂຶ້ນສະແດງ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າພິກຂຸເຫຼົ່ານັ້ນ ເພິ່ງຍົກປາຕິໂມກຂຶ້ນສະແດງໃໝ່ ພວກພິກຂຸຜູ້ຍົກຂຶ້ນສະແດງ ຕ້ອງອາບັດທຸກກົດ (໑)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່"

ພິກຂຸເຫຼົ່ານັ້ນ ມີຄວາມສຳຄັນວ່າເປັນທຳ ເປັນວິໄນ ແບ່ງພວກກັນຢູ່ ແລະສຳຄັນ ວ່າເປັນຜູ້ແບ່ງພວກກັນ ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ເມື່ອພິກຂຸເຫຼົ່ານັ້ນ ກຳລັງຍົກປາຕິໂມກຂຶ້ນສະແດງ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ປາຕິໂມກທີ່ພິກຂຸເຫຼົ່ານັ້ນ ຍົກຂຶ້ນສະແດງແລ້ວ ເປັນອັນຍົກຂຶ້ນສະແດງດີແລ້ວ ພວກພິກຂຸຜູ້ມາພາຍຫຼັງເພິ່ງຟັງອຸດເທດທີ່ເຫຼືອ ພວກພິກຂຸຜູ້ຍົກຂຶ້ນສະແດງ ຕ້ອງອາບັດທຸກກົດ (໒)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່"

ພິກຂຸເຫຼົ່ານັ້ນ ມີຄວາມສຳຄັນວ່າເປັນທຳ ເປັນວິໄນ ແບ່ງພວກກັນຢູ່ ແລະສຳຄັນ ວ່າເປັນຜູ້ແບ່ງພວກກັນ ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ເມື່ອພິກຂຸເຫຼົ່ານັ້ນກຳລັງຍົກປາຕິໂມກຂຶ້ນສະແດງ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າປາຕິໂມກທີ່ພິກຂຸເຫຼົ່ານັ້ນຍົກຂຶ້ນສະແດງແລ້ວ ເປັນອັນຍົກຂຶ້ນສະແດງດີແລ້ວ ພວກພິກຂຸຜູ້ມາພາຍຫຼັງເພິ່ງຟັງອຸດເທດທີ່ເຫຼືອ ພວກພິກຂຸຜູ້ຍົກຂຶ້ນສະແດງ ຕ້ອງອາບັດທຸກກົດ (໓)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນ ຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ຍັງບໍ່ໄດ້ມາມີຢູ່"

ພິກຂຸເຫຼົ່ານັ້ນ ມີຄວາມສຳຄັນວ່າເປັນທຳ ເປັນວິໄນ ແບ່ງພວກກັນຢູ່ ແລະສຳຄັນວ່າເປັນຜູ້ແບ່ງພວກກັນ ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ພໍພິກຂຸເຫຼົ່ານັ້ນຍົກປາຕິໂມກຂຶ້ນສະແດງຈົບ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນ ເພິ່ງຍົກປາຕິໂມກຂຶ້ນສະແດງໃໝ່ ພວກພິກຂຸຜູ້ຍົກຂຶ້ນສະແດງ ຕ້ອງອາບັດທຸກກົດ (໔)

໗໑໗ ພໍພິກຂຸເຫຼົ່ານັ້ນ ຍົກປາຕິໂມກຂຶ້ນສະແດງຈົບ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ປາຕິໂມກທີ່ພິກຂຸເຫຼົ່ານັ້ນຍົກຂຶ້ນສະແດງແລ້ວ ເປັນອັນຍົກ

ຂຶ້ນສະແດງດີແລ້ວ ພວກພິກຂຸຜູ້ມາພາຍຫຼັງ ເພິ່ງບອກປາຣິສຸດທິໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸຜູ້ຍົກຂຶ້ນສະແດງຕ້ອງອາບັດທຸກກົດ (໕)

ຯລຯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ຯລຯ (໖)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່"

ພິກຂຸເຫຼົ່ານັ້ນມີຄວາມສຳຄັນວ່າເປັນທຳ ເປັນວິໄນ ແບ່ງພວກກັນຢູ່ ແລະສຳຄັນວ່າເປັນຜູ້ແບ່ງພວກກັນ ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ພໍພິກຂຸເຫຼົ່ານັ້ນຍົກປາຕິໂມກຂຶ້ນສະແດງຈົບ ບໍລິສັດຍັງບໍ່ທັນລຸກຂຶ້ນ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນ ເພິ່ງຍົກປາຕິໂມກຂຶ້ນສະແດງໃໝ່ ພວກພິກຂຸຜູ້ຍົກຂຶ້ນສະແດງ ຕ້ອງອາບັດທຸກກົດ (໗)

ຯລຯ ພໍພິກຂຸເຫຼົ່ານັ້ນ ຍົກປາຕິໂມກຂຶ້ນສະແດງຈົບ ບໍລິສັດຍັງບໍ່ທັນລຸກຂຶ້ນ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ປາຕິໂມກທີ່ພິກຂຸເຫຼົ່ານັ້ນຍົກຂຶ້ນສະແດງແລ້ວ ເປັນອັນຍົກຂຶ້ນສະແດງດີແລ້ວ ພວກພິກຂຸຜູ້ມາພາຍຫຼັງ ເພິ່ງບອກປາຣິສຸດທິໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸຜູ້ຍົກຂຶ້ນສະແດງ ຕ້ອງອາບັດທຸກກົດ (໘)

ຯລຯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ຯລຯ (໙)

ຯລຯ ພໍພິກຂຸເຫຼົ່ານັ້ນ ຍົກປາຕິໂມກຂຶ້ນສະແດງຈົບ ບໍລິສັດລຸກຂຶ້ນບາງສ່ວນ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນເພິ່ງຍົກປາຕິໂມກຂຶ້ນສະແດງໃໝ່ ຯລຯ (໑໐)

ຯລຯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ປາຕິໂມກທີ່ພິກຂຸເຫຼົ່ານັ້ນຍົກຂຶ້ນສະແດງແລ້ວ ເປັນອັນຍົກຂຶ້ນສະແດງດີແລ້ວ ພວກພິກຂຸຜູ້ມາພາຍຫຼັງເພິ່ງບອກ ປາຣິສຸດທິໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸຜູ້ຍົກຂຶ້ນສະແດງ ຕ້ອງອາບັດທຸກກົດ (໑໑)

ຯລຯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ຯລຯ (໑໒)

ຯລຯ ພໍພິກຂຸເຫຼົ່ານັ້ນ ຍົກປາຕິໂມກຂຶ້ນສະແດງຈົບ ບໍລິສັດລຸກຂຶ້ນທັງໝົດ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ຯລຯ. (໑໓)

ຯລຯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ຯລຯ (໑໔)

ຯລຯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ຯລຯ (໑໕)

**ວັກຄາວັກຄະສັນຍີປັນນະຣະສະກະ ຈົບ**

# ໝ. ເວມະຕິກະປັນນະຣະສະກະ

## ວ່າດ້ວຍພິກຂຸບໍ່ແນ່ໃຈລົງອຸໂປສົດ ໑໕ ກໍລະນີ

[໑໗໔] ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນ ຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ບໍ່ແນ່ໃຈວ່າ "ພວກເຮົາຄວນລົງອຸໂປສົດຫຼື ບໍ່ຄວນລົງ" ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ເມື່ອພິກຂຸເຫຼົ່ານັ້ນ ກຳລັງຍົກປາຕິໂມກຂຶ້ນສະແດງ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນເພິ່ງຍົກປາຕິໂມກຂຶ້ນສະແດງໃໝ່ ພວກພິກຂຸຜູ້ຍົກຂຶ້ນສະແດງຕ້ອງອາບັດທຸກກົດ (໑)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ບໍ່ແນ່ໃຈວ່າ "ພວກເຮົາຄວນລົງອຸໂປສົດ ຫຼື ບໍ່ຄວນລົງ" ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ເມື່ອພິກຂຸເຫຼົ່ານັ້ນກຳລັງຍົກປາຕິໂມກຂຶ້ນສະແດງ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ

ປາຕິໂມກທີ່ພິກຂຸເຫຼົ່ານັ້ນ ຍົກຂຶ້ນສະແດງແລ້ວ ເປັນອັນຍົກຂຶ້ນສະແດງດີແລ້ວ ພວກພິກຂຸຜູ້ມາພາຍຫຼັງ ເພິ່ງຟັງອຸດເທດທີ່ເຫຼືອ ພວກພິກຂຸຜູ້ຍົກຂຶ້ນສະແດງ ຕ້ອງອາບັດທຸກກົດ (໒)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ບໍ່ແນ່ໃຈວ່າ "ພວກເຮົາຄວນລົງອຸໂປສົດ ຫຼື ບໍ່ຄວນລົງ" ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ເມື່ອພິກຂຸເຫຼົ່ານັ້ນກຳລັງຍົກປາຕິໂມກຂຶ້ນສະແດງ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ປາຕິໂມກທີ່ພິກຂຸເຫຼົ່ານັ້ນຍົກຂຶ້ນສະແດງແລ້ວ ເປັນອັນຍົກຂຶ້ນສະແດງດີແລ້ວ ພວກພິກຂຸຜູ້ມາພາຍຫຼັງເພິ່ງຟັງອຸດເທດທີ່ເຫຼືອ ພວກພິກຂຸຜູ້ຍົກຂຶ້ນສະແດງ ຕ້ອງອາບັດທຸກກົດ (໓)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ບໍ່ແນ່ໃຈວ່າ "ພວກເຮົາຄວນລົງອຸໂປສົດ ຫຼື ບໍ່ຄວນລົງ" ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ພໍພິກຂຸເຫຼົ່ານັ້ນຍົກປາຕິໂມກ ຂຶ້ນສະແດງຈົບ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນເພິ່ງຍົກປາຕິໂມກຂຶ້ນສະແດງໃໝ່ ພວກພິກຂຸຜູ້ຍົກຂຶ້ນສະແດງ ຕ້ອງອາບັດທຸກກົດ (໔)

ຯລຯ ພໍພິກຂຸເຫຼົ່ານັ້ນ ຍົກປາຕິໂມກຂຶ້ນສະແດງຈົບ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ປາຕິໂມກທີ່ພິກຂຸເຫຼົ່ານັ້ນ ຍົກຂຶ້ນສະແດງແລ້ວ ເປັນອັນຍົກຂຶ້ນສະແດງດີແລ້ວ ພວກພິກຂຸຜູ້ມາພາຍຫຼັງ ເພິ່ງບອກປາຣິສຸດທິໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸຜູ້ຍົກຂຶ້ນສະແດງ ຕ້ອງອາບັດທຸກກົດ (໕)

ຯລຯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ຯລຯ (໖)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນຮູ້ຢູ່ວ່າ ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ບໍ່ແນ່ໃຈວ່າ "ພວກເຮົາຄວນລົງອຸໂປສົດ ຫຼື ບໍ່ຄວນລົງ" ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ພໍພິກຂຸເຫຼົ່ານັ້ນຍົກປາຕິໂມກຂຶ້ນສະແດງຈົບ ບໍລິສັດຍັງບໍ່ທັນລຸກຂຶ້ນ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນເພິ່ງຍົກປາຕິໂມກຂຶ້ນສະແດງໃໝ່ ພວກພິກຂຸຜູ້ຍົກຂຶ້ນສະແດງ ຕ້ອງອາບັດທຸກກົດ (໗)

ຯລຯ ພໍພິກຂຸເຫຼົ່ານັ້ນ ຍົກປາຕິໂມກຂຶ້ນສະແດງຈົບ ບໍລິສັດຍັງບໍ່ທັນລຸກຂຶ້ນ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ປາຕິໂມກທີ່ພິກຂຸເຫຼົ່ານັ້ນຍົກຂຶ້ນສະແດງແລ້ວ ເປັນອັນຍົກຂຶ້ນສະແດງດີແລ້ວ ພວກພິກຂຸຜູ້ມາພາຍຫຼັງເພິ່ງບອກປາຣິສຸດທິໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸຜູ້ຍົກຂຶ້ນສະແດງ ຕ້ອງອາບັດທຸກກົດ (໘)

ຯລຯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ຯລຯ (໙)

ຯລຯ ພໍພິກຂຸເຫຼົ່ານັ້ນ ຍົກປາຕິໂມກຂຶ້ນສະແດງຈົບ ບໍລິສັດລຸກຂຶ້ນບາງສ່ວນ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ຯລຯ (໑໐)

ຯລຯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ຯລຯ (໑໑)

ຯລຯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ຯລຯ (໑໒)

ຯລຯ ພໍພິກຂຸເຫຼົ່ານັ້ນ ຍົກປາຕິໂມກຂຶ້ນສະແດງຈົບ ບໍລິສັດລຸກຂຶ້ນທັງໝົດ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ຯລຯ (໑໓)

ຯລຯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ຯລຯ (໑໔)

ຯລຯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ຯລຯ (໑໕)

**ເວມະຕິກະປັນນະຣະສະກະ ຈົບ**

## ໗໘. ກຸກກຸດຈະປະກະຕະປັນນະຣະສະກະ

## ວ່າດ້ວຍພິກຂຸກັງວົນໃຈລົງອຸໂປສົດ ໑໕ ກໍລະນີ

[໑໗໕] ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່

ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ກັງວົນໃຈເຮັດອຸໂປສົດຍົກປາຕິໂມກຂຶ້ນສະແດງດ້ວຍຄິດວ່າ "ພວກເຮົາຄວນລົງອຸໂປສົດແທ້ ບໍ່ແມ່ນບໍ່ຄວນລົງ" ເມື່ອພິກຂຸ ເຫຼົ່ານັ້ນກຳລັງຍົກປາຕິໂມກຂຶ້ນສະແດງ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນເພິ່ງຍົກປາຕິໂມກຂຶ້ນສະແດງໃໝ່ ພວກພິກຂຸຜູ້ຍົກຂຶ້ນສະແດງ ຕ້ອງອາບັດທຸກກົດ (໑)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ກັງວົນໃຈລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງດ້ວຍຄິດວ່າ "ພວກເຮົາຄວນລົງອຸໂປສົດແທ້ ບໍ່ແມ່ນບໍ່ຄວນລົງ" ເມື່ອພິກຂຸເຫຼົ່ານັ້ນ ກຳລັງຍົກປາຕິໂມກຂຶ້ນສະແດງ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ປາຕິໂມກທີ່ພິກຂຸເຫຼົ່ານັ້ນຍົກຂຶ້ນສະແດງແລ້ວ ເປັນອັນຍົກຂຶ້ນສະແດງດີແລ້ວ ພວກພິກຂຸຜູ້ມາພາຍຫຼັງເພິ່ງຟັງອຸດເທດທີ່ເຫຼືອ ພວກພິກຂຸຜູ້ຍົກຂຶ້ນສະແດງ ຕ້ອງອາບັດທຸກກົດ (໒)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ກັງວົນໃຈລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງດ້ວຍຄິດວ່າ "ພວກເຮົາຄວນລົງອຸໂປສົດໂດຍແທ້ ບໍ່ແມ່ນບໍ່ຄວນລົງ" ເມື່ອພິກຂຸເຫຼົ່ານັ້ນ ກຳລັງຍົກປາຕິໂມກຂຶ້ນສະແດງ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ປາຕິໂມກທີ່ພິກຂຸເຫຼົ່ານັ້ນຍົກຂຶ້ນສະແດງແລ້ວ ເປັນອັນຍົກຂຶ້ນສະແດງດີແລ້ວ ພວກພິກຂຸຜູ້ມາພາຍຫຼັງເພິ່ງຟັງອຸດເທດທີ່ເຫຼືອ ພວກພິກຂຸຜູ້ຍົກຂຶ້ນສະແດງ ຕ້ອງອາບັດທຸກກົດ (໓)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ກັງວົນໃຈລົງອຸໂປສົດ ຍົກປາຕິໂມກ ຂຶ້ນສະແດງດ້ວຍຄິດວ່າ "ພວກເຮົາຄວນລົງອຸໂປສົດແທ້ ບໍ່ແມ່ນບໍ່ຄວນລົງ" ພໍພິກຂຸເຫຼົ່ານັ້ນ ຍົກປາຕິໂມກຂຶ້ນສະແດງຈົບ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນເພິ່ງຍົກປາຕິໂມກຂຶ້ນສະແດງໃໝ່ ພວກພິກຂຸຜູ້ຍົກຂຶ້ນສະແດງ ຕ້ອງອາບັດທຸກກົດ (໔)

໗໑໗ ພໍພິກຂຸເຫຼົ່ານັ້ນ ຍົກປາຕິໂມກຂຶ້ນສະແດງຈົບ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ປາຕິໂມກທີ່ພິກຂຸເຫຼົ່ານັ້ນ ຍົກຂຶ້ນສະແດງແລ້ວ ເປັນອັນຍົກຂຶ້ນສະແດງດີແລ້ວ ພວກພິກຂຸຜູ້ມາພາຍຫຼັງເພິ່ງບອກປາຣິສຸດທິໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸຜູ້ຍົກຂຶ້ນສະແດງ ຕ້ອງອາບັດທຸກກົດ (໕)

ຯລຯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ຯລຯ (໖)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ກັງວົນໃຈລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງດ້ວຍຄິດວ່າ "ພວກເຮົາຄວນລົງອຸໂປສົດແທ້ ບໍ່ແມ່ນບໍ່ຄວນລົງ" ພໍພິກຂຸເຫຼົ່ານັ້ນຍົກປາຕິໂມກຂຶ້ນສະແດງຈົບ ບໍລິສັດຍັງບໍ່ທັນລຸກຂຶ້ນ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນ ເພິ່ງຍົກປາຕິໂມກຂຶ້ນສະແດງໃໝ່ ພວກພິກຂຸຜູ້ຍົກຂຶ້ນສະແດງ ຕ້ອງອາບັດທຸກກົດ (໗)

ຯລຯ ພໍພິກຂຸເຫຼົ່ານັ້ນ ຍົກປາຕິໂມກຂຶ້ນສະແດງຈົບ ບໍລິສັດຍັງບໍ່ທັນລຸກຂຶ້ນ ຂະນະນັ້ນພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ປາຕິໂມກທີ່ພິກຂຸເຫຼົ່ານັ້ນຍົກຂຶ້ນສະແດງແລ້ວ ເປັນອັນຍົກຂຶ້ນສະແດງດີແລ້ວ ພວກພິກຂຸຜູ້ມາພາຍຫຼັງເພິ່ງບອກປາຣິສຸດທິໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸຜູ້ຍົກຂຶ້ນສະແດງ ຕ້ອງອາບັດທຸກກົດ (໘)

ຯລຯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ຯລຯ (໙)

ຯລຯ ພໍພິກຂຸເຫຼົ່ານັ້ນ ຍົກປາຕິໂມກຂຶ້ນສະແດງຈົບ ບໍລິສັດລຸກຂຶ້ນບາງສ່ວນ ຂະນະນັ້ນພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ຯລຯ (໑໐)

ຯລຯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ຯລຯ (໑໑)

ຯລຯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ຯລຯ (໑໒)

ຯລຯ ພໍພິກຂຸເຫຼົ່ານັ້ນ ຍົກປາຕິໂມກຂຶ້ນສະແດງຈົບ ບໍລິສັດລຸກຂຶ້ນທັງໝົດ ຂະນະນັ້ນພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ຯລຯ (໑໓)

ຯລຯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ຯລຯ (໑໔)

ຯລຯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ຯລຯ (໑໕)

**ກຸກກຸດຈະປະກະຕະປັນນະຣະສະກະ ຈົບ**

## ໙໙. ເພທະປຸເຣກຂາຣະປັນນະຣະສະກະ

## ວ່າດ້ວຍມຸ້ງທຳຄວາມແຕກແຍກລົງອຸໂປສົດ ໑໕ ກໍລະນີ

[໑໗໙] ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນ ຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ມຸ້ງຄວາມແຕກແຍກວ່າ "ຂໍພິກຂຸເຫຼົ່ານັ້ນ ຈົ່ງເສື່ອມ

ສູນ ຈົ່ງພິນາດ ພິກຂຸເຫຼົ່ານັ້ນຈະມີປະໂຫຍດອັນໃດ" ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ເມື່ອພິກຂຸເຫຼົ່ານັ້ນ ກຳລັງຍົກປາຕິໂມກຂຶ້ນສະແດງ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນ ເພິ່ງຍົກປາຕິໂມກຂຶ້ນສະແດງໃໝ່ ພວກພິກຂຸຜູ້ຍົກຂຶ້ນສະແດງ ຕ້ອງອາບັດຖຸນລັດໄຈ (໑)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນ ຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ມຸ້ງຄວາມແຕກແຍກວ່າ "ຂໍພິກຂຸເຫຼົ່ານັ້ນ ຈົ່ງເສື່ອມສູນ ຈົ່ງພິນາດ ພິກຂຸເຫຼົ່ານັ້ນ ຈະມີປະໂຫຍດອັນໃດ" ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ເມື່ອພິກຂຸເຫຼົ່ານັ້ນ ກຳລັງຍົກປາຕິໂມກຂຶ້ນສະແດງ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ປາຕິໂມກທີ່ພິກຂຸເຫຼົ່ານັ້ນຍົກຂຶ້ນສະແດງແລ້ວ ເປັນອັນຍົກຂຶ້ນສະແດງດີແລ້ວ ພວກພິກຂຸຜູ້ມາພາຍຫຼັງ ເພິ່ງຟັງອຸດເທດທີ່ເຫຼືອ ພວກພິກຂຸຜູ້ຍົກຂຶ້ນສະແດງ ຕ້ອງອາບັດຖຸນລັດໄຈ (໒)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນ ຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ມຸ້ງຄວາມແຕກແຍກວ່າ "ຂໍພິກຂຸເຫຼົ່ານັ້ນ ຈົ່ງເສື່ອມສູນ ຈົ່ງພິນາດ ພິກຂຸເຫຼົ່ານັ້ນ ຈະມີປະໂຫຍດອັນໃດ" ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ເມື່ອພິກຂຸເຫຼົ່ານັ້ນ ກຳລັງຍົກປາຕິໂມກຂຶ້ນສະແດງ ຂະນະນັ້ນ ພິກຂຸທີ່ ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ປາຕິໂມກທີ່ພິກຂຸເຫຼົ່ານັ້ນຍົກຂຶ້ນສະແດງແລ້ວ ເປັນອັນຍົກຂຶ້ນສະແດງດີແລ້ວ ພວກພິກຂຸຜູ້ມາພາຍຫຼັງ ເພິ່ງຟັງອຸດເທດທີ່ເຫຼືອ ພວກພິກຂຸຜູ້ຍົກຂຶ້ນສະແດງ ຕ້ອງອາບັດຖຸນລັດໄຈ (໓)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ມຸ້ງຄວາມແຕກແຍກວ່າ "ຂໍພິກຂຸເຫຼົ່ານັ້ນ ຈົ່ງເສື່ອມສູນ ຈົ່ງພິນາດ ພິກຂຸເຫຼົ່ານັ້ນ ຈະມີປະໂຫຍດອັນໃດ" ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ພໍພິກຂຸເຫຼົ່ານັ້ນຍົກປາຕິໂມກຂຶ້ນສະແດງຈົບ ຂະນະນັ້ນ ພິກຂຸທີ່ຢູ່ ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນເພິ່ງຍົກປາຕິໂມກຂຶ້ນສະແດງໃໝ່ ພວກພິກຂຸຜູ້ຍົກຂຶ້ນສະແດງ ຕ້ອງອາບັດຖຸນລັດໄຈ (໔)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນຮູ້ຢູ່ວ່າ "ຍັງມີພິກຂຸທີ່

ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ມຸ້ງຄວາມແຕກແຍກວ່າ "ຂໍພິກຂຸເຫຼົ່ານັ້ນຈົ່ງເສື່ອມສູນ ຈົ່ງພິນາດ ພິກຂຸເຫຼົ່ານັ້ນຈະມີປະໂຫຍດອັນໃດ" ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ພໍພິກຂຸເຫຼົ່ານັ້ນຍົກປາຕິໂມກຂຶ້ນສະແດງຈົບ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ປາຕິໂມກທີ່ພິກຂຸເຫຼົ່ານັ້ນຍົກຂຶ້ນສະແດງແລ້ວ ເປັນອັນຍົກຂຶ້ນສະແດງດີແລ້ວ ພວກພິກຂຸຜູ້ມາພາຍຫຼັງເພິ່ງບອກປາຣິສຸດທິໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸຜູ້ຍົກຂຶ້ນສະແດງຕ້ອງອາບັດຖຸນລັດໄຈ (໕)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ມຸ້ງຄວາມແຕກແຍກວ່າ "ຂໍພິກຂຸເຫຼົ່ານັ້ນຈົ່ງເສື່ອມສູນ ຈົ່ງພິນາດ ພິກຂຸເຫຼົ່ານັ້ນ ຈະມີປະໂຫຍດອັນໃດ" ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ພໍພິກຂຸເຫຼົ່ານັ້ນຍົກປາຕິໂມກຂຶ້ນສະແດງຈົບ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ປາຕິໂມກທີ່ພິກຂຸເຫຼົ່ານັ້ນ ຍົກຂຶ້ນສະແດງແລ້ວ ເປັນອັນຍົກຂຶ້ນສະແດງດີແລ້ວ ພວກພິກຂຸຜູ້ມາພາຍຫຼັງ ເພິ່ງບອກປາຣິສຸດທິໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸຜູ້ຍົກຂຶ້ນສະແດງ ຕ້ອງອາບັດຖຸນລັດໄຈ (໖)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ມຸ້ງຄວາມແຕກແຍກວ່າ "ພິກຂຸເຫຼົ່ານັ້ນ ຈົ່ງເສື່ອມສູນ ຈົ່ງພິນາດ ພິກຂຸເຫຼົ່ານັ້ນຈະມີປະໂຫຍດອັນໃດ" ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ພໍພິກຂຸເຫຼົ່ານັ້ນຍົກປາຕິໂມກຂຶ້ນສະແດງຈົບ ບໍລິສັດຍັງບໍ່ທັນລຸກຂຶ້ນ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນ ເພິ່ງຍົກປາຕິໂມກຂຶ້ນສະແດງໃໝ່ ພວກພິກຂຸຜູ້ຍົກຂຶ້ນສະແດງ ຕ້ອງອາບັດຖຸນລັດໄຈ (໗)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ມຸ້ງຄວາມແຕກແຍກວ່າ "ຂໍພິກຂຸເຫຼົ່ານັ້ນ ຈົ່ງເສື່ອມສູນ ຈົ່ງພິນາດ ພິກຂຸເຫຼົ່ານັ້ນ ຈະມີປະໂຫຍດອັນໃດ" ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ພໍພິກຂຸເຫຼົ່ານັ້ນ ຍົກປາຕິໂມກຂຶ້ນສະແດງຈົບ ບໍລິສັດຍັງບໍ່ທັນລຸກຂຶ້ນ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ປາຕິໂມກທີ່ພິກຂຸເຫຼົ່ານັ້ນ ຍົກຂຶ້ນສະແດງແລ້ວ ເປັນອັນຍົກຂຶ້ນສະແດງດີແລ້ວ ພວກພິກຂຸຜູ້ມາພາຍຫຼັງເພິ່ງບອກປາຣິສຸດທິໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸຜູ້ຍົກຂຶ້ນສະແດງ ຕ້ອງອາບັດຖຸນລັດໄຈ (໘)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ມຸ້ງຄວາມແຕກແຍກວ່າ "ຂໍພິກຂຸເຫຼົ່ານັ້ນຈົ່ງເສື່ອມສູນຈົ່ງພິນາດ ພິກຂຸເຫຼົ່ານັ້ນຈະມີປະໂຫຍດອັນໃດ" ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ພໍພິກຂຸເຫຼົ່ານັ້ນຍົກປາຕິໂມກຂຶ້ນສະແດງຈົບ ບໍລິສັດຍັງບໍ່ທັນລຸກຂຶ້ນ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ປາຕິໂມກທີ່ພິກຂຸເຫຼົ່ານັ້ນຍົກຂຶ້ນສະແດງແລ້ວ ເປັນອັນຍົກຂຶ້ນສະແດງດີແລ້ວ ພວກພິກຂຸຜູ້ມາພາຍຫຼັງເພິ່ງບອກປາຣິສຸດທິໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸຜູ້ຍົກຂຶ້ນສະແດງ ຕ້ອງອາບັດຖຸນລັດໄຈ (໗)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ມຸ້ງຄວາມແຕກແຍກວ່າ "ຂໍພິກຂຸເຫຼົ່ານັ້ນ ຈົ່ງເສື່ອມສູນຈົ່ງພິນາດ ພິກຂຸເຫຼົ່ານັ້ນ ຈະມີປະໂຫຍດອັນໃດ" ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ພໍພິກຂຸເຫຼົ່ານັ້ນຍົກປາຕິໂມກຂຶ້ນສະແດງຈົບ ບໍລິສັດລຸກຂຶ້ນບາງສ່ວນ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນ ເພິ່ງຍົກປາຕິໂມກຂຶ້ນສະແດງໃໝ່ ພວກພິກຂຸຜູ້ຍົກຂຶ້ນສະແດງ ຕ້ອງອາບັດຖຸນລັດໄຈ (໑໐)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ມຸ້ງຄວາມແຕກແຍກວ່າ "ຂໍພິກຂຸເຫຼົ່ານັ້ນ ຈົ່ງເສື່ອມສູນຈົ່ງພິນາດ ພິກຂຸເຫຼົ່ານັ້ນ ຈະມີປະໂຫຍດອັນໃດ" ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ພໍພິກຂຸເຫຼົ່ານັ້ນຍົກປາຕິໂມກຂຶ້ນສະແດງຈົບ ບໍລິສັດລຸກຂຶ້ນແດ່ບາງສ່ວນ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ປາຕິໂມກທີ່ພິກຂຸເຫຼົ່ານັ້ນ ຍົກຂຶ້ນສະແດງແລ້ວ ເປັນອັນຍົກຂຶ້ນສະແດງດີແລ້ວ ພວກພິກຂຸຜູ້ມາພາຍຫຼັງເພິ່ງບອກປາຣິສຸດທິໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸຜູ້ຍົກຂຶ້ນສະແດງ ຕ້ອງອາບັດຖຸນລັດໄຈ (໑໑)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ມຸ້ງຄວາມແຕກແຍກວ່າ "ຂໍພິກຂຸເຫຼົ່ານັ້ນຈົ່ງເສື່ອມສູນຈົ່ງພິນາດ ພິກຂຸເຫຼົ່ານັ້ນຈະມີປະໂຫຍດອັນໃດ" ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ພໍພິກຂຸເຫຼົ່ານັ້ນຍົກປາຕິໂມກຂຶ້ນສະແດງຈົບ ບໍລິສັດລຸກຂຶ້ນແດ່ບາງສ່ວນ ຂະນະນັ້ນ ພິກຂຸທີ່ຢູ່ໃນອາ

ອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ປາຕິໂມກທີ່ພິກຂຸເຫຼົ່ານັ້ນ ຍົກຂຶ້ນສະແດງແລ້ວ ເປັນອັນຍົກຂຶ້ນສະແດງດີແລ້ວ ພວກພິກຂຸຜູ້ມາທີຫຼັງເພິ່ງບອກປາຣິສຸດທິໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸຜູ້ຍົກຂຶ້ນສະແດງ ຕ້ອງອາບັດຖຸນລັດໄຈ (໑໘)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ມຸ້ງຄວາມແຕກແຍກວ່າ "ຂໍພິກຂຸເຫຼົ່ານັ້ນຈົ່ງເສື່ອມສູນຈົ່ງພິນາດ ພິກຂຸເຫຼົ່ານັ້ນຈະມີປະໂຫຍດອັນໃດ" ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ພໍພິກຂຸເຫຼົ່ານັ້ນຍົກປາຕິໂມກຂຶ້ນສະແດງຈົບ ບໍລິສັດລຸກຂຶ້ນທັງໝົດ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນເພິ່ງຍົກປາຕິໂມກຂຶ້ນສະແດງໃໝ່ ພວກພິກຂຸຜູ້ຍົກຂຶ້ນສະແດງ ຕ້ອງອາບັດຖຸນລັດໄຈ (໑໙)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ມຸ້ງຄວາມແຕກແຍກວ່າ "ຂໍພິກຂຸເຫຼົ່ານັ້ນຈົ່ງເສື່ອມສູນຈົ່ງພິນາດ ພິກຂຸເຫຼົ່ານັ້ນຈະມີປະໂຫຍດອັນໃດ" ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ພໍພິກຂຸເຫຼົ່ານັ້ນຍົກປາຕິໂມກຂຶ້ນສະແດງຈົບ ບໍລິສັດລຸກຂຶ້ນທັງໝົດ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ປາຕິໂມກທີ່ພິກຂຸເຫຼົ່ານັ້ນ ຍົກຂຶ້ນສະແດງແລ້ວ ເປັນອັນຍົກຂຶ້ນສະແດງດີແລ້ວ ພວກພິກຂຸຜູ້ມາພາຍຫຼັງ ເພິ່ງບອກປາຣິສຸດທິໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸຜູ້ຍົກຂຶ້ນສະແດງ ຕ້ອງອາບັດຖຸນລັດໄຈ (໑໔)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ມຸ້ງຄວາມແຕກແຍກວ່າ "ຂໍພິກຂຸເຫຼົ່ານັ້ນ ຈົ່ງເສື່ອມສູນຈົ່ງພິນາດ ພິກຂຸເຫຼົ່ານັ້ນ ຈະມີປະໂຫຍດອັນໃດ" ລົງອຸໂປສົດ ຍົກປາຕິໂມກຂຶ້ນສະແດງ ພໍພິກຂຸເຫຼົ່ານັ້ນຍົກປາຕິໂມກຂຶ້ນສະແດງຈົບ ເມື່ອບໍລິສັດລຸກຂຶ້ນທັງໝົດ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ປາຕິໂມກທີ່ ພິກຂຸເຫຼົ່ານັ້ນຍົກຂຶ້ນສະແດງແລ້ວ ເປັນອັນຍົກຂຶ້ນສະແດງດີແລ້ວ ພວກພິກຂຸຜູ້ມາພາຍຫຼັງເພິ່ງບອກປາຣິສຸດທິໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸຜູ້ຍົກຂຶ້ນສະແດງ ຕ້ອງອາບັດຖຸນລັດໄຈ (໑໕)

**ເພທະປຸເຣາກຂາຣະປັນນະຣະສະກະ ຈົບ**

**ປັນຈະວີສະຕິຕິກະ ຈົບ**

# ໑໐໐. ສີໂມກັນຕິກະເປີຍຍາລະ

## ວ່າດ້ວຍການລະຂໍ້ຄວາມກ່ຽວກັບພິກຂຸເຂົ້າສູ່ສີມາ

### ເປີຍຍາລະມຸກ ໗໐໐ ຕິກະ

[໑໗໗] ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນອຸໂປສົດນັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ

໑. ປະຊຸມກັນ ໔ ອົງແດ່ ເກີນກວ່າແດ່
໒. ພິກຂຸເຫຼົ່ານັ້ນບໍ່ຮູ້ວ່າ "ມີພິກຂຸທີ່ຢູ່ໃນອາວາດພວກອື່ນກຳລັງເຂົ້າມາພາຍໃນສີມາ ຯລຯ
໓. ຯລຯ ພິກຂຸເຫຼົ່ານັ້ນບໍ່ຮູ້ວ່າ "ມີພິກຂຸທີ່ຢູ່ໃນອາວາດພວກອື່ນເຂົ້າມາພາຍໃນສີມາແລ້ວ ຯລຯ
໔. ຯລຯ ພິກຂຸເຫຼົ່ານັ້ນບໍ່ເຫັນພິກຂຸທີ່ຢູ່ໃນອາວາດພວກອື່ນກຳລັງເຂົ້າມາພາຍໃນສີມາ ຯລຯ
໕. ຯລຯ ພິກຂຸເຫຼົ່ານັ້ນບໍ່ເຫັນພິກຂຸທີ່ຢູ່ໃນອາວາດພວກອື່ນເຂົ້າມາພາຍໃນສີມາແລ້ວ ຯລຯ
໖. ຯລຯ ພິກຂຸເຫຼົ່ານັ້ນບໍ່ໄດ້ຍິນວ່າ "ພິກຂຸທີ່ຢູ່ໃນອາວາດພວກອື່ນກຳລັງເຂົ້າມາພາຍໃນສີມາ ຯລຯ
໗. ຯລຯ ພິກຂຸເຫຼົ່ານັ້ນບໍ່ໄດ້ຍິນວ່າ "ພິກຂຸທີ່ຢູ່ໃນອາວາດພວກອື່ນເຂົ້າມາພາຍໃນສີມາແລ້ວ ຯລຯ

ໂດຍໄນ ໑໗໕ ຕິກະ

໑. ພິກຂຸທີ່ຢູ່ໃນອາວາດກັບພິກຂຸທີ່ຢູ່ໃນອາວາດ
໒. ພິກຂຸອາຄັນຕຸກະກັບພິກຂຸທີ່ຢູ່ໃນອາວາດ
໓. ພິກຂຸທີ່ຢູ່ໃນອາວາດກັບພິກຂຸອາຄັນຕຸກະ
໔. ພິກຂຸອາຄັນຕຸກະກັບພິກຂຸອາຄັນຕຸກະ

ລວມເປັນ ໗໐໐ ຕິກະ ໂດຍເປີຍຍາລະມຸກ

[໑໗໘] ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ວັນອຸໂປສົດຂອງພວກພິກຂຸທີ່ຢູ່ໃນອາວາດເປັນວັນ ໑໔ ຄ່ຳ ຂອງພວກພິກຂຸອາຄັນຕກະເປັນວັນ ໑໕ ຄ່ຳ ຖ້າພວກພິກຂຸທີ່ຢູ່ໃນອາວາດ ມີຈຳນວນ

ຫຼາຍກວ່າ ພວກພິກຂຸອາຄັນຕຸກະເພິ່ງອະນຸວັດຕາມພວກພິກຂຸທີ່ຢູ່ໃນອາວາດ ຖ້າມີຈຳນວນເທົ່າກັນ ພວກພິກຂຸອາຄັນຕຸກະ ເພິ່ງອະນຸວັດຕາມພວກພິກຂຸທີ່ຢູ່ໃນອາວາດ ຖ້າພວກພິກຂຸອາຄັນຕຸກະມີຈຳນວນຫຼາຍກວ່າ ພວກພິກຂຸທີ່ຢູ່ໃນອາວາດເພິ່ງອະນຸວັດຕາມພວກພິກຂຸອາຄັນຕຸກະ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ວັນອຸໂປສົດຂອງພວກພິກຂຸທີ່ຢູ່ໃນອາວາດເປັນວັນ ໑໕ ຄ່ຳ ຂອງພວກພິກຂຸອາຄັນຕກະເປັນວັນ ໑໔ ຄ່ຳ ຖ້າພວກພິກຂຸທີ່ຢູ່ໃນອາວາດ ມີຈຳນວນຫຼາຍກວ່າ ພວກພິກຂຸອາຄັນຕຸກະເພິ່ງອະນຸວັດຕາມພວກພິກຂຸທີ່ຢູ່ໃນອາວາດ ຖ້າມີຈຳນວນເທົ່າກັນ ພວກພິກຂຸອາຄັນຕຸກະເພິ່ງອະນຸວັດຕາມພວກພິກຂຸທີ່ຢູ່ໃນອາວາດ ຖ້າພວກພິກຂຸອາຄັນຕຸກະມີຈຳນວນຫຼາຍກວ່າ ພວກພິກຂຸທີ່ຢູ່ໃນອາວາດເພິ່ງອະນຸວັດຕາມພວກພິກຂຸອາຄັນຕຸກະ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ວັນອຸໂປສົດຂອງພວກພິກຂຸທີ່ຢູ່ໃນອາວາດເປັນວັນ ໑ ຄ່ຳ ຂອງພວກພິກຂຸອາຄັນຕຸກະເປັນວັນ ໑໕ ຄ່ຳ ຖ້າພວກພິກຂຸທີ່ຢູ່ໃນອາວາດ ມີຈຳນວນຫຼາຍກວ່າ ພວກພິກຂຸທີ່ຢູ່ໃນອາວາດບໍ່ປາຖະໜາ ກໍບໍ່ເພິ່ງໃຫ້ຄວາມພ້ອມພຽງແກ່ພວກພິກຂຸອາຄັນຕຸກະ ພວກພິກຂຸອາຄັນຕຸກະເພິ່ງໄປນອກສີມາລົງອຸໂປສົດເທີ້ນ ຖ້າມີຈຳນວນເທົ່າກັນ ພວກພິກຂຸທີ່ຢູ່ໃນອາວາດບໍ່ປາຖະໜາກໍບໍ່ເພິ່ງໃຫ້ຄວາມພ້ອມພຽງແກ່ພວກພິກຂຸອາຄັນຕຸກະ ພວກພິກຂຸອາຄັນຕຸກະເພິ່ງໄປນອກສີມາລົງອຸໂປສົດເທີ້ນ ຖ້າພວກພິກຂຸອາຄັນຕຸກະມີຈຳນວນຫຼາຍກວ່າ ພວກພິກຂຸທີ່ຢູ່ໃນອາວາດເພິ່ງໃຫ້ຄວາມພ້ອມພຽງແກ່ພວກພິກຂຸອາຄັນຕຸກະ ຫຼື ໄປນອກສີມາ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ວັນອຸໂປສົດຂອງພວກພິກຂຸທີ່ຢູ່ໃນອາວາດ ເປັນວັນ ໑໕ ຄ່ຳ ຂອງພວກພິກຂຸອາຄັນຕກະເປັນວັນ ໑ ຄ່ຳ ຖ້າພວກພິກຂຸທີ່ຢູ່ໃນອາວາດ ມີຈຳນວນຫຼາຍກວ່າ ພວກພິກຂຸອາຄັນຕຸກະ ເພິ່ງໃຫ້ຄວາມພ້ອມພຽງແກ່ພິກຂຸທີ່ຢູ່ໃນອາວາດ ຫຼື ໄປນອກສີມາ ຖ້າມີຈຳນວນເທົ່າກັນ ພວກພິກຂຸອາຄັນຕຸກະເພິ່ງໃຫ້ຄວາມພ້ອມພຽງແກ່ພິກຂຸທີ່ຢູ່ໃນອາວາດ ຫຼື ໄປນອກສີມາ ຖ້າພວກພິກຂຸອາຄັນຕຸກະມີຈຳນວນຫຼາຍກວ່າ ພວກພິກຂຸອາຄັນຕຸກະບໍ່ປາຖະໜາກໍບໍ່ເພິ່ງໃຫ້ຄວາມພ້ອມພຽງແກ່ພວກພິກຂຸທີ່ຢູ່ໃນອາວາດ ພວກພິກຂຸທີ່ຢູ່ໃນອາວາດເພິ່ງໄປນອກສີມາລົງອຸໂປສົດເທີ້ນ

## ໑໐໑. ລິງຄາທິທັດສະນະ

### ວ່າດ້ວຍການເຫັນລັກສະນະເປັນຕົ້ນ

[໑໗໙] ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ພວກພິກຂຸອາຄັນຕຸກະໄດ້ເຫັນອາການຂອງພິກຂຸທີ່

ຢູ່ໃນອາວາດ໑ ລັກສະນະຂອງພິກຂຸທີ່ຢູ່ໃນອາວາດ ເຄື່ອງໝາຍຂອງພິກຂຸທີ່ຢູ່ໃນອາວາດ ສິ່ງສໍ່ສະແດງພິກຂຸທີ່ຢູ່ໃນອາວາດຂອງພວກພິກຂຸທີ່ຢູ່ໃນອາວາດ ຕຽງ ຕັ່ງ ຟູກ ໝອນ ນໍ້າສັນ ນໍ້າໃຊ້ ຈັດໄວ້ດີ ບໍລິເວນປັດກວາດສະອາດ ເມື່ອແລ້ວ ບໍ່ແນ່ໃຈວ່າ ມີພວກພິກຂຸທີ່ຢູ່ໃນອາວາດຢູ່ຫຼືບໍ່ມີນໍ"

ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈແຕ່ບໍ່ຄົ້ນຫາ ລົງອຸໂປສົດ ຕ້ອງອາບັດທຸກກົດ
ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈຈຶ່ງຄົ້ນຫາແຕ່ບໍ່ພົບ ລົງອຸໂປສົດ ບໍ່ຕ້ອງອາບັດ
ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈຈຶ່ງຄົ້ນຫາຈົນພົບ ລົງອຸໂປສົດຮ່ວມກັນ ບໍ່ຕ້ອງອາບັດ
ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈຈຶ່ງຄົ້ນຫາຈົນພົບ ແຍກກັນລົງອຸໂປສົດ ຕ້ອງອາບັດທຸກກົດ

ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈຈຶ່ງຄົ້ນຫາຈົນພົບ ມຸ້ງຄວາມແຕກແຍກວ່າ "ຂໍພິກຂຸເຫຼົ່ານັ້ນຈົ່ງເສື່ອມສູນ ຈົ່ງພິນາດ ພິກຂຸເຫຼົ່ານັ້ນ ຈະມີປະໂຫຍດອັນໃດ" ລົງອຸໂປສົດ ຕ້ອງອາບັດຖຸນລັດໄຈ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພວກພິກຂຸອາຄັນຕຸກະໄດ້ຍິນອາການຂອງພິກຂຸທີ່ຢູ່ໃນອາວາດ ລັກສະນະຂອງພິກຂຸທີ່ຢູ່ໃນອາວາດ ເຄື່ອງໝາຍຂອງພິກຂຸທີ່ຢູ່ໃນອາວາດ ສິ່ງສໍ່ສະແດງພິກຂຸທີ່ຢູ່ໃນອາວາດຂອງພວກພິກຂຸທີ່ຢູ່ໃນອາວາດ ໄດ້ຍິນສຽງຍ່າງຂອງພວກພິກຂຸ ທີ່ຢູ່ໃນອາວາດກຳລັງຈົງກົມ ສຽງສາທະຍາຍ ສຽງໄອ ສຽງຈາມ ເມື່ອແລ້ວ ບໍ່ແນ່ໃຈວ່າ "ມີພວກພິກຂຸທີ່ຢູ່ໃນອາວາດຢູ່ຫຼືບໍ່ມີນໍ"

ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈແຕ່ບໍ່ຄົ້ນຫາ ລົງອຸໂປສົດ ຕ້ອງອາບັດທຸກກົດ
ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈຈຶ່ງຄົ້ນຫາ ແຕ່ບໍ່ພົບ ລົງອຸໂປສົດ ບໍ່ຕ້ອງອາບັດ
ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈຈຶ່ງຄົ້ນຫາຈົນພົບ ລົງອຸໂປສົດຮ່ວມກັນ ບໍ່ຕ້ອງອາບັດ
ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈຈຶ່ງຄົ້ນຫາຈົນພົບ ແຍກກັນລົງອຸໂປສົດ ຕ້ອງອາບັດທຸກກົດ

ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈຈຶ່ງຄົ້ນຫາຈົນພົບ ມຸ້ງຄວາມແຕກແຍກວ່າ "ຂໍພິກຂຸເຫຼົ່ານັ້ນຈົ່ງເສື່ອມສູນ ຈົ່ງພິນາດ ພິກຂຸເຫຼົ່ານັ້ນຈະມີປະໂຫຍດອັນໃດ" ລົງອຸໂປສົດ ຕ້ອງອາບັດຖຸນລັດໄຈ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພວກພິກຂຸທີ່ຢູ່ໃນອາວາດໄດ້ເຫັນອາການຂອງພວກພິກຂຸອາຄັນຕຸກະ ລັກສະນະຂອງພວກພິກຂຸອາຄັນຕຸກະ ເຄື່ອງໝາຍຂອງພວກພິກຂຸອາຄັນຕຸກະ ສິ່ງສໍ່ສະແດງພວກພິກຂຸອາຄັນຕຸກະຂອງພວກພິກຂຸອາຄັນຕຸກະ ໄດ້ເຫັນບາດ ຈີວອນ ຜ້ານິສີທະນະ ຮອຍນໍ້າລ້າງຕີນອັນເປັນຂອງພິກຂຸພວກອື່ນ ເມື່ອແລ້ວ ບໍ່ແນ່ໃຈວ່າ "ມີພວກພິກຂຸອາຄັນຕຸກະຢູ່ຫຼືບໍ່ມີນໍ"

ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈແຕ່ບໍ່ຄົ້ນຫາ ລົງອຸໂປສົດ ຕ້ອງອາບັດທຸກກົດ
ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈຈຶ່ງຄົ້ນຫາ ແຕ່ບໍ່ພົບ ລົງອຸໂປສົດ ບໍ່ຕ້ອງອາບັດ

ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈຈຶ່ງຄົ້ນຫາຈົນພົບ ລົງອຸໂປສົດຮ່ວມກັນ ບໍ່ຕ້ອງອາບັດ
ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈຈຶ່ງຄົ້ນຫາຈົນພົບ ແຍກກັນລົງອຸໂປສົດ ຕ້ອງອາບັດທຸກກົດ
ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈຈຶ່ງຄົ້ນຫາຈົນພົບ ມຸ້ງຄວາມແຕກແຍກວ່າ "ຂໍພິກຂຸເຫຼົ່ານັ້ນຈົ່ງເສື່ອມສູນ ຈົ່ງພິນາດ ພິກຂຸເຫຼົ່ານັ້ນຈະມີປະໂຫຍດອັນໃດ" ລົງອຸໂປສົດ ຕ້ອງອາບັດຖຸນລັດໄຈ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພວກພິກຂຸທີ່ຢູ່ໃນອາວາດໄດ້ຍິນອາການຂອງພວກພິກຂຸອາຄັນຕຸກະ ລັກສະນະຂອງພວກພິກຂຸອາຄັນຕຸກະ ເຄື່ອງໝາຍຂອງພວກພິກຂຸອາຄັນຕຸກະ ສິ່ງສໍ່ສະແດງພວກພິກຂຸອາຄັນຕຸກະຂອງພວກພິກຂຸອາຄັນຕຸກະ ໄດ້ຍິນສຽງຍ່າງຂອງພວກພິກຂຸອາຄັນຕຸກະກໍາລັງຍ່າງມາ ສຽງເກີບກະທົບພື້ນ ສຽງໄອ ສຽງຈາມ ເມື່ອແລ້ວ ບໍ່ແນ່ໃຈວ່າ "ມີພວກພິກຂຸອາຄັນຕຸກະຢູ່ຫຼືບໍ່ມີນໍ"

ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈແຕ່ບໍ່ຄົ້ນຫາ ລົງອຸໂປສົດ ຕ້ອງອາບັດທຸກກົດ
ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈຈຶ່ງຄົ້ນຫາ ແຕ່ບໍ່ພົບ ລົງອຸໂປສົດ ບໍ່ຕ້ອງອາບັດ
ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈຈຶ່ງຄົ້ນຫາຈົນພົບ ລົງອຸໂປສົດຮ່ວມກັນ ບໍ່ຕ້ອງອາບັດ
ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈຈຶ່ງຄົ້ນຫາຈົນພົບ ແຍກກັນລົງອຸໂປສົດ ຕ້ອງອາບັດທຸກກົດ
ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈຈຶ່ງຄົ້ນຫາຈົນພົບ ມຸ້ງຄວາມແຕກແຍກວ່າ "ຂໍພິກຂຸເຫຼົ່ານັ້ນຈົ່ງເສື່ອມສູນ ຈົ່ງພິນາດ ພິກຂຸເຫຼົ່ານັ້ນຈະມີປະໂຫຍດອັນໃດ" ລົງອຸໂປສົດ ຕ້ອງອາບັດຖຸນລັດໄຈ

## ໑໐໔. ນານາສັງວາສະກາທິອຸໂປສະຖະກະຣະນະ

### ວ່າດ້ວຍພິກຂຸເປັນນານາສັງວາດເປັນຕົ້ນລົງອຸໂປສົດ

[໑໗໐] ພິກຂຸທັງຫຼາຍ ກໍໃນກໍຣະນີນີ້ ພວກພິກຂຸອາຄັນຕຸກະເຫັນພວກພິກຂຸທີ່ຢູ່ໃນອາວາດຜູ້ເປັນນານາສັງວາດເຂົ້າໃຈວ່າເປັນສະມານະສັງວາດ ບໍ່ໄຕ່ຖາມ ລົງອຸໂປສົດຮ່ວມກັນບໍ່ຕ້ອງອາບັດ

ພິກຂຸອາຄັນຕຸກະເຫຼົ່ານັ້ນ ໄຕ່ຖາມແລ້ວບໍ່ລັງກຽດລົງອຸໂປສົດຮ່ວມກັນ ຕ້ອງອາບັດທຸກກົດ
ພິກຂຸອາຄັນຕຸກະເຫຼົ່ານັ້ນ ໄຕ່ຖາມແລ້ວບໍ່ລັງກຽດ ແຍກກັນລົງອຸໂປສົດ ບໍ່ຕ້ອງອາບັດ
ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພວກພິກຂຸອາຄັນຕຸກະເຫັນພວກພິກຂຸທີ່ຢູ່ໃນອາວາດຜູ້ເປັນສະມານະສັງວາດ ເຂົ້າໃຈວ່າເປັນນານາສັງວາດ ບໍ່ໄຕ່ຖາມ ລົງອຸໂປສົດຮ່ວມກັນຕ້ອງອາບັດທຸກກົດ

ພິກຂຸອາຄັນຕຸກະເຫຼົ່ານັ້ນ ໄຕ່ຖາມແລ້ວລັງກຽດແຍກກັນລົງອຸໂປສົດ ຕ້ອງອາບັດທຸກກົດ
ພິກຂຸອາຄັນຕຸກະເຫຼົ່ານັ້ນ ໄຕ່ຖາມແລ້ວລັງກຽດ ລົງອຸໂປສົດຮ່ວມກັນ ບໍ່ຕ້ອງອາບັດ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພວກພິກຂຸທີ່ຢູ່ໃນອາວາດເຫັນພວກພິກຂຸອາຄັນຕຸກະ ຜູ້ເປັນນານາສັງວາດ ເຂົ້າໃຈວ່າເປັນສະມານະສັງວາດ ບໍ່ໄຕ່ຖາມ ລົງອຸໂປສົດຮ່ວມກັນ ບໍ່ຕ້ອງອາບັດ

ພິກຂຸທີ່ຢູ່ໃນອາວາດເຫຼົ່ານັ້ນ ໄຕ່ຖາມແລ້ວບໍ່ລັງກຽດ ລົງອຸໂປສົດຮ່ວມກັນ ຕ້ອງອາບັດທຸກກົດ

ພິກຂຸທີ່ຢູ່ໃນອາວາດເຫຼົ່ານັ້ນ ໄຕ່ຖາມແລ້ວບໍ່ລັງກຽດ ແຍກກັນລົງອຸໂປສົດ ບໍ່ຕ້ອງອາບັດ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພວກພິກຂຸທີ່ຢູ່ໃນອາວາດເຫັນພວກພິກຂຸອາຄັນຕຸກະຜູ້ເປັນສະມານະສັງວາດ ເຂົ້າໃຈວ່າເປັນນານາສັງວາດບໍ່ໄຕ່ຖາມ ລົງອຸໂປສົດຮ່ວມກັນ ຕ້ອງອາບັດທຸກກົດ

ພິກຂຸທີ່ຢູ່ໃນອາວາດເຫຼົ່ານັ້ນ ໄຕ່ຖາມແລ້ວລັງກຽດ ແຍກກັນລົງອຸໂປສົດ ຕ້ອງອາບັດທຸກກົດ

ພິກຂຸທີ່ຢູ່ໃນອາວາດເຫຼົ່ານັ້ນ ໄຕ່ຖາມແລ້ວລັງກຽດ ລົງອຸໂປສົດຮ່ວມກັນ ບໍ່ຕ້ອງອາບັດ

## ໑໐໓. ນະຄັນຕັບພະວານ

## ວ່າດ້ວຍສະຖານທີ່ບໍ່ຄວນໄປໃນວັນອຸໂປສົດ

[໑໗໑] ພິກຂຸທັງຫຼາຍ ໃນວັນອຸໂປສົດນັ້ນ ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸ[໑] ໄປສູ່ອາວາດທີ່ບໍ່ມີພິກຂຸ ເວັ້ນແຕ່ໄປກັບສົງ[໒] ເວັ້ນແຕ່ມີອັນຕະລາຍ

ພິກຂຸທັງຫຼາຍ ໃນວັນອຸໂປສົດນັ້ນ ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ສະຖານທີ່ບໍ່ແມ່ນອາວາດ ເຊິ່ງບໍ່ມີພິກຂຸ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

ພິກຂຸທັງຫຼາຍ ໃນວັນອຸໂປສົດນັ້ນ ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ອາວາດ ຫຼື ສະຖານທີ່ບໍ່ແມ່ນອາວາດເຊິ່ງບໍ່ມີພິກຂຸ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

ພິກຂຸທັງຫຼາຍ ໃນວັນອຸໂປສົດນັ້ນ ບໍ່ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸໄປສູ່ອາວາດທີ່ບໍ່ມີພິກຂຸ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

ພິກຂຸທັງຫຼາຍ ໃນວັນອຸໂປສົດນັ້ນ ບໍ່ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸໄປສູ່ສະຖານທີ່ບໍ່ແມ່ນອາວາດເຊິ່ງບໍ່ມີພິກຂຸ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

ພິກຂຸທັງຫຼາຍ ໃນວັນອຸໂປສົດນັ້ນ ບໍ່ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸໄປສູ່ອາວາດ ຫຼື ສະຖານທີ່ບໍ່ແມ່ນອາວາດເຊິ່ງບໍ່ມີພິກຂຸ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

ພິກຂຸທັງຫຼາຍ ໃນວັນອຸໂປສົດນັ້ນ ບໍ່ເພິ່ງອອກຈາກອາວາດ ຫຼື ສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸໄປສູ່ອາວາດທີ່ບໍ່ມີພິກຂຸ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

ພິກຂຸທັງຫຼາຍ ໃນວັນອຸໂປສົດນັ້ນ ບໍ່ເພິ່ງອອກຈາກອາວາດ ຫຼື ສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸໄປສູ່ສະຖານທີ່ບໍ່ແມ່ນອາວາດເຊິ່ງບໍ່ມີພິກຂຸ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

ພິກຂຸທັງຫຼາຍ ໃນວັນອຸໂປສົດນັ້ນ ບໍ່ເພິ່ງອອກຈາກອາວາດ ຫຼື ສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸໄປສູ່ອາວາດ ຫຼື ສະຖານທີ່ບໍ່ແມ່ນອາວາດເຊິ່ງບໍ່ມີພິກຂຸ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

ພິກຂຸທັງຫຼາຍ ໃນວັນອຸໂປສົດນັ້ນ ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ອາວາດທີ່ມີພິກຂຸ ແຕ່ເປັນທີ່ຢູ່ຂອງພວກພິກຂຸຜູ້ເປັນນານາສັງວາດ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

ພິກຂຸທັງຫຼາຍ ໃນວັນອຸໂປສົດນັ້ນ ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ແຕ່ເປັນທີ່ຢູ່ຂອງພວກພິກຂຸຜູ້ເປັນນານາສັງວາດ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

ພິກຂຸທັງຫຼາຍ ໃນວັນອຸໂປສົດນັ້ນ ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ອາວາດ ຫຼື ສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ແຕ່ເປັນທີ່ຢູ່ຂອງພວກພິກຂຸຜູ້ເປັນນານາສັງວາດ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

ພິກຂຸທັງຫຼາຍ ໃນວັນອຸໂປສົດນັ້ນ ບໍ່ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸໄປສູ່ອາວາດທີ່ມີພິກຂຸ ແຕ່ເປັນທີ່ຢູ່ຂອງພວກພິກຂຸຜູ້ເປັນນານາສັງວາດ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

ພິກຂຸທັງຫຼາຍ ໃນວັນອຸໂປສົດນັ້ນ ບໍ່ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸໄປສູ່ສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ແຕ່ເປັນທີ່ຢູ່ຂອງພວກພິກຂຸຜູ້ເປັນນານາສັງວາດ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

ພິກຂຸທັງຫຼາຍ ໃນວັນອຸໂປສົດນັ້ນ ບໍ່ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸໄປສູ່ອາວາດ ຫຼື ສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ແຕ່ເປັນທີ່ຢູ່ຂອງພວກພິກຂຸຜູ້ເປັນນານາສັງວາດ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

ພິກຂຸທັງຫຼາຍ ໃນວັນອຸໂປສົດນັ້ນ ບໍ່ເພິ່ງອອກຈາກອາວາດ ຫຼື ສະຖານທີ່ບໍ່ແມ່ນ

ອາວາດເຊິ່ງມີພິກຂຸ ໄປສູ່ອາວາດທີ່ມີພິກຂຸ ແຕ່ເປັນທີ່ຢູ່ຂອງພວກພິກຂຸຜູ້ເປັນນານາສັງວາດ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

ພິກຂຸທັງຫຼາຍ ໃນວັນອຸໂປສົດນັ້ນ ບໍ່ເພິ່ງອອກຈາກອາວາດ ຫຼື ສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸໄປສູ່ສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ແຕ່ເປັນທີ່ຢູ່ຂອງພວກພິກຂຸຜູ້ເປັນນານາສັງວາດ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

ພິກຂຸທັງຫຼາຍ ໃນວັນອຸໂປສົດນັ້ນ ບໍ່ເພິ່ງອອກຈາກອາວາດ ຫຼື ສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸໄປສູ່ອາວາດ ຫຼື ສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ແຕ່ເປັນທີ່ຢູ່ຂອງພວກພິກຂຸຜູ້ເປັນນານາສັງວາດ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

## ໑໐໔. ຂັນຕັບພະວານ

### ວ່າດ້ວຍສະຖານທີ່ຄວນໄປໃນວັນອຸໂປສົດ

[໑໘໔] ພິກຂຸທັງຫຼາຍ ໃນວັນອຸໂປສົດນັ້ນ ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ອາວາດທີ່ມີພິກຂຸ ເຊິ່ງເປັນທີ່ຢູ່ຂອງພວກພິກຂຸຜູ້ເປັນສະມານະສັງວາດ ເຊິ່ງຕົນເອງຮູ້ວ່າ "ເຮົາສາມາດໄປເຖິງໃນວັນນີ້

ພິກຂຸທັງຫຼາຍ ໃນວັນອຸໂປສົດນັ້ນ ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ຯລຯ ໄປສູ່ອາວາດ ຫຼື ສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ເຊິ່ງເປັນທີ່ຢູ່ຂອງພວກພິກຂຸຜູ້ເປັນສະມານະສັງວາດ ເຊິ່ງຕົນເອງຮູ້ວ່າ "ເຮົາສາມາດໄປເຖິງໃນວັນນີ້"

ພິກຂຸທັງຫຼາຍ ໃນວັນອຸໂປສົດນັ້ນ ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸໄປສູ່ອາວາດທີ່ມີພິກຂຸ ຯລຯ

ຯລຯ ໄປສູ່ສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ຯລຯ

ຯລຯ ໄປສູ່ອາວາດ ຫຼື ສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ເຊິ່ງເປັນທີ່ຢູ່ຂອງພວກພິກຂຸຜູ້ເປັນສະມານະສັງວາດ ເຊິ່ງຕົນເອງຮູ້ວ່າ "ເຮົາສາມາດໄປເຖິງໃນວັນນີ້

ພິກຂຸທັງຫຼາຍ ໃນວັນອຸໂປສົດນັ້ນ ເພິ່ງອອກຈາກອາວາດ ຫຼື ສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸໄປສູ່ອາວາດທີ່ມີພິກຂຸ ຯລຯ

ຯລຯ ໄປສູ່ສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ຯລຯ

ຯລຯ ໄປສູ່ອາວາດ ຫຼື ສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ເຊິ່ງເປັນທີ່ຢູ່ຂອງພວກພິກຂຸຜູ້ເປັນສະມານະສັງວາດ ເຊິ່ງຕົນເອງຮູ້ວ່າ "ເຮົາສາມາດໄປເຖິງໃນວັນນີ້

# ໑໐໕. ວັດຊະນີຍະປຸກຄະລະສັນທັດສະນາ

## ວ່າດ້ວຍການສະແດງບຸກຄົນທີ່ຄວນເວັ້ນໃນອຸໂປສົດກຳ

[໑໗໓] ພິກຂຸທັງຫຼາຍ ບໍ່ເພິ່ງຍົກປາຕິໂມກຂຶ້ນສະແດງໃນບໍລິສັດທີ່ມີພິກຂຸນີນັ່ງຢູ່ດ້ວຍ ອົງໃດຍົກຂຶ້ນສະແດງ ຕ້ອງອາບັດທຸກກົດ

ຯລຯ ໃນບໍລິສັດທີ່ມີສິກຂະມານານັ່ງຢູ່ດ້ວຍ ຯລຯ
ຯລຯ ໃນບໍລິສັດທີ່ມີສາມະເນນນັ່ງຢູ່ດ້ວຍ ຯລຯ
ຯລຯ ໃນບໍລິສັດທີ່ມີສາມະເນຣີນັ່ງຢູ່ດ້ວຍ ຯລຯ
ຯລຯ ໃນບໍລິສັດທີ່ມີພິກຂຸຜູ້ບອກຄືນສິກຂານັ່ງຢູ່ດ້ວຍ ຯລຯ

ພິກຂຸທັງຫຼາຍ ບໍ່ເພິ່ງຍົກປາຕິໂມກຂຶ້ນສະແດງໃນບໍລິສັດທີ່ມີພິກຂຸຕ້ອງອັນຕິມະວັດຖຸນັ່ງຢູ່ດ້ວຍ ອົງໃດຍົກຂຶ້ນສະແດງ ຕ້ອງອາບັດທຸກກົດ

ພິກຂຸທັງຫຼາຍ ບໍ່ເພິ່ງຍົກປາຕິໂມກຂຶ້ນສະແດງໃນບໍລິສັດທີ່ມີພິກຂຸຖືກສົງລົງອຸກເຂປະນິຍະກຳຍ້ອນບໍ່ເຫັນອາບັດນັ່ງຢູ່ດ້ວຍ ອົງໃດຍົກຂຶ້ນສະແດງ ເພິ່ງປັບອາບັດຕາມທຳ

ຯລຯ ໃນບໍລິສັດທີ່ມີພິກຂຸຖືກສົງລົງອຸກເຂປະນິຍະກຳ ຍ້ອນບໍ່ເຮັດຄືນອາບັດນັ່ງຢູ່ດ້ວຍ ຯລຯ

ພິກຂຸທັງຫຼາຍ ບໍ່ເພິ່ງຍົກປາຕິໂມກຂຶ້ນສະແດງໃນບໍລິສັດທີ່ມີພິກຂຸຖືກສົງລົງອຸກເຂປະນິຍະກຳຍ້ອນບໍ່ສະລະທິດຖິບາບນັ່ງຢູ່ດ້ວຍ ອົງໃດຍົກຂຶ້ນສະແດງ ເພິ່ງປັບອາບັດຕາມທຳ

ພິກຂຸທັງຫຼາຍ ບໍ່ເພິ່ງຍົກປາຕິໂມກຂຶ້ນສະແດງໃນບໍລິສັດທີ່ມີບັນເດາະນັ່ງຢູ່ດ້ວຍ ອົງໃດຍົກຂຶ້ນສະແດງ ຕ້ອງອາບັດທຸກກົດ

ຯລຯ ໃນບໍລິສັດທີ່ມີ ຄົນລັກເພດນັ່ງຢູ່ດ້ວຍ ຯລຯ
ຯລຯ ໃນບໍລິສັດທີ່ມີ ພິກຂຸເຂົ້າຮີດເດຍຣະຖີນັ່ງຢູ່ດ້ວຍ ຯລຯ
ຯລຯ ໃນບໍລິສັດທີ່ມີ ສັດເດຍຣັດສານຢູ່ດ້ວຍ ຯລຯ
ຯລຯ ໃນບໍລິສັດທີ່ມີ ຄົນຂ້າມານດານັ່ງຢູ່ດ້ວຍ ຯລຯ
ຯລຯ ໃນບໍລິສັດທີ່ມີ ຄົນຂ້າບິດານັ່ງຢູ່ດ້ວຍ ຯລຯ
ຯລຯ ໃນບໍລິສັດທີ່ມີ ຄົນຂ້າພຣະອະຣະຫັນນັ່ງຢູ່ດ້ວຍ ຯລຯ
ຯລຯ ໃນບໍລິສັດທີ່ມີ ຄົນປະທຸດສະຮ້າຍພິກຂຸນີນັ່ງຢູ່ດ້ວຍ ຯລຯ
ຯລຯ ໃນບໍລິສັດທີ່ມີ ພິກຂຸຜູ້ທຳລາຍສົງນັ່ງຢູ່ດ້ວຍ ຯລຯ
ຯລຯ ໃນບໍລິສັດທີ່ມີ ຄົນທຳຮ້າຍພຣະສາດສະດາຈົນຫໍ້ພຣະໂລຫິດນັ່ງຢູ່ດ້ວຍ ຯລຯ

ພິກຂຸທັງຫຼາຍ ບໍ່ເພິ່ງຍົກປາຕິໂມກຂຶ້ນສະແດງໃນບໍລິສັດທີ່ມີອຸພະໂຕພະຍັນຊະນະກະນັ່ງຢູ່ດ້ວຍ ອົງໃດຍົກຂຶ້ນສະແດງ ຕ້ອງອາບັດທຸກກົດ

**ເລື້ອງປາຣິວາສິກະປາຣິສຸດທິ**

ພິກຂຸທັງຫຼາຍ ບໍ່ເພິ່ງລົງອຸໂປສົດດ້ວຍການໃຫ້ປາຣິວາສິກະປາຣິສຸດທິ໌ ເວັ້ນແຕ່ບໍລິສັດຍັງບໍ່ລຸກຂຶ້ນ ພິກຂຸທັງຫຼາຍ ອັນໜຶ່ງ ບໍ່ເພິ່ງລົງອຸໂປສົດໃນວັນບໍ່ແມ່ນວັນອຸໂປສົດ ເວັ້ນແຕ່ວັນທີສົງສາມັກຄີ

**ພານະວານທີ ໓ ຈົບ**

**ອຸໂປສະຖະຂັນທະກະ ທີ ໔ ຈົບ**

**ໃນຂັນທະກະນີ້ ມີ ໗໖ ເລື້ອງ**

# ໑໐໖. ລວມເລື້ອງທີ່ມີໃນອຸໂປສົດຂັນທະກະ

ເລື້ອງປະຣິພາຊົກອັນຍະເດຍຣະຖີ ເລື້ອງພຣະເຈົ້າພິມພິສານຈອມທັບມະຄົດຣັດ
ເລື້ອງພິກຂຸປະຊຸມນັ່ງນິ່ງ ເລື້ອງຊົງອະນຸຍາດໃຫ້ກ່າວທຳໃນວັນປະຊຸມ
ເລື້ອງພຣະຜູ້ມີພຣະພາກເຈົ້າຊົງຫຼີບຫຼີກຢູ່ໃນທີ່ສະຫງັດ
ເລື້ອງຍົກພຣະປາຕິໂມກຂຶ້ນສະແດງທຸກວັນ
ເລື້ອງຊົງອະນຸຍາດໃຫ້ຍົກພຣະປາຕິໂມກຂຶ້ນສະແດງປັກລະຄັ້ງ

ເລື້ອງພຣະສັບພັກຄີຍົກພຣະປາຕິໂມກຂຶ້ນສະແດງໃນບໍລິສັດເທົ່າທີ່ມີ
ເລື້ອງຊົງອະນຸຍາດໃຫ້ຍົກພຣະປາຕິໂມກຂຶ້ນສະແດງແກ່ພິກຂຸຜູ້ພ້ອມພຽງກັນ

ເລື້ອງຊົງອະນຸຍາດຄວາມພ້ອມພຽງກຳນົດເຂດອາວາດດຽວ
ເລື້ອງມັດທະກຸດສິມະລິຄະທາຍະວັນ ເລື້ອງຊົງອະນຸຍາດໃຫ້ສົມມຸດສີມາແລະນິມິດສີມາ

ເລື້ອງສົມມຸດສີມາໃຫຍ່ເກີນຂະໜາດ ເລື້ອງສົມມຸດນະທີປາຣະສີມາ
ເລື້ອງຍົກພຣະປາຕິໂມກຂຶ້ນສະແດງຕາມບໍລິເວນວິຫານ
ເລື້ອງສົມມຸດໂຮງອຸໂປສົດ ໔ ບ່ອນໃນອາວາດດຽວກັນ
ເລື້ອງສົມມຸດໂຮງອຸໂປສົດນ້ອຍເກີນໄປ

ເລື້ອງພິກຂຸຜູ້ນະວະກະລົງປະຊຸມກ່ອນ ເລື້ອງນະຄອນຣາຊະຄຶ
ເລື້ອງສົມມຸດແດນບໍ່ຢູ່ປາສະຈາກໄຕຣຈີວອນ

ເລື້ອງສົມມຸດສະມານະສັງວາດສີມາກ່ອນ
ເລື້ອງຖອນສະມານະສັງວາດສີມາພາຍຫຼັງ

ເລື້ອງຄາມະສີມາທີ່ບໍ່ໄດ້ສົມມຸດ ເລື້ອງອຸທະກຸກເຂປະສີມາໃນແມ່ນ້ຳ
ເລື້ອງອຸທະກຸກເຂປະສີມາໃນທະເລ ເລື້ອງອຸທະກຸກເຂປະສີມາໃນຊະຕະສະ
ເລື້ອງສີມາສັງກະກັນ ເລື້ອງສົມມຸດສີມາທັບສີມາ

ເລື້ອງປະເພດແຫ່ງວັນອຸໂປສົດ ເລື້ອງປະເພດການລົງອຸໂປສົດ
ເລື້ອງປະເພດແຫ່ງປາຕິໂມກຂຸດເທດ
ເລື້ອງຊົງອະນຸຍາດໃຫ້ຍົກພຣະປາຕິໂມກຂຶ້ນສະແດງໂດຍຫຍໍ້ເມື່ອຄົນປ່າມາສາລະວົນ

ເລື້ອງອັນຕະລາຍ ໑໐ ປະການ
ເລື້ອງຊົງອະນຸຍາດໃຫ້ພິກຂຸຜູ້ເຖຣະສະແດງທຳໂດຍບໍ່ຕ້ອງໄດ້ຮັບອາຣາດທະນາ
ເລື້ອງຖາມພຣະວິໄນທ່າມກາງສົງຕ້ອງໄດ້ຮັບສົມມຸດກ່ອນ
ເລື້ອງຄຸກຄາມຈະຂ້າ ເລື້ອງພຣະສັບພັກຄີວິສັດຊະນາພຣະວິໄນ

ເລື້ອງໂຈດດ້ວຍອາບັດ ເລື້ອງຂໍໂອກາດກ່ອນໂຈດ
ເລື້ອງຊົງອະນຸຍາດໃຫ້ຄັດຄ້ານກຳທີ່ບໍ່ຊອບທຳ
ເລື້ອງພິກຂຸ ໔-໕ ອົງສະແດງຄວາມເຫັນແຍ້ງ
ເລື້ອງແກ້ງຍົກພຣະປາຕິໂມກຂຶ້ນສະແດງບໍ່ໃຫ້ໄດ້ຍິນ
ເລື້ອງພະຍາຍາມຍົກພຣະປາຕິໂມກຂຶ້ນສະແດງ

ເລື້ອງຍົກພຣະປາຕິໂມກຂຶ້ນສະແດງໃນບໍລິສັດທີ່ມີຄະລິຫັດ
ເລື້ອງຍົກພຣະປາຕິໂມກຂຶ້ນສະແດງໂດຍບໍ່ໄດ້ຮັບອາຣາດທະນາ
ເລື້ອງພິກຂຸຊາວເມືອງໂຈທະນາວັດຖຸບໍ່ຮູ້ຈັກອຸໂປສົດ
ເລື້ອງພິກຂຸຫຼາຍອົງບໍ່ຮູ້ຈັກອຸໂປສົດ ເລື້ອງສົ່ງພິກຂຸໄປຮຽນ
ພຣະປາຕິໂມກຍັງອາວາດໃກ້ຄຽງພໍຈະກັບມາທັນໃນວັນນັ້ນ
ເລື້ອງພິກຂຸຜູ້ນະວະກະບໍ່ຍອມໄປຮຽນພຣະປາຕິໂມກ

ເລື້ອງວິທີການນັບປັກ ເລື້ອງຊົງອະນຸຍາດໃຫ້ນັບພິກຂຸໃນວັນອຸໂປສົດ
ເລື້ອງໄປບິນທະບາດຍັງບ້ານໄກ ເລື້ອງນຶກບໍ່ໄດ້

ເລື້ອງບຸບພະກອນແລະບຸບພະກິດໃນໂຮງອຸໂປສົດ
ເລື້ອງປູອາສະນະແລະໄຕ້ປະທີບເປັນຕົ້ນ ເລື້ອງພິກຂຸຈະໄປໄສຕ້ອງບອກລາກ່ອນ
ເລື້ອງຄວນສົງເຄາະພິກຂຸຜູ້ເປັນພະຫູສູດ

ເລື້ອງສົ່ງພິກຂຸໄປຮຽນພຣະປາຕິໂມກຍັງອາວາດໃກ້ຄຽງພໍຈະກັບມາທັນໃນວັນນັ້ນ ເລື້ອງເຂົ້າພັນສາໃນອາວາດທີ່ມີພິກຂຸພໍຈະຍົກພຣະປາຕິໂມກຂຶ້ນສະແດງໄດ້

ເລື້ອງການລົງອຸໂປສົດ

ເລື້ອງມອບປາຣິສຸດທິ ເລື້ອງເຮັດກຳທີ່ຈະຕ້ອງເຮັດ ເລື້ອງພວກຍາດ

ເລື້ອງພິກຂຸຄັກຄະ ເລື້ອງພິກຂຸ ໔ ອົງ ໓ ອົງ ໒ ອົງ ແລະ ໑ ອົງ ລົງອຸໂປສົດ ໓ ຢ່າງຕາມລຳດັບ

ເລື້ອງສະແດງອາບັດກ່ອນລົງອຸໂປສົດ ເລື້ອງສະແດງສະພາຄາບັດ

ເລື້ອງຣະນຶກອາບັດໄດ້ເມື່ອຍົກພຣະປາຕິໂມກຂຶ້ນສະແດງ

ເລື້ອງສົງທັງໝົດຕ້ອງສະພາຄາບັດແລະບໍ່ແນ່ໃຈ

ເລື້ອງບໍ່ຮູ້ຊື່ແລະໂຄດອາບັດ ເລື້ອງພິກຂຸພະຫູສູດ

ເລື້ອງພິກຂຸມາຫຼາຍກວ່າ ມາເທົ່າກັນ ແລະມາໜ້ອຍກວ່າ

ເລື້ອງບໍລິສັດຍັງບໍ່ທັນລຸກຂຶ້ນ

ເລື້ອງບໍລິສັດລຸກຂຶ້ນບາງສ່ວນ ເລື້ອງບໍລິສັດລຸກຂຶ້ນທັງໝົດ

ເລື້ອງພິກຂຸຮູ້ວ່າຍັງມີພວກພິກຂຸທີ່ຢູ່ໃນອາວາດທີ່ຍັງບໍ່ມາ

ເລື້ອງພິກຂຸບໍ່ແນ່ໃຈວ່າຄວນລົງອຸໂປສົດຫຼືບໍ່

ເລື້ອງພິກຂຸກັງວົນໃຈລົງອຸໂປສົດ ເລື້ອງພິກຂຸທີ່ຢູ່ໃນອາວາດຮູ້ເຫັນ

ໄດ້ຍິນວ່າຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນຢູ່

ເລື້ອງພິກຂຸອາຄັນຕຸກະກັບພິກຂຸທີ່ຢູ່ໃນອາວາດນັບວັນອຸໂປສົດຕ່າງກັນ

ເລື້ອງອາການຂອງພິກຂຸທີ່ຢູ່ໃນອາວາດເປັນຕົ້ນ

ເລື້ອງພິກຂຸອາຄັນຕຸກະເຂົ້າໃຈວ່າພິກຂຸທີ່ຢູ່ໃນອາວາດມີສັງວາດຕ່າງກັນ

ເລື້ອງປາຣິວາສິກະປາຣິສຸດທິ ເລື້ອງລົງອຸໂປສົດໃນວັນບໍ່ແມ່ນວັນອຸໂປສົດ

ຍົກເວັ້ນແຕ່ເປັນວັນທີ່ສົງສາມັກຄີ

ຫົວຂໍ້ທີ່ຈຳແນກເຫຼົ່ານີ້ເປັນຫົວຂໍ້ທີ່ບອກເລື້ອງໆ

**ອຸໂປສົດຂັນທະກະ ຈົບ**

# ໓. ວັດສູປະນາຍິກະຂັນທະກະ

## ໑໐ງ. ວັດສູປະນາຍິການຸຊານະນາ

### ວ່າດ້ວຍຊົງອະນຸຍາດການເຂົ້າຈຳພັນສາ

[໑໘໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ພຣະເວລຸວັນສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາຊະຄຶ ຄັ້ງນັ້ນ ພຣະພຸດທະອົງຍັງບໍ່ໄດ້ຊົງບັນຍັດການເຂົ້າຈຳພັນສາແກ່ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນທ່ຽວຈາຣິກໄປທັງລະດູໜາວ ລະດູຮ້ອນ ແລະລະດູຝົນ ມະນຸດທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງ ພຣະສະມະນະ ເຊື້ອສາຍສາກະຍະບຸດຈຶ່ງໄດ້ທ່ຽວຈາຣິກໄປທັງລະດູໜາວ ລະດູຮ້ອນ ແລະລະດູຝົນ ຢຽບຕົ້ນະຊາດອັນຂຽວສົດ ບຽດບຽນສິ່ງມີຊີວິດເຊິ່ງມີອິນຊີດຽວ ຢຽບສັດນ້ອຍ ໆ ຈຳນວນຫຼາຍໃຫ້ເຖິງຄວາມວອດວາຍແນວນັ້ນນໍ? ພວກອັນຍະເດຍຣະຖີເຫຼົ່ານີ້ ຜູ້ສອນທຳບໍ່ດີ ຍັງຮູ້ຈັກພັກເຊົາຢູ່ບ່ອນໃດບ່ອນໜຶ່ງຕະຫຼອດລະດູຝົນ ແລະພວກຝູງນົກກໍຍັງຮູ້ຈັກເຮັດຮັງເທິງປາຍໄມ້ພັກເຊົາຢູ່ບ່ອນໃດບ່ອນໜຶ່ງໃນລະດູຝົນ ແຕ່ພຣະສະມະນະເຊື້ອສາຍສາກະຍະບຸດເຫຼົ່ານີ້ ພາກັນທ່ຽວຈາຣິກໄປບໍ່ວ່າໃນລະດູໜາວ ລະດູຮ້ອນ ແລະລະດູຝົນ ຢຽບຕົ້ນະຊາດອັນຂຽວສົດ ບຽດບຽນສິ່ງມີຊີວິດເຊິ່ງມີອິນຊີດຽວ ຢຽບສັດນ້ອຍ ໆ ຈຳນວນຫຼາຍ ໃຫ້ເຖິງຄວາມວອດວາຍໄປ”

ພິກຂຸທັງຫຼາຍ ໄດ້ຍິນມະນຸດເຫຼົ່ານັ້ນຕຳໜິ ປະນາມ ໂພນທະນາ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸທັງຫຼາຍເຂົ້າຈຳພັນສາ”

### ເລື້ອງຊົງອະນຸຍາດໃຫ້ພິກຂຸເຂົ້າຈຳພັນສາໃນລະດູຝົນ

ຄັ້ງນັ້ນ ພິກຂຸທັງຫຼາຍ ໄດ້ປຶກສາກັນດັ່ງນີ້ວ່າ “ພວກເຮົາຈະເພິ່ງເຂົ້າພັນສາເມື່ອໃດນໍ” ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍເຮົາອະນຸຍາດໃຫ້ເຂົ້າຈຳພັນສາໃນລະດູຝົນ”

### ເລື້ອງປະເພດແຫ່ງວັນເຂົ້າພັນສາ

ຄັ້ງນັ້ນ ພິກຂຸທັງຫຼາຍໄດ້ປຶກສາກັນດັ່ງນີ້ວ່າ “ວັນເຂົ້າພັນສາມີທີ່ໃດນໍ” ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ວັນເຂົ້າພັນສານີ້ມີ ໔ ວັນ ຄື ວັນເຂົ້າພັນສາຕົ້ນ ໑ ວັນເຂົ້າພັນສາຫຼັງ ໑ ເມື່ອພຣະຈັນເພັງສະເຫວີຍເລີກອາສາລະຫະລ່ວງໄປ ແລ້ວວັນໜຶ່ງ ເພິ່ງເຂົ້າຈຳພັນສາຕົ້ນ ເມື່ອພຣະຈັນເພັນສະເຫວີຍເລີກອາສາລະຫະລ່ວງໄປແລ້ວເດືອນໜຶ່ງ ເພິ່ງເຂົ້າຈຳພັນສາຫຼັງ ພິກຂຸທັງຫຼາຍ ວັນເຂົ້າພັນສາມີ ໔ ວັນເຫຼົ່ານີ້ແລ"

# ໑໐໗. ວັດສານະຈາຣິກາປະຕິກະເຂປາທິ

## ວ່າດ້ວຍຊົງຫ້າມທ່ຽວຈາຣິກໃນລະຫວ່າງພັນສາເປັນຕົ້ນ

## ເລື້ອງພຣະສັບພັກຄີທ່ຽວຈາຣິກໃນລະຫວ່າງພັນສາ

[໑໗໔] ສະໄໝນັ້ນ ພວກພິກຂຸສັບພັກຄີເຂົ້າຈຳພັນສາແລ້ວກໍຍັງທ່ຽວຈາຣິກໄປໃນລະຫວ່າງພັນສາ ມະນຸດທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພຣະສະມະນະ ເຊື້ອສາຍສາກະຍະບຸດຈຶ່ງໄດ້ທ່ຽວຈາຣິກໄປທັງລະດູໜາວ ລະດູຮ້ອນ ແລະລະດູຝົນ ຢຽບຕິນະຊາດອັນຂຽວສົດ ບຽດບຽນສິ່ງມີຊີວິດເຊິ່ງມີອິນຊີດຽວ ຢຽບສັດນ້ອຍ ໆ ຈຳນວນຫຼາຍໃຫ້ເຖິງຄວາມວອດວາຍແນວນັ້ນນໍ? ພວກອັນຍະເດຍຣະຖີເຫຼົ່ານີ້ ຜູ້ສອນທຳບໍ່ດີ ຍັງຮູ້ຈັກພັກເຊົາຢູ່ບ່ອນໃດບ່ອນໜຶ່ງຕະຫຼອດລະດູຝົນ ແລະພວກຝູງນົກກໍຍັງຮູ້ຈັກເຮັດຮັງເທິງປາຍໄມ້ພັກເຊົາຢູ່ບ່ອນໃດບ່ອນໜຶ່ງໃນລະດູຝົນ ແຕ່ພຣະສະມະນະເຊື້ອສາຍສາກະຍະບຸດເຫຼົ່ານີ້ ພາກັນທ່ຽວຈາຣິກໄປບໍ່ວ່າໃນລະດູໜາວ ລະດູຮ້ອນ ແລະລະດູຝົນ ຢຽບຕິນະຊາດອັນຂຽວສົດ ບຽດບຽນສິ່ງມີຊີວິດເຊິ່ງມີອິນຊີດຽວ ຢຽບສັດນ້ອຍ ໆ ຈຳນວນຫຼາຍ ໃຫ້ເຖິງຄວາມວອດວາຍໄປ"

ພິກຂຸທັງຫຼາຍໄດ້ຍິນມະນຸດເຫຼົ່ານັ້ນຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີເຂົ້າຈຳພັນສາແລ້ວຈຶ່ງໄດ້ທ່ຽວຈາຣິກໄປໃນລະຫວ່າງພັນສານໍ" ແລ້ວນຳເລື້ອງນີ້ໄປຂາບທູນ ພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸເຂົ້າຈຳພັນສາແລ້ວຕ້ອງຢູ່ຈຳໃຫ້ໄດ້ຕະຫຼອດ ໓ ເດືອນ ພັນສາຕົ້ນ ຫຼື ໓ ເດືອນພັນສາຫຼັງ ບໍ່ເພິ່ງຫຼີກຈາຣິກໄປ ອົງໃດຫຼີກໄປ ຕ້ອງອາບັດທຸກກົດ"

## ເລື້ອງປັບອາບັດທຸກກົດແກ່ພິກຂຸຜູ້ບໍ່ເຂົ້າພັນສາ

[໑໗໕] ສະໄໝນັ້ນ ພວກພິກຂຸສັບພັກຄີບໍ່ຕ້ອງການຈະເຂົ້າຈຳພັນສາ ພິກຂຸທັງຫຼາຍ ຈຶ່ງ

ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸຈະບໍ່ເຂົ້າຈຳພັນສາບໍ່ໄດ້ ອົງໃດບໍ່ເຂົ້າຈຳພັນສາ ຕ້ອງອາບັດທຸກກົດ"

## ເລື້ອງຈົງໃຈຍ່າງຜ່ານອາວາດ

ສະໄໝນັ້ນ ພວກພິກຂຸສັບພັກຄີບໍ່ຕ້ອງການຈະເຂົ້າຈຳພັນສາໃນວັນເຂົ້າພັນສານັ້ນ ຈົງໃຈຍ່າງຜ່ານອາວາດໄປ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸຜູ້ບໍ່ຕ້ອງການຈະເຂົ້າຈຳພັນສາໃນວັນເຂົ້າພັນສານັ້ນ ບໍ່ເພິ່ງຈົງໃຈຍ່າງຜ່ານອາວາດໄປ ອົງໃດຍ່າງຜ່ານໄປ ຕ້ອງອາບັດທຸກກົດ"

## ເລື້ອງການເລື່ອນການຝົນ

ສະໄໝນັ້ນ ພຣະເຈົ້າພິມພິສານຈອມທັບແຫ່ງມະຄົດຣັດມີພຣະຣາດປະສົງຈະຊົງເລື່ອນວັນເຂົ້າພັນສາອອກໄປ ຈຶ່ງຊົງສົ່ງທູດໄປໃນສຳນັກພິກຂຸທັງຫຼາຍວ່າ "ຖ້າຈັ່ງໃດແລ້ວ ຂໍພິກຂຸທັງຫຼາຍເພິ່ງເຂົ້າຈຳພັນສາໃນຊຸນຫະປັກທີ່ຈະມາເຖິງ" ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ເຮັດຕາມພຣະຣາຊາ"

# ໑໐໙. ສັດຕາຫະກະຣະນີຍານຸຊານະນາ

## ວ່າດ້ວຍຊົງອະນຸຍາດສັດຕາຫະກະຣະນີຍະເມື່ອເຂົາສ້າງວິຫານຖວາຍເປັນຕົ້ນ

## ເລື້ອງອຸປາສົກສ້າງວິຫານເປັນຕົ້ນຖວາຍ

[໑໘໗] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນນະຄອນຣາຊະຄຶຕາມພຣະອັດທະຍາໄສ ແລ້ວໄດ້ສະເດັດຈາຣິກໄປທາງນະຄອນສາວັດຖີ ສະເດັດຈາຣິກໄປໂດຍລຳດັບ ຈົນເຖິງນະຄອນສາວັດຖີ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະຄະຫະບໍດີ ໃນນະຄອນສາວັດຖີນັ້ນ

ສະໄໝນັ້ນ ອຸປາສົກຊື່ອຸເທນໄດ້ສ້າງວິຫານຖວາຍອຸທິດສົງ ໃນແຄວັນໂກສົນແລ້ວສົ່ງທູດໄປໃນສຳນັກພິກຂຸທັງຫຼາຍວ່າ "ຂໍອາຣາດທະນາພິກຂຸທັງຫຼາຍມາ ຂ້າພະເຈົ້າປາຖະໜາຈະຖວາຍທານ ຟັງທຳ ແລະເຫັນພິກຂຸທັງຫຼາຍ"

ພິກຂຸທັງຫຼາຍຕອບໄປວ່າ "ທ່ານ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ວ່າ ພິກຂຸເຂົ້າ ຈຳ

ພັນສາແລ້ວຕ້ອງຢູ່ໃຫ້ຕະຫຼອດ ໓ ເດືອນພັນສາຕົ້ນ ຫຼື ໓ ເດືອນພັນສາຫຼັງ ບໍ່ເພິ່ງຫຼີກໄປ ຂໍທ່ານອຸເທນຈົ່ງຖ້າຈົນກວ່າພິກຂຸຢູ່ຈຳພັນສາແລ້ວຈັກມາ ແຕ່ຖ້າທ່ານມີວຽກຈຳເປັນຮີບດ່ວນຕ້ອງເຮັດ ກໍຂໍໃຫ້ຖວາຍວິຫານໄວ້ໃນສຳນັກພິກຂຸທີ່ຢູ່ໃນອາວາດ ໃນແຄວ້ນໂກສົນນັ້ນເທີ້ນ"

ອຸປາສົກອຸເທນຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ເມື່ອເຮົາສົ່ງທູດໄປແລ້ວພິກຂຸທັງຫຼາຍຈຶ່ງບໍ່ມານໍ ເຮົາກໍເປັນທາຍົກ ເປັນຜູ້ສ້າງ ເປັນຜູ້ບຳລຸງພຣະສົງຄືກັນບໍ່ແມ່ນບໍ?"

ພິກຂຸທັງຫຼາຍ ໄດ້ຍິນອຸປາສົກອຸເທນຕຳໜິ ປະນາມ ໂພນທະນາ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເມື່ອບຸກຄົນ ໗ ຈຳພວກຄື ພິກຂຸ ພິກຂຸນີ ສິກຂະມານາສາມະເນນ ສາມະເນຣີ ອຸປາສົກ ອຸປາສິກາ ສົ່ງທູດມາ ເຮົາອະນຸຍາດໃຫ້ໄປດ້ວຍການສັດຕາຫະກະຣະນີຍະໄດ້ ແຕ່ເມື່ອພວກເຂົາບໍ່ສົ່ງທູດມາ ເຮົາບໍ່ອະນຸຍາດໃຫ້ໄປ ພິກຂຸທັງຫຼາຍເມື່ອບຸກຄົນ ໗ ຈຳພວກເຫຼົ່ານີ້ ສົ່ງທູດມາ ເຮົາອະນຸຍາດໃຫ້ໄປດ້ວຍສັດຕາຫະກະຣະນີຍະໄດ້ແຕ່ເມື່ອພວກເຂົາບໍ່ສົ່ງທູດມາ ເຮົາບໍ່ອະນຸຍາດ (ເມື່ອໄປດ້ວຍສັດຕາຫະກະຣະນີຍະ) ເພິ່ງກັບມາພາຍໃນ ໗ ວັນ"

[໑໗໗] ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ອຸປາສົກໄດ້ສ້າງວິຫານຖວາຍອຸທິດສົງ ຖ້າເຂົາສົ່ງທູດໄປໃນສຳນັກພິກຂຸທັງຫຼາຍວ່າ "ຂໍອາຣາດທະນາພິກຂຸທັງຫຼາຍມາ ຂ້າພະເຈົ້າປາຖະໜາຈະຖວາຍທານ ຟັງທຳ ແລະເຫັນພິກຂຸທັງຫຼາຍ" ເມື່ອເຂົາສົ່ງທູດມາ ເພິ່ງໄປດ້ວຍສັດຕາຫະກະຣະນີຍະໄດ້ ແຕ່ເມື່ອເຂົາບໍ່ສົ່ງທູດມາ ບໍ່ເພິ່ງໄປ (ເມື່ອໄປດ້ວຍສັດຕາຫະກະຣະນີຍະ) ເພິ່ງກັບມາພາຍໃນ ໗ ວັນ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ອຸປາສົກໄດ້ສ້າງເຮືອນມຸງແຖບດຽວຖວາຍອຸທິດສົງ ฯລฯ

| | | | |
|---|---|---|---|
| ฯລฯ ໄດ້ສ້າງຜາສາດ | ฯລฯ | ฯລฯ ໄດ້ສ້າງເຮືອນໂລ້ນ | ฯລฯ |
| ฯລฯ ໄດ້ສ້າງຖ້ຳ | ฯລฯ | ฯລฯ ໄດ້ສ້າງບໍລິເວນ | ฯລฯ |
| ฯລฯ ໄດ້ສ້າງຊຸ້ມ | ฯລฯ | ฯລฯ ໄດ້ສ້າງໂຮງສັນ | ฯລฯ |
| ฯລฯ ໄດ້ສ້າງໂຮງໄຟ | ฯລฯ | ฯລฯ ໄດ້ສ້າງກັບປິຍະກຸຕິ | ฯລฯ |
| ฯລฯ ໄດ້ສ້າງວັດຈະກຸຕິ | ฯລฯ | ฯລฯ ໄດ້ສ້າງທີ່ຈົງກົມ | ฯລฯ |
| ฯລฯ ໄດ້ສ້າງໂຮງຈົງກົມ | ฯລฯ | ฯລฯ ໄດ້ສ້າງບໍ່ນ້ຳ | ฯລฯ |
| ฯລฯ ໄດ້ສ້າງໂຮງບໍ່ນ້ຳ | ฯລฯ | ฯລฯ ໄດ້ສ້າງເຮືອນໄຟ | ฯລฯ |
| ฯລฯ ໄດ້ສ້າງໂຮງເຮືອນໄຟ | ฯລฯ | ฯລฯ ໄດ້ສ້າງສະໂບກຂະຣະນີ | ฯລฯ |

ຯລຯ ໄດ້ສ້າງມົນດົບ ຯລຯ ຯລຯ ໄດ້ສ້າງອາຣາມ ຯລຯ
ຯລຯ ໄດ້ສ້າງອາຣາມວັດຖຸ

ຖ້າເຂົາສົ່ງທູດໄປໃນສຳນັກພິກຂຸທັງຫຼາຍວ່າ "ຂໍອາຣາດທະນາພິກຂຸທັງຫຼາຍມາ ຂ້າພະເຈົ້າປາຖະໜາຈະຖວາຍທານ ຟັງທຳ ແລະເຫັນພິກຂຸທັງຫຼາຍ" ພິກຂຸທັງຫຼາຍ ເມື່ອເຂົາສົ່ງທູດມາ ເພິ່ງໄປດ້ວຍສັດຕາຫະກະຣະນີຍະໄດ້ ແຕ່ເມື່ອເຂົາບໍ່ສົ່ງທູດມາ ບໍ່ເພິ່ງໄປ (ເມື່ອໄປດ້ວຍສັດຕາຫະກະຣະນີຍະ) ເພິ່ງກັບມາພາຍໃນ ໗ ວັນ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ອຸປາສົກໄດ້ສ້າງວິຫານຖວາຍອຸທິດພິກຂຸຫຼາຍອົງ ໄດ້ສ້າງວິຫານອຸທິດພິກຂຸອົງໜຶ່ງ ຯລຯ

ຯລຯ ໄດ້ສ້າງເຮືອນມຸງແຖວດຽວ ຯລຯ ຯລຯ ໄດ້ສ້າງຜາສາດ ຯລຯ
ຯລຯ ໄດ້ສ້າງເຮືອນໂລ້ນ ຯລຯ ຯລຯ ໄດ້ສ້າງຖ້ຳ ຯລຯ
ຯລຯ ໄດ້ສ້າງບໍລິເວນ ຯລຯ ຯລຯ ໄດ້ສ້າງຊຸ້ມ ຯລຯ
ຯລຯ ໄດ້ສ້າງໂຮງສັນ ຯລຯ ຯລຯ ໄດ້ສ້າງໂຮງໄຟ ຯລຯ
ຯລຯ ໄດ້ສ້າງກັບປິຍະກຸຕິ ຯລຯ ຯລຯ ໄດ້ສ້າງວັດກຸຕິ ຯລຯ
ຯລຯ ໄດ້ສ້າງທີ່ຈົງກົມ ຯລຯ ຯລຯ ໄດ້ສ້າງໂຮງຈົງກົມ ຯລຯ
ຯລຯ ໄດ້ສ້າງບໍ່ນ້ຳ ຯລຯ ຯລຯ ໄດ້ສ້າງໂຮງບໍ່ນ້ຳ ຯລຯ
ຯລຯ ໄດ້ສ້າງເຮືອນໄຟ ຯລຯ ຯລຯ ໄດ້ສ້າງໂຮງເຮືອນໄຟ ຯລຯ
ຯລຯ ໄດ້ສ້າງສະໂບກຂະຣະນີ ຯລຯ ຯລຯ ໄດ້ສ້າງມົນດົບ ຯລຯ
ຯລຯ ໄດ້ສ້າງອາຣາມ ຯລຯ ຯລຯ ໄດ້ສ້າງອາຣາມວັດຖຸ ຯລຯ

ຖ້າເຂົາສົ່ງທູດໄປໃນສຳນັກພິກຂຸທັງຫຼາຍວ່າ "ຂໍອາຣາດທະນາພິກຂຸທັງຫຼາຍມາ ຂ້າພະເຈົ້າປາຖະໜາຈະຖວາຍທານ ຟັງທຳ ແລະເຫັນພິກຂຸທັງຫຼາຍ" ພິກຂຸທັງຫຼາຍ ເມື່ອເຂົາສົ່ງທູດມາ ເພິ່ງໄປດ້ວຍສັດຕາຫະກະຣະນີຍະໄດ້ ແຕ່ເມື່ອເຂົາບໍ່ສົ່ງທູດມາ ບໍ່ເພິ່ງໄປ (ເມື່ອໄປດ້ວຍສັດຕາຫະກະຣະນີຍະ) ເພິ່ງກັບມາພາຍໃນ ໗ ວັນ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ອຸປາສົກໄດ້ສ້າງວິຫານຖວາຍອຸທິດພິກຂຸນີສົງ ຯລຯ ອຸທິດພິກຂຸນີຫຼາຍອົງ ຯລຯ ອຸທິດພິກຂຸນີອົງດຽວ ຯລຯ ອຸທິດສິກຂະມານາຫຼາຍອົງ ຯລຯ ອຸທິດສິກຂະມານາອົງດຽວ ຯລຯ ອຸທິດສາມະເນນຫຼາຍອົງ ຯລຯ ອຸທິດສາມະເນນອົງດຽວ ຯລຯ ອຸທິດສາມະເນຣີຫຼາຍອົງ ຯລຯ ອຸທິດສາມະເນຣີອົງດຽວ ຯລຯ

ຯລຯ ໄດ້ສ້າງເຮືອນມຸງແຖວດຽວ ຯລຯ ຯລຯ ໄດ້ສ້າງຜາສາດ ຯລຯ
ຯລຯ ໄດ້ສ້າງເຮືອນໂລ້ນ ຯລຯ ຯລຯ ໄດ້ສ້າງຖ້ຳ ຯລຯ

ຯລຯ ໄດ້ສ້າງບໍລິເວນ ຯລຯ ຯລຯ ໄດ້ສ້າງຊຸ້ມ ຯລຯ
ຯລຯ ໄດ້ສ້າງໂຮງສັນ ຯລຯ ຯລຯ ໄດ້ສ້າງໂຮງໄຟ ຯລຯ
ຯລຯ ໄດ້ສ້າງກັບປິຍະກຸຕິ ຯລຯ ຯລຯ ໄດ້ສ້າງວັດກຸຕິ ຯລຯ
ຯລຯ ໄດ້ສ້າງທີ່ຈົງກົມ ຯລຯ ຯລຯ ໄດ້ສ້າງໂຮງຈົງກົມ ຯລຯ
ຯລຯ ໄດ້ສ້າງບໍ່ນ້ຳ ຯລຯ ຯລຯ ໄດ້ສ້າງໂຮງບໍ່ນ້ຳ ຯລຯ
ຯລຯ ໄດ້ສ້າງເຮືອນໄຟ ຯລຯ ຯລຯ ໄດ້ສ້າງໂຮງເຮືອນໄຟ ຯລຯ
ຯລຯ ໄດ້ສ້າງສະໂບກຂະຣະນີ ຯລຯ ຯລຯ ໄດ້ສ້າງມົນດົບ ຯລຯ
ຯລຯ ໄດ້ສ້າງອາຣາມ ຯລຯ ຯລຯ ໄດ້ສ້າງອາຣາມວັດຖຸ ຯລຯ

ຖ້າເຂົາສົ່ງທູດໄປໃນສຳນັກພິກຂຸທັງຫຼາຍວ່າ "ຂໍອາຣາດທະນາພິກຂຸທັງຫຼາຍມາ ຂ້າພະເຈົ້າປາຖະໜາຈະຖວາຍທານ ຟັງທຳ ແລະເຫັນພິກຂຸທັງຫຼາຍ" ພິກຂຸທັງຫຼາຍ ເມື່ອເຂົາສົ່ງທູດມາ ເພິ່ງໄປດ້ວຍສັດຕາຫະກະຣະນີຍະໄດ້ ແຕ່ເມື່ອເຂົາບໍ່ສົ່ງທູດມາ ບໍ່ເພິ່ງໄປ (ເມື່ອໄປດ້ວຍສັດຕາຫະກະຣະນີຍະ) ເພິ່ງກັບມາພາຍໃນ ໗ ວັນ

[໑໗໙] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ອຸປາສົກໄດ້ສ້າງທີ່ຢູ່ອາໄສເພື່ອປະໂຫຍດແກ່ຕົນ ຯລຯ

ຯລຯ ໄດ້ສ້າງເຮືອນນອນ ຯລຯ ຯລຯ ໄດ້ສ້າງໂຮງເກັບຂອງ ຯລຯ
ຯລຯ ໄດ້ສ້າງຮ້ານ ຯລຯ ຯລຯ ໄດ້ສ້າງໂຮງມົນ ຯລຯ
ຯລຯ ໄດ້ສ້າງຮ້ານຄ້າ ຯລຯ ຯລຯ ໄດ້ສ້າງໂຮງຮ້ານຄ້າ ຯລຯ
ຯລຯ ໄດ້ສ້າງຜາສາດ ຯລຯ ຯລຯ ໄດ້ສ້າງເຮືອນໂລ້ນ ຯລຯ
ຯລຯ ໄດ້ສ້າງຖ້ຳ ຯລຯ ຯລຯ ໄດ້ສ້າງບໍລິເວນ ຯລຯ
ຯລຯ ໄດ້ສ້າງຊຸ້ມ ຯລຯ ຯລຯ ໄດ້ສ້າງໂຮງສັນ ຯລຯ
ຯລຯ ໄດ້ສ້າງໂຮງໄຟ ຯລຯ ຯລຯ ໄດ້ສ້າງໂຮງຄົວ ຯລຯ
ຯລຯ ໄດ້ສ້າງທີ່ຈົງກົມ ຯລຯ ຯລຯ ໄດ້ສ້າງໂຮງຈົງກົມ ຯລຯ
ຯລຯ ໄດ້ສ້າງບໍ່ນ້ຳ ຯລຯ ຯລຯ ໄດ້ສ້າງໂຮງບໍ່ນ້ຳ ຯລຯ
ຯລຯ ໄດ້ສ້າງເຮືອນໄຟ ຯລຯ ຯລຯ ໄດ້ສ້າງສະໂບກຂະຣະນີ ຯລຯ
ຯລຯ ໄດ້ສ້າງມົນດົບ ຯລຯ ຯລຯ ໄດ້ສ້າງອາຣາມ ຯລຯ
ຯລຯ ໄດ້ສ້າງອາຣາມວັດຖຸ ຯລຯ

ເຂົາມີງານມຸງຄຸນສົມຣົດຂອງບຸດ ຫຼື ຂອງທິດາ ເຂົາເປັນໄຂ້ ຫຼື ຈະກ່າວພຣະສູດເຊິ່ງເປັນທີ່ຮູ້ຈັກກັນໂດຍທົ່ວໄປກໍດີ ຖ້າເຂົາສົ່ງທູດໄປໃນສຳນັກພິກຂຸທັງຫຼາຍວ່າ "ຂໍອາຣາດທະນາພິກຂຸທັງຫຼາຍມາ ຈະໄດ້ຮ່ຳຮຽນພຣະສູດນີ້ກ່ອນທີ່ພຣະສູດຈະເລື່ອນໄປ" ກໍ ຫຼື ວ່າ ເຂົາມີກິດ ຫຼື

ທຸລະຈຳເປັນແນວໃດແນວໜຶ່ງ ຖ້າເຂົາສົ່ງທູດໄປໃນສຳນັກພິກຂຸທັງຫຼາຍວ່າ "ຂໍອາຣາດທະນາພິກຂຸທັງຫຼາຍມາ ຂ້າພະເຈົ້າປາຖະໜາຈະຖວາຍທານ ຟັງທຳ ແລະເຫັນພິກຂຸທັງຫຼາຍ" ພິກຂຸທັງຫຼາຍ ເມື່ອເຂົາສົ່ງທູດມາ ເພິ່ງໄປດ້ວຍສັດຕາຫະກະຣະນີຍະໄດ້ ແຕ່ເມື່ອເຂົາບໍ່ສົ່ງທູດມາ ບໍ່ເພິ່ງໄປ (ເມື່ອໄປດ້ວຍສັດຕາຫະກະຣະນີຍະ) ເພິ່ງກັບມາພາຍໃນ ໗ ວັນ

[໑໙໐] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ອຸປາສິກາໄດ້ສ້າງວິຫານຖວາຍອຸທິດສົງ ຖ້ານາງສົ່ງທູດໄປໃນສຳນັກພິກຂຸທັງຫຼາຍວ່າ "ຂໍອາຣາດທະນາພິກຂຸທັງຫຼາຍມາ ຂ້ານ້ອຍປາຖະໜາຈະຖວາຍທານ ຟັງທຳ ແລະເຫັນພິກຂຸທັງຫຼາຍ" ເມື່ອນາງສົ່ງທູດມາ ເພິ່ງໄປດ້ວຍສັດຕາຫະກະຣະນີຍະໄດ້ ແຕ່ເມື່ອນາງບໍ່ສົ່ງທູດມາ ບໍ່ເພິ່ງໄປ (ເມື່ອໄປດ້ວຍສັດຕາຫະກະຣະນີຍະ) ເພິ່ງກັບມາພາຍໃນ ໗ ວັນ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ອຸປາສິກາໄດ້ສ້າງເຮືອນມຸງແຖບດຽວຖວາຍອຸທິດສົງ ຯລຯ

ຯລຯ ໄດ້ສ້າງຜາສາດ ຯລຯ ຯລຯ ໄດ້ສ້າງເຮືອນໂລ້ນ ຯລຯ
ຯລຯ ໄດ້ສ້າງຖ້ຳ ຯລຯ ຯລຯ ໄດ້ສ້າງບໍລິເວນ ຯລຯ
ຯລຯ ໄດ້ສ້າງຊຸ້ມ ຯລຯ ຯລຯ ໄດ້ສ້າງໂຮງສັນ ຯລຯ
ຯລຯ ໄດ້ສ້າງໂຮງໄຟ ຯລຯ ຯລຯ ໄດ້ສ້າງກັບປິຍະກຸຕິ ຯລຯ
ຯລຯ ໄດ້ສ້າງວັດກຸຕິ ຯລຯ ຯລຯ ໄດ້ສ້າງທີ່ຈົງກົມ ຯລຯ
ຯລຯ ໄດ້ສ້າງໂຮງຈົງກົມ ຯລຯ ຯລຯ ໄດ້ສ້າງບໍ່ນ້ຳ ຯລຯ
ຯລຯ ໄດ້ສ້າງໂຮງບໍ່ນ້ຳ ຯລຯ ຯລຯ ໄດ້ສ້າງເຮືອນໄຟ ຯລຯ
ຯລຯ ໄດ້ສ້າງໂຮງເຮືອນໄຟ ຯລຯ ຯລຯ ໄດ້ສ້າງສະໂບກຂະຣະນີ ຯລຯ
ຯລຯ ໄດ້ສ້າງມົນດົບ ຯລຯ ຯລຯ ໄດ້ສ້າງອາຣາມ ຯລຯ
ຯລຯ ໄດ້ສ້າງອາຣາມວັດຖຸ ຯລຯ

ຖ້ານາງສົ່ງທູດໄປໃນສຳນັກພິກຂຸທັງຫຼາຍວ່າ "ຂໍອາຣາດທະນາພິກຂຸທັງຫຼາຍມາ ຂ້ານ້ອຍປາຖະໜາຈະຖວາຍທານ ຟັງທຳ ແລະເຫັນພິກຂຸທັງຫຼາຍ" ພິກຂຸທັງຫຼາຍ ເມື່ອນາງສົ່ງທູດມາ ເພິ່ງໄປດ້ວຍສັດຕາຫະກະຣະນີຍະໄດ້ ແຕ່ເມື່ອນາງບໍ່ສົ່ງທູດມາ ບໍ່ເພິ່ງໄປ (ເມື່ອໄປດ້ວຍສັດຕາຫະກະຣະນີຍະ) ເພິ່ງກັບມາພາຍໃນ ໗ ວັນ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ອຸປາສິກາໄດ້ສ້າງວິຫານຖວາຍອຸທິດພິກຂຸຫຼາຍອົງ ຯລຯ

ຯລຯ ອຸທິດພິກຂຸອົງດຽວ ຯລຯ ຯລຯ ອຸທິດພິກຂຸນີສົງ ຯລຯ
ຯລຯ ອຸທິດພິກຂຸນີຫຼາຍອົງ ຯລຯ ຯລຯ ອຸທິດພິກຂຸນີອົງດຽວ ຯລຯ

ฯลฯ ອຸທິດສິກຂະມານາຫຼາຍອົງ ฯลฯ ฯลฯ ອຸທິດສິກຂະມານາອົງດຽວ ฯลฯ

ฯลฯ ອຸທິດສາມະເນນຫຼາຍອົງ ฯลฯ ฯลฯ ອຸທິດສາມະເນນອົງດຽວ ฯลฯ

ฯลฯ ອຸທິດສາມະເນຣີຫຼາຍອົງ ฯลฯ ฯลฯ ອຸທິດສາມະເນຣີອົງດຽວ ฯลฯ

[໑໗໑] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ອຸປາສິກາໄດ້ສ້າງທີ່ຢູ່ອາໄສເພື່ອປະໂຫຍດແກ່ຕົນ ฯลฯ

ฯลฯ ໄດ້ສ້າງເຮືອນນອນ ฯลฯ ฯลฯ ໄດ້ສ້າງໂຮງເກັບຂອງ ฯลฯ

ฯลฯ ໄດ້ສ້າງຮ້ານ ฯลฯ ฯลฯ ໄດ້ສ້າງໂຮງມົນ ฯลฯ

ฯลฯ ໄດ້ສ້າງຮ້ານຄ້າ ฯลฯ ฯลฯ ໄດ້ສ້າງໂຮງຮ້ານຄ້າ ฯลฯ

ฯลฯ ໄດ້ສ້າງຜາສາດ ฯลฯ ฯลฯ ໄດ້ສ້າງເຮືອນໂລ້ນ ฯลฯ

ฯลฯ ໄດ້ສ້າງຖ້ຳ ฯลฯ ฯลฯ ໄດ້ສ້າງບໍລິເວນ ฯลฯ

ฯลฯ ໄດ້ສ້າງຊຸ້ມ ฯลฯ ฯลฯ ໄດ້ສ້າງໂຮງສັນ ฯลฯ

ฯลฯ ໄດ້ສ້າງໂຮງໄຟ ฯลฯ ฯลฯ ໄດ້ສ້າງໂຮງຄົວ ฯลฯ

ฯลฯ ໄດ້ສ້າງທີ່ຈົງກົມ ฯลฯ ฯลฯ ໄດ້ສ້າງໂຮງຈົງກົມ ฯลฯ

ฯลฯ ໄດ້ສ້າງບໍ່ນ້ຳ ฯลฯ ฯลฯ ໄດ້ສ້າງໂຮງບໍ່ນ້ຳ ฯลฯ

ฯลฯ ໄດ້ສ້າງເຮືອນໄຟ ฯลฯ ฯลฯ ໄດ້ສ້າງສະໂບກຂະຣະນີ ฯลฯ

ฯลฯ ໄດ້ສ້າງມົນດົບ ฯลฯ ฯลฯ ໄດ້ສ້າງອາຮາມ ฯลฯ

ฯลฯ ໄດ້ສ້າງອາຮາມວັດຖຸ ฯลฯ

ນາງມີງານມຸງຄຸນສົມຣົດຂອງບຸດ ຫຼື ຂອງທິດາ ນາງເປັນໄຂ້ ຫຼື ຈະກ່າວພຣະສູດເຊິ່ງເປັນທີ່ຮູ້ຈັກກັນໂດຍທົ່ວໄປກໍດີ ຖ້ານາງສົ່ງທູດໄປໃນສຳນັກພິກຂຸທັງຫຼາຍວ່າ "ຂໍອາຣາດທະນາພິກຂຸທັງຫຼາຍມາ ຈະໄດ້ຮ່ຳຮຽນພຣະສູດນີ້ກ່ອນທີ່ພຣະສູດຈະເລື່ອນໄປ" ກໍ ຫຼື ວ່ານາງມີກິດ ຫຼື ທຸລະຈຳເປັນແນວໃດແນວໜຶ່ງ ຖ້ານາງສົ່ງທູດໄປໃນສຳນັກພິກຂຸທັງຫຼາຍວ່າ "ຂໍອາຣາດທະນາພິກຂຸທັງຫຼາຍມາ ຂ້ານ້ອຍປາຖະໜາຈະຖວາຍທານ ຟັງທຳແລະ ເຫັນພິກຂຸທັງຫຼາຍ" ພິກຂຸທັງຫຼາຍ ເມື່ອນາງສົ່ງທູດມາ ເພິ່ງໄປດ້ວຍສັດຕາຫະກະຣະນີຍະໄດ້ ແຕ່ເມື່ອນາງບໍ່ສົ່ງທູດມາ ບໍ່ເພິ່ງໄປ (ເມື່ອໄປດ້ວຍສັດຕາຫະກະຣະນີຍະ) ເພິ່ງກັບມາພາຍໃນ ໗ ວັນ

[໑໗໘] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸໃນທຳວິໄນນີ້ໄດ້ສ້າງວິຫານຖວາຍອຸທິດສົງ ฯลฯ ພິກຂຸນີໄດ້ສ້າງວິຫານຖວາຍອຸທິດສົງ ฯลฯ ສິກຂະມານາໄດ້ສ້າງວິຫານຖວາຍອຸທິດສົງ ฯลฯ ສາມະເນນໄດ້ສ້າງວິຫານຖວາຍອຸທິດສົງ ฯลฯ ສາມະເນຣີໄດ້ສ້າງວິຫານຖວາຍອຸທິດສົງ ฯลฯ

ฯลฯ ອຸທິດພິກຂຸຫຼາຍອົງ ฯลฯ ฯลฯ ອຸທິດພິກຂຸອົງດຽວ ฯลฯ

ฯลฯ ອຸທິດພິກຂຸນີສົງ ฯลฯ ฯลฯ ອຸທິດພິກຂຸນີຫຼາຍອົງ ฯลฯ

ຯລຯ ອຸທິດພິກຂຸນີອົງດຽວ ຯລຯ ຯລຯ ອຸທິດສິກຂະມານາຫຼາຍອົງ ຯລຯ
ຯລຯ ອຸທິດສິກຂະມານາອົງດຽວ ຯລຯ ຯລຯ ອຸທິດສາມະເນນຫຼາຍອົງ ຯລຯ
ຯລຯ ອຸທິດສາມະເນນອົງດຽວ ຯລຯ ຯລຯ ອຸທິດສາມະເນຣີຫຼາຍອົງ ຯລຯ
ຯລຯ ອຸທິດສາມະເນຣີອົງດຽວ ຯລຯ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸ ຯລຯ ສາມະເນຣີໄດ້ສ້າງວິຫານເພື່ອປະໂຫຍດແກ່ຕົນ ຯລຯ

ຯລຯ ໄດ້ສ້າງເຮືອນມຸງແຖວດຽວ ຯລຯ ຯລຯ ໄດ້ສ້າງຜາສາດ ຯລຯ
ຯລຯ ໄດ້ສ້າງເຮືອນໂລ້ນ ຯລຯ ຯລຯ ໄດ້ສ້າງຖ້ຳ ຯລຯ
ຯລຯ ໄດ້ສ້າງບໍລິເວນ ຯລຯ ຯລຯ ໄດ້ສ້າງຊຸ້ມ ຯລຯ
ຯລຯ ໄດ້ສ້າງໂຮງສັນ ຯລຯ ຯລຯ ໄດ້ສ້າງໂຮງໄຟ ຯລຯ
ຯລຯ ໄດ້ສ້າງກັບປິຍະກຸຕິ ຯລຯ ຯລຯ ໄດ້ສ້າງວັດກຸຕິ ຯລຯ
ຯລຯ ໄດ້ສ້າງທີ່ຈົງກົມ ຯລຯ ຯລຯ ໄດ້ສ້າງໂຮງຈົງກົມ ຯລຯ
ຯລຯ ໄດ້ສ້າງບໍ່ນ້ຳ ຯລຯ ຯລຯ ໄດ້ສ້າງໂຮງບໍ່ນ້ຳ ຯລຯ
ຯລຯ ໄດ້ສ້າງເຮືອນໄຟ ຯລຯ ຯລຯ ໄດ້ສ້າງໂຮງເຮືອນໄຟ ຯລຯ
ຯລຯ ໄດ້ສ້າງສະໂບກຂະຣະນີ ຯລຯ ຯລຯ ໄດ້ສ້າງມົນດົບ ຯລຯ
ຯລຯ ໄດ້ສ້າງອາຮາມ ຯລຯ ຯລຯ ໄດ້ສ້າງອາຮາມວັດຖຸ ຯລຯ

ຖ້າພິກຂຸ ຯລຯ ສາມະເນຣີສົ່ງທູດໄປໃນສຳນັກພິກຂຸທັງຫຼາຍວ່າ “ຂໍອາຣາດທະນາພິກຂຸທັງຫຼາຍມາ ຂ້ານ້ອຍ ຯລຯ ຂ້ານ້ອຍປາຖະໜາຈະຖວາຍທານ ຟັງທຳ ແລະ ເຫັນພິກຂຸທັງຫຼາຍ” ພິກຂຸທັງຫຼາຍ ເມື່ອພິກຂຸ ຯລຯ ສາມະເນຣີສົ່ງທູດມາ ເພິ່ງໄປດ້ວຍສັດຕາຫະກະຣະນີຍະໄດ້ ແຕ່ເມື່ອພິກຂຸ ຯລຯ ສາມະເນຣີບໍ່ສົ່ງທູດມາ ບໍ່ເພິ່ງໄປ (ເມື່ອໄປດ້ວຍສັດຕາຫະກະຣະນີຍະ) ເພິ່ງກັບມາພາຍໃນ ໗ ວັນ

## ໑໑໐. ປັນຈະອັບປະຫິຕານຸຊານະນາ

### ວ່າດ້ວຍຊົງອະນຸຍາດສັດຕາຫະກະຣະນີຍະເມື່ອສະຫະທຳມິກທັງ ໕ ຈະບໍ່ສົ່ງທູດມາ

### ເລື້ອງພິກຂຸເປັນໄຂ້ເປັນຕົ້ນ

[໑໗໓] ສະໄໝນັ້ນ ພິກຂຸອົງໜຶ່ງເປັນໄຂ້ ໄດ້ສົ່ງທູດໄປໃນສຳນັກພິກຂຸທັງຫຼາຍວ່າ “ຂ້ານ້ອຍເປັນໄຂ້ ຂໍອາຣາດທະນາພິກຂຸທັງຫຼາຍມາ ຂ້ານ້ອຍປະສົງໃຫ້ມາ” ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ແມ່ນສະຫະທຳມິກທັງ ໕ ຄື ພິກຂຸ ພິກຂຸນີ ສິກຂະມານາ ສາມະເນນ ສາມະເນຣີ ຈະບໍ່ສົ່ງທູດມາ ເຮົາອະນຸຍາດໃຫ້ໄປດ້ວຍສັດຕາຫະກະຣະນີຍະໄດ້ ບໍ່ຈຳຕ້ອງກ່າວເຖິງເມື່ອສະຫະທຳມິກທັງ ໕ ສົ່ງທູດມາ ພິກຂຸທັງຫຼາຍ ເມື່ອສະຫະທຳມິກທັງ ໕ ເຫຼົ່ານີ້ ແມ່ນບໍ່ໄດ້ສົ່ງທູດມາ ເຮົາອະນຸຍາດໃຫ້ໄປດ້ວຍສັດຕາຫະກະຣະນີຍະໄດ້ ບໍ່ຈຳຕ້ອງກ່າວເຖິງເມື່ອສະຫະທຳມິກທັງ ໕ ສົ່ງທູດມາ ແຕ່ເພິ່ງກັບມາພາຍໃນ ໗ ວັນ

## ສັດຕາຫະກະຣະນີຍະເນື່ອງດ້ວຍພິກຂຸ ໑໐ ກໍລະນີ

໑. ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ພິກຂຸເປັນໄຂ້ ຖ້າພິກຂຸນັ້ນ ຈະເພິ່ງສົ່ງທູດໄປໃນສຳນັກ ພິກຂຸທັງຫຼາຍວ່າ "ຂ້ານ້ອຍເປັນໄຂ້ ຂໍອາຣາດທະນາພິກຂຸທັງຫຼາຍມາ ຂ້ານ້ອຍປະສົງໃຫ້ມາ" ພິກຂຸທັງຫຼາຍ ແມ່ນພິກຂຸນັ້ນ ຈະບໍ່ສົ່ງທູດມາ ກໍໄປດ້ວຍສັດຕາຫະກະຣະນີຍະໄດ້ ບໍ່ຕ້ອງວ້າເຖິງເມື່ອພິກຂຸນັ້ນສົ່ງທູດມາ ເພິ່ງໄປດ້ວຍຕັ້ງໃຈວ່າ "ເຮົາຈັກສະແຫວງຫາຄິລານະພັດ ຄິລານຸປັດຖາກະພັດ ຫຼື ຄິລານະເພສັດ ຈັກຖາມອາການ ຫຼື ຈັກພະຍາບານ" ແຕ່ເພິ່ງກັບພາຍມາໃນ ໗ ວັນ

໒. ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ຄວາມບໍ່ຍິນດີເກີດຂຶ້ນແກ່ພິກຂຸ ຖ້າພິກຂຸນັ້ນຈະເພິ່ງສົ່ງທູດໄປໃນສຳນັກພິກຂຸທັງຫຼາຍວ່າ "ຄວາມບໍ່ຍິນດີເກີດຂຶ້ນແກ່ຂ້ານ້ອຍແລ້ວ ຂໍອາຣາດທະນາພິກຂຸທັງຫຼາຍມາ ຂ້ານ້ອຍປະສົງໃຫ້ມາ" ພິກຂຸທັງຫຼາຍ ແມ່ນພິກຂຸນັ້ນຈະບໍ່ສົ່ງທູດມາ ກໍໄປດ້ວຍສັດຕາຫະກະຣະນີຍະໄດ້ ບໍ່ຈຳຕ້ອງກ່າວເຖິງເມື່ອພິກຂຸນັ້ນສົ່ງທູດມາ ເພິ່ງໄປດ້ວຍຕັ້ງໃຈວ່າ "ເຮົາຈັກລະງັບຄວາມບໍ່ຍິນດີເອງ ຫຼື ຈັກໃຊ້ພິກຂຸອື່ນໃຫ້ຊ່ອຍລະງັບ ຫຼື ຈັກສະແດງທຳມະກະຖາແກ່ພິກຂຸນັ້ນ" ແຕ່ເພິ່ງກັບມາພາຍໃນ ໗ ວັນ

໓. ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ຄວາມລຳຄານເກີດຂຶ້ນແກ່ພິກຂຸ ຖ້າພິກຂຸນັ້ນຈະເພິ່ງສົ່ງທູດໄປໃນສຳນັກພິກຂຸທັງຫຼາຍວ່າ "ຄວາມລຳຄານເກີດຂຶ້ນແກ່ຂ້ານ້ອຍແລ້ວ ຂໍອາຣາດທະນາພິກຂຸທັງຫຼາຍມາ ຂ້ານ້ອຍປະສົງໃຫ້ມາ" ພິກຂຸທັງຫຼາຍ ແມ່ນພິກຂຸນັ້ນຈະບໍ່ສົ່ງທູດມາ ກໍໄປດ້ວຍສັດຕາຫະກະຣະນີຍະໄດ້ ບໍ່ຈຳຕ້ອງກ່າວເຖິງເມື່ອພິກຂຸນັ້ນສົ່ງທູດມາ ເພິ່ງໄປດ້ວຍຕັ້ງໃຈວ່າ "ເຮົາຈັກບັນເທົາຄວາມລຳຄານເອງ ຫຼື ຈັກໃຊ້ພິກຂຸອື່ນໃຫ້ຊ່ອຍບັນເທົາ ຫຼື ຈັກສະແດງທຳມະກະຖາແກ່ພິກຂຸນັ້ນ" ແຕ່ເພິ່ງກັບມາພາຍໃນ ໗ ວັນ

໔. ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ຄວາມເຫັນຜິດເກີດຂຶ້ນແກ່ພິກຂຸ ຖ້າພິກຂຸນັ້ນ

ຈະເພີ່ງສົ່ງທູດໄປໃນສຳນັກພິກຂຸທັງຫຼາຍວ່າ “ຄວາມເຫັນຜິດເກີດຂຶ້ນແກ່ຂ້ານ້ອຍແລ້ວ ຂໍອາຣາດທະນາພິກຂຸທັງຫຼາຍມາ ຂ້ານ້ອຍປະສົງໃຫ້ມາ” ພິກຂຸທັງຫຼາຍ ແມ່ນພິກຂຸນັ້ນຈະບໍ່ສົ່ງທູດມາ ກໍໄປດ້ວຍສັດຕາຫະກະຣະນີຍະໄດ້ ບໍ່ຈຳຕ້ອງກ່າວເຖິງເມື່ອພິກຂຸນັ້ນສົ່ງທູດມາ ເພິ່ງໄປດ້ວຍຕັ້ງໃຈວ່າ “ເຮົາຈັກເປື້ອງຄວາມເຫັນຜິດເອງ ຫຼື ຈັກໃຊ້ພິກຂຸອື່ນໃຫ້ຊ່ອຍປົດເປື້ອງ ຫຼື ຈັກສະແດງທຳມະກະຖາແກ່ພິກຂຸນັ້ນ” ແຕ່ເພິ່ງກັບມາພາຍໃນ ໗ ວັນ

໕. ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸເປັນຜູ້ຕ້ອງຄະຣຸທຳ ຄວນຢູ່ປະຣິວາດ ຖ້າພິກຂຸນັ້ນ ຈະເພິ່ງສົ່ງທູດໄປໃນສຳນັກພິກຂຸທັງຫຼາຍວ່າ “ຂ້ານ້ອຍຕ້ອງຄະຣຸທຳ ຄວນຢູ່ປະຣິວາດ ຂໍອາຣາດທະນາພິກຂຸທັງຫຼາຍມາ ຂ້ານ້ອຍປະສົງໃຫ້ມາ” ພິກຂຸທັງຫຼາຍ ແມ່ນພິກຂຸນັ້ນຈະບໍ່ສົ່ງທູດມາ ກໍໄປດ້ວຍສັດຕາຫະກະຣະນີຍະໄດ້ ບໍ່ຈຳຕ້ອງກ່າວເຖິງເມື່ອພິກຂຸນັ້ນສົ່ງທູດມາ ເພິ່ງໄປດ້ວຍຕັ້ງໃຈວ່າ “ເຮົາຈັກກະທຳຄວາມຂວນຂວາຍໃຫ້ປະຣິວາດ ຫຼື ຈັກຊ່ອຍສູດກຳມະວາຈາ ຫຼື ຈັກເປັນຄະນະປູຣະກະ” ແຕ່ເພິ່ງກັບມາພາຍໃນ ໗ ວັນ

໖. ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸເປັນຜູ້ຄວນດຶງເຂົ້າຫາອາບັດເກົ່າ ຖ້າພິກຂຸນັ້ນ ຈະເພິ່ງສົ່ງທູດໄປໃນສຳນັກພິກຂຸທັງຫຼາຍວ່າ “ຂ້ານ້ອຍ ເປັນຜູ້ຄວນດຶງເຂົ້າຫາອາບັດເກົ່າ ຂໍອາຣາດທະນາພິກຂຸທັງຫຼາຍມາ ຂ້ານ້ອຍປະສົງໃຫ້ມາ” ພິກຂຸທັງຫຼາຍ ແມ່ນພິກຂຸນັ້ນຈະບໍ່ສົ່ງທູດມາ ກໍໄປດ້ວຍສັດຕາຫະກະຣະນີຍະໄດ້ ບໍ່ຈຳຕ້ອງກ່າວເຖິງເມື່ອພິກຂຸນັ້ນ ສົ່ງທູດມາ ເພິ່ງໄປດ້ວຍຕັ້ງໃຈວ່າ “ເຮົາຈັກກະທຳຄວາມຂວນຂວາຍດຶງເຂົ້າຫາອາບັດເກົ່າ ຫຼື ຈັກຊ່ອຍສູດກຳມະວາຈາ ຫຼື ຈັກເປັນຄະນະປູຣະກະ” ແຕ່ເພິ່ງກັບມາພາຍໃນ ໗ ວັນ

໗. ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸເປັນຜູ້ຄວນມານັດ ຖ້າພິກຂຸນັ້ນຈະເພິ່ງສົ່ງທູດໄປໃນສຳນັກພິກຂຸທັງຫຼາຍວ່າ “ຂ້ານ້ອຍເປັນຜູ້ຄວນມານັດ ຂໍອາຣາດທະນາພິກຂຸທັງຫຼາຍມາ ຂ້ານ້ອຍປະສົງໃຫ້ມາ” ພິກຂຸທັງຫຼາຍ ແມ່ນພິກຂຸນັ້ນ ຈະບໍ່ສົ່ງທູດມາ ກໍໄປດ້ວຍສັດຕາຫະກະຣະນີຍະໄດ້ ບໍ່ຈຳຕ້ອງກ່າວເຖິງເມື່ອພິກຂຸນັ້ນສົ່ງທູດມາ ເພິ່ງໄປດ້ວຍຕັ້ງໃຈວ່າ “ເຮົາຈັກກະທຳຄວາມຂວນຂວາຍໃຫ້ມານັດ ຫຼື ຈັກຊ່ອຍສູດກຳມະວາຈາ ຫຼື ຈັກເປັນຄະນະປູຣະກະ” ແຕ່ເພິ່ງກັບມາພາຍໃນ ໗ ວັນ

໘. ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸເປັນຜູ້ຄວນອັບພານ ຖ້າພິກຂຸນັ້ນ ຈະເພິ່ງສົ່ງທູດໄປໃນສຳນັກພິກຂຸທັງຫຼາຍວ່າ “ຂ້ານ້ອຍເປັນຜູ້ຄວນອັບພານ ຂໍອາຣາດທະນາພິກຂຸທັງຫຼາຍມາ ຂ້ານ້ອຍປະສົງໃຫ້ມາ” ພິກຂຸທັງຫຼາຍ ແມ່ນພິກຂຸນັ້ນຈະບໍ່ສົ່ງທູດ

ມາ ກໍໄປດ້ວຍສັດຕາຫະກະຣະນີຍະໄດ້ ບໍ່ຈໍາຕ້ອງກ່າວເຖິງເມື່ອພິກຂຸນັ້ນສົ່ງທູດມາ ເພິ່ງໄປດ້ວຍຕັ້ງໃຈວ່າ "ເຮົາຈັກກະທໍາຄວາມຂວນຂວາຍໃຫ້ອັບພານ ຫຼື ຈັກຊ່ອຍສູດກໍາມະວາຈາ ຫຼື ຈັກເປັນຄະນະປູຣະກະ" ແຕ່ເພິ່ງກັບມາພາຍໃນ ໗ ວັນ

໙. ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ສົງຕ້ອງການຈະເຮັດກໍາ ຄື ຕັດຊະນີຍະກໍາ ນິຍະສະກໍາ ປັບພາຊະນີຍະກໍາ ປະຕິສາຣະນີຍະກໍາ ຫຼື ອຸກເຂປະນີຍະກໍາແກ່ພິກຂຸ ຖ້າພິກຂຸນັ້ນຈະເພິ່ງສົ່ງທູດໄປໃນສໍານັກພິກຂຸທັງຫຼາຍວ່າ "ສົງເປັນຜູ້ຕ້ອງການຈະເຮັດກໍາແກ່ຂ້ານ້ອຍ ຂໍອາຣາດທະນາພິກຂຸທັງຫຼາຍມາ ຂ້ານ້ອຍປະສົງໃຫ້ມາ" ພິກຂຸທັງຫຼາຍ ແມ່ນພິກຂຸນັ້ນຈະບໍ່ສົ່ງທູດມາ ກໍໄປດ້ວຍສັດຕາຫະກະຣະນີຍະໄດ້ ບໍ່ຈໍາຕ້ອງກ່າວເຖິງເມື່ອພິກຂຸນັ້ນ ສົ່ງທູດມາ ເພິ່ງໄປດ້ວຍຕັ້ງໃຈວ່າ "ດ້ວຍອຸບາຍແນວໃດນໍ ສົງຈະບໍ່ເພິ່ງເຮັດກໍາ ຫຼືເພິ່ງປ່ຽນໄປເປັນໂທດເບົາ" ແຕ່ເພິ່ງກັບມາພາຍໃນ ໗ ວັນ

໑໐. ກໍ ຫຼື ວ່າ ພິກຂຸນັ້ນຖືກສົງເຮັດກໍາ ຄື ຕັດຊະນີຍະກໍາ ນິຍະສະກໍາ ປັບພາຊະນີຍະກໍາ ປະຕິສາຣະນີຍະກໍາ ຫຼື ອຸກເຂປະນີຍະກໍາແລ້ວ ຖ້າພິກຂຸນັ້ນ ຈະເພິ່ງສົ່ງທູດໄປໃນສໍານັກພິກຂຸທັງຫຼາຍວ່າ "ສົງເຮັດກໍາແກ່ຂ້ານ້ອຍແລ້ວ ຂໍອາຣາດທະນາພິກຂຸທັງຫຼາຍມາ ຂ້ານ້ອຍປະສົງໃຫ້ມາ" ພິກຂຸທັງຫຼາຍ ແມ່ນພິກຂຸນັ້ນ ຈະບໍ່ສົ່ງທູດມາ ກໍໄປດ້ວຍສັດຕາຫະກະຣະນີຍະໄດ້ ບໍ່ຈໍາຕ້ອງກ່າວເຖິງເມື່ອພິກຂຸນັ້ນສົ່ງທູດມາ ເພິ່ງໄປດ້ວຍຕັ້ງໃຈວ່າ "ດ້ວຍອຸບາຍແນວໃດນໍ ພິກຂຸນັ້ນຈະເພິ່ງປະພຶດສົມຄວນ ເພິ່ງຫາຍຈອງຫອງ ເພິ່ງກັບໂຕໄດ້ ສົງເພິ່ງລະງັບກໍານັ້ນສາ" ແຕ່ເພິ່ງກັບມາພາຍໃນ ໗ ວັນ

## ສັດຕາຫະກະຣະນີຍະເນື່ອງດ້ວຍພິກຂຸນີ ໙ ກໍລະນີ

[໑໘໔] ໑. ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ພິກຂຸນີເປັນໄຂ້ ຖ້າພິກຂຸນີນັ້ນ ຈະເພິ່ງສົ່ງທູດໄປໃນສໍານັກພິກຂຸທັງຫຼາຍວ່າ "ຂ້ານ້ອຍເປັນໄຂ້ ຂໍອາຣາດທະນາພຣະຜູ້ເປັນເຈົ້າທັງຫຼາຍມາ ຂ້ານ້ອຍປະສົງໃຫ້ມາ" ພິກຂຸທັງຫຼາຍ ແມ່ນພິກຂຸນີນັ້ນຈະບໍ່ສົ່ງທູດມາ ກໍໄປດ້ວຍສັດຕາຫະກະຣະນີຍະໄດ້ ບໍ່ຈໍາຕ້ອງກ່າວເຖິງເມື່ອພິກຂຸນີນັ້ນສົ່ງທູດມາ ເພິ່ງໄປດ້ວຍຕັ້ງໃຈວ່າ "ເຮົາຈັກສະແຫວງຫາຄິລານະພັດ ຄິລານຸປັດຖາກພັດ ຫຼື ຄິລານະເພສັດ ຈັກຖາມອາການ ຫຼື ຈັກພະຍາບານ" ແຕ່ເພິ່ງກັບມາພາຍໃນ ໗ ວັນ

໒. ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ຄວາມບໍ່ຍິນດີເກີດຂຶ້ນແກ່ພິກຂຸນີ ຖ້າພິກຂຸນີນັ້ນຈະເພິ່ງສົ່ງທູດໄປໃນສໍານັກພິກຂຸທັງຫຼາຍວ່າ "ຄວາມບໍ່ຍິນດີເກີດຂຶ້ນແກ່ຂ້ານ້ອຍແລ້ວ

ຂໍອາຣາດທະນາພຣະຜູ້ເປັນເຈົ້າທັງຫຼາຍມາ ຂ້ານ້ອຍປະສົງໃຫ້ມາ" ພິກຂຸທັງຫຼາຍ ແມ່ນພິກຂຸນີນັ້ນຈະບໍ່ສົ່ງທູດມາ ກໍໄປດ້ວຍສັດຕາຫະກະຣະນີຍະໄດ້ ບໍ່ຈຳຕ້ອງກ່າວເຖິງເມື່ອພິກຂຸນີນັ້ນສົ່ງທູດມາ ເພິ່ງໄປດ້ວຍຕັ້ງໃຈວ່າ "ເຮົາຈັກລະງັບຄວາມບໍ່ຍິນດີເອງ ຫຼື ຈັກໃຊ້ພິກຂຸອື່ນໃຫ້ຊ່ອຍລະງັບ ຫຼື ຈັກສະແດງທຳມະກະຖາແກ່ພິກຂຸນີນັ້ນ" ແຕ່ເພິ່ງກັບມາພາຍໃນ ໗ ວັນ

໓. ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ຄວາມລຳຄານເກີດຂຶ້ນແກ່ພິກຂຸນີ ຖ້າພິກຂຸນີນັ້ນຈະເພິ່ງສົ່ງທູດໄປໃນສຳນັກພິກຂຸທັງຫຼາຍວ່າ "ຄວາມລຳຄານເກີດຂຶ້ນແກ່ຂ້ານ້ອຍແລ້ວ ຂໍອາຣາດທະນາພຣະຜູ້ເປັນເຈົ້າທັງຫຼາຍມາ ຂ້ານ້ອຍປະສົງໃຫ້ມາ" ພິກຂຸທັງຫຼາຍ ແມ່ນພິກຂຸນີນັ້ນ ຈະບໍ່ສົ່ງທູດມາ ກໍໄປດ້ວຍສັດຕາຫະກະຣະນີຍະໄດ້ ບໍ່ຈຳຕ້ອງກ່າວເຖິງເມື່ອພິກຂຸນີນັ້ນສົ່ງທູດມາ ເພິ່ງໄປດ້ວຍຕັ້ງໃຈວ່າ "ເຮົາຈັກບັນເທົາຄວາມລຳຄານເອງ ຫຼື ຈັກໃຊ້ ພິກຂຸອື່ນໃຫ້ຊ່ອຍບັນເທົາ ຫຼື ຈັກສະແດງທຳມະກະຖາແກ່ພິກຂຸນີນັ້ນ" ແຕ່ເພິ່ງກັບມາພາຍໃນ ໗ ວັນ

໔. ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ຄວາມເຫັນຜິດເກີດຂຶ້ນແກ່ພິກຂຸນີ ຖ້າພິກຂຸນີນັ້ນຈະເພິ່ງສົ່ງທູດໄປໃນສຳນັກພິກຂຸທັງຫຼາຍວ່າ "ຄວາມເຫັນຜິດເກີດຂຶ້ນແກ່ຂ້ານ້ອຍແລ້ວ ຂໍອາຣາດທະນາພຣະຜູ້ເປັນເຈົ້າທັງຫຼາຍມາ ຂ້ານ້ອຍປະສົງໃຫ້ມາ" ພິກຂຸທັງຫຼາຍ ແມ່ນພິກຂຸນີນັ້ນຈະບໍ່ສົ່ງທູດມາ ກໍໄປດ້ວຍສັດຕາຫະກະຣະນີຍະໄດ້ ບໍ່ຈຳຕ້ອງກ່າວເຖິງເມື່ອພິກຂຸນີສົ່ງທູດມາ ເພິ່ງໄປດ້ວຍຕັ້ງໃຈວ່າ "ເຮົາຈັກເປື້ອງຄວາມເຫັນຜິດເອງ ຫຼື ຈັກໃຊ້ພິກຂຸອື່ນໃຫ້ຊ່ອຍປົດເປື້ອງ ຫຼື ຈັກສະແດງທຳມະກະຖາແກ່ພິກຂຸນີນັ້ນ" ແຕ່ເພິ່ງກັບມາພາຍໃນ ໗ ວັນ

໕. ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸນີເປັນຜູ້ຕ້ອງຄະຣຸທຳ ຄວນແກ່ມານັດ ຖ້າພິກຂຸນີນັ້ນຈະເພິ່ງສົ່ງທູດໄປໃນສຳນັກພິກຂຸທັງຫຼາຍວ່າ "ຂ້ານ້ອຍເອງຕ້ອງຄະຣຸທຳຄວນແກ່ ມານັດ ຂໍອາຣາດທະນາພຣະຜູ້ເປັນເຈົ້າທັງຫຼາຍມາ ຂ້ານ້ອຍປະສົງໃຫ້ມາ" ພິກຂຸທັງຫຼາຍ ແມ່ນພິກຂຸນີນັ້ນຈະບໍ່ສົ່ງທູດມາ ກໍໄປດ້ວຍສັດຕາຫະກະຣະນີຍະໄດ້ ບໍ່ຈຳຕ້ອງກ່າວເຖິງເມື່ອພິກຂຸນີນັ້ນສົ່ງທູດມາ ເພິ່ງໄປດ້ວຍຕັ້ງໃຈວ່າ "ເຮົາຈັກກະທຳຄວາມຂວນຂວາຍໃຫ້ມານັດ" ແຕ່ເພິ່ງກັບມາພາຍໃນ ໗ ວັນ

໖. ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸນີເປັນຜູ້ຄວນດຶງເຂົ້າຫາອາບັດເກົ່າ ຖ້າພິກຂຸນີນັ້ນຈະເພິ່ງສົ່ງທູດໄປໃນສຳນັກພິກຂຸທັງຫຼາຍວ່າ "ຂ້ານ້ອຍເປັນຜູ້ຄວນດຶງເຂົ້າຫາອາບັດເກົ່າ ຂໍອາຣາດທະນາພຣະຜູ້ເປັນເຈົ້າທັງຫຼາຍມາ ຂ້ານ້ອຍປະສົງໃຫ້ມາ" ພິກຂຸທັງຫຼາຍ ແມ່ນພິກຂຸນີນັ້ນຈະບໍ່ສົ່ງທູດມາ ກໍໄປດ້ວຍສັດຕາຫະກະຣະນີຍະໄດ້ ບໍ່

ຈໍາຕ້ອງກ່າວເຖິງເມື່ອພິກຂຸນີ ນັ້ນສົ່ງທູດມາ ເພິ່ງໄປດ້ວຍຕັ້ງໃຈວ່າ "ເຮົາຈັກກະທໍາຄວາມຂວນຂວາຍດຶງເຂົ້າຫາອາບັດເກົ່າ" ແຕ່ເພິ່ງກັບມາພາຍໃນ ໗ ວັນ

໗. ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸນີໃນທໍາອິໄນນີ້ເປັນຜູ້ຄວນອັບພານ ຖ້າພິກຂຸນີນັ້ນຈະເພິ່ງສົ່ງທູດໄປໃນສໍານັກພິກຂຸທັງຫຼາຍວ່າ "ຂ້ານ້ອຍເປັນຜູ້ຄວນອັບພານ ຂໍອາຣາດທະນາພຣະຜູ້ເປັນເຈົ້າທັງຫຼາຍມາ ຂ້ານ້ອຍປະສົງໃຫ້ມາ" ພິກຂຸທັງຫຼາຍ ແມ່ນພິກຂຸນີ ນັ້ນຈະບໍ່ສົ່ງທູດມາ ກໍໄປດ້ວຍສັດຕາຫະກະຣະນີຍະໄດ້ ບໍ່ຈໍາຕ້ອງກ່າວເຖິງເມື່ອພິກຂຸນີນັ້ນສົ່ງທູດມາ ເພິ່ງໄປດ້ວຍຕັ້ງໃຈວ່າ "ເຮົາຈັກກະທໍາຄວາມຂວນຂວາຍໃຫ້ອັບພານ" ແຕ່ເພິ່ງກັບມາພາຍໃນ ໗ ວັນ

໘. ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ສົງຕ້ອງການຈະເຮັດກໍາ ຄື ຕັດຊະນີຍະກໍາ ນິຍະສະກໍາ ປັບພາຊະນີຍະກໍາ ປະຕິສາຣະນີຍະກໍາ ຫຼື ອຸກເຂປະນີຍະກໍາ ແກ່ພິກຂຸນີ ຖ້າພິກຂຸນີນັ້ນຈະເພິ່ງສົ່ງທູດໄປໃນສໍານັກພິກຂຸທັງຫຼາຍວ່າ "ສົງເປັນຜູ້ຕ້ອງການຈະເຮັດກໍາແກ່ຂ້ານ້ອຍ ຂໍອາຣາດທະນາພິກຂຸທັງຫຼາຍມາ ຂ້ານ້ອຍປະສົງໃຫ້ມາ" ພິກຂຸທັງຫຼາຍ ແມ່ນພິກຂຸນີນັ້ນຈະບໍ່ສົ່ງທູດມາ ກໍໄປດ້ວຍສັດຕາຫະກະຣະນີຍະໄດ້ ບໍ່ຈໍາຕ້ອງກ່າວເຖິງເມື່ອພິກຂຸນີນັ້ນສົ່ງທູດມາ ເພິ່ງໄປດ້ວຍຕັ້ງໃຈວ່າ "ດ້ວຍອຸບາຍແນວໃດນໍ ສົງຈະບໍ່ເພິ່ງເຮັດກໍາ ຫຼືເພິ່ງປ່ຽນໄປເປັນໂທດເບົາ" ແຕ່ເພິ່ງກັບມາພາຍໃນ ໗ ວັນ

໙. ກໍ ຫຼື ວ່າ ພິກຂຸນີນັ້ນຖືກສົງເຮັດກໍາ ຄື ຕັດຊະນີຍະກໍາ ນິຍະສະກໍາ ປັບພາຊະນີຍະກໍາ ປະຕິສາຣະນີຍະກໍາ ຫຼື ອຸກເຂປະນີຍະກໍາແລ້ວ ຖ້າພິກຂຸນີນັ້ນຈະເພິ່ງສົ່ງທູດໄປໃນສໍານັກພິກຂຸທັງຫຼາຍວ່າ "ສົງເຮັດກໍາແກ່ຂ້ານ້ອຍແລ້ວ ຂໍອາຣາດທະນາພຣະຜູ້ເປັນເຈົ້າທັງຫຼາຍມາ ຂ້ານ້ອຍປະສົງໃຫ້ມາ" ພິກຂຸທັງຫຼາຍ ແມ່ນພິກຂຸນີນັ້ນຈະບໍ່ສົ່ງທູດມາ ກໍໄປດ້ວຍສັດຕາຫະກະຣະນີຍະໄດ້ ບໍ່ຈໍາຕ້ອງກ່າວເຖິງເມື່ອພິກຂຸນີນັ້ນສົ່ງທູດມາ ເພິ່ງໄປດ້ວຍຕັ້ງໃຈວ່າ "ດ້ວຍອຸບາຍແນວໃດນໍ ພິກຂຸນີນັ້ນຈະເພິ່ງປະພຶດສົມຄວນ ເພິ່ງຫາຍຈອງຫອງ ເພິ່ງກັບໂຕໄດ້ ສົງເພິ່ງລະງັບກໍານັ້ນສາ" ແຕ່ເພິ່ງກັບມາພາຍໃນ ໗ ວັນ

## ສັດຕາຫະກະຣະນີຍະເນື່ອງດ້ວຍສິກຂະມານາ ໖ ກໍລະນີ

[໑໙໕] ໑. ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ສິກຂະມານາເປັນໄຂ້ ຖ້າສິກຂະມານານັ້ນຈະເພິ່ງສົ່ງທູດໄປໃນສໍານັກພິກຂຸທັງຫຼາຍວ່າ "ຂ້ານ້ອຍເປັນໄຂ້ ຂໍອາຣາດທະນາພິກຂຸທັງຫຼາຍມາ ຂ້ານ້ອຍປະສົງໃຫ້ມາ" ພິກຂຸທັງຫຼາຍ ແມ່ນສິກຂະມານານັ້ນຈະບໍ່ສົ່ງທູດມາ ກໍໄປດ້ວຍສັດຕາຫະກະຣະນີຍະໄດ້ ບໍ່ຈໍາຕ້ອງກ່າວເຖິງ

ເມື່ອສິກຂະມານານັ້ນສົ່ງທູດມາ ເພິ່ງໄປດ້ວຍຕັ້ງໃຈວ່າ "ເຮົາຈັກສະແຫວງຫາຄິລານະພັດ ຄິລານຸປັດຖາກພັດ ຫຼື ຄິລານະເພສັດ ຈັກຖາມອາການ ຫຼື ຈັກພະຍາບານ" ແຕ່ເພິ່ງກັບມາພາຍໃນ ໗ ວັນ

໔. ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ຄວາມບໍ່ຍິນດີເກີດຂຶ້ນແກ່ສິກຂະມານາ ຯລຯ

໓. ຄວາມລຳຄານເກີດຂຶ້ນແກ່ສິກຂະມານາ ຯລຯ

໔. ຄວາມເຫັນຜິດເກີດຂຶ້ນແກ່ສິກຂະມານາ ຯລຯ

໕. ສິກຂາຂອງສິກຂະມານາກຳເຮີບ ຖ້າສິກຂະມານານັ້ນ ຈະເພິ່ງສົ່ງທູດໄປໃນສຳນັກພິກຂຸກໄທັງຫຼາຍວ່າ "ສິກຂາຂອງຂ້ານ້ອຍກຳເຮີບແລ້ວ ຂໍອາຣາດທະນາພິກຂຸທັງຫຼາຍມາ ຂ້ານ້ອຍປະສົງໃຫ້ມາ" ພິກຂຸທັງຫຼາຍ ແມ່ນສິກຂະມານານັ້ນຈະບໍ່ສົ່ງທູດມາ ກໍໄປດ້ວຍສັດຕາຫະກະຣະນີຍະໄດ້ ບໍ່ຈຳຕ້ອງກ່າວເຖິງເມື່ອສິກຂະມານານັ້ນສົ່ງທູດມາ ເພິ່ງໄປດ້ວຍຕັ້ງໃຈວ່າ "ເຮົາຈັກກະທຳຄວາມຂວນຂວາຍໃຫ້ສະມາທານສິກຂາ" ແຕ່ເພິ່ງກັບມາພາຍໃນ ໗ ວັນ

໖. ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ສິກຂະມານາຕ້ອງການຈະອຸປະສົມບົດ ຖ້າສິກຂະມານານັ້ນຈະເພິ່ງສົ່ງທູດໄປໃນສຳນັກພິກຂຸທັງຫຼາຍວ່າ "ຂ້ານ້ອຍຕ້ອງການຈະອຸປະສົມບົດ ຂໍອາຣາດທະນາພິກຂຸທັງຫຼາຍມາ ຂ້ານ້ອຍປະສົງໃຫ້ມາ" ພິກຂຸທັງຫຼາຍ ແມ່ນສິກຂະມານານັ້ນຈະບໍ່ສົ່ງທູດມາ ກໍໄປດ້ວຍສັດຕາຫະກະຣະນີຍະໄດ້ ບໍ່ຈຳຕ້ອງກ່າວເຖິງເມື່ອສິກຂະມານານັ້ນສົ່ງທູດມາ ເພິ່ງໄປດ້ວຍຕັ້ງໃຈວ່າ "ເຮົາຈັກກະທຳຄວາມຂວນຂວາຍໃຫ້ອຸປະສົມບົດ ຫຼື ຈັກຊ່ອຍສູດກຳມະວາຈາ ຫຼື ຈັກເປັນຄະນະປູຣະກະ" ແຕ່ເພິ່ງກັບມາພາຍໃນ ໗ ວັນ

## ສັດຕາຫະກະຣະນີຍະເນື່ອງດ້ວຍສາມະເນນ ໖ ກໍລະນີ

[໑໙໖] ໑. ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ສາມະເນນເປັນໄຂ້ ຖ້າສາມະເນນນັ້ນຈະເພິ່ງສົ່ງທູດໄປໃນສຳນັກພິກຂຸທັງຫຼາຍວ່າ "ຂ້າພະເຈົ້າເປັນໄຂ້ ຂໍອາຣາດທະນາພິກຂຸທັງຫຼາຍມາ ຂ້າພະເຈົ້າປະສົງໃຫ້ມາ" ພິກຂຸທັງຫຼາຍ ແມ່ນສາມະເນນນັ້ນຈະບໍ່ສົ່ງທູດມາ ກໍໄປດ້ວຍສັດຕາຫະກະຣະນີຍະໄດ້ ບໍ່ຈຳຕ້ອງກ່າວເຖິງເມື່ອສາມະເນນນັ້ນສົ່ງທູດມາ ເພິ່ງໄປດ້ວຍຕັ້ງໃຈວ່າ "ເຮົາຈັກສະແຫວງຫາຄິລານະພັດ ຄິລານຸປັດຖາກພັດ ຫຼື ຄິລານະເພສັດ ຈັກຖາມອາການ ຫຼື ຈັກພະຍາບານ" ແຕ່ເພິ່ງກັບມາພາຍໃນ ໗ ວັນ

໔. ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ຄວາມບໍ່ຍິນດີເກີດຂຶ້ນແກ່ສາມະເນນ ຯລຯ

໓. ຄວາມລຳຄານເກີດຂຶ້ນແກ່ສາມະເນນ ຯລຯ
໔. ຄວາມເຫັນຜິດເກີດຂຶ້ນແກ່ສາມະເນນ ຯລຯ

໕. ສາມະເນນຕ້ອງການຈະຖາມປີ ຖ້າສາມະເນນນັ້ນຈະເພິ່ງສົ່ງທູດໄປໃນສຳນັກພິກຂຸທັງຫຼາຍວ່າ "ຂ້ານ້ອຍເອງຕ້ອງການຈະຖາມປີ ຂໍອາຣາດທະນາພິກຂຸທັງຫຼາຍມາ ຂ້ານ້ອຍປະສົງໃຫ້ມາ" ພິກຂຸທັງຫຼາຍ ແມ່ນສາມະເນນນັ້ນຈະບໍ່ສົ່ງທູດມາ ກໍໄປດ້ວຍສັດຕາຫະກະຣະນີຍະໄດ້ ບໍ່ຈຳຕ້ອງກ່າວເຖິງເມື່ອສາມະເນນນັ້ນສົ່ງທູດມາ ເພິ່ງໄປດ້ວຍຕັ້ງໃຈວ່າ "ເຮົາຈັກຖາມ ຫຼື ຈັກບອກ" ແຕ່ເພິ່ງກັບມາພາຍໃນ ໗ ວັນ

໖. ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ສາມະເນນຕ້ອງການຈະອຸປະສົມບົດ ຖ້າສາມະເນນນັ້ນຈະເພິ່ງສົ່ງທູດໄປໃນສຳນັກພິກຂຸທັງຫຼາຍວ່າ "ຂ້ານ້ອຍເອງຕ້ອງການຈະອຸປະສົມບົດ ຂໍອາຣາດທະນາພິກຂຸທັງຫຼາຍມາ ຂ້ານ້ອຍປະສົງໃຫ້ມາ" ພິກຂຸທັງຫຼາຍ ແມ່ນສາມະເນນນັ້ນ ຈະບໍ່ສົ່ງທູດມາ ກໍໄປດ້ວຍສັດຕາຫະກະຣະນີຍະໄດ້ ບໍ່ຈຳຕ້ອງກ່າວເຖິງເມື່ອສາມະເນນນັ້ນສົ່ງທູດມາ ເພິ່ງໄປດ້ວຍຕັ້ງໃຈວ່າ "ເຮົາຈັກກະທຳຄວາມຂວນຂວາຍໃຫ້ອຸປະສົມບົດ ຫຼື ຈັກຊ່ອຍສູດກຳມະວາຈາ ຫຼື ຈັກເປັນຄະນະປູຣະກະ" ແຕ່ເພິ່ງກັບມາພາຍໃນ ໗ ວັນ

## ສັດຕາຫະກະຣະນີຍະເນື່ອງດ້ວຍສາມະເນຣີ ໖ ກໍລະນີ

[໑໙໗] ໑. ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ສາມະເນຣີເປັນໄຂ້ ຖ້າສາມະເນຣີນັ້ນຈະເພິ່ງສົ່ງທູດໄປໃນສຳນັກພິກຂຸທັງຫຼາຍວ່າ "ຂ້ານ້ອຍເປັນໄຂ້ ຂໍອາຣາດທະນາພຣະຜູ້ເປັນເຈົ້າທັງຫຼາຍມາ ຂ້ານ້ອຍປະສົງໃຫ້ມາ" ພິກຂຸທັງຫຼາຍ ແມ່ນສາມະເນຣີນັ້ນຈະບໍ່ສົ່ງທູດມາ ກໍໄປດ້ວຍສັດຕາຫະກະຣະນີຍະໄດ້ ບໍ່ຈຳຕ້ອງກ່າວເຖິງເມື່ອສາມະເນຣີນັ້ນສົ່ງທູດມາ ເພິ່ງໄປດ້ວຍຕັ້ງໃຈວ່າ "ເຮົາຈັກສະແຫວງຫາຄິລານະພັດຄິລານຸປັດຖາກພັດ ຫຼື ຄິລານະເພສັດ ຈັກຖາມອາການ ຫຼື ຈັກພະຍາບານ" ແຕ່ເພິ່ງກັບມາພາຍໃນ ໗ ວັນ

໒. ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ຄວາມບໍ່ຍິນດີເກີດຂຶ້ນແກ່ສາມະເນຣີ ຯລຯ
໓. ຄວາມລຳຄານເກີດຂຶ້ນແກ່ສາມະເນຣີ ຯລຯ
໔. ຄວາມເຫັນຜິດເກີດຂຶ້ນແກ່ສາມະເນຣີ ຯລຯ
໕. ສາມະເນຣີຕ້ອງການຈະຖາມປີ ຖ້າສາມະເນຣີນັ້ນຈະເພິ່ງສົ່ງທູດໄປໃນສຳນັກພິກຂຸທັງຫຼາຍວ່າ "ຂ້ານ້ອຍຕ້ອງການຈະຖາມປີ ຂໍອາຣາດທະນາພຣະຜູ້ເປັນເຈົ້າທັງຫຼາຍມາ ຂ້ານ້ອຍປະສົງໃຫ້ມາ" ພິກຂຸທັງຫຼາຍ ແມ່ນສາມະເນຣີນັ້ນຈະບໍ່ສົ່ງທູດມາ ກໍໄປ

ດ້ວຍສັດຕາຫະກະຣະນີຍະໄດ້ ບໍ່ຈຳຕ້ອງກ່າວເຖິງເມື່ອສາມະເນຣີນັ້ນສົ່ງທູດມາ ເພິ່ງໄປດ້ວຍຕັ້ງໃຈວ່າ "ເຮົາຈັກຖາມ ຫຼື ຈັກບອກ" ແຕ່ເພິ່ງກັບມາພາຍໃນ ໗ ວັນ

໗. ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ສາມະເນຣີຕ້ອງການຈະສະມາທານສິກຂາ ຖ້າສາມະເນຣີນັ້ນຈະເພິ່ງສົ່ງທູດໄປໃນສຳນັກພິກຂຸທັງຫຼາຍວ່າ "ຂ້ານ້ອຍຕ້ອງການຈະສະມາທານສິກຂາ ຂໍອາຣາດທະນາພຣະຜູ້ເປັນເຈົ້າທັງຫຼາຍມາ ຂ້ານ້ອຍປະສົງໃຫ້ມາ" ພິກຂຸທັງຫຼາຍ ແມ່ນສາມະເນຣີນັ້ນຈະບໍ່ສົ່ງທູດມາ ກໍໄປດ້ວຍສັດຕາຫະກະຣະນີຍະໄດ້ ບໍ່ຈຳຕ້ອງກ່າວເຖິງເມື່ອສາມະເນຣີນັ້ນສົ່ງທູດມາ ເພິ່ງໄປດ້ວຍຕັ້ງໃຈວ່າ "ເຮົາຈັກກະທຳຄວາມຂວນຂວາຍໃຫ້ສະມາທານສິກຂາ" ແຕ່ເພິ່ງກັບມາພາຍໃນ ໗ ວັນ

# ໑໑໑. ສັດຕະອັບປະຫິຕານຸຊານະນາ

## ວ່າດ້ວຍຊົງອະນຸຍາດສັດຕາຫະກະຣະນີຍະເມື່ອບຸກຄົນ ໗ ຈຳພວກຈະບໍ່ສົ່ງທູດມາ

## ເລື້ອງມານດາບິດາເປັນໄຂ້

[໑໙໗] ສະໄໝນັ້ນ ມານດາຂອງພິກຂຸອົງໜຶ່ງເປັນໄຂ້ ມານດານັ້ນສົ່ງທູດໄປໃນສຳນັກພິກຂຸຜູ້ເປັນບຸດວ່າ "ຂ້ານ້ອຍເປັນໄຂ້ ຂໍບຸດຂອງຂ້ານ້ອຍຈົ່ງມາ ຂ້ານ້ອຍປະສົງໃຫ້ມາ"

ລຳດັບນັ້ນ ພິກຂຸນັ້ນຄິດວ່າ "ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ວ່າ ເມື່ອບຸກຄົນ ໗ ຈຳພວກສົ່ງທູດມາ ໄປດ້ວຍສັດຕາຫະກະຣະນີຍະໄດ້ ແຕ່ເມື່ອບໍ່ສົ່ງທູດມາ ຈະໄປບໍ່ໄດ້ ສຳລັບສະຫະທຳມິກທັງ ໕ ແມ່ນບໍ່ສົ່ງທູດມາ ກໍໄປດ້ວຍສັດຕາຫະກະຣະນີຍະໄດ້ ບໍ່ຈຳຕ້ອງກ່າວເຖິງເມື່ອສະຫະທຳມິກທັງ ໕ ນັ້ນ ສົ່ງທູດມາ ອັນໜຶ່ງ ມານດາຂອງເຮົານີ້ເປັນໄຂ້ ແຕ່ມານດານັ້ນບໍ່ໄດ້ເປັນອຸປາສິກາ ເຮົາຈະເພິ່ງປະຕິບັດແນວໃດນໍ້"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ແມ່ນເມື່ອບຸກຄົນ ໗ ຈຳພວກ ຄື ພິກຂຸ ພິກຂຸນີ ສິກຂະມານາ ສາມະເນນ ສາມະເນຣີ ມານດາແລະບິດາ ຈະບໍ່ສົ່ງທູດມາ ເຮົາອະນຸຍາດ ໃຫ້ໄປດ້ວຍສັດຕາຫະກະຣະນີຍະໄດ້ ບໍ່ຈຳຕ້ອງກ່າວເຖິງເມື່ອບຸກຄົນ ໗ ຈຳພວກນັ້ນສົ່ງທູດມາ

ພິກຂຸທັງຫຼາຍ ເມື່ອບຸກຄົນ ໗ ຈຳພວກເຫຼົ່ານີ້ ແມ່ນບໍ່ໄດ້ສົ່ງທູດມາ ເຮົາອະນຸຍາດໃຫ້ໄປດ້ວຍສັດຕາຫະກະຣະນີຍະໄດ້ ບໍ່ຈຳຕ້ອງກ່າວເຖິງເມື່ອບຸກຄົນ ໗ ຈຳພວກນັ້ນ ສົ່ງທູດມາ ແຕ່ເພິ່ງກັບມາພາຍໃນ ໗ ວັນ

ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ມານດາຂອງພິກຂຸເປັນໄຂ້ ຖ້າມານດານັ້ນຈະເພິ່ງສົ່ງທູດໄປ

ໃນສຳນັກຂອງພິກຂຸຜູ້ເປັນບຸດວ່າ "ຂ້ານ້ອຍເປັນໄຂ້ ຂໍບຸດຂອງຂ້ານ້ອຍຈົ່ງມາ ຂ້ານ້ອຍປະສົງໃຫ້ມາ" ພິກຂຸທັງຫຼາຍ ແມ່ນມານດານັ້ນຈະບໍ່ສົ່ງທູດມາ ກໍໄປດ້ວຍສັດຕາຫະກະຣະນີຍະໄດ້ ບໍ່ຈຳຕ້ອງກ່າວເຖິງເມື່ອມານດານັ້ນສົ່ງທູດມາ ເພິ່ງໄປດ້ວຍຕັ້ງໃຈວ່າ "ເຮົາຈັກສະແຫວງຫາຄິລານະພັດ ຄິລານຸປັດຖາກພັດ ຫຼື ຄິລານະເພສັດ ຈັກຖາມອາການຫຼືຈັກພະຍາບານ" ແຕ່ເພິ່ງກັບມາພາຍໃນ ໗ ວັນ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ບິດາຂອງພິກຂຸເປັນໄຂ້ ຖ້າບິດານັ້ນ ຈະເພິ່ງສົ່ງທູດໄປໃນສຳນັກຂອງພິກຂຸຜູ້ເປັນບຸດວ່າ "ຂ້ານ້ອຍເປັນໄຂ້ ຂໍບຸດຂອງຂ້ານ້ອຍຈົ່ງມາ ຂ້ານ້ອຍປະສົງໃຫ້ມາ" ພິກຂຸທັງຫຼາຍ ແມ່ນບິດານັ້ນຈະບໍ່ສົ່ງທູດມາ ກໍໄປດ້ວຍສັດຕາຫະກະຣະນີຍະໄດ້ ບໍ່ຈຳຕ້ອງກ່າວ ເຖິງເມື່ອບິດານັ້ນສົ່ງທູດມາ ເພິ່ງໄປດ້ວຍຕັ້ງໃຈວ່າ "ເຮົາຈັກສະແຫວງຫາຄິລານະພັດ ຄິລານຸປັດຖາກພັດ ຫຼື ຄິລານະເພສັດ ຈັກຖາມອາການ ຫຼືຈັກພະຍາບານ" ແຕ່ເພິ່ງກັບມາພາຍໃນ ໗ ວັນ

# ໑໑໘. ປະຫິຕານຸຊານະນາ

## ວ່າດ້ວຍຊົງອະນຸຍາດສັດຕາຫະກະຣະນີຍະເມື່ອອ້າຍນ້ອງຊາຍເປັນຕົ້ນສົ່ງທູດມາ

[໑໙໗] ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ອ້າຍນ້ອງຊາຍຂອງພິກຂຸເປັນໄຂ້ ຖ້າອ້າຍນ້ອງຊາຍນັ້ນ ຈະເພິ່ງສົ່ງທູດໄປໃນສຳນັກພິກຂຸຜູ້ເປັນອ້າຍນ້ອງຊາຍວ່າ "ຂ້ານ້ອຍເປັນໄຂ້ ຂໍອ້າຍນ້ອງຊາຍຂອງຂ້ານ້ອຍຈົ່ງມາ ຂ້ານ້ອຍປະສົງໃຫ້ມາ" ພິກຂຸທັງຫຼາຍ ເມື່ອອ້າຍນ້ອງຊາຍ ນັ້ນສົ່ງທູດມາ ເພິ່ງໄປດ້ວຍສັດຕາຫະກະຣະນີຍະໄດ້ ແຕ່ເມື່ອອ້າຍນ້ອງຊາຍນັ້ນບໍ່ສົ່ງທູດມາ ບໍ່ເພິ່ງໄປ (ເມື່ອໄປດ້ວຍສັດຕາຫະກະຣະນີຍະ) ເພິ່ງກັບມາພາຍໃນ ໗ ວັນ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ເອື້ອຍນ້ອງສາວຂອງພິກຂຸເປັນໄຂ້ ຖ້າເອື້ອຍນ້ອງສາວນັ້ນ ຈະເພິ່ງສົ່ງທູດໄປໃນສຳນັກຂອງພິກຂຸຜູ້ເປັນອ້າຍນ້ອງຊາຍວ່າ "ຂ້ານ້ອຍເປັນໄຂ້ ຂໍອ້າຍ ນ້ອງຊາຍຂອງຂ້ານ້ອຍຈົ່ງມາ ຂ້ານ້ອຍປະສົງໃຫ້ມາ" ພິກຂຸທັງຫຼາຍ ເມື່ອເອື້ອຍນ້ອງສາວນັ້ນສົ່ງທູດມາ ເພິ່ງໄປດ້ວຍສັດຕາຫະກະຣະນີຍະໄດ້ ແຕ່ເມື່ອເອື້ອຍນ້ອງສາວນັ້ນບໍ່ສົ່ງທູດມາ ບໍ່ເພິ່ງໄປ (ເມື່ອໄປດ້ວຍສັດຕາຫະກະຣະນີຍະ) ເພິ່ງກັບມາພາຍໃນ ໗ ວັນ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ຍາດຂອງພິກຂຸເປັນໄຂ້ ຖ້າຍາດນັ້ນຈະເພິ່ງສົ່ງທູດໄປໃນສຳນັກພິກຂຸວ່າ "ຂ້ານ້ອຍເປັນໄຂ້ ຂໍພິກຂຸຈົ່ງມາ ຂ້ານ້ອຍປະສົງໃຫ້ມາ" ພິກຂຸທັງຫຼາຍ ເມື່ອຍາດນັ້ນສົ່ງທູດມາ ເພິ່ງໄປດ້ວຍສັດຕາຫະກະຣະນີຍະໄດ້ ແຕ່ເມື່ອຍາດນັ້ນບໍ່ສົ່ງທູດມາ ບໍ່ເພິ່ງໄປ (ເມື່ອໄປດ້ວຍສັດຕາຫະກະຣະນີຍະ) ເພິ່ງກັບມາພາຍໃນ ໗ ວັນ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ບຸຣຸດຜູ້ອາໄສຢູ່ກັບພິກຂຸເປັນໄຂ້ ຖ້າບຸຣຸດນັ້ນຈະເພິ່ງສົ່ງທູດໄປໃນສຳນັກພິກຂຸວ່າ "ຂ້ານ້ອຍເປັນໄຂ້ ຂໍອາຣາດທະນາພິກຂຸທັງຫຼາຍມາ ຂ້ານ້ອຍ

ປະສົງໃຫ້ມາ" ພິກຂຸທັງຫຼາຍ ເມື່ອບຸຣຸດນັ້ນສົ່ງທູດມາ ເພິ່ງໄປດ້ວຍສັດຕາຫະກະຣະນີຍະໄດ້ ແຕ່ເມື່ອບຸຣຸດນັ້ນບໍ່ສົ່ງທູດມາ ບໍ່ເພິ່ງໄປ (ເມື່ອໄປດ້ວຍສັດຕາຫະກະຣະນີຍະ) ເພິ່ງກັບມາພາຍໃນ ໗ ວັນ

### ຊົງອະນຸຍາດສັດຕາຫະກະຣະນີຍະສະເພາະກິດຂອງສົງ

ສະໄໝນັ້ນ ວິຫານຂອງສົງທັກເພ ອຸປາສິກຄົນໜຶ່ງໄດ້ຕັດເຄື່ອງທັບພະສຳພາຣະຖິ້ມໄວ້ໃນປ່າອຸປາສິກນັ້ນໄດ້ສົ່ງທູດໄປໃນສຳນັກພິກຂຸທັງຫຼາຍວ່າ "ຖ້າພິກຂຸທັງຫຼາຍ ຈະເພິ່ງຂົນເຄື່ອງທັບພະສຳພາຣະນັ້ນມາໄດ້ ຂ້ານ້ອຍຂໍຖວາຍເຄື່ອງທັບພະສຳພາຣະນັ້ນ" ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໄປດ້ວຍສັດຕາຫະກະຣະນີຍະໄດ້ ແຕ່ເພິ່ງກັບມາພາຍໃນ ໗ ວັນ"

## ໑໑໖. ອັນຕະລາຍະອະນາປັດຕິວັດສະເສທະວາຣະ

### ວ່າດ້ວຍການຂາດພັນສາໂດຍບໍ່ຕ້ອງອາບັດໃນເມື່ອມີອັນຕະລາຍ

### ເລື້ອງສັດຮ້າຍບຽດບຽນ

[໔໐໐] ສະໄໝນັ້ນ ພິກຂຸທັງຫຼາຍ ເຂົ້າຈຳພັນສາໃນອາວາດແຫ່ງໜຶ່ງໃນແຄວັນໂກສົນ ຖືກສັດຮ້າຍບຽດບຽນ ມັນຈັບເອົາໄວ້ແດ່ ແລ່ນໄລ່ໄປຮອບ ໆ ແດ່ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ພິກຂຸທັງຫຼາຍເຂົ້າຈຳພັນສາຖືກສັດຮ້າຍບຽດບຽນ ມັນຈັບເອົາໄວ້ແດ່ ແລ່ນໄລ່ໄປຮອບ ໆ ແດ່ ພິກຂຸເຫຼົ່ານັ້ນ ເພິ່ງຫຼີກໄປດ້ວຍສຳຄັນວ່າ "ນັ້ນແມ່ນອັນຕະລາຍ" ບໍ່ຕ້ອງອາບັດເນື່ອງຈາກຂາດພັນສາ

### ເລື້ອງງູບຽດບຽນ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸທັງຫຼາຍເຂົ້າຈຳພັນສາ ຖືກງູບຽດບຽນ ມັນຂົບກັດເອົາແດ່ ເລືອໄລ່ໄປຮອບ ໆ ແດ່ ພິກຂຸເຫຼົ່ານັ້ນ ເພິ່ງຫຼີກໄປດ້ວຍສຳຄັນວ່າ "ນັ້ນແມ່ນອັນຕະລາຍ" ບໍ່ຕ້ອງອາບັດເນື່ອງຈາກຂາດພັນສາ

## ເລື້ອງພວກໂຈນບຽດບຽນ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸທັງຫຼາຍເຂົ້າຈຳພັນສາ ຖືກພວກໂຈນບຽດບຽນ ມັນປຸ້ນແດ່ ທຸ້ມຕີແດ່ ພິກຂຸເຫຼົ່ານັ້ນ ເພິ່ງຫຼີກໄປດ້ວຍສຳຄັນວ່າ ນັ້ນແມ່ນອັນຕະລາຍ" ບໍ່ຕ້ອງອາບັດເນື່ອງຈາກຂາດພັນສາ

## ເລື້ອງຜີສາດລົບກວນ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸທັງຫຼາຍເຂົ້າຈຳພັນສາ ຖືກພວກຜີສາດລົບກວນ ຖືກມັນເຂົ້າສິງແດ່ ຂ້າເອົາແດ່ ພິກຂຸເຫຼົ່ານັ້ນ ເພິ່ງຫຼີກໄປດ້ວຍສຳຄັນວ່າ "ນັ້ນແມ່ນອັນຕະລາຍ" ບໍ່ຕ້ອງອາບັດເນື່ອງຈາກຂາດພັນສາ

## ເລື້ອງໝູ່ບ້ານຖືກໄຟໄໝ້

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ເມື່ອພິກຂຸທັງຫຼາຍ ເຂົ້າຈຳພັນສາ ໝູ່ບ້ານທີ່ຢູ່ຖືກໄຟໄໝ້ ພິກຂຸທັງຫຼາຍ ລຳບາກດ້ວຍບິນທະບາດ ພິກຂຸເຫຼົ່ານັ້ນ ເພິ່ງຫຼີກໄປດ້ວຍສຳຄັນວ່າ "ນັ້ນແມ່ນອັນຕະລາຍ" ບໍ່ຕ້ອງອາບັດເນື່ອງຈາກຂາດພັນສາ

## ເລື້ອງເສນາສະນະຖືກໄຟໄໝ້

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ເມື່ອພິກຂຸທັງຫຼາຍເຂົ້າຈຳພັນສາ ເສນາສະນະຖືກໄຟໄໝ້ ພິກຂຸທັງຫຼາຍ ເດືອດຮ້ອນດ້ວຍເສນາສະນະ ພິກຂຸເຫຼົ່ານັ້ນ ເພິ່ງຫຼີກໄປດ້ວຍສຳຄັນວ່າ "ນັ້ນແມ່ນອັນຕະລາຍ" ບໍ່ຕ້ອງອາບັດເນື່ອງຈາກຂາດພັນສາ

## ເລື້ອງໝູ່ບ້ານຖືກນ້ຳຖ້ວມ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ເມື່ອພິກຂຸທັງຫຼາຍເຂົ້າຈຳພັນສາ ໝູ່ບ້ານຖືກນ້ຳຖ້ວມ ພິກຂຸທັງຫຼາຍ ລຳບາກດ້ວຍບິນທະບາດ ພິກຂຸເຫຼົ່ານັ້ນ ເພິ່ງຫຼີກໄປດ້ວຍສຳຄັນວ່າ "ນັ້ນແມ່ນອັນຕະລາຍ" ບໍ່ຕ້ອງອາບັດເນື່ອງຈາກຂາດພັນສາ

## ເລື້ອງເສນາສະນະຖືກນ້ຳຖ້ວມ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ເມື່ອພິກຂຸທັງຫຼາຍເຂົ້າຈຳພັນສາ ເສນາສະນະຖືກນ້ຳຖ້ວມ ພິກຂຸທັງຫຼາຍເດືອດຮ້ອນດ້ວຍເສນາສະນະ ພິກຂຸເຫຼົ່ານັ້ນ ເພິ່ງຫຼີກໄປດ້ວຍ ສຳຄັນວ່າ "ນັ້ນແມ່ນອັນຕະລາຍ" ບໍ່ຕ້ອງອາບັດເນື່ອງຈາກຂາດພັນສາ

## ເລື້ອງຊາວບ້ານອົບພະຍົບໄປຍ້ອນໂຈຣະໄພ

[໔໐໑] ສະໄໝນັ້ນ ພິກຂຸທັງຫຼາຍເຂົ້າຈຳພັນສາໃນອາວາດແຫ່ງໜຶ່ງ ຊາວບ້ານອົບພະຍົບໄປຍ້ອນໂຈຣະໄພ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຕາມຊາວບ້ານໄປ"

## ເລື້ອງຊົງອະນຸຍາດໃຫ້ຕາມທາຍົກມີຈຳນວນຫຼາຍກວ່າ

ຊາວບ້ານແຕກແຍກເປັນສອງທາງ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຕາມຊາວບ້ານທີ່ມີຫຼາຍກວ່າໄປ"

## ຊາວບ້ານທີ່ຫຼາຍກວ່າບໍ່ມີສັດທາບໍ່ເຫຼື້ອມໃສ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຕາມຊາວບ້ານທີ່ມີສັດທາເຫຼື້ອມໃສໄປ"

## ເລື້ອງບໍ່ໄດ້ໂພຊະນະທຳມະດາຫຼືປະນີດເປັນຕົ້ນ

ສະໄໝນັ້ນ ພິກຂຸທັງຫຼາຍເຂົ້າຈຳພັນສາໃນອາວາດແຫ່ງໜຶ່ງໃນແຄວັນໂກສົນ ບໍ່ໄດ້ໂພຊະນາຫານທຳມະດາ ຫຼື ປະນີດບໍລິບູນຕາມຕ້ອງການ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ພິກຂຸທັງຫຼາຍເຂົ້າຈຳພັນສາ ບໍ່ໄດ້ໂພຊະນາຫານທຳມະດາ ຫຼື ປະນີດບໍລິບູນຕາມຕ້ອງການ ພິກຂຸເຫຼົ່ານັ້ນ ເພິ່ງຫຼີກໄປດ້ວຍສຳຄັນວ່າ "ນັ້ນແມ່ນອັນຕະລາຍ" ບໍ່ຕ້ອງອາບັດເນື່ອງຈາກຂາດພັນສາ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸທັງຫຼາຍເຂົ້າຈຳພັນສາ ໄດ້ໂພຊະນາຫານທຳມະດາ ຫຼື ປະນີດບໍລິບູນຕາມຕ້ອງການ ແຕ່ບໍ່ໄດ້ໂພຊະນາຫານທີ່ສະບາຍ ພິກຂຸເຫຼົ່ານັ້ນ ເພິ່ງຫຼີກໄປດ້ວຍສຳຄັນວ່າ "ນັ້ນແມ່ນອັນຕະລາຍ" ບໍ່ຕ້ອງອາບັດເນື່ອງຈາກຂາດພັນສາ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸທັງຫຼາຍ ເຂົ້າຈຳພັນສາ ໄດ້ໂພຊະນາຫານທຳມະດາ ຫຼື ປະນີດບໍລິບູນຕາມຕ້ອງການ ແລະໄດ້ໂພຊະນາຫານທີ່ສະບາຍ ແຕ່ບໍ່ໄດ້ເພສັດທີ່

ສະບາຍ ພິກຂຸເຫຼົ່ານັ້ນ ເພິ່ງຫຼີກໄປດ້ວຍສຳຄັນວ່າ “ນັ້ນແມ່ນອັນຕະລາຍ” ບໍ່ຕ້ອງອາບັດ ເນື່ອງຈາກຂາດພັນສາ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸທັງຫຼາຍ ເຂົ້າຈຳພັນສາ ໄດ້ໂພຊະນາຫານທຳມະດາ ຫຼື ປະນີດບໍລິບູນຕາມຕ້ອງການ ໄດ້ໂພຊະນາຫານທີ່ສະບາຍ ໄດ້ເພສັດທີ່ສະບາຍ ແຕ່ບໍ່ໄດ້ອຸປັດຖາກຜູ້ສົມຄວນ ພິກຂຸເຫຼົ່ານັ້ນ ເພິ່ງຫຼີກໄປດ້ວຍສຳຄັນວ່າ “ນັ້ນແມ່ນອັນຕະລາຍ” ບໍ່ຕ້ອງອາບັດເນື່ອງຈາກຂາດພັນສາ

## ເລື້ອງສະຕີນິມົນ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ສະຕີນິມົນພິກຂຸຜູ້ເຂົ້າຈຳພັນສາວ່າ “ທ່ານຈົ່ງມາເທີ້ນຂ້ານ້ອຍ ຂ້ານ້ອຍຈະຖວາຍເງິນ ຄຳ ນາ ສວນ ງົວເຖິກ ງົວແມ່ ຂ້າທາດ ທາສີແກ່ທ່ານ ຫຼື ຈະຍົກລູກສາວໃຫ້ເປັນພັນລະຍາຂອງທ່ານ ຂ້ານ້ອຍຈະເປັນພັນລະຍາຂອງທ່ານ ຫຼື ຈະນຳສະຕີ ອື່ນມາໃຫ້ເປັນພັນລະຍາຂອງທ່ານ” ໃນເລື້ອງນັ້ນ ຖ້າພິກຂຸຄິດແນວນີ້ວ່າ ພຣະຜູ້ມີພຣະພາກເຈົ້າຕັດວ່າ ຈິດປ່ຽນແປງໄດ້ໄວຫຼາຍ ຖ້າຂືນຢູ່ອີກຈັກເປັນອັນຕະລາຍແກ່ພົມມະຈັນຂອງເຮົາ ເພິ່ງຫຼີກໄປສາ ບໍ່ຕ້ອງອາບັດເນື່ອງຈາກຂາດພັນສາ

## ເລື້ອງຍິງແພດສະຫຍານິມົນ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ຍິງແພດສະຫຍານິມົນພິກຂຸຜູ້ເຂົ້າຈຳພັນສາ

ຯລຯ ຍິງສາວເທື້ອນິມົນ ຯລຯ

ຯລຯ ບັນເດາະນິມົນ ຯລຯ

ຯລຯ ພວກຍາດນິມົນ ຯລຯ

ຯລຯ ພຣະຣາຊາທັງຫຼາຍນິມົນ ຯລຯ

ຯລຯ ພວກໂຈນນິມົນ ຯລຯ

ຯລຯ ພວກນັກເລງນິມົນພິກຂຸຜູ້ເຂົ້າຈຳພັນສາວ່າ “ທ່ານຈົ່ງມາເທີ້ນຂ້ານ້ອຍ ພວກເຮົາຈະຖວາຍເງິນ ຄຳ ນາ ສວນ ງົວເຖິກ ງົວແມ່ ຂ້າທາດ ທາສີແກ່ທ່ານ ຫຼື ຈະຍົກລູກສາວໃຫ້ເປັນພັນລະຍາຂອງທ່ານ ຫຼື ຈະນຳສະຕີອື່ນມາໃຫ້ເປັນພັນລະຍາຂອງທ່ານ” ໃນເລື້ອງນັ້ນ ຖ້າພິກຂຸຄິດແນວນີ້ວ່າ ພຣະຜູ້ມີພຣະພາກເຈົ້າຕັດວ່າ ຈິດສາມາດປ່ຽນແປງໄດ້ໄວ ຖ້າຂືນຢູ່ຕໍ່ໄປອີກຈັກເປັນອັນຕະລາຍແກ່ພົມມະຈັນຂອງເຮົາກໍໄດ້ ເພິ່ງຫຼີກໄປສາ ບໍ່ຕ້ອງອາບັດເນື່ອງຈາກຂາດພັນສາ

## ເລື້ອງພົບຂຸມຊັບ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸເຂົ້າຈຳພັນສາ ພົບຂຸມຊັບບໍ່ມີເຈົ້າຂອງໃນເລື້ອງນັ້ນ ຖ້າພິກຂຸຄິດແນວນີ້ວ່າ ພຣະຜູ້ມີພຣະພາກເຈົ້າຕັດວ່າ ຈິດສາມາດປ່ຽນແປງໄດ້ໄວ ຖ້າຢູ່ອີກຈັກເປັນອັນຕະລາຍແກ່ພົມມະຈັນຂອງເຮົາກໍໄດ້ ເພິ່ງຫຼີກໄປສາ ບໍ່ຕ້ອງອາບັດເນື່ອງຈາກຂາດພັນສາ

## ໑໑໔. ສັງຄະເພທະອະນາປັດຕິວັດສະເສທະວາຣະ

## ວ່າດ້ວຍການຂາດພັນສາໂດຍບໍ່ຕ້ອງອາບັດໃນເມື່ອມີຜູ້ພະຍາຍາມທຳລາຍສົງ

## ເລື້ອງທຳລາຍສົງ ໗ ກໍລະນີ

[໔໐໔] ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ພິກຂຸເຂົ້າຈຳພັນສາ ເຫັນພິກຂຸຫຼາຍອົງກຳລັງພຽນພະຍາຍາມທຳລາຍສົງ ໃນເລື້ອງນັ້ນ ຖ້າພິກຂຸຄິດແນວນີ້ວ່າ "ພຣະຜູ້ມີພຣະພາກເຈົ້າ ຕັດວ່າການທຳລາຍສົງເປັນກຳໜັກ ເມື່ອເຮົາຍັງຢູ່ພ້ອມໜ້າ ຂໍສົງຢ່າແຕກກັນເລີຍ" ເພິ່ງຫຼີກໄປສາ ບໍ່ຕ້ອງອາບັດເນື່ອງຈາກຂາດພັນສາ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸທັງຫຼາຍເຂົ້າຈຳພັນສາໄດ້ຍິນຂ່າວວ່າ ພິກຂຸຫຼາຍອົງໃນອາວາດນັ້ນ ກຳລັງພຽນພະຍາຍາມທຳລາຍສົງ ໃນເລື້ອງນັ້ນ ຖ້າພິກຂຸຄິດແນວນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຕັດວ່າ ການທຳລາຍສົງເປັນກຳໜັກ ເມື່ອເຮົາຍັງຢູ່ພ້ອມໜ້າ ຂໍສົງຢ່າແຕກກັນເລີຍ" ເພິ່ງຫຼີກໄປສາ ບໍ່ຕ້ອງອາບັດເນື່ອງຈາກຂາດພັນສາ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸເຂົ້າຈຳພັນສາໄດ້ຍິນຂ່າວວ່າ ພິກຂຸຫຼາຍອົງໃນອາວາດນັ້ນ ກຳລັງພຽນພະຍາຍາມທຳລາຍສົງ ໃນເລື້ອງນັ້ນ ຖ້າພິກຂຸຄິດແນວນີ້ວ່າ "ພິກຂຸເຫຼົ່ານັ້ນລ້ວນເປັນມິດຂອງເຮົາ ເຮົາຈັກວ່າກ່າວພິກຂຸເຫຼົ່ານັ້ນວ່າ ທ່ານທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຕັດວ່າ ການທຳລາຍສົງເປັນກຳໜັກ ພວກທ່ານຢ່າພໍໃຈການທຳລາຍສົງເລີຍ ພິກຂຸເຫຼົ່ານັ້ນຈັກເຮັດຕາມຄຳຂອງເຮົາ ຈັກເຊື່ອຟັງ ຈັກງ່ຽງຫູ" ເພິ່ງຫຼີກໄປສາ ບໍ່ຕ້ອງອາບັດເນື່ອງຈາກຂາດພັນສາ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸເຂົ້າຈຳພັນສາໄດ້ຍິນຂ່າວວ່າ ພິກຂຸຫຼາຍອົງໃນອາວາດນັ້ນ ກຳລັງພຽນພະຍາຍາມທຳລາຍສົງ ໃນເລື້ອງນັ້ນ ຖ້າພິກຂຸຄິດແນວນີ້ວ່າ "ພິກຂຸເຫຼົ່ານັ້ນບໍ່ແມ່ນມິດຂອງເຮົາ ແຕ່ພິກຂຸທັງຫຼາຍທີ່ເປັນມິດກັບພິກຂຸເຫຼົ່ານັ້ນເປັນມິດຂອງເຮົາ ເຮົາຈັກບອກພິກຂຸເຫຼົ່ານັ້ນ ພິກຂຸເຫຼົ່ານັ້ນທີ່ເຮົາບອກ ກໍຈັກວ່າກ່າວພິກຂຸເຫຼົ່ານັ້ນວ່າ ທ່ານທັງຫຼາຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ການທຳລາຍສົງເປັນກຳໜັກ ພວກທ່ານຢ່າພໍໃຈການທຳລາຍສົງເລີຍ ພິກຂຸເຫຼົ່ານັ້ນ ຈັກເຮັດຕາມຄຳຂອງພິກຂຸເຫຼົ່ານັ້ນ ຈັກເຊື່ອຟັງ ຈັກງ່ຽງຫູ" ເພິ່ງຫຼີກໄປສາ ບໍ່ຕ້ອງອາບັດເນື່ອງຈາກຂາດພັນສາ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸເຂົ້າຈຳພັນສາໄດ້ຍິນຂ່າວວ່າ ພິກຂຸຫຼາຍອົງໃນອາວາດນັ້ນຈະທຳລາຍສົງ ໃນເລື້ອງນັ້ນ ຖ້າພິກຂຸຄິດແນວນີ້ວ່າ "ພິກຂຸເຫຼົ່ານັ້ນ ລ້ວນເປັນມິດຂອງເຮົາ ເຮົາຈັກວ່າກ່າວພິກຂຸເຫຼົ່ານັ້ນວ່າ ທ່ານທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຕັດວ່າ ການທຳລາຍສົງເປັນກຳໜັກ ພວກທ່ານຢ່າພໍໃຈການທຳລາຍສົງເລີຍ ພິກຂຸເຫຼົ່ານັ້ນຈັກເຮັດຕາມຄຳຂອງເຮົາ ຈັກເຊື່ອຟັງ ຈັກງ່ຽງຫູ" ເພິ່ງຫຼີກໄປສາ ບໍ່ຕ້ອງອາບັດເນື່ອງຈາກຂາດພັນສາ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸເຂົ້າຈຳພັນສາໄດ້ຍິນຂ່າວວ່າ ພິກຂຸຫຼາຍອົງໃນອາວາດນັ້ນໄດ້ທຳລາຍສົງແລ້ວ ໃນເລື້ອງນັ້ນ ຖ້າພິກຂຸຄິດແນວນີ້ວ່າ "ພິກຂຸເຫຼົ່ານັ້ນບໍ່ແມ່ນມິດຂອງເຮົາເລີຍ ແຕ່ພິກຂຸທັງຫຼາຍທີ່ເປັນມິດກັບພິກຂຸເຫຼົ່ານັ້ນເປັນມິດຂອງເຮົາ ເຮົາຈັກບອກພິກຂຸເຫຼົ່ານັ້ນ ພິກຂຸເຫຼົ່ານັ້ນທີ່ເຮົາບອກ ກໍຈັກວ່າກ່າວພິກຂຸເຫຼົ່ານັ້ນວ່າ ທ່ານທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຕັດວ່າ ການທຳລາຍສົງເປັນກຳໜັກ ພວກທ່ານຢ່າພໍໃຈການທຳລາຍສົງເລີຍ ພິກຂຸເຫຼົ່ານັ້ນຈັກເຮັດຕາມຄຳຂອງພິກຂຸເຫຼົ່ານັ້ນ ຈັກເຊື່ອຟັງ ຈັກງ່ຽງຫູ" ເພິ່ງຫຼີກໄປສາ ບໍ່ຕ້ອງອາບັດເນື່ອງຈາກຂາດພັນສາ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸເຂົ້າຈຳພັນສາໄດ້ຍິນຂ່າວວ່າ ພິກຂຸນີຫຼາຍອົງໃນອາວາດນັ້ນ ກຳລັງພຽນພະຍາຍາມທຳລາຍສົງ ໃນເລື້ອງນັ້ນ ຖ້າພິກຂຸຄິດແນວນີ້ວ່າ "ພິກຂຸນີເຫຼົ່ານັ້ນລ້ວນເປັນມິດຂອງເຮົາ ເຮົາຈັກວ່າກ່າວພິກຂຸນີເຫຼົ່ານັ້ນວ່າ ນາງທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຕັດວ່າ ການທຳລາຍສົງເປັນກຳໜັກ ພວກນາງ ຢ່າພໍໃຈການທຳລາຍສົງເລີຍ ພິກຂຸນີເຫຼົ່ານັ້ນຈັກເຮັດຕາມຄຳຂອງເຮົາ ຈັກເຊື່ອຟັງ ຈັກງ່ຽງຫູ" ເພິ່ງຫຼີກໄປສາ ບໍ່ຕ້ອງອາບັດເນື່ອງຈາກຂາດພັນສາ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸເຂົ້າຈຳພັນສາໄດ້ຍິນຂ່າວວ່າ ພິກຂຸນີຫຼາຍອົງໃນອາວາດນັ້ນ ກຳລັງພຽນພະຍາຍາມທຳລາຍສົງ ໃນເລື້ອງນັ້ນ ຖ້າພິກຂຸຄິດແນວນີ້ວ່າ "ພິກຂຸນີເຫຼົ່ານັ້ນບໍ່ແມ່ນມິດຂອງເຮົາ ແຕ່ພິກຂຸນີທັງຫຼາຍທີ່ເປັນມິດກັບພິກຂຸນີເຫຼົ່ານັ້ນເປັນມິດຂອງເຮົາ ເຮົາຈັກບອກພິກຂຸນີເຫຼົ່ານັ້ນ ພິກຂຸນີເຫຼົ່ານັ້ນທີ່ເຮົາບອກ ກໍຈັກວ່າກ່າວ ພິກຂຸນີທີ່ພຽນພະຍາຍາມທຳລາຍສົງເຫຼົ່ານັ້ນວ່າ ນາງທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຕັດວ່າ ການທຳລາຍສົງເປັນກຳໜັກ ພວກນາງຢ່າພໍໃຈການທຳລາຍສົງເລີຍ ພິກຂຸນີເຫຼົ່ານັ້ນຈັກເຮັດຕາມຄຳຂອງພິກຂຸນີເຫຼົ່ານັ້ນ ຈັກເຊື່ອຟັງ ຈັກງ່ຽງຫູ" ເພິ່ງຫຼີກໄປສາ ບໍ່ຕ້ອງອາບັດເນື່ອງຈາກຂາດພັນສາ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸເຂົ້າຈຳພັນສາໄດ້ຍິນຂ່າວວ່າ ພິກຂຸນີຫຼາຍອົງ

ໃນອາວາດນັ້ນຈະທຳລາຍສົງ ໃນເລື້ອງນັ້ນ ຖ້າພິກຂຸຄິດແນວນີ້ວ່າ "ພິກຂຸນີເຫຼົ່ານັ້ນ ລ້ວນເປັນມິດຂອງເຮົາ ເຮົາຈັກວ່າກ່າວພິກຂຸນີເຫຼົ່ານັ້ນວ່າ ນາງທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຕັດວ່າ ການທຳລາຍສົງເປັນກຳໜັກ ພວກນາງຢ່າພໍໃຈການທຳລາຍສົງເລີຍ ພິກຂຸນີເຫຼົ່ານັ້ນຈັກເຮັດຕາມຄຳຂອງເຮົາ ຈັກເຊື່ອຟັງ ຈັກງ່ຽງຫູ" ເພິ່ງຫຼີກໄປສາ ບໍ່ຕ້ອງອາບັດເນື່ອງຈາກຂາດພັນສາ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸເຂົ້າຈຳພັນສາໄດ້ຍິນຂ່າວວ່າ ພິກຂຸນີຫຼາຍອົງໃນອາວາດນັ້ນໄດ້ທຳລາຍສົງແລ້ວ ໃນເລື້ອງນັ້ນ ຖ້າພິກຂຸຄິດແນວນີ້ວ່າ "ພິກຂຸນີເຫຼົ່ານັ້ນ ບໍ່ແມ່ນມິດຂອງເຮົາ ແຕ່ພິກຂຸນີທັງຫຼາຍທີ່ເປັນມິດກັບພິກຂຸນີເຫຼົ່ານັ້ນເປັນມິດຂອງເຮົາ ເຮົາຈັກບອກພິກຂຸນີເຫຼົ່ານັ້ນ ພິກຂຸນີເຫຼົ່ານັ້ນທີ່ເຮົາບອກ ກໍຈັກວ່າກ່າວພິກຂຸນີທີ່ທຳລາຍສົງເຫຼົ່ານັ້ນວ່ານາງທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຕັດວ່າ ການທຳລາຍສົງເປັນກຳໜັກ ພວກນາງຢ່າພໍໃຈການທຳລາຍສົງເລີຍ ພິກຂຸນີເຫຼົ່ານັ້ນ ຈັກເຮັດຕາມຄຳຂອງພິກຂຸນີເຫຼົ່ານັ້ນ ຈັກເຊື່ອຟັງ ຈັກງ່ຽງຫູ" ເພິ່ງຫຼີກໄປສາ ບໍ່ຕ້ອງອາບັດເນື່ອງຈາກຂາດພັນສາ

# ໑໑໕. ວະຊາທິວັດສູປະຄະມະນະ

## ວ່າດ້ວຍການເຂົ້າຈຳພັນສາໃນຄອກງົວເປັນຕົ້ນ

### ເລື້ອງເຂົ້າຈຳພັນສາໃນຄອກງົວ

[໔໐໓] ສະໄໝນັ້ນ ພິກຂຸອົງໜຶ່ງຕ້ອງການຈະເຂົ້າຈຳພັນສາໃນຄອກງົວ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ເຂົ້າຈຳພັນສາໃນຄອກງົວໄດ້" ຄອກງົວຍ້າຍໄປ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ເດີນທາງໄປກັບຄອກງົວໄດ້"

### ເລື້ອງເຂົ້າຈຳພັນສາໃນໝູ່ກວຽນ

ສະໄໝນັ້ນ ພິກຂຸອົງໜຶ່ງ ເມື່ອໃກ້ວັນເຂົ້າພັນສາຕ້ອງການຈະໄປກັບໝູ່ກວຽນ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ເຂົ້າຈຳພັນສາໃນໝູ່ກວຽນໄດ້"

## ເລື້ອງເຂົ້າຈຳພັນສາໃນເຮືອ

ສະໄໝນັ້ນ ພິກຂຸອົງໜຶ່ງເມື່ອໃກ້ວັນເຂົ້າພັນສາຕ້ອງການຈະເດີນທາງໄປກັບເຮືອ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍເຮົາອະນຸຍາດໃຫ້ເຂົ້າຈຳພັນສາໃນເຮືອໄດ້"

# ໑໑໖. ວັດສານຸປະຄັນຕັບພັດຖານ

## ວ່າດ້ວຍສະຖານທີ່ບໍ່ຄວນເຂົ້າຈຳພັນສາ

## ເລື້ອງເຂົ້າຈຳພັນສາໃນໂກນໄມ້

[໔໐໔] ສະໄໝນັ້ນ ພິກຂຸທັງຫຼາຍ ເຂົ້າຈຳພັນສາໃນໂກນໄມ້ ມະນຸດທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ "ເໝືອນພວກຜີສາດ" ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງເຂົ້າຈຳພັນສາໃນໂກນໄມ້ ອົງໃດເຂົ້າຈຳ ຕ້ອງອາບັດທຸກກົດ"

## ເລື້ອງເຂົ້າຈຳພັນສາເຮືອນເທິງຕົ້ນໄມ້

ສະໄໝນັ້ນ ພິກຂຸທັງຫຼາຍ ເຂົ້າຈຳພັນສາເຮືອນເທິງຕົ້ນໄມ້ ມະນຸດທັງຫຼາຍ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເໝືອນພວກພານເນື້ອ" ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງເຂົ້າຈຳພັນສາເຮືອນເທິງຕົ້ນໄມ້ ອົງໃດເຂົ້າຈຳ ຕ້ອງອາບັດທຸກກົດ"

## ເລື້ອງເຂົ້າຈຳພັນສາໃນທີ່ແຈ້ງ

ສະໄໝນັ້ນ ພິກຂຸທັງຫຼາຍເຂົ້າຈຳພັນສາໃນທີ່ແຈ້ງ ເມື່ອຝົນຕົກ ພາກັນແລ່ນເຂົ້າເຫງົ້າໄມ້ແດ່ ຊາຍຄາແດ່ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງເຂົ້າຈຳພັນສາໃນທີ່ແຈ້ງ ອົງໃດເຂົ້າຈຳ ຕ້ອງອາບັດທຸກກົດ"

## ເລື້ອງພິກຂຸບໍ່ມີເສນາສະນະຈຳພັນສາ

ສະໄໝນັ້ນ ພິກຂຸທັງຫຼາຍ ບໍ່ມີເສນາສະນະເປັນທີ່ເຂົ້າຈຳພັນສາ ເດືອດຮ້ອນຍ້ອນຄວາມໜາວແດ່ ຄວາມຮ້ອນແດ່ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ມີເສນາສະນະ ບໍ່ເພິ່ງເຂົ້າຈຳພັນສາ ອົງໃດເຂົ້າຈຳ ຕ້ອງອາບັດທຸກກົດ"

## ເລື້ອງເຂົ້າຈຳພັນສາໃນຕູບຜີ

ສະໄໝນັ້ນ ພິກຂຸທັງຫຼາຍເຂົ້າຈຳພັນສາໃນຕູບຜີ ມະນຸດທັງຫຼາຍພາກັນຕຳໜິ ປະນາມໂພນທະນາວ່າ "ເໝືອນພວກສັບປະເລີ"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງເຂົ້າຈຳພັນສາໃນຕູບຜີ ອົງໃດເຂົ້າຈຳ ຕ້ອງອາບັດທຸກກົດ"

## ເລື້ອງເຂົ້າຈຳພັນສາໃນຄັນຮົ່ມ

ສະໄໝນັ້ນ ພິກຂຸທັງຫຼາຍເຂົ້າຈຳພັນສາໃນຄັນຮົ່ມ ມະນຸດທັງຫຼາຍພາກັນຕຳໜິ ປະນາມໂພນທະນາວ່າ "ເໝືອນພວກຄົນລ້ຽງງົວ" ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງເຂົ້າຈຳພັນສາໃນຄັນຮົ່ມ ອົງໃດເຂົ້າຈຳ ຕ້ອງອາບັດທຸກກົດ"

## ເລື້ອງເຂົ້າຈຳພັນສາໃນໂອ່ງນ້ຳ

ສະໄໝນັ້ນ ພິກຂຸທັງຫຼາຍເຂົ້າຈຳພັນສາໃນໂອ່ງນ້ຳ ມະນຸດທັງຫຼາຍພາກັນຕຳໜິ ປະນາມ ໂພນທະນາວ່າ "ເໝືອນພວກເດຍຣະຖີ" ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງເຂົ້າຈຳພັນສາໃນໂອ່ງນ້ຳ ອົງໃດເຂົ້າຈຳ ຕ້ອງອາບັດທຸກກົດ"

# ໑໑໗. ອະທຳມິກະກະຕິກາ

## ວ່າດ້ວຍການຕັ້ງກະຕິກາບໍ່ຊອບທຳ

### ເລື້ອງຕັ້ງກະຕິກາບໍ່ຊອບທຳ

[໔໐໕] ສະໄໝນັ້ນ ພຣະສົງໃນນະຄອນສາວັດຖີໄດ້ຕັ້ງກະຕິກາແນວນີ້ວ່າ ໃນລະຫວ່າງພັນສາ ບໍ່ເພິ່ງໃຫ້ບັນພະຊາ ແຕ່ມີຫຼານຊາຍຂອງນາງວິສາຂາມິຄາຣະມາຕາເຂົ້າໄປຫາພິກຂຸທັງຫຼາຍເພື່ອຂໍບັນພະຊາ

ພິກຂຸທັງຫຼາຍ ກ່າວແນວນີ້ວ່າ "ທ່ານ  ພຣະສົງໄດ້ຕັ້ງກະຕິກາແນວນີ້ວ່າ ໃນລະຫວ່າງພັນສາ ບໍ່ເພິ່ງໃຫ້ບັນພະຊາ ທ່ານຈົ່ງຖ້າຈົນກວ່າພິກຂຸທັງຫຼາຍເຂົ້າຈຳພັນສາ ອອກພັນສາແລ້ວຈຶ່ງບວດໄດ້" ຕໍ່ມາ ພິກຂຸເຫຼົ່ານັ້ນອອກພັນສາແລ້ວ ໄດ້ກ່າວກັບຫຼານຊາຍຂອງນາງວິສາຂາມິຄາຣະມາຕາດັ່ງນີ້ວ່າ "ບັດນີ້ ທ່ານຈົ່ງມາບວດເທີ້ນ"

ຫຼານຊາຍຂອງນາງວິສາຂາມິຄາຣະມາຕານັ້ນ ກ່າວແນວນີ້ວ່າ "ພິກຂຸທັງຫຼາຍ ຖ້າຂ້າພະເຈົ້າເພິ່ງບັນພະຊາແລ້ວ ກໍເພິ່ງຍິນດີຢູ່ໄດ້ ແຕ່ບັດນີ້ຂ້າພະເຈົ້າຈັກບໍ່ບັນພະຊາແລ້ວ"

ນາງວິສາຂາມິຄາຣະມາຕາຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸທັງຫຼາຍຈຶ່ງໄດ້ຕັ້ງກະຕິກາແນວນີ້ວ່າ ໃນລະຫວ່າງພັນສາບໍ່ເພິ່ງໃຫ້ບັນພະຊາ ເວລາແນວໃດນໍ ບໍ່ເພິ່ງປະພຶດທຳ" ພິກຂຸທັງຫຼາຍ ໄດ້ຍິນນາງວິສາຂາມິຄາຣະມາຕາຕຳໜິ ປະນາມ ໂພນທະນາ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ບໍ່ເພິ່ງຕັ້ງກະຕິກາແນວນີ້ວ່າ ໃນລະຫວ່າງພັນສາ ບໍ່ເພິ່ງໃຫ້ບັນພະຊາ ສົງໝູ່ໃດຕັ້ງ ຕ້ອງອາບັດທຸກກົດ"

# ໑໑໘. ປະຕິດສະວະທຸກກະຕາປັດຕິ

## ວ່າດ້ວຍການຕ້ອງອາບັດທຸກກົດຍ້ອນຮັບຄຳ

### ເລື້ອງພຣະອຸປະນັນທະເຂົ້າຈຳພັນສາໃນອາວາດ ໒ ບ່ອນ

[໔໐໖] ສະໄໝນັ້ນ ທ່ານພຣະອຸປະນັນທະສາກະຍະບຸດໄດ້ຮັບຄຳກັບພຣະເຈົ້າປະເສນທິໂກສົນວ່າຈະເຂົ້າຈຳພັນສາໃນວັນເຂົ້າພັນສາຕົ້ນ ທ່ານກຳລັງໄປອາວາດນັ້ນ ລະຫວ່າງທາງໄດ້ເຫັນອາວາດ ໒ ບ່ອນ ມີຈີວອນຫຼາຍ ແລ້ວໄດ້ມີຄວາມຄິດດັ່ງນີ້ວ່າ "ຖ້າຈັ່ງໃດ ເຮົາເພິ່ງເຂົ້າຈຳ

ພັນສາໃນອາວາດ ໔ ບ່ອນນີ້ ເມື່ອເປັນແນວນີ້ ຈີວອນເປັນຈຳນວນຫຼາຍຈັກເກີດຂຶ້ນແກ່ເຮົາ" ຈຶ່ງເຂົ້າຈຳພັນສາໃນອາວາດ ໔ ບ່ອນນັ້ນ

ພຣະເຈົ້າປະເສນທິໂກສົນຊົງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸອຸປະນັນທະສາກະຍະບຸດໄດ້ຮັບຄຳຕໍ່ເຮົາໄວ້ວ່າ ຈະເຂົ້າຈຳພັນສາ ແຕ່ບໍ່ເຮັດຕາມຄຳເວົ້ານັ້ນບໍ ພຣະຜູ້ມີພຣະພາກເຈົ້າ ຊົງຕຳໜິການເວົ້າຕົວະ ຊົງສັນເສີນການງົດເວັ້ນຈາກການເວົ້າຕົວະ ໂດຍປະການຕ່າງ ໆ ບໍ່ແມ່ນບໍ?"

ພິກຂຸທັງຫຼາຍ ໄດ້ຍິນພຣະເຈົ້າປະເສນທິໂກສົນຕຳໜິ ປະນາມ ໂພນທະນາຢູ່ ບັນດາພິກຂຸຜູ້ມັກໜ້ອຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ທ່ານພຣະອຸປະນັນທະ ສາກະຍະບຸດໄດ້ຮັບຄຳກັບພຣະເຈົ້າປະເສນທິໂກສົນໄວ້ວ່າ ຈະເຂົ້າຈຳພັນສາ ແຕ່ບໍ່ເຮັດຕາມຄຳເວົ້ານັ້ນບໍ ພຣະຜູ້ມີພຣະພາກເຈົ້າ ຊົງຕຳໜິການເວົ້າຕົວະ ຊົງສັນເສີນການງົດເວັ້ນ ຈາກການເວົ້າຕົວະ ໂດຍປະການຕ່າງ ໆ ບໍ່ແມ່ນບໍ?" ຈຶ່ງນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມພິກຂຸສົງຍ້ອນເລື່ອງນີ້ເປັນຕົ້ນເຫດ ຊົງສອບຖາມທ່ານພຣະອຸປະນັນທະສາກະຍະບຸດວ່າ "ອຸປະນັນທະ ໄດ້ຂ່າວວ່າທ່ານໄດ້ຖວາຍປະຕິນຍາ ຕໍ່ພຣະເຈົ້າປະເສນທິໂກສົນວ່າ ຈະເຂົ້າຈຳພັນສາ ແຕ່ບໍ່ເຮັດຕາມປະຕິນຍານັ້ນແມ່ນບໍ?"

ທ່ານພຣະອຸປະນັນທະສາກະຍະບຸດທູນຮັບວ່າ "ແມ່ນແລ້ວ ຂ້ານ້ອຍ""

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດ ເປັນຫຍັງ ທ່ານໄດ້ຖວາຍປະຕິນຍາຕໍ່ພຣະເຈົ້າປະເສນທິໂກສົນວ່າ ຈະເຂົ້າຈຳພັນສາ ແຕ່ບໍ່ເຮັດຕາມປະຕິນຍານັ້ນ ເຮົາຕຳໜິການເວົ້າຕົວະ ສັນເສີນການງົດເວັ້ນຈາກການເວົ້າຕົວະ ໂດຍປະການຕ່າງ ໆ ບໍ່ແມ່ນບໍ? ການເຮັດແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ເມື່ອຊົງຕຳໜິແລ້ວຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍ ວ່າ

[໔໐໗] ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ພິກຂຸຮັບຄຳໄວ້ວ່າ ຈະເຂົ້າຈຳພັນສາໃນວັນເຂົ້າພັນສາຕົ້ນ ພິກຂຸນັ້ນກຳລັງໄປອາວາດນັ້ນ ລະຫວ່າງທາງໄດ້ເຫັນອາວາດ ໔ ບ່ອນ ມີຈີວອນຫຼາຍແລ້ວໄດ້ມີຄວາມຄິດດັ່ງນີ້ວ່າ "ຖ້າຈັ່ງໃດ ເຮົາເພິ່ງເຂົ້າຈຳພັນສາໃນອາວາດ ໔ ບ່ອນນີ້ ເມື່ອເປັນແນວນີ້ ຈີວອນເປັນຈຳນວນຫຼາຍຈັກເກີດຂຶ້ນແກ່ເຮົາ" ແລ້ວເຂົ້າຈຳພັນສາໃນອາວາດ ໔ ບ່ອນ ພິກຂຸທັງຫຼາຍ ວັນເຂົ້າພັນສາຕົ້ນຂອງພິກຂຸນັ້ນບໍ່ຜາກົດ ແລະທ່ານຕ້ອງອາບັດທຸກກົດຍ້ອນຮັບຄຳ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຮັບຄຳໄວ້ວ່າຈະເຂົ້າຈຳພັນສາໃນວັນເຂົ້າພັນ

ສາຕົ້ນ ພິກຂຸນັ້ນໄປອາວາດນັ້ນລົງອຸໂປສົດກຳພາຍນອກ ເຖິງວັນແຮມ ໑ ຄ່ຳ ຈຶ່ງເຂົ້າວິຫານ ຈັດເສນາສະນະ ຕັ້ງນ້ຳສັນນ້ຳໃຊ້ ປັດກວາດບໍລິເວນ ບໍ່ມີກິດຕ້ອງເຮັດຕ້ອງໄດ້ຫຼີກໄປໃນວັນນັ້ນຢ່າງແນ່ນອນ ພິກຂຸທັງຫຼາຍ ວັນເຂົ້າພັນສາຕົ້ນຂອງພິກຂຸນັ້ນບໍ່ຜາກົດ ແລະພິກຂຸນັ້ນ ຕ້ອງອາບັດທຸກກົດຍ້ອນຮັບຄຳ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຮັບຄຳໄວ້ວ່າຈະເຂົ້າຈຳພັນສາໃນວັນເຂົ້າພັນສາຕົ້ນ ພິກຂຸນັ້ນໄປອາວາດນັ້ນລົງອຸໂປສົດກຳພາຍນອກ ເຖິງວັນແຮມ ໑ ຄ່ຳ ຈຶ່ງເຂົ້າວິຫານ ຈັດເສນາສະນະ ຕັ້ງນ້ຳສັນນ້ຳໃຊ້ ປັດກວາດບໍລິເວນ ມີກິດຕ້ອງເຮັດຕ້ອງຫຼີກໄປໃນວັນນັ້ນຢ່າງແນ່ນອນ ພິກຂຸທັງຫຼາຍ ວັນເຂົ້າພັນສາຕົ້ນຂອງພິກຂຸນັ້ນບໍ່ຜາກົດ ແລະພິກຂຸນັ້ນຕ້ອງອາບັດທຸກກົດຍ້ອນຮັບຄຳ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຮັບຄຳໄວ້ວ່າຈະເຂົ້າຈຳພັນສາໃນວັນເຂົ້າພັນສາຕົ້ນ ພິກຂຸນັ້ນໄປອາວາດນັ້ນລົງອຸໂປສົດກຳພາຍນອກ ເຖິງວັນແຮມ ໑ ຄ່ຳ ຈຶ່ງເຂົ້າວິຫານ ຈັດເສນາສະນະ ຕັ້ງນ້ຳສັນນ້ຳໃຊ້ ປັດກວາດບໍລິເວນ ພັກຢູ່ ໔-໕ ວັນ ບໍ່ມີກິດຕ້ອງເຮັດຕ້ອງຫຼີກໄປ ພິກຂຸທັງຫຼາຍ ວັນເຂົ້າພັນສາຕົ້ນຂອງພິກຂຸນັ້ນບໍ່ຜາກົດ ແລະພິກຂຸນັ້ນ ຕ້ອງອາບັດທຸກກົດຍ້ອນຮັບຄຳ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຮັບຄຳໄວ້ວ່າຈະເຂົ້າຈຳພັນສາໃນວັນເຂົ້າພັນສາຕົ້ນ ພິກຂຸນັ້ນໄປອາວາດນັ້ນລົງອຸໂປສົດກຳພາຍນອກ ເຖິງວັນແຮມ ໑ ຄ່ຳ ຈຶ່ງເຂົ້າວິຫານ ຈັດເສນາສະນະ ຕັ້ງນ້ຳສັນນ້ຳໃຊ້ ປັດກວາດບໍລິເວນ ພັກຢູ່ ໔-໕ ວັນ ມີກິດຕ້ອງເຮັດຕ້ອງຫຼີກໄປ ພິກຂຸທັງຫຼາຍ ວັນເຂົ້າພັນສາຕົ້ນຂອງພິກຂຸນັ້ນບໍ່ຜາກົດ ແລະພິກຂຸນັ້ນຕ້ອງອາບັດທຸກກົດຍ້ອນຮັບຄຳ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຮັບຄຳໄວ້ວ່າຈະເຂົ້າຈຳພັນສາໃນວັນເຂົ້າພັນສາຕົ້ນ ພິກຂຸນັ້ນໄປອາວາດນັ້ນລົງອຸໂປສົດກຳພາຍນອກ ເຖິງວັນແຮມ ໑ ຄ່ຳ ຈຶ່ງເຂົ້າວິຫານ ຈັດເສນາສະນະ ຕັ້ງນ້ຳສັນນ້ຳໃຊ້ ປັດກວາດບໍລິເວນ ພັກຢູ່ ໔-໕ ວັນ ຫຼີກໄປດ້ວຍສັດຕາຫະກະຣະນີຍະ ຢູ່ພາຍນອກພົ້ນ ໗ ວັນ ພິກຂຸທັງຫຼາຍ ວັນເຂົ້າພັນສາຕົ້ນຂອງພິກຂຸນັ້ນບໍ່ຜາກົດ ແລະພິກຂຸນັ້ນຕ້ອງອາບັດທຸກກົດຍ້ອນຮັບຄຳ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຮັບຄຳໄວ້ວ່າຈະເຂົ້າຈຳພັນສາໃນວັນເຂົ້າພັນສາຕົ້ນ ພິກຂຸນັ້ນໄປອາວາດນັ້ນລົງອຸໂປສົດກຳພາຍນອກ ເຖິງວັນແຮມ ໑ ຄ່ຳ ຈຶ່ງເຂົ້າວິຫານ ຈັດເສນາສະນະ ຕັ້ງນ້ຳສັນນ້ຳໃຊ້ ປັດກວາດບໍລິເວນ ພັກຢູ່ ໔-໕ ວັນ ຫຼີກໄປດ້ວຍສັດຕາຫະກະຣະນີຍະ ກັບມາພາຍໃນ ໗ ວັນ ພິກຂຸທັງຫຼາຍ ວັນເຂົ້າພັນສາຕົ້ນຂອງພິກຂຸນັ້ນ ຜາກົດແລະພິກຂຸນັ້ນບໍ່ຕ້ອງອາບັດຍ້ອນຮັບຄຳ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຮັບຄຳໄວ້ວ່າຈະເຂົ້າຈຳພັນສາໃນວັນເຂົ້າພັນສາຕົ້ນ ພິກຂຸນັ້ນໄປອາວາດນັ້ນລົງອຸໂປສົດກຳພາຍນອກ ເຖິງວັນແຮມ ໑ ຄ່ຳ ຈຶ່ງເຂົ້າວິຫານ ຈັດເສນາສະນະ ຕັ້ງນ້ຳສັນນ້ຳໃຊ້ ປັດກວາດບໍລິເວນ ອີກ ໗ ວັນ ຈະເຖິງວັນປະວາຣະນາມີກິດຕ້ອງເຮັດຫຼີກໄປ ພິກຂຸທັງຫຼາຍ ພິກຂຸນັ້ນ ຈະກັບອາວາດນັ້ນ ຫຼື ບໍ່ກັບມາກໍຕາມ ພິກຂຸທັງຫຼາຍ ວັນເຂົ້າພັນສາຕົ້ນຂອງພິກຂຸນັ້ນຜາກົດ ແລະພິກຂຸນັ້ນບໍ່ຕ້ອງອາບັດ ຍ້ອນຮັບຄຳ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຮັບຄຳໄວ້ວ່າຈະເຂົ້າຈຳພັນສາໃນວັນເຂົ້າພັນສາຕົ້ນ ພິກຂຸນັ້ນໄປອາວາດນັ້ນລົງອຸໂປສົດກຳພາຍນອກ ເຖິງວັນແຮມ ໑ ຄ່ຳ ຈຶ່ງເຂົ້າວິຫານ ຈັດເສນາສະນະ ຕັ້ງນ້ຳສັນນ້ຳໃຊ້ ປັດກວາດບໍລິເວນ ບໍ່ມີກິດຕ້ອງເຮັດຕ້ອງຫຼີກໄປໃນວັນນັ້ນຢ່າງແນ່ນອນ ພິກຂຸທັງຫຼາຍ ວັນເຂົ້າພັນສາຕົ້ນຂອງພິກຂຸນັ້ນ ບໍ່ຜາກົດ ແລະພິກຂຸນັ້ນຕ້ອງອາບັດທຸກກົດຍ້ອນຮັບຄຳ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຮັບຄຳໄວ້ວ່າຈະເຂົ້າຈຳພັນສາໃນວັນເຂົ້າພັນສາຕົ້ນ ພິກຂຸນັ້ນໄປອາວາດນັ້ນແລ້ວລົງອຸໂປສົດ ເຖິງວັນແຮມ ໑ ຄ່ຳຈຶ່ງເຂົ້າວິຫານ ຈັດອາສະນະ ຕັ້ງນ້ຳສັນນ້ຳໃຊ້ ປັດກວາດບໍລິເວນ ມີກິດຕ້ອງເຮັດຫຼີກໄປ ฯลฯ

ฯลฯ ພັກຢູ່ ໔-໕ ວັນ ບໍ່ມີກິດຈຳຕ້ອງເຮັດ ຫຼີກໄປ ฯลฯ

ฯลฯ ພັກຢູ່ ໔-໕ ວັນ ມີກິດຕ້ອງເຮັດ ຫຼີກໄປ ฯลฯ

ฯลฯ ພັກຢູ່ ໔-໕ ວັນ ຫຼີກໄປດ້ວຍສັດຕາຫະກະຣະນີຍະ ຢູ່ພາຍນອກພົ້ນ ໗ ວັນ ພິກຂຸທັງຫຼາຍ ວັນເຂົ້າພັນສາຕົ້ນຂອງພິກຂຸນັ້ນບໍ່ຜາກົດ ແລະ ພິກຂຸນັ້ນຕ້ອງອາບັດທຸກກົດຍ້ອນຮັບຄຳ

ฯลฯ ພັກຢູ່ ໔-໕ ວັນ ຫຼີກໄປດ້ວຍສັດຕາຫະກະຣະນີຍະ ກັບມາໃນ ໗ ວັນ ພິກຂຸທັງຫຼາຍ ວັນເຂົ້າພັນສາຕົ້ນຂອງພິກຂຸນັ້ນຜາກົດ ແລະພິກຂຸນັ້ນບໍ່ຕ້ອງອາບັດຍ້ອນຮັບຄຳ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຮັບຄຳໄວ້ວ່າຈະເຂົ້າຈຳພັນສາໃນວັນເຂົ້າພັນສາຕົ້ນ ພິກຂຸນັ້ນ ໄປອາວາດນັ້ນລົງອຸໂປສົດກຳ ເຖິງວັນແຮມ ໑ ຄ່ຳ ຈຶ່ງເຂົ້າວິຫານ ຈັດເສນາສະນະ ຕັ້ງນ້ຳສັນນ້ຳໃຊ້ ປັດກວາດບໍລິເວນ ອີກ ໗ ວັນ ຈະເປັນວັນປະວາຣະນາ ມີກິດຕ້ອງເຮັດຕ້ອງຫຼີກໄປ ພິກຂຸທັງຫຼາຍ ພິກຂຸນັ້ນ ຈະກັບມາອາວາດນັ້ນ ຫຼື ບໍ່ກັບມາກໍຕາມ ວັນເຂົ້າພັນສາຕົ້ນຂອງພິກຂຸນັ້ນຜາກົດ ແລະພິກຂຸນັ້ນ ບໍ່ຕ້ອງອາບັດຍ້ອນຮັບຄຳ

## ເລື້ອງຮັບຄຳທີ່ຈະເຂົ້າຈຳພັນສາຫຼັງ

[໔໐໗] ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ພິກຂຸຮັບຄຳໄວ້ວ່າຈະເຂົ້າຈຳພັນສາໃນວັນເຂົ້າພັນສາຫຼັງ ພິກຂຸນັ້ນໄປອາວາດນັ້ນລົງອຸໂປສົດກຳພາຍນອກ ເຖິງວັນແຮມ ໑ ຄ່ຳ ຈຶ່ງເຂົ້າວິຫານ ຈັດເສນາສະນະ ຕັ້ງນ້ຳສັນນ້ຳໃຊ້ ປັດກວາດບໍລິເວນ ບໍ່ມີກິດຕ້ອງເຮັດຫຼີກໄປໃນວັນນັ້ນຢ່າງ

ແນ່ນອນ ພິກຂຸທັງຫຼາຍ ວັນເຂົ້າພັນສາຫຼັງຂອງພິກຂຸນັ້ນບໍ່ຜາກົດ ແລະພິກຂຸນັ້ນຕ້ອງອາບັດທຸກກົດຍ້ອນຮັບຄຳ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຮັບຄຳໄວ້ວ່າຈະເຂົ້າຈຳພັນສາໃນວັນເຂົ້າພັນສາຫຼັງ ພິກຂຸນັ້ນໄປອາວາດນັ້ນລົງອຸໂປສົດກຳພາຍນອກ ເຖິງວັນແຮມ ໑ ຄ່ຳ ຈຶ່ງເຂົ້າວິຫານຈັດເສນາສະນະ ຕັ້ງນ້ຳສັນນ້ຳໃຊ້ ປັດກວາດບໍລິເວນ ມີກິດຕ້ອງເຮັດຫຼີກໄປໃນວັນນັ້ນຢ່າງແນ່ນອນ ພິກຂຸທັງຫຼາຍ ວັນເຂົ້າພັນສາຫຼັງຂອງພິກຂຸນັ້ນບໍ່ຜາກົດ ແລະພິກຂຸນັ້ນຕ້ອງອາບັດທຸກກົດຍ້ອນຮັບຄຳ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍຣະນີນີ້ ພິກຂຸຮັບຄຳໄວ້ວ່າຈະເຂົ້າຈຳພັນສາໃນວັນເຂົ້າພັນສາຫຼັງ ພິກຂຸນັ້ນໄປອາວາດນັ້ນລົງອຸໂປສົດກຳພາຍນອກ ເຖິງວັນແຮມ ໑ ຄ່ຳ ຈຶ່ງເຂົ້າວິຫານຈັດເສນາສະນະ ຕັ້ງນ້ຳສັນນ້ຳໃຊ້ ປັດກວາດບໍລິເວນ ພັກຢູ່ ໔-໖ ວັນ ບໍ່ມີກິດຕ້ອງເຮັດຫຼີກໄປ ພິກຂຸທັງຫຼາຍ ວັນເຂົ້າພັນສາຫຼັງຂອງພິກຂຸນັ້ນບໍ່ຜາກົດ ແລະພິກຂຸນັ້ນຕ້ອງອາບັດຍ້ອນຮັບຄຳ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຮັບຄຳໄວ້ວ່າຈະເຂົ້າຈຳພັນສາໃນວັນເຂົ້າພັນສາຫຼັງ ຯລຯ ພັກຢູ່ ໔-໖ ວັນ ມີກິດຕ້ອງເຮັດຫຼີກໄປ ຯລຯ ວັນເຂົ້າພັນສາຫຼັງຂອງພິກຂຸນັ້ນບໍ່ຜາກົດ ແລະພິກຂຸນັ້ນຕ້ອງອາບັດທຸກກົດຍ້ອນຮັບຄຳ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຮັບຄຳໄວ້ວ່າຈະເຂົ້າຈຳພັນສາໃນວັນເຂົ້າພັນສາຫຼັງ ຯລຯ ພັກຢູ່ ໔-໖ ວັນ ຫຼີກໄປດ້ວຍສັດຕາຫະກະຣະນີຍະ ຢູ່ພາຍນອກພົ້ນ ໗ ວັນ ພິກຂຸທັງຫຼາຍ ວັນເຂົ້າພັນສາຫຼັງຂອງພິກຂຸນັ້ນບໍ່ຜາກົດ ແລະ ພິກຂຸນັ້ນ ຕ້ອງອາບັດທຸກກົດຍ້ອນຮັບຄຳ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຮັບຄຳໄວ້ວ່າຈະເຂົ້າຈຳພັນສາໃນວັນເຂົ້າພັນສາຫຼັງ ພິກຂຸນັ້ນ ໄປອາວາດນັ້ນລົງອຸໂປສົດກຳພາຍນອກ ເຖິງວັນແຮມ ໑ ຄ່ຳ ຈຶ່ງເຂົ້າວິຫານຈັດເສນາສະນະ ຕັ້ງນ້ຳສັນນ້ຳໃຊ້ ປັດກວາດບໍລິເວນ ພັກຢູ່ ໔-໖ ວັນ ຫຼີກໄປດ້ວຍ ສັດຕາຫະກະຣະນີຍະ ກັບມາພາຍໃນ ໗ ວັນ ພິກຂຸທັງຫຼາຍ ວັນເຂົ້າພັນສາຫຼັງຂອງພິກຂຸນັ້ນຜາກົດ ແລະພິກຂຸນັ້ນບໍ່ຕ້ອງອາບັດຍ້ອນຮັບຄຳ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຮັບຄຳໄວ້ວ່າຈະເຂົ້າຈຳພັນສາໃນວັນເຂົ້າພັນສາຫຼັງ ຯລຯ ອີກ ໗ ວັນ ຈະຄົບ ໔ ເດືອນ ອັນເປັນວັນທີ່ດອກໂກມຸດບານມີກິດຈຳຕ້ອງເຮັດຫຼີກໄປ ພິກຂຸທັງຫຼາຍ ພິກຂຸນັ້ນຈະກັບມາອາວາດນັ້ນ ຫຼື ບໍ່ກັບມາກໍຕາມ ພິກຂຸທັງຫຼາຍ ວັນເຂົ້າພັນສາຫຼັງຂອງພິກຂຸນັ້ນຜາກົດ ແລະ ພິກຂຸນັ້ນບໍ່ຕ້ອງອາບັດຍ້ອນຮັບຄຳ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຮັບຄຳໄວ້ວ່າຈະເຂົ້າຈຳພັນສາໃນວັນເຂົ້າພັນສາ

ຫຼັງ ພິກຂຸນັ້ນໄປອາວາດນັ້ນລົງອຸໂປສົດກຳ ເຖິງວັນແຮມ ໑ ຄ່ຳ ຈຶ່ງເຂົ້າວິຫານ ຈັດເສນາສະນະ ຕັ້ງນ້ຳສັນນ້ຳໃຊ້ ປັດກວາດບໍລິເວນ ບໍ່ມີກິດຕ້ອງເຮັດຫຼີກໄປໃນວັນນັ້ນຢ່າງແນ່ນອນ ພິກຂຸທັງຫຼາຍ ວັນເຂົ້າພັນສາຫຼັງຂອງພິກຂຸນັ້ນບໍ່ຜາກົດ ແລະພິກຂຸນັ້ນຕ້ອງອາບັດທຸກກົດຍ້ອນຮັບຄຳ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຮັບຄຳໄວ້ວ່າຈະເຂົ້າຈຳພັນສາໃນວັນເຂົ້າພັນສາຫຼັງ ຯລຯ ມີກິດຕ້ອງເຮັດຫຼີກໄປ ຯລຯ

ຯລຯ ພັກຢູ່ ໔-໖ ວັນ ບໍ່ມີກິດຕ້ອງເຮັດຫຼີກໄປ ຯລຯ

ຯລຯ ພັກຢູ່ ໔-໖ ວັນ ມີກິດຕ້ອງເຮັດຫຼີກໄປ ຯລຯ

ຯລຯ ພັກຢູ່ ໔-໖ ວັນ ຫຼີກໄປດ້ວຍສັດຕາຫະກະຣະນີຍະ ຢູ່ພາຍນອກພົ້ນ ໆ ວັນ ພິກຂຸທັງຫຼາຍ ວັນເຂົ້າພັນສາຫຼັງຂອງພິກຂຸນັ້ນບໍ່ຜາກົດ ແລະພິກຂຸນັ້ນຕ້ອງອາບັດຍ້ອນຮັບຄຳ

ຯລຯ ພັກຢູ່ ໔-໖ ວັນ ຫຼີກໄປດ້ວຍສັດຕາຫະກະຣະນີຍະ ກັບມາພາຍໃນ ໆ ວັນ ພິກຂຸທັງຫຼາຍ ວັນເຂົ້າພັນສາຫຼັງຂອງພິກຂຸນັ້ນຜາກົດ ແລະພິກຂຸນັ້ນບໍ່ຕ້ອງອາບັດຍ້ອນຮັບຄຳ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຮັບຄຳໄວ້ວ່າຈະເຂົ້າຈຳພັນສາໃນວັນເຂົ້າພັນສາຫຼັງ ພິກຂຸນັ້ນໄປອາວາດນັ້ນລົງອຸໂປສົດກຳ ເຖິງວັນແຮມ ໑ ຄ່ຳ ຈຶ່ງເຂົ້າວິຫານ ຈັດເສນາສະນະ ຕັ້ງນ້ຳສັນນ້ຳໃຊ້ ປັດກວາດບໍລິເວນ ອີກ ໆ ວັນ ຈະຄົບ ໔ ເດືອນ ອັນເປັນວັນທີ່ດອກໂກມຸດບານ ມີກິດຕ້ອງເຮັດຫຼີກໄປ ພິກຂຸທັງຫຼາຍ ພິກຂຸນັ້ນຈະກັບມາອາວາດນັ້ນ ຫຼື ບໍ່ກັບມາກໍຕາມ ວັນເຂົ້າພັນສາຫຼັງຂອງພິກຂຸນັ້ນຜາກົດ ແລະພິກຂຸນັ້ນບໍ່ຕ້ອງອາບັດຍ້ອນຮັບຄຳ

**ວັດສູປະນາຍິກະຂັນທະກະທີ ໖ ຈົບ**

# ໑໑໗. ລວມເລື້ອງທີ່ມີໃນວັດສູປະນາຍິກະຂັນທະກະ

## ວັດສູປະນາຍິກະຂັນທະກະ ມີ ໕໔ ເລື້ອງ ຄື

ເລື້ອງຊົງອະນຸຍາດໃຫ້ພິກຂຸເຂົ້າຈຳພັນສາ

ເລື້ອງຊົງອະນຸຍາດໃຫ້ພິກຂຸເຂົ້າພັນສາໃນລະດູຝົນ

ເລື້ອງປະເພດແຫ່ງວັນເຂົ້າພັນສາ

ເລື້ອງພຣະສັບພັກຄີທ່ຽວຈາຣິກໃນລະຫວ່າງພັນສາ

ເລື້ອງປັບອາບັດທຸກກົດແກ່ພິກຂຸຜູ້ບໍ່ເຂົ້າພັນສາ

ເລື້ອງຈົງໃຈຍ່າງຜ່ານອາວາດເລື້ອງການເລື່ອນການຝົນ

ເລື້ອງອຸປາສົກສ້າງວິຫານເປັນຕົ້ນຖວາຍ

ເລື້ອງພິກຂຸເປັນໄຂ້ເປັນຕົ້ນ

ເລື້ອງມານດາ ບິດາ ອ້າຍ ນ້ອງຊາຍ ເອື້ອຍ ນ້ອງສາວ ຍາດ ແລະບຸຣຸດຜູ້ອາໄສຢູ່ກັບພິກຂຸເປັນໄຂ້

ເລື້ອງວິຫານຊຸດໂຊມ ເລື້ອງສັດຮ້າຍບຽດບຽນ ເລື້ອງງູບຽດບຽນ

ເລື້ອງພວກໂຈນບຽດບຽນ ເລື້ອງຜີສາດລົບກວນ
ເລື້ອງໝູ່ບ້ານຖືກໄຟໄໝ້ ເລື້ອງເສນາສະນະຖືກໄຟໄໝ້
ເລື້ອງໝູ່ບ້ານຖືກນໍ້າຖ້ວມ ເລື້ອງເສນາສະນະຖືກນໍ້າຖ້ວມ
ເລື້ອງຊາວບ້ານພາກັນອົບພະຍົບໄປຍ້ອນໂຈຣະໄພ
ເລື້ອງຊົງອະນຸຍາດໃຫ້ຕາມທາຍົກມີຈຳນວນຫຼາຍກວ່າ

ເລື້ອງບໍ່ໄດ້ໂພຊະນາຫານທຳມະດາ ຫຼື ປະນີດເປັນຕົ້ນ
ເລື້ອງສະຕີນິມົນ ເລື້ອງຍິງແພດສະຫຍານິມົນ ເລື້ອງສາວເທື້ອນິມົນ
ເລື້ອງບັນເດາະນິມົນ ເລື້ອງພວກຍາດນິມົນ

ເລື້ອງພຣະຣາຊານິມົນ ເລື້ອງພວກໂຈນນິມົນ
ເລື້ອງພວກນັກເລງນິມົນ ເລື້ອງພົບຊຸມຊັບ
ເລື້ອງທຳລາຍສົງ ໙ ວິທີ ເລື້ອງເຂົ້າຈຳພັນສາໃນຄອກງົວ
ເລື້ອງເຂົ້າຈຳພັນສາໃນໝູ່ກວຽນ ເລື້ອງເຂົ້າຈຳພັນສາໃນເຮືອ
ເລື້ອງເຂົ້າຈຳພັນສາໃນໂກນໄມ້ ເລື້ອງເຂົ້າຈຳພັນສາທີ່ຫ້າງເທິງໄມ້

ເລື້ອງເຂົ້າຈຳພັນສາໃນທີ່ແຈ້ງ ເລື້ອງພິກຂຸບໍ່ມີເສນາສະນະຈຳພັນສາ
ເລື້ອງເຂົ້າຈຳພັນສາໃນຕູບຜີ ເລື້ອງເຂົ້າຈຳພັນສາໃນຄັນຮົ່ມ
ເລື້ອງເຂົ້າຈຳພັນສາໃນໂອ່ງນໍ້າ

ເລື້ອງຕັ້ງກະຕິກາບໍ່ເປັນທຳ ເລື້ອງຮັບຄຳຈະຈຳພັນສາ
ເລື້ອງລົງອຸໂປສົດນອກວິຫານ ເລື້ອງຮັບຄຳທີ່ຈະເຂົ້າຈຳພັນສາຕົ້ນ
ເລື້ອງຮັບຄຳທີ່ຈະເຂົ້າຈຳພັນສາຫຼັງ

ເລື້ອງບໍ່ມີກິດຕ້ອງເຮັດຫຼີກໄປ ເລື້ອງມີກິດຕ້ອງເຮັດຫຼີກໄປ
ເລື້ອງພັກຢູ່ ໔ - ໕ ວັນແລ້ວຫຼີກໄປດ້ວຍສັດຕາຫະກະຣະນີຍະ

ເລື້ອງອີກ ໆ ວັນຈະຄົບ ໔ ເດືອນ ເລື້ອງພິກຂຸກັບມາຫຼືບໍ່ກັບມາ
ເພິ່ງພິຈາລະນາຕາມແນວທາງຕາມລຳດັບຫົວຂໍ້ເລື້ອງ

**ວັດສູປະນາຍິກະຂັນທະກະ ຈົບ**

# ໔. ປະວາຣະນາຂັນທະກະ

## ໑໔໐. ອະຜາສຸວິຫາຣະ

## ວ່າດ້ວຍການຢູ່ຈຳພັນສາບໍ່ຜາສຸກ

## ເລື້ອງພິກຂຸຫຼາຍອົງເຂົ້າຈຳພັນສາໃນແຄວັນໂກສົນມາເຝົ້າພຣະສາດສະດາ

[໔໐໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ພຣະເຊຕະວັນອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸຫຼາຍອົງເຊິ່ງເຄີຍເຫັນເຄີຍຄົບກັນເຂົ້າຈຳພັນສາຢູ່ໃນອາວາດແຫ່ງໜຶ່ງໃນແຄວັນໂກສົນ ໄດ້ປຶກສາກັນດັ່ງນີ້ວ່າ “ດ້ວຍອຸບາຍແນວໃດນໍ ພວກເຮົາຈະເພິ່ງເປັນຜູ້ພ້ອມພຽງ ຮ່ວມໃຈກັນ ບໍ່ຜິດຖຽງກັນ ຢູ່ຈຳພັນສາ ຢ່າງຜາສຸກ ແລະບໍ່ລຳບາກດ້ວຍບິນທະບາດ” ແລ້ວປຶກສາກັນຕໍ່ໄປວ່າ “ຖ້າພວກເຮົາຈະບໍ່ທັກທາຍບໍ່ປາໄສກັນແລະກັນ ອົງໃດບິນທະບາດກັບຈາກໝູ່ບ້ານກ່ອນ ອົງນັ້ນເພິ່ງປູອາສະນະ ຈັດນ້ຳລ້າງຕີນຕັ່ງເກີບ ກະເບື້ອງເຊັດຕີນ ລ້າງຖາດສຳລັບໃສ່ອາຫານທີ່ເຫຼືອ ຕັ້ງນ້ຳສັນນ້ຳໃຊ້ ອົງໃດບິນທະບາດກັບຈາກໝູ່ບ້ານພາຍຫຼັງ ຖ້າມີອາຫານທີ່ອົງກ່ອນສັນເຫຼືອ ຖ້າຕ້ອງການເພິ່ງສັນ ຖ້າບໍ່ຕ້ອງການ ເພິ່ງຖອກຖິ້ມໃສ່ບ່ອນປາສະຈາກຂອງຂຽວສົດ ຫຼື ຖອກລົງນ້ຳທີ່ບໍ່ມີໂຕສັດ ອົງນັ້ນເພິ່ງເກັບອາສະນະ ນ້ຳລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນ ລ້າງຖາດສຳລັບໃສ່ອາຫານທີ່ເຫຼືອແລ້ວເກັບນ້ຳດື່ມນ້ຳໃຊ້ ປັດກວາດຫໍສັນ ອົງໃດເຫັນໝໍ້ນ້ຳສັນ ໝໍ້ນ້ຳໃຊ້ ໝໍ້ຊຳຣະເປົ່າວ່າງ ອົງນັ້ນເພິ່ງຕັກໃສ່ ຖ້າບໍ່ສາມາດ ເພິ່ງກວັກມືເອີ້ນເພື່ອນມາຊ່ອຍຍົກ ດ້ວຍອຸບາຍແນວນີ້ແລ ພວກເຮົາຈະເພິ່ງເປັນຜູ້ພ້ອມພຽງກັນ ຮ່ວມໃຈກັນ ບໍ່ຜິດຖຽງກັນ ຢູ່ຈຳພັນສາເປັນຜາສຸກ ແລະບໍ່ລຳບາກດ້ວຍບິນທະບາດ”

ຕໍ່ມາ ພິກຂຸເຫຼົ່ານັ້ນ ກໍບໍ່ທັກທາຍບໍ່ປາໄສກັນແລະກັນ ອົງໃດບິນທະບາດກັບຈາກໝູ່ບ້ານກ່ອນອົງນັ້ນກໍປູອາສະນະ ຈັດນ້ຳລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນ ລ້າງຖາດສຳລັບໃສ່ອາຫານທີ່ເຫຼືອ ຕັ້ງນ້ຳສັນນ້ຳໃຊ້ ອົງໃດບິນທະບາດກັບຈາກໝູ່ບ້ານພາຍຫຼັງ ຖ້າມີອາຫານທີ່ອົງກ່ອນສັນເຫຼືອ ຖ້າຕ້ອງການກໍສັນ ຫາກບໍ່ຕ້ອງການ ກໍຖອກຖິ້ມຍັງທີ່ ອັນປາສະຈາກຂອງຂຽວສົດ ຫຼື ຖອກລົງນ້ຳທີ່ບໍ່ມີໂຕສັດ ອົງນັ້ນກໍເກັບອາສະນະ ນ້ຳລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນລ້າງຖາດສຳລັບໃສ່ອາຫານທີ່ເຫຼືອ ແລ້ວເກັບນ້ຳດື່ມນ້ຳໃຊ້ ປັດກວາດຫໍສັນ ອົງໃດເຫັນໝໍ້ນ້ຳສັນໝໍ້ນ້ຳໃຊ້ ໝໍ້ຊຳຣະເປົ່າວ່າງ ອົງນັ້ນກໍຕັກໃສ່ ຖ້າບໍ່ສາມາດກໍກວັກມືເອີ້ນເພື່ອນມາຊ່ອຍຍົກ ບໍ່ເອີ່ຍວາຈາຍ້ອນເຫດນັ້ນ

### ພິກຂຸມາເຂົ້າເຝົ້າພຣະພຸດທະເຈົ້າ

ມີປະເພນີຢູ່ວ່າ ເມື່ອພິກຂຸທັງຫຼາຍອອກພັນສາແລ້ວ ຈະໄປເຂົ້າເຝົ້າພຣະຜູ້ມີພຣະພາກ

ເຈົ້າ ເມື່ອພິກຂຸເຫຼົ່ານັ້ນຈຳພັນສາຄົບ ໓ ເດືອນ ແລ້ວຈຶ່ງເກັບເສນາສະນະຖືບາດ ແລະຈີວອນ ຫຼີກໄປທາງນະຄອນສາວັດຖີ ຈາຣິກໄປໂດຍລຳດັບ ເຖິງນະຄອນສາວັດຖີ ໄປເຖິງພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ໂດຍລຳດັບແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຖວາຍອະພິວາດແລ້ວ ນັ່ງໃນບ່ອນສົມຄວນ

## ພຸດທະປະເພນີ

ອັນການທີ່ພຣະຜູ້ມີພຣະພາກພຸດທະເຈົ້າທັງຫຼາຍ ຊົງປາໄສກັບພຣະອາຄັນຕຸກະທັງຫຼາຍ ນັ້ນເປັນພຸດທະປະເພນີ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມພິກຂຸເຫຼົ່ານັ້ນວ່າ “ພິກຂຸທັງຫຼາຍ ທ່ານທັງຫຼາຍຍັງສະບາຍດີຢູ່ບໍ? ຍັງພໍເປັນຢູ່ໄດ້ບໍ? ພວກທ່ານເປັນຜູ້ພ້ອມພຽງກັນ ຮ່ວມໃຈກັນ ບໍ່ຜິດຖຽງກັນ ຢູ່ຈຳພັນສາຢ່າງຜາສຸກ ແລະບິນທະບາດບໍ່ລຳບາກແມ່ນບໍ?”

ພິກຂຸເຫຼົ່ານັ້ນຂາບທູນວ່າ “ຍັງສະບາຍດີ ຂ້ານ້ອຍ ຍັງພໍເປັນຢູ່ໄດ້ ຂ້ານ້ອຍ ອັນໜຶ່ງ ພວກຂ້າພຣະອົງທັງຫຼາຍ ເປັນຜູ້ພ້ອມພຽງກັນ ຮ່ວມໃຈກັນ ບໍ່ຜິດຖຽງກັນ ຢູ່ຈຳພັນສາເປັນຜາສຸກ ແລະບິນທະບາດບໍ່ລຳບາກ ຂ້ານ້ອຍ”

ພຣະຕະຖາຄົດເຈົ້າທັງຫຼາຍ ຊົງຮູ້ເລື້ອງຕັດຖາມກໍມີ ບໍ່ຕັດຖາມກໍມີ ຊົງຮູ້ການອັນຄວນຕັດຖາມກໍມີ ບໍ່ຕັດຖາມກໍມີ ຕັດຖາມເລື້ອງທີ່ເປັນປະໂຫຍດ ບໍ່ຕັດຖາມເລື້ອງທີ່ບໍ່ເປັນປະໂຫຍດ ຍ້ອນພຣະຕະຖາຄົດເຈົ້າທັງຫຼາຍ ຊົງກຳຈັດເລື້ອງທີ່ບໍ່ເປັນປະໂຫຍດດ້ວຍອະຣິຍະມັກແລ້ວ ພຣະຜູ້ມີພຣະພາກພຸດທະເຈົ້າທັງຫຼາຍ ຊົງສອບຖາມພິກຂຸທັງຫຼາຍດ້ວຍເຫດ ໔ ປະການ ຄື ຈະຊົງສະແດງທຳຢ່າງໜຶ່ງ ຈະຊົງບັນຍັດສິກຂາບົດແກ່ພຣະສາວົກຢ່າງໜຶ່ງ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຖາມພິກຂຸເຫຼົ່ານັ້ນວ່າ “ພິກຂຸທັງຫຼາຍ ດ້ວຍການເຮັດແນວໃດ ພວກທ່ານຈຶ່ງເປັນຜູ້ພ້ອມພຽງກັນ ຮ່ວມໃຈກັນ ບໍ່ຜິດຖຽງກັນ ຢູ່ຈຳພັນສາຢ່າງຜາສຸກ ແລະບິນທະບາດບໍ່ລຳບາກນໍ?”

ພິກຂຸເຫຼົ່ານັ້ນ ໄດ້ຂາບທູນວ່າ “ພຣະອົງຜູ້ຈະເລີນ ຂ້າພະອົງທັງຫຼາຍ ບັນດາທີ່ນັ່ງເຝົ້າຢູ່ທີ່ນີ້ ເປັນພິກຂຸທີ່ເຄີຍເຫັນ ເຄີຍຄົບກັນມາກ່ອນມີຈຳນວນຫຼາຍອົງ ໄດ້ເຂົ້າຈຳພັນສາ ຢູ່ໃນອາວາດແຫ່ງໜຶ່ງໃນແຄວ້ນໂກສົນ ໄດ້ປຶກສາກັນວ່າ ດ້ວຍອຸບາຍແນວໃດນໍ ພວກເຮົາຈະເພິ່ງເປັນຜູ້ພ້ອມພຽງກັນ ຮ່ວມໃຈກັນ ບໍ່ຜິດຖຽງກັນ ຢູ່ຈຳພັນສາເປັນຜາສຸກ ແລະບິນທະບາດບໍ່ລຳບາກ ແລ້ວປຶກສາກັນຕໍ່ໄປວ່າ ຖ້າພວກເຮົາຈະບໍ່ທັກທາຍບໍ່ປາໄສກັນແລະກັນ ອົງໃດບິນທະບາດກັບຈາກໝູ່ບ້ານກ່ອນ ອົງນັ້ນເພິ່ງປູອາສະນະ ຈັດນ້ຳລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນ

ລ້າງຖາດສຳລັບໃສ່ອາຫານທີ່ເຫຼືອ ຕັ້ງນ້ຳສັນນ້ຳໃຊ້ ອົງໃດ ບິນທະບາດກັບຈາກໝູ່ບ້ານພາຍຫຼັງ ຖ້າມີອາຫານທີ່ອົງກ່ອນສັນເຫຼືອ ຖ້າຕ້ອງການເພິ່ງສັນ ຖ້າບໍ່ຕ້ອງການ ເພິ່ງນຳໄປຖອກຖິ້ມໃນທີ່ອັນປາສະຈາກຂອງຂຽວສົດ ຫຼື ຖອກລົງນ້ຳທີ່ບໍ່ມີໂຕສັດ ອົງນັ້ນເພິ່ງເກັບອາສະນະ ນ້ຳລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນ ລ້າງຖາດສຳລັບໃສ່ອາຫານທີ່ເຫຼືອ ແລ້ວເກັບນ້ຳດື່ມນ້ຳໃຊ້ ປັດກວາດຫໍສັນ ອົງໃດເຫັນໝໍ້ນ້ຳສັນ ໝໍ້ນ້ຳໃຊ້ ໝໍ້ຊຳຣະເປົ່າວ່າງ ອົງນັ້ນ ເພິ່ງຕັກໃສ່ ຖ້າບໍ່ສາມາດເພິ່ງກວັກມືເອີ້ນເພື່ອນມາຊ່ວຍຍົກ ບໍ່ເພິ່ງເອີ່ຍວາຈາຍ້ອນເຫດນັ້ນ ໆ ດ້ວຍອຸບາຍແນວນີ້ ແລ ພວກເຮົາຈະເພິ່ງເປັນຜູ້ພ້ອມພຽງກັນ ຮ່ວມໃຈກັນ ບໍ່ຜິດຖຽງກັນ ຢູ່ຈຳພັນສາເປັນຜາສຸກ ແລະບິນທະບາດບໍ່ລຳບາກ ຂ້ານ້ອຍ

ຕໍ່ມາ ຂ້າພະອົງທັງຫຼາຍກໍບໍ່ທັກທາຍບໍ່ປາໄສກັນແລະກັນ ອົງໃດ ບິນທະບາດກັບຈາກໝູ່ບ້ານກ່ອນ ອົງນັ້ນກໍປູອາສະນະ ຈັດນ້ຳລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນ ລ້າງຖາດສຳລັບໃສ່ອາຫານທີ່ເຫຼືອ ຕັ້ງນ້ຳສັນນ້ຳໃຊ້ ອົງໃດບິນທະບາດ ກັບຈາກໝູ່ບ້ານພາຍຫຼັງ ຖ້າມີອາຫານທີ່ອົງກ່ອນສັນເຫຼືອ ຖ້າຕ້ອງການກໍສັນ ຖ້າບໍ່ຕ້ອງການ ກໍຖອກຖິ້ມໃສ່ບ່ອນປາສະຈາກຂອງຂຽວສົດ ຫຼື ຖອກລົງນ້ຳທີ່ບໍ່ມີໂຕສັດ ອົງນັ້ນກໍເກັບອາສະນະ ນ້ຳລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນ ລ້າງຖາດສຳລັບໃສ່ອາຫານທີ່ເຫຼືອ ແລ້ວເກັບນ້ຳດື່ມນ້ຳໃຊ້ ປັດກວາດຫໍສັນ ອົງໃດເຫັນໝໍ້ນ້ຳສັນ ໝໍ້ນ້ຳໃຊ້ ໝໍ້ຊຳຣະເປົ່າວ່າງ ອົງນັ້ນກໍຕັກໃສ່ ຖ້າບໍ່ສາມາດກໍກວັກມືເອີ້ນເພື່ອນມາຊ່ວຍຍົກ ຍ່ອມບໍ່ເອີ່ຍວາຈາຍ້ອນເຫດນັ້ນ ໆ ດ້ວຍອຸບາຍແນວນີ້ແລ ຂ້າພະອົງທັງຫຼາຍ ຈຶ່ງເປັນຜູ້ພ້ອມພຽງກັນ ຮ່ວມໃຈກັນ ບໍ່ຜິດຖຽງກັນ ຢູ່ຈຳພັນສາ ເປັນຜາສຸກ ແລະບິນທະບາດບໍ່ລຳບາກ ຂ້ານ້ອຍ”

## ເລື້ອງເຂົ້າຈຳພັນສາບໍ່ຜາສຸກດັ່ງປະສຸສັດຢູ່ຮ່ວມກັນ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງກັບພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ໄດ້ຂ່າວວ່າ ໂມຄະບຸຣຸດພວກນີ້ເປັນຜູ້ຢູ່ບໍ່ຜາສຸກເລີຍ ແຕ່ຍັງຮັບຮອງວ່າ ຢູ່ເປັນຜາສຸກ ໄດ້ຂ່າວວ່າ ໂມຄະບຸຣຸດ ພວກນີ້ເປັນຜູ້ຢູ່ຮ່ວມກັນຢ່າງປະສຸສັດ ແຕ່ຍັງຮັບຮອງວ່າ ຢູ່ເປັນຜາສຸກ ໄດ້ຂ່າວວ່າ ໂມຄະບຸຣຸດ ພວກນີ້ເປັນຜູ້ຢູ່ຮ່ວມກັນຄືແບ້ ແຕ່ຍັງຮັບຮອງວ່າ ຢູ່ເປັນຜາສຸກ ໄດ້ຂ່າວວ່າ ໂມຄະບຸຣຸດພວກນີ້ເປັນຜູ້ຢູ່ຮ່ວມກັນຢ່າງສັດຕູ ຍັງຮັບຮອງວ່າ ຢູ່ເປັນຜາສຸກ”

## ຊົງຫ້າມມູຄະວັດຕາມແບບຢ່າງເດຍຣະຖີ

ພິກຂຸທັງຫຼາຍ ເປັນຫຍັງ ໂມຄະບຸຣຸດພວກນີ້ ຈຶ່ງໄດ້ສະມາທານມູຄະວັດທີ່ພວກເດຍຣະຖີຖືປະຕິບັດກັນ ການເຮັດແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ ເມື່ອຊົງຕຳໜິແລ້ວຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງສະມາທານມູຄະວັດທີ່ພວກເດຍຣະຖີຖືປະຕິບັດກັນ ອົງໃດສະມາທານປະຕິບັດ ຕ້ອງອາບັດທຸກກົດ

## ເລື່ອງຊົງອະນຸຍາດພິທີປະວາຣະນາເພື່ອວ່າກ່າວເຕືອນເຊິ່ງກັນແລະກັນ

ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ຈຳພັນສາແລ້ວ ປະວາຣະນາດ້ວຍເຫດ ໓ ສະຖານ ຄື ດ້ວຍໄດ້ເຫັນ ດ້ວຍໄດ້ຍິນ ດ້ວຍນຶກສົງໄສ ການປະວາຣະນານັ້ນ ຈັກເປັນວິທີທີ່ເໝາະສົມເພື່ອວ່າກ່າວເຊິ່ງກັນແລະກັນ ເປັນວິທີອອກຈາກອາບັດ ເປັນວິທີເຄົາລົບພຣະວິໄນຂອງພິກຂຸເຫຼົ່ານັ້ນ

### ວິທີປະວາຣະນາ

ພິກຂຸທັງຫຼາຍ ກໍແລພິກຂຸເຫຼົ່ານັ້ນ ເພິ່ງປະວາຣະນາແບບນີ້

ພິກຂຸຜູ້ສະຫຼາດ ຜູ້ສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິກຳມະວາຈາວ່າ

### ສັບພະສັງຄາຫິກາຍັດຕິ

[໔໑໐] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ວັນນີ້ເປັນວັນປະວາຣະນາ ຖ້າສົງພ້ອມກັນແລ້ວ ສົງເພິ່ງປະວາຣະນາ

ພິກຂຸຜູ້ເຖຣະເພິ່ງຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢ່ອງຍໍ້ ປະນົມມື ກ່າວກັບ ສົງແບບນີ້ວ່າ

### ເຕວາຈິກາປະວາຣະນາ

ທ່ານທັງຫຼາຍ ຂ້າພະເຈົ້າຂໍປະວາຣະນາຕໍ່ສົງ ດ້ວຍໄດ້ເຫັນກໍດີ ດ້ວຍໄດ້ຍິນກໍດີ ດ້ວຍນຶກສົງໄສກໍດີ ຂໍທ່ານທັງຫຼາຍ ຊ່ອຍອະນຸເຄາະວ່າກ່າວຕັກເຕືອນຂ້າພະເຈົ້າ ເມື່ອຂ້າພະເຈົ້າຮູ້ຈັກໄດ້ແກ້ໄຂຕໍ່ໄປ

ທ່ານທັງຫຼາຍ ແມ່ນຄັ້ງທີ ໒ ຂ້າພະເຈົ້າຂໍປະວາຣະນາຕໍ່ສົງ ດ້ວຍໄດ້ເຫັນກໍດີ ດ້ວຍໄດ້ຍິນກໍດີ ດ້ວຍນຶກສົງໄສກໍດີ ຂໍທ່ານທັງຫຼາຍ ຊ່ອຍອະນຸເຄາະວ່າກ່າວຕັກເຕືອນຂ້າພະເຈົ້າ ເມື່ອຂ້າພະເຈົ້າຮູ້ ຈັກໄດ້ແກ້ໄຂຕໍ່ໄປ

ທ່ານທັງຫຼາຍ ແມ່ນຄັ້ງທີ ໓ ຂ້າພະເຈົ້າຂໍປະວາຣະນາຕໍ່ສົງ ດ້ວຍໄດ້ເຫັນກໍດີ ດ້ວຍໄດ້ຍິນກໍດີ ດ້ວຍນຶກສົງໄສກໍດີ ຂໍທ່ານທັງຫຼາຍ ຊ່ອຍອະນຸເຄາະວ່າກ່າວຕັກເຕືອນຂ້າພະເຈົ້າ ເມື່ອຂ້າພະເຈົ້າຮູ້ ຈັກໄດ້ແກ້ໄຂຕໍ່ໄປ

ພິກຂຸຜູ້ນະວະກະເພິ່ງຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢ່ອງຍໍ້ ປະນົມມື ກ່າວກັບສົງແບບນີ້ ວ່າ

ທ່ານຜູ້ຈະເລີນ ຂ້າພະເຈົ້າຂໍປະວາຣະນາຕໍ່ສົງ ດ້ວຍໄດ້ເຫັນກໍດີ ດ້ວຍໄດ້ຍິນກໍດີ ດ້ວຍນຶກສົງໄສກໍດີ ຂໍທ່ານທັງຫຼາຍ ຊ່ອຍອະນຸເຄາະວ່າກ່າວຕັກເຕືອນຂ້າພະເຈົ້າ ເມື່ອຂ້າພະເຈົ້າຮູ້ ຈັກໄດ້ແກ້ໄຂຕໍ່ໄປ

ທ່ານຜູ້ຈະເລີນ ແມ່ນຄັ້ງທີ ໒ ຂ້າພະເຈົ້າຂໍປະວາຣະນາຕໍ່ສົງ ດ້ວຍໄດ້ເຫັນກໍດີ ດ້ວຍໄດ້ຍິນກໍດີ ດ້ວຍນຶກສົງໄສກໍດີ ຂໍທ່ານທັງຫຼາຍ ຊ່ອຍອະນຸເຄາະວ່າກ່າວຕັກເຕືອນຂ້າພະເຈົ້າ ເມື່ອຂ້າພະເຈົ້າຮູ້ ຈັກໄດ້ແກ້ໄຂຕໍ່ໄປ

ທ່ານຜູ້ຈະເລີນ ແມ່ນຄັ້ງທີ ໓ ຂ້າພະເຈົ້າຂໍປະວາຣະນາຕໍ່ສົງ ດ້ວຍໄດ້ເຫັນກໍດີ ດ້ວຍໄດ້ຍິນກໍດີ ດ້ວຍນຶກສົງໄສກໍດີ ຂໍທ່ານທັງຫຼາຍ ຊ່ອຍອະນຸເຄາະວ່າກ່າວຕັກເຕືອນຂ້າພະເຈົ້າ ເມື່ອຂ້າພະເຈົ້າຮູ້ ຈັກໄດ້ແກ້ໄຂຕໍ່ໄປ

## ເລື້ອງພຣະສັບພັກຄີນັ່ງຮາບເທິງອາສະນະປະວາຣະນາ

## ຊົງອະນຸຍາດໃຫ້ນັ່ງຢ່ອງຢໍ້ປະວາຣະນາ

[໔໑໑] ສະໄໝນັ້ນ ເມື່ອພິກຂຸຜູ້ເຖຣະທັງຫຼາຍ ນັ່ງຢ່ອງຢໍ້ປະວາຣະນາ ແຕ່ພວກພິກຂຸສັບພັກຄີນັ່ງຢູ່ເທິງອາສະນະ ບັນດາພວກພິກຂຸຜູ້ມີຄວາມມັກໜ້ອຍ ຯລຯ ພາຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ເມື່ອພິກຂຸຜູ້ເຖຣະທັງຫຼາຍນັ່ງຢ່ອງຢໍ້ປະວາຣະນາ ພວກພິກຂຸສັບພັກຄີຈຶ່ງນັ່ງຢູ່ເທິງອາສະນະນໍ" ແລ້ວນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ເມື່ອພິກຂຸ ຜູ້ເຖຣະທັງຫຼາຍນັ່ງຢ່ອງຢໍ້ປະວາຣະນາ ພິກຂຸສັບພັກຄີນັ່ງຢູ່ເທິງອາສະນະ ແມ່ນບໍ?"

ພິກຂຸທັງຫຼາຍທູນຮັບວ່າ "ແມ່ນແລ້ວ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ພິກຂຸທັງຫຼາຍ ເປັນຫຍັງເມື່ອພິກຂຸຜູ້ເຖຣະທັງຫຼາຍນັ່ງຢ່ອງຢໍ້ປະວາຣະນາ ໂມຄະບຸຣຸດພວກນັ້ນຈຶ່ງຢູ່ເທິງອາສະນະນໍ ການເຮັດແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ເມື່ອຊົງຕຳໜິແລ້ວຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເມື່ອບັນດາພິກຂຸຜູ້ເຖຣະທັງຫຼາຍ ນັ່ງຢ່ອງຢໍ້ປະວາຣະນາ ບໍ່ເພິ່ງນັ່ງຢູ່ເທິງອາສະນະ ອົງໃດນັ່ງຢູ່ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸທຸກອົງນັ່ງຢ່ອງຢໍ້ປະວາຣະນາ"

ສະໄໝຕໍ່ມາ ພຣະເຖຣະອົງໜຶ່ງເຖົ້າແກ່ຫຼາຍແລ້ວ ໄດ້ນັ່ງຢ່ອງຢໍ້ເທິງຫຼາຍ ຕ້ອງຖ້າຈົນກວ່າພິກຂຸທຸກອົງ ຈະປະວາຣະນາສຳເລັດ ໄດ້ເປັນລົມລົ້ມລົງພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ນັ່ງຍ່ອງຢູ່ຊົ່ວເວລາປະວາຣະນາ ແລະອະນຸຍາດໃຫ້ພິກຂຸປະວາຣະນາສຳເລັດແລ້ວນັ່ງເທິງອາສະນະ"

## ໑໘໑. ປະວາຣະນາເພທະ

### ວ່າດ້ວຍປະເພດແຫ່ງວັນປະວາຣະນາ

### ເລື້ອງວັນປະວາຣະນາມີ ໒ ວັນ

[໒໑໒] ຄັ້ງນັ້ນ ພິກຂຸທັງຫຼາຍໄດ້ມີການສົນທະນາກັນດັ່ງນີ້ວ່າ "ວັນປະວາຣະນາມີທີ່ໃດນໍ" ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ວັນປະວາຣະນານີ້ມີ ໒ ວັນ ຄື ວັນ ໑໔ ຄ່ຳ ແລະວັນ ໑໕ ຄ່ຳ ພິກຂຸທັງຫຼາຍ ວັນປະວາຣະນາມີ ໒ ວັນເທົ່ານີ້ແລ"

### ເລື້ອງອາການທີ່ເຮັດປະວາຣະນາມີ ໔ ຢ່າງ

ຄັ້ງນັ້ນ ພິກຂຸທັງຫຼາຍ ໄດ້ມີການສົນທະນາກັນດັ່ງນີ້ວ່າ "ການເຮັດປະວາຣະນາມີທີ່ໃດນໍ" ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ການເຮັດປະວາຣະນາມີ ໔ ຢ່າງເຫຼົ່ານີ້ໆ ຄື"

໑. ການເຮັດປະວາຣະນາ ແບ່ງພວກໂດຍບໍ່ຊອບທຳ
໒. ການເຮັດປະວາຣະນາ ພ້ອມພຽງໂດຍບໍ່ຊອບທຳ
໓. ການເຮັດປະວາຣະນາ ແບ່ງພວກໂດຍຊອບທຳ
໔. ການເຮັດປະວາຣະນາ ພ້ອມພຽງກັນໂດຍຊອບທຳ

ພິກຂຸທັງຫຼາຍ ໃນການເຮັດປະວາຣະນາ ໔ ຢ່າງນັ້ນ ການເຮັດປະວາຣະນາໃດແບ່ງພວກໂດຍບໍ່ຊອບທຳ ການເຮັດປະວາຣະນາແນວນັ້ນ ບໍ່ເພິ່ງເຮັດ ແລະເຮົາບໍ່ອະນຸຍາດການເຮັດປະວາຣະນາແນວນັ້ນ

ການເຮັດປະວາຣະນາໃດພ້ອມພຽງກັນໂດຍບໍ່ຊອບທຳ ການເຮັດປະວາຣະນາແນວນັ້ນບໍ່ເພິ່ງເຮັດ ແລະເຮົາບໍ່ອະນຸຍາດການເຮັດປະວາຣະນາແນວນັ້ນ

ການເຮັດປະວາຣະນາໃດແບ່ງພວກໂດຍຊອບທຳ ການເຮັດປະວາຣະນາແນວນັ້ນ ບໍ່ເພິ່ງເຮັດ ແລະເຮົາບໍ່ອະນຸຍາດການເຮັດປະວາຣະນາແນວນັ້ນ

ການເຮັດປະວາຣະນາໃດພ້ອມພຽງກັນໂດຍຊອບທຳ ການເຮັດປະວາຣະນາແນວນັ້ນ ເພິ່ງເຮັດ ແລະເຮົາອະນຸຍາດການເຮັດປະວາຣະນາແນວນັ້ນ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນແລ ພວກທ່ານເພິ່ງເຮັດໃນໃຈວ່າ ຈັກເຮັດປະວາຣະນາຊະນິດທີ່ພ້ອມພຽງກັນໂດຍຊອບທຳ ດັ່ງນີ້ ພວກທ່ານເພິ່ງສຶກສາແນວນີ້ແລ

## ໑໘໔. ປະວາຣະນາທານານຸຊານະນາ

### ວ່າດ້ວຍຊົງອະນຸຍາດໃຫ້ພິກຂຸເປັນໄຂ້ມອບປະວາຣະນາ

### ເລື້ອງພິກຂຸເປັນໄຂ້ມອບປະວາຣະນາ

[໔໑໙] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງກັບພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ພວກທ່ານຈົ່ງປະຊຸມກັນ ສົງຈັກປະວາຣະນາ”

ເມື່ອພຣະອົງຕັດແນວນີ້ ພິກຂຸອົງໜຶ່ງໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ “ມີພິກຂຸເປັນໄຂ້ຢູ່ ຂ້ານ້ອຍ ພິກຂຸຜູ້ເປັນໄຂ້ນັ້ນມາບໍ່ໄດ້”

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ເປັນໄຂ້ມອບປະວາຣະນາ”

ພິກຂຸທັງຫຼາຍ ກໍແລ ພິກຂຸຜູ້ເປັນໄຂ້ເພິ່ງມອບປະວາຣະນາແນວນີ້

ພິກຂຸຜູ້ເປັນໄຂ້ນັ້ນ ເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢ່ອງຢໍ້ ປະນົມມື ກ່າວແນວນີ້ວ່າ “ຂ້ານ້ອຍຂໍມອບປະວາຣະນາ ທ່ານຈົ່ງນຳປະວາຣະນາຂອງຂ້ານ້ອຍໄປ ຈົ່ງບອກປະວາຣະນາຂອງຂ້ານ້ອຍ ຈົ່ງປະວາຣະນາແທນຂ້າພະເຈົ້າ”

ພິກຂຸຜູ້ມອບປະວາຣະນາ ໃຫ້ພິກຂຸຜູ້ຮັບມອບປະວາຣະນາຮູ້ດ້ວຍກາຍ ໃຫ້ຮູ້ດ້ວຍວາຈາ ຫຼື ໃຫ້ຮູ້ດ້ວຍກາຍແລະວາຈາ ປະວາຣະນາເປັນອັນພິກຂຸໄຂ້ມອບໃຫ້ແລ້ວ ພິກຂຸຜູ້ຮັບມອບບໍ່ໃຫ້ພິກຂຸຜູ້ຮັບມອບປະວາຣະນາຮູ້ດ້ວຍກາຍ ຫຼື ບໍ່ໃຫ້ຮູ້ດ້ວຍວາຈາ ບໍ່ໃຫ້ຮູ້ດ້ວຍກາຍແລະວາຈາ ປະວາຣະນາເປັນອັນພິກຂຸໄຂ້ຍັງບໍ່ໄດ້ມອບ ຖ້າໄດ້ແນວນີ້ ນັ້ນເປັນການດີ ຖ້າບໍ່ໄດ້ ພິກຂຸທັງຫຼາຍ ເພິ່ງໃຊ້ຕຽງ ຫຼື ຕັ່ງຫາມພິກຂຸໄຂ້ມາໃນທ່າມກາງສົງແລ້ວປະວາຣະນາ

ພິກຂຸທັງຫຼາຍ ຖ້າພວກພິກຂຸຜູ້ພະຍາບານພິກຂຸໄຂ້ໄດ້ປຶກສາກັນດັ່ງນີ້ວ່າ ຖ້າພວກເຮົາຈັກຍ້າຍພິກຂຸໄຂ້ ອາການໄຂ້ຈັກກຳເຣີບໜັກຂຶ້ນ ຫຼື ພິກຂຸໄຂ້ຈັກເຖິງແກ່ມໍຣະນະພາບ ບໍ່ເພິ່ງຍ້າຍພິກຂຸໄຂ້ ສົງເພິ່ງໄປປະວາຣະນາໃນສຳນັກພິກຂຸໄຂ້ນັ້ນ ແຕ່ສົງບໍ່ເພິ່ງແບ່ງພວກກັນເຮັດປະ

ວາຣະນາ ຖ້າແບ່ງພວກປະວາຣະນາ ຕ້ອງອາບັດທຸກກົດ

ພິກຂຸທັງຫຼາຍ ເມື່ອພິກຂຸໄຂ້ໄດ້ມອບປະວາຣະນາແລ້ວ ຖ້າພິກຂຸຜູ້ນຳປະວາຣະນາປີບໄປຈາກທີ່ນັ້ນ ພິກຂຸໄຂ້ເພິ່ງມອບປະວາຣະນາແກ່ພິກຂຸອົງອື່ນ

ພິກຂຸທັງຫຼາຍ ເມື່ອພິກຂຸໄຂ້ໄດ້ມອບປະວາຣະນາແລ້ວ ຖ້າພິກຂຸຜູ້ນຳປະວາຣະນາສິກອອກໄປໃນບ່ອນນັ້ນ ຯລຯ ມໍຣະນະພາບ ຯລຯ ປະຕິນຍາເປັນສາມະເນນ ຯລຯ ປະຕິນຍາເປັນຜູ້ບອກຄືນສິກຂາ ຯລຯ ປະຕິນຍາເປັນຜູ້ຕ້ອງອັນຕິມະວັດຖຸ ຯລຯ ປະຕິນຍາເປັນຜູ້ວິກົນຈະລິດ ຯລຯ ປະຕິນຍາເປັນຜູ້ມີຈິດຟຸ້ງຊ່ານ ຯລຯ ປະຕິນຍາເປັນຜູ້ກະສັບກະສ່າຍຍ້ອນເວທະນາ ຯລຯ ປະຕິນຍາເປັນຜູ້ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ເຫັນອາບັດ ຯລຯ ປະຕິນຍາເປັນຜູ້ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ຯລຯ ປະຕິນຍາເປັນຜູ້ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ຯລຯ ປະຕິນຍາເປັນບັນເດາະ ຯລຯ ປະຕິນຍາເປັນໄຖຍະສັງວາດ ຯລຯ ປະຕິນຍາເປັນຜູ້ເຂົ້າຮີດເດຍຣະຖີ ຯລຯ ປະຕິນຍາເປັນສັດເດຍຣັດສານ ຯລຯ ປະຕິນຍາເປັນຜູ້ຂ້າມານດາ ຯລຯ ປະຕິນຍາເປັນຜູ້ຂ້າບິດາ ຯລຯ ປະຕິນຍາເປັນຜູ້ຂ້າພຣະອະຣະຫັນ ຯລຯ ປະຕິນຍາເປັນຜູ້ປະທຸດສະຮ້າຍພິກຂຸນີ ຯລຯ ປະຕິນຍາເປັນຜູ້ທຳລາຍສົງ ຯລຯ ປະຕິນຍາເປັນຜູ້ທຳຮ້າຍພຣະສາດສະດາຈົນຫໍ້ພຣະໂລຫິດ ຯລຯ ປະຕິນຍາເປັນອຸພະໂຕພະຍັນຊະນະກະ ພິກຂຸໄຂ້ເພິ່ງມອບປະວາຣະນາແກ່ພິກຂຸອົງອື່ນ

ພິກຂຸທັງຫຼາຍ ເມື່ອພິກຂຸໄຂ້ໄດ້ມອບປະວາຣະນາແລ້ວ ຖ້າພິກຂຸຜູ້ນຳປະວາຣະນາປີບໄປໃນລະຫວ່າງທາງ ປະວາຣະນາເປັນອັນຍັງບໍ່ໄດ້ນຳມາ

ພິກຂຸທັງຫຼາຍ ເມື່ອພິກຂຸໄຂ້ໄດ້ມອບປະວາຣະນາແລ້ວ ຖ້າພິກຂຸຜູ້ນຳປະວາຣະນາສິກອອກໄປໃນລະຫວ່າງທາງ ຯລຯ ປະຕິນຍາເປັນອຸພະໂຕພະຍັນຊະນະກະ ປະວາຣະນາເປັນອັນຍັງບໍ່ໄດ້ນຳມາ

ພິກຂຸທັງຫຼາຍ ເມື່ອພິກຂຸໄຂ້ໄດ້ມອບປະວາຣະນາແລ້ວ ຖ້າພິກຂຸຜູ້ນຳປະວາຣະນາເຂົ້າທີ່ປະຊຸມສົງແລ້ວປີບໄປ ປະວາຣະນາເປັນອັນນຳມາແລ້ວ

ພິກຂຸທັງຫຼາຍ ເມື່ອພິກຂຸໄຂ້ໄດ້ມອບປະວາຣະນາແລ້ວ ຖ້າພິກຂຸຜູ້ນຳປະວາຣະນາເຂົ້າທີ່ປະຊຸມສົງແລ້ວສິກອອກໄປ ຯລຯ ປະຕິນຍາເປັນອຸພະໂຕພະຍັນຊະນະກະ ປະວາຣະນາເປັນອັນນຳມາແລ້ວ

ພິກຂຸທັງຫຼາຍ ເມື່ອພິກຂຸໄຂ້ໄດ້ມອບປະວາຣະນາແລ້ວ ຖ້າພິກຂຸຜູ້ນຳປະວາຣະນາເຂົ້າທີ່ປະຊຸມສົງແລ້ວຫຼັບຢູ່ບໍ່ໄດ້ບອກ ປະວາຣະນາເປັນອັນນຳມາແລ້ວ ພິກຂຸຜູ້ນຳປະວາຣະນາບໍ່ຕ້ອງອາບັດ

ພິກຂຸທັງຫຼາຍ ເມື່ອພິກຂຸໄຂ້ໄດ້ມອບປະວາຣະນາແລ້ວ ຖ້າພິກຂຸຜູ້ນຳປະວາຣະນາເຂົ້າທີ່ປະຊຸມສົງແລ້ວເຜີໄປບໍ່ໄດ້ບອກ ປະວາຣະນາເປັນອັນນຳມາແລ້ວ ພິກຂຸຜູ້ນຳປະວາຣະນາບໍ່ຕ້ອງອາບັດ

ພິກຂຸທັງຫຼາຍ ເມື່ອພິກຂຸເປັນໄຂ້ໄດ້ມອບປະວາຣະນາແລ້ວ ຖ້າພິກຂຸຜູ້ນຳປະວາຣະນາເຂົ້າທີ່ປະຊຸມສົງແລ້ວເຂົ້າສະມາບັດບໍ່ໄດ້ບອກ ປະວາຣະນາເປັນອັນນຳມາແລ້ວ ພິກຂຸຜູ້ນຳປະວາຣະນາ ບໍ່ຕ້ອງອາບັດ

ພິກຂຸທັງຫຼາຍ ເມື່ອພິກຂຸໄຂ້ໄດ້ມອບປະວາຣະນາແລ້ວ ຖ້າພິກຂຸຜູ້ນຳປະວາຣະນາເຂົ້າທີ່ປະຊຸມສົງແລ້ວຈົງໃຈບໍ່ບອກ ປະວາຣະນາເປັນອັນນຳມາແລ້ວ ແຕ່ພິກຂຸຜູ້ນຳປະວາຣະນາຕ້ອງອາບັດທຸກກົດ

ພິກຂຸທັງຫຼາຍ ໃນວັນປະວາຣະນານັ້ນ ເຮົາອະນຸຍາດໃຫ້ພິກຂຸຜູ້ມອບປະວາຣະນາມອບສັນທະດ້ວຍ ເມື່ອສົງມີກິດທຸລະຈຳເປັນ

## ໑໔໓. ຍາຕະກາທິກະຫະນະກະຖາ

## ວ່າດ້ວຍໝູ່ຍາດເປັນຕົ້ນຈັບພິກຂຸ

## ເລື້ອງພິກຂຸຖືກພວກຍາດເປັນຕົ້ນຈັບໄວ້

[໔໑໔] ສະໄໝນັ້ນ ໃນວັນປະວາຣະນານັ້ນ ໝູ່ຍາດໄດ້ຈັບພິກຂຸອົງໜຶ່ງໄວ້ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ໃນວັນປະວາຣະນານັ້ນ ໝູ່ຍາດຈັບພິກຂຸໄວ້ ພິກຂຸທັງຫຼາຍ ເພິ່ງກ່າວກັບໝູ່ຍາດນັ້ນແນວນີ້ວ່າ “ທ່ານທັງຫຼາຍ ກະລຸນາປ່ອຍພິກຂຸນີ້ໄວ້ຈັກໜ້ອຍຈົນກວ່າພິກຂຸນີ້ຈະມອບປະວາຣະນາສຳເລັດເທີ້ນ” ຖ້າໄດ້ແນວນັ້ນ ນັ້ນເປັນການດີ ຖ້າບໍ່ໄດ້ ພິກຂຸທັງຫຼາຍ ເພິ່ງກ່າວກັບຍາດເຫຼົ່ານັ້ນແນວນີ້ວ່າ “ທ່ານທັງຫຼາຍກະລຸນາຖ້າໃນທີ່ອັນຄວນກ່ອນຈັກໜ້ອຍ ຈົນກວ່າພິກຂຸນີ້ຈະມອບປະວາຣະນາສຳເລັດເທີ້ນ”

ຖ້າໄດ້ແນວນັ້ນ ນັ້ນເປັນການດີ ຖ້າບໍ່ໄດ້ ພິກຂຸທັງຫຼາຍ ເພິ່ງກ່າວກັບຍາດເຫຼົ່ານັ້ນແນວນີ້ວ່າ “ທ່ານທັງຫຼາຍ ກະລຸນານຳພິກຂຸນີ້ໄປໄວ້ນອກສີມາຈັກໜ້ອຍຈົນກວ່າສົງຈະປະວາຣະນາສຳເລັດເທີ້ນ” ຖ້າໄດ້ແນວນັ້ນ ນັ້ນເປັນການດີ ຖ້າບໍ່ໄດ້ ສົງບໍ່ເພິ່ງແບ່ງພວກປະວາຣະນາ ຖ້າແບ່ງພວກປະວາຣະນາ ຕ້ອງອາບັດທຸກກົດ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນວັນປະວາຣະນານັ້ນ ພຣະຣາຊາທັງຫຼາຍຊົງຈັບພິກຂຸໄວ້ ຯລຯ ພວກໂຈນຈັບໄວ້ ຯລຯ ພວກນັກເລງຈັບໄວ້ ຯລຯ ພວກພິກຂຸທີ່ເປັນສັດຕູກັນຈັບໄວ້ ພິກຂຸທັງຫຼາຍ ເພິ່ງກ່າວກັບພວກພິກຂຸທີ່ເປັນສັດຕູກັນເຫຼົ່ານັ້ນແນວນີ້ວ່າ "ທ່ານທັງຫຼາຍກະລຸນາປ່ອຍພິກຂຸນີ້ໄວ້ຈັກໜ້ອຍກ່ອນ ຈົນກວ່າພິກຂຸນີ້ຈະມອບປະວາຣະນາສຳເລັດເທື່ອ" ຖ້າໄດ້ແນວນັ້ນ ນັ້ນເປັນການດີ ຖ້າບໍ່ໄດ້ ພິກຂຸທັງຫຼາຍ ເພິ່ງກ່າວກັບພວກພິກຂຸຜູ້ເປັນສັດຕູນັ້ນແນວນີ້ວ່າ "ທ່ານທັງຫຼາຍກະລຸນາຖ້າໃນບ່ອນສົມຄວນຈັກໜ້ອຍກ່ອນ ຈົນກວ່າພິກຂຸນີ້ຈະມອບປະວາຣະນາສຳເລັດເທື່ອ" ຖ້າໄດ້ແນວນັ້ນ ນັ້ນເປັນການດີ ຖ້າບໍ່ໄດ້ ພິກຂຸທັງຫຼາຍເພິ່ງກ່າວກັບພວກພິກຂຸຜູ້ເປັນສັດຕູນັ້ນແນວນີ້ວ່າ "ທ່ານທັງຫຼາຍ ກະລຸນານຳພິກຂຸນີ້ໄປໄວ້ນອກສີມາກ່ອນຈັກໜ້ອຍຈົນກວ່າສົງຈະປະວາຣະນາສຳເລັດເທື່ອ" ຖ້າໄດ້ແນວນັ້ນ ນັ້ນເປັນການດີ ຖ້າບໍ່ໄດ້ ສົງບໍ່ເພິ່ງແບ່ງພວກກັນປະວາຣະນາ ຖ້າແບ່ງພວກກັນປະວາຣະນາ ຕ້ອງອາບັດທຸກກົດ

# ໑໘໔. ສັງຄະປະວາຣະນາທີປະເພທະ

## ວ່າດ້ວຍປະເພດປະວາຣະນາມີປະວາຣະນາເປັນການສົງເປັນຕົ້ນ

## ເລື້ອງພິກຂຸ ໕ ອົງ ປະວາຣະນາເປັນການສົງ

[໔໑໕] ສະໄໝນັ້ນ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸຢູ່ນຳກັນ ໕ ອົງພິກຂຸເຫຼົ່ານັ້ນ ມີການສົນທະນາກັນດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ວ່າ ສົງເພິ່ງປະວາຣະນາ ກໍພວກເຮົາມີ ໕ ອົງ ຈະເພິ່ງປະວາຣະນາແນວໃດນໍ" ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸ ໕ ອົງ ປະວາຣະນາ ເປັນການສົງ"

## ເລື້ອງພິກຂຸ ໔ ອົງປະວາຣະນາເປັນການຄະນະ

[໔໑໖] ສະໄໝນັ້ນ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸຢູ່ນຳກັນ ໔ ອົງພິກຂຸເຫຼົ່ານັ້ນໄດ້ມີການສົນທະນາກັນດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດໃຫ້ພິກຂຸ ໕ ອົງ ປະວາຣະນາເປັນການສົງ ກໍພວກເຮົາມີພຽງ ໔ ອົງ ຈະເພິ່ງປະວາຣະນາແນວໃດນໍ" ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸ ໔ ອົງ ປະວາຣະນາຕໍ່ກັນ"

## ວິທີເຮັດປະວາຣະນາເປັນການຄະນະແລະຄຳປະກາດ

ພິກຂຸທັງຫຼາຍ ກໍແລ ພິກຂຸ ໔ ອົງນັ້ນ ເພິ່ງປະວາຣະນາແນວນີ້ ພິກຂຸຜູ້ສະຫຼາດ ຜູ້ສາມາດເພິ່ງປະກາດໃຫ້ພິກຂຸເຫຼົ່ານັ້ນຮູ້ວ່າ

ທ່ານທັງຫຼາຍ ຈົ່ງຟັງຂ້າພະເຈົ້າ ວັນນີ້ເປັນວັນປະວາຣະນາ ຖ້າທ່ານທັງຫຼາຍພ້ອມກັນແລ້ວ ເຮົາທັງຫຼາຍເພິ່ງປະວາຣະນາຕໍ່ກັນ

ພິກຂຸຜູ້ເຖຣະເພິ່ງຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຍ່ອງຍໍ້ ປະນົມມື ກ່າວຄຳປະວາຣະນາຕໍ່ພິກຂຸ (ຜູ້ນະວະກະ) ເຫຼົ່ານັ້ນແນວນີ້ວ່າ

## ຄຳປະວາຣະນາສຳລັບພິກຂຸມີພັນສາຫຼາຍກວ່າ

ທ່ານທັງຫຼາຍ ເຮົາຂໍປະວາຣະນາຕໍ່ທ່ານທັງຫຼາຍ ດ້ວຍໄດ້ເຫັນກໍດີ ດ້ວຍໄດ້ຍິນກໍດີ ດ້ວຍນຶກສົງໄສກໍດີ ຂໍທ່ານທັງຫຼາຍ ຊ່ອຍອະນຸເຄາະວ່າກ່າວຕັກເຕືອນເຮົາ ເມື່ອເຮົາຮູ້ ຈັກໄດ້ແກ້ໄຂຕໍ່ໄປ

ທ່ານທັງຫຼາຍ ແມ່ນຄັ້ງທີ ໒ ເຮົາຂໍປະວາຣະນາຕໍ່ທ່ານທັງຫຼາຍ ດ້ວຍໄດ້ເຫັນກໍດີ ດ້ວຍໄດ້ຍິນກໍດີ ດ້ວຍນຶກສົງໄສກໍດີ ຂໍທ່ານທັງຫຼາຍ ຊ່ອຍອະນຸເຄາະວ່າກ່າວຕັກເຕືອນເຮົາ ເມື່ອເຮົາຮູ້ ຈັກໄດ້ແກ້ໄຂຕໍ່ໄປ

ທ່ານທັງຫຼາຍ ແມ່ນຄັ້ງທີ ໓ ເຮົາຂໍປະວາຣະນາຕໍ່ທ່ານທັງຫຼາຍ ດ້ວຍໄດ້ເຫັນກໍດີ ດ້ວຍໄດ້ຍິນກໍດີ ດ້ວຍນຶກສົງໄສກໍດີ ຂໍທ່ານທັງຫຼາຍ ຊ່ອຍອະນຸເຄາະວ່າກ່າວຕັກເຕືອນເຮົາ ເມື່ອເຮົາຮູ້ ຈັກໄດ້ແກ້ໄຂຕໍ່ໄປ

## ຄຳປະວາຣະນາສຳລັບພິກຂຸພັນສາໜ້ອຍກວ່າ

ພິກຂຸຜູ້ນະວະກະເພິ່ງຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຍ່ອງຍໍ້ ປະນົມມື ກ່າວຄຳປະວາຣະນາຕໍ່ພິກຂຸ (ຜູ້ເຖຣະ) ເຫຼົ່ານັ້ນແນວນີ້ວ່າ

ທ່ານຜູ້ຈະເລີນທັງຫຼາຍ ຂ້ານ້ອຍຂໍປະວາຣະນາຕໍ່ທ່ານທັງຫຼາຍ ດ້ວຍໄດ້ເຫັນກໍດີດ້ວຍໄດ້ຍິນກໍດີ ດ້ວຍນຶກສົງໄສກໍດີ ຂໍທ່ານທັງຫຼາຍ ຊ່ອຍອະນຸເຄາະວ່າກ່າວຕັກເຕືອນຂ້ານ້ອຍ ເມື່ອຂ້ານ້ອຍຮູ້ ຈັກໄດ້ແກ້ໄຂຕໍ່ໄປ

ທ່ານຜູ້ຈະເລີນທັງຫຼາຍ ແມ່ນຄັ້ງທີ ໒ ຂ້ານ້ອຍຂໍປະວາຣະນາຕໍ່ທ່ານທັງຫຼາຍ ດ້ວຍໄດ້ເຫັນກໍດີດ້ວຍໄດ້ຍິນກໍດີ ດ້ວຍນຶກສົງໄສກໍດີ ຂໍທ່ານທັງຫຼາຍ ຊ່ອຍອະນຸເຄາະວ່າກ່າວຕັກເຕືອນຂ້ານ້ອຍ ເມື່ອຂ້ານ້ອຍຮູ້ ຈັກໄດ້ແກ້ໄຂຕໍ່ໄປ

ທ່ານຜູ້ຈະເລີນທັງຫຼາຍ ແມ່ນຄັ້ງທີ ໓ ຂ້ານ້ອຍຂໍປະວາຣະນາຕໍ່ທ່ານທັງຫຼາຍ ດ້ວຍໄດ້ເຫັນກໍດີດ້ວຍໄດ້ຍິນກໍດີ ດ້ວຍນຶກສົງໄສກໍດີ ຂໍທ່ານທັງຫຼາຍ ຊ່ອຍອະນຸເຄາະວ່າກ່າວຕັກເຕືອນຂ້ານ້ອຍ ເມື່ອຂ້ານ້ອຍຮູ້ ຈັກໄດ້ແກ້ໄຂຕໍ່ໄປ

## ເລື້ອງພິກຂຸ ໓ ອົງປະວາຣະນາເປັນການຄະນະ

ສະໄໝນັ້ນ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸຢູ່ນຳກັນ ໓ ອົງ ພິກຂຸເຫຼົ່ານັ້ນໄດ້ມີການສົນທະນາກັນດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດໃຫ້ພິກຂຸ ໕ ອົງປະວາຣະນາເປັນການສົງ ໃຫ້ພິກຂຸ ໔ ອົງ ປະວາຣະນາຕໍ່ກັນ ກໍພວກເຮົາມີພຽງ ໓ ອົງ ຈະເພິ່ງປະວາຣະນາແນວໃດນໍ" ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸ ໓ ອົງ ປະວາຣະນາຕໍ່ກັນໄດ້"

## ວິທີເຮັດປະວາຣະນາເປັນການຄະນະ

ພິກຂຸທັງຫຼາຍ ກໍແລພິກຂຸ ໓ ອົງນັ້ນ ເພິ່ງປະວາຣະນາແນວນີ້ ພິກຂຸຜູ້ສະຫຼາດ ຜູ້ສາມາດເພິ່ງປະກາດໃຫ້ພິກຂຸເຫຼົ່ານັ້ນຮູ້ ວ່າ

ທ່ານທັງຫຼາຍ ຈົ່ງຟັງຂ້າພະເຈົ້າ ວັນນີ້ເປັນວັນປະວາຣະນາ ຖ້າທ່ານທັງຫຼາຍພ້ອມກັນແລ້ວ ເຮົາທັງຫຼາຍເພິ່ງປະວາຣະນາຕໍ່ກັນ

ພິກຂຸຜູ້ເຖຣະເພິ່ງຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢ່ອງຍໍ້ ປະນົມມື ກ່າວຄຳປະວາຣະນາຕໍ່ພິກຂຸ (ນະວະກະ) ເຫຼົ່ານັ້ນແນວນີ້ ວ່າ

## ຄຳປະວາຣະນາ

ທ່ານທັງຫຼາຍ ເຮົາຂໍປະວາຣະນາຕໍ່ທ່ານທັງຫຼາຍ ດ້ວຍໄດ້ເຫັນກໍດີ ດ້ວຍໄດ້ຍິນກໍດີ ດ້ວຍນຶກສົງໄສກໍດີ ຂໍທ່ານທັງຫຼາຍ ຊ່ອຍອະນຸເຄາະວ່າກ່າວຕັກເຕືອນເຮົາ ເມື່ອເຮົາຮູ້ ຈັກໄດ້ແກ້ໄຂຕໍ່ໄປ

ທ່ານທັງຫຼາຍ ແມ່ນຄັ້ງທີ ໔ ເຮົາຂໍປະວາຣະນາຕໍ່ທ່ານທັງຫຼາຍ ດ້ວຍໄດ້ເຫັນກໍດີ ດ້ວຍໄດ້ຍິນກໍດີ ດ້ວຍນຶກສົງໄສກໍດີ ຂໍທ່ານທັງຫຼາຍ ຊ່ອຍອະນຸເຄາະວ່າກ່າວຕັກເຕືອນເຮົາ ເມື່ອເຮົາຮູ້ ຈັກໄດ້ແກ້ໄຂຕໍ່ໄປ

ທ່ານທັງຫຼາຍ ແມ່ນຄັ້ງທີ ໓ ເຮົາຂໍປະວາຣະນາຕໍ່ທ່ານທັງຫຼາຍ ດ້ວຍໄດ້ເຫັນກໍດີ ດ້ວຍໄດ້ຍິນກໍດີ ດ້ວຍນຶກສົງໄສກໍດີ ຂໍທ່ານທັງຫຼາຍຊ່ອຍອະນຸເຄາະວ່າກ່າວຕັກເຕືອນເຮົາ ເມື່ອເຮົາຮູ້ ຈັກໄດ້ແກ້ໄຂຕໍ່ໄປ

ພິກຂຸຜູ້ນະວະກະ ເພິ່ງຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢ່ອງຢໍ້ ປະນົມມື ກ່າວ ຄຳປະວາຣະນາຕໍ່ພິກຂຸ (ຜູ້ເຖຣະ) ເຫຼົ່ານັ້ນແນວນີ້ ວ່າ

## ຄຳປະວາຣະນາ

ທ່ານຜູ້ຈະເລີນທັງຫຼາຍ ຂ້ານ້ອຍຂໍປະວາຣະນາຕໍ່ທ່ານທັງຫຼາຍ ດ້ວຍໄດ້ເຫັນກໍດີ ດ້ວຍໄດ້ຍິນກໍດີ ດ້ວຍນຶກສົງໄສກໍດີ ຂໍທ່ານທັງຫຼາຍ ຊ່ອຍອະນຸເຄາະວ່າກ່າວຕັກເຕືອນຂ້ານ້ອຍ ເມື່ອຂ້ານ້ອຍ ຈັກໄດ້ແກ້ໄຂຕໍ່ໄປ

ທ່ານຜູ້ຈະເລີນທັງຫຼາຍ ແມ່ນຄັ້ງທີ ໒ ຂ້ານ້ອຍຂໍປະວາຣະນາຕໍ່ທ່ານທັງຫຼາຍ ດ້ວຍໄດ້ເຫັນກໍດີ ດ້ວຍໄດ້ຍິນກໍດີ ດ້ວຍນຶກສົງໄສກໍດີ ຂໍທ່ານທັງຫຼາຍ ຊ່ອຍອະນຸເຄາະວ່າກ່າວຕັກເຕືອນຂ້ານ້ອຍ ເມື່ອຂ້ານ້ອຍ ຈັກໄດ້ແກ້ໄຂຕໍ່ໄປ

ທ່ານຜູ້ຈະເລີນທັງຫຼາຍ ແມ່ນຄັ້ງທີ ໓ ຂ້ານ້ອຍຂໍປະວາຣະນາຕໍ່ທ່ານທັງຫຼາຍ ດ້ວຍໄດ້ເຫັນກໍດີ ດ້ວຍໄດ້ຍິນກໍດີ ດ້ວຍນຶກສົງໄສກໍດີ ຂໍທ່ານທັງຫຼາຍ ຊ່ອຍອະນຸເຄາະວ່າກ່າວຕັກເຕືອນຂ້ານ້ອຍ ເມື່ອຂ້ານ້ອຍ ຈັກໄດ້ແກ້ໄຂຕໍ່ໄປ

## ເລື້ອງພິກຂຸ ໒ ອົງ ປະວາຣະນາຕໍ່ກັນ

[໔໑໗] ສະໄໝນັ້ນ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸຢູ່ນຳກັນ ໒ ອົງ ພິກຂຸເຫຼົ່ານັ້ນ ໄດ້ມີການສົນທະນາກັນດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າ ຊົງອະນຸຍາດໃຫ້ພິກຂຸ ໕ ອົງ ປະວາຣະນາເປັນການສົງ ໃຫ້ພິກຂຸ ໔ ອົງ ປະວາຣະນາຕໍ່ກັນ ໃຫ້ພິກຂຸ ໓ ອົງ ປະວາຣະນາ ຕໍ່ກັນ ກໍພວກເຮົາມີພຽງ ໒ ອົງ ຈະເພິ່ງປະວາຣະນາແນວໃດນໍ" ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸ ໒ ອົງ ປະວາຣະນາ ຕໍ່ກັນ

## ວິທີເຮັດປະວາຣະນາເປັນການຄະນະແລະຄຳປະວາຣະນາ

ພິກຂຸທັງຫຼາຍ ກໍແລພິກຂຸ ໒ ອົງນັ້ນ ເພິ່ງປະວາຣະນາແນວນີ້

ພິກຂຸຜູ້ເຖຣະ ເພິ່ງຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢ່ອງຢໍ້ ປະນົມມື ກ່າວກັບພິກຂຸນະວະກະແນວນີ້ ວ່າ

ທ່ານ ເຮົາຂໍປະວາຣະນາຕໍ່ທ່ານ ດ້ວຍໄດ້ເຫັນກໍດີ ດ້ວຍໄດ້ຍິນກໍດີ ດ້ວຍນຶກສົງໄສກໍດີ ຂໍທ່ານຊ່ອຍອະນຸເຄາະວ່າກ່າວຕັກເຕືອນເຮົາ ເມື່ອເຮົາຮູ້ ຈັກໄດ້ແກ້ໄຂຕໍ່ໄປ

ທ່ານ ແມ່ນຄັ້ງທີ ໒ ເຮົາຂໍປະວາຣະນາຕໍ່ທ່ານ ດ້ວຍໄດ້ເຫັນກໍດີ ດ້ວຍໄດ້ຍິນກໍດີ ດ້ວຍນຶກສົງໄສກໍດີ ຂໍທ່ານຊ່ອຍອະນຸເຄາະວ່າກ່າວຕັກເຕືອນເຮົາ ເມື່ອເຮົາຮູ້ ຈັກໄດ້ແກ້ໄຂຕໍ່ໄປ

ທ່ານ ແມ່ນຄັ້ງທີ ໓ ເຮົາຂໍປະວາຣະນາຕໍ່ທ່ານ ດ້ວຍໄດ້ເຫັນກໍດີ ດ້ວຍໄດ້ຍິນກໍດີ ດ້ວຍນຶກສົງໄສກໍດີ ຂໍທ່ານຊ່ອຍອະນຸເຄາະວ່າກ່າວຕັກເຕືອນເຮົາ ເມື່ອເຮົາຮູ້ ຈັກໄດ້ແກ້ໄຂຕໍ່ໄປ

ພິກຂຸຜູ້ນະວະກະ ເພິ່ງຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢ່ອງຢໍ້ ປະນົມມື ກ່າວກັບພິກຂຸຜູ້ເຖຣະແນວນີ້ ວ່າ

ທ່ານຜູ້ຈະເລີນ ຂ້ານ້ອຍຂໍປະວາຣະນາຕໍ່ທ່ານ ດ້ວຍໄດ້ເຫັນກໍດີ ດ້ວຍໄດ້ຍິນກໍດີ ດ້ວຍນຶກສົງໄສກໍດີ ຂໍທ່ານຊ່ອຍອະນຸເຄາະວ່າກ່າວຕັກເຕືອນຂ້ານ້ອຍ ເມື່ອຂ້ານ້ອຍຮູ້ ຈັກໄດ້ແກ້ໄຂຕໍ່ໄປ

ທ່ານຜູ້ຈະເລີນ ແມ່ນຄັ້ງທີ ໒ ຂ້ານ້ອຍຂໍປະວາຣະນາຕໍ່ທ່ານ ດ້ວຍໄດ້ເຫັນກໍດີ ດ້ວຍໄດ້ຍິນກໍດີ ດ້ວຍນຶກສົງໄສກໍດີ ຂໍທ່ານຊ່ອຍອະນຸເຄາະວ່າກ່າວຕັກເຕືອນຂ້ານ້ອຍ ເມື່ອຂ້ານ້ອຍຮູ້ ຈັກໄດ້ແກ້ໄຂຕໍ່ໄປ

ທ່ານຜູ້ຈະເລີນ ແມ່ນຄັ້ງທີ ໓ ຂ້ານ້ອຍຂໍປະວາຣະນາຕໍ່ທ່ານ ດ້ວຍໄດ້ເຫັນກໍດີ ດ້ວຍໄດ້ຍິນກໍດີ ດ້ວຍນຶກສົງໄສກໍດີ ຂໍທ່ານຊ່ອຍອະນຸເຄາະວ່າກ່າວຕັກເຕືອນຂ້ານ້ອຍ ເມື່ອຂ້ານ້ອຍຮູ້ ຈັກໄດ້ແກ້ໄຂຕໍ່ໄປ

## ເລື້ອງພິກຂຸອົງດຽວເຮັດອະທິຖານປະວາຣະນາ

[໔໑໗] ສະໄໝນັ້ນ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸຢູ່ອົງດຽວ ພິກຂຸນັ້ນໄດ້ມີຄວາມຄິດດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດໃຫ້ພິກຂຸ ໕ ອົງ ປະວາຣະນາເປັນການສົງ ໃຫ້ພິກຂຸ ໔ ອົງ ປະວາຣະນາຕໍ່ກັນ ໃຫ້ພິກຂຸ ໓ ອົງ ປະວາຣະນາຕໍ່ກັນ ໃຫ້ພິກຂຸ ໒ ອົງ ປະວາຣະນາຕໍ່ກັນ ກໍເຮົາຢູ່ພຽງອົງດຽວ ຈະເພິ່ງປະວາຣະນາແນວໃດນໍ" ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸຢູ່ອົງດຽວ ພິກຂຸນັ້ນ ເພິ່ງປັດກວາດສະຖານທີ່ທີ່ພິກຂຸທັງຫຼາຍຕ້ອງກັບມາ ຄືໂຮງສັນ ຫຼື ມົນດົບ ຫຼື ເຫງົ້າໄມ້ກໍຕາມ ແລ້ວຕັ້ງນ້ຳສັນນ້ຳໃຊ້ ປູອາສະນະ ໄຕ້ປະທີບແລ້ວນັ່ງຢູ່ ຖ້າມີພິກຂຸເຫຼົ່າອື່ນມາ ເພິ່ງປະວາຣະນາກັບພິກຂຸເຫຼົ່ານັ້ນ ຖ້າບໍ່ມີມາ ເພິ່ງອະທິຖານວ່າ ວັນນີ້ ເປັນວັນປະວາຣະນາຂອງເຮົາ ຖ້າບໍ່ອະທິຖານ ຕ້ອງອາບັດທຸກກົດ

ພິກຂຸທັງຫຼາຍ ໃນອາວາດທີ່ມີພິກຂຸຢູ່ ໕ ອົງ ບໍ່ເພິ່ງນຳປະວາຣະນາຂອງພິກຂຸອົງໜຶ່ງມາ ແລ້ວ ອີກ ໔ ອົງປະວາຣະນາເປັນການສົງ ຖ້າປະວາຣະນາ ຕ້ອງອາບັດທຸກກົດ

ພິກຂຸທັງຫຼາຍ ໃນອາວາດທີ່ມີພິກຂຸຢູ່ ໔ ອົງ ບໍ່ເພິ່ງນຳປະວາຣະນາຂອງພິກຂຸອົງໜຶ່ງມາ ແລ້ວ ອີກ ໓ ອົງປະວາຣະນາຕໍ່ກັນ ຖ້າປະວາຣະນາ ຕ້ອງອາບັດທຸກກົດ

ພິກຂຸທັງຫຼາຍ ໃນອາວາດທີ່ມີພິກຂຸຢູ່ ໓ ອົງ ບໍ່ເພິ່ງນຳປະວາຣະນາຂອງພິກຂຸອົງໜຶ່ງມາ ແລ້ວ ອີກ ໒ ອົງປະວາຣະນາຕໍ່ກັນ ຖ້າປະວາຣະນາ ຕ້ອງອາບັດທຸກກົດ

ພິກຂຸທັງຫຼາຍ ໃນອາວາດທີ່ມີພິກຂຸຢູ່ ໒ ອົງ ບໍ່ເພິ່ງນຳປະວາຣະນາຂອງພິກຂຸອົງໜຶ່ງມາ ແລ້ວ ອີກອົງໜຶ່ງອະທິຖານ ຖ້າອະທິຖານ ຕ້ອງອາບັດທຸກກົດ

# ໑໒໕. ອາປັດຕິປະຕິກຳມະວິທີ

## ວ່າດ້ວຍວິທີແກ້ໄຂອາບັດ

## ເລື້ອງພິກຂຸຕ້ອງອາບັດໃນວັນປະວາຣະນາ

[໔໑໗] ສະໄໝນັ້ນ ພິກຂຸອົງໜຶ່ງຕ້ອງອາບັດ ໃນວັນປະວາຣະນານັ້ນ ພິກຂຸນັ້ນໄດ້ມີຄວາມຄິດດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ວ່າ ພິກຂຸມີອາບັດຕິດໂຕບໍ່ເພິ່ງປະວາຣະນາ ດັ່ງນີ້ ກໍເຮົາຕ້ອງອາບັດແລ້ວ ຈະເພິ່ງປະຕິບັດແນວໃດນໍ" ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ໃນວັນປະວາຣະນານັ້ນ ພິກຂຸຕ້ອງອາບັດ ພິກຂຸນັ້ນເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຍ່ອງຍໍ້ ປະນົມມືກ່າວແນວນີ້ວ່າ ຂ້ານ້ອຍຕ້ອງອາບັດຊື່ນີ້ ຂໍສະແດງຄືນອາບັດນັ້ນ ຂ້ານ້ອຍ

ພິກຂຸຜູ້ຮັບເພິ່ງກ່າວວ່າ "ທ່ານເຫັນບໍ?"

ພິກຂຸຜູ້ສະແດງເພິ່ງຕອບວ່າ "ຂ້ານ້ອຍ ເຫັນ"

ພິກຂຸຜູ້ຮັບເພິ່ງກ່າວວ່າ "ທ່ານເພິ່ງສັງລວມຕໍ່ໄປ"

## ເລື້ອງພິກຂຸບໍ່ແນ່ໃຈໃນອາບັດ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນວັນປະວາຣະນານັ້ນ ພິກຂຸມີຄວາມບໍ່ແນ່ໃຈໃນອາບັດ ພິກຂຸນັ້ນເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຍ່ອງຍໍ້ ປະນົມ ມືກ່າວແນວນີ້ວ່າ "ເຮົາມີຄວາມບໍ່ແນ່ໃຈໃນອາບັດຊື່ນີ້ ເຮົາເມື່ອໝົດຄວາມບໍ່ແນ່ໃຈ ຈັກເຮັດຄືນອາບັດນັ້ນ" ແລ້ວປະວາຣະນາ ແຕ່ຕ້ອງບໍ່ເຮັດອັນຕະລາຍຕໍ່ປະວາຣະນາ ຍ້ອນຂໍ້ນັ້ນເປັນປັດໄຈ

# ໑໔ຜ. ອາປັດຕິອາວິກະຣະນະວິທີ

## ວ່າດ້ວຍວິທີເປີດເຜີຍອາບັດ

### ເລື້ອງພິກຂຸຣະນຶກອາບັດໄດ້

[໔໔໐] ສະໄໝນັ້ນ ພິກຂຸອົງໜຶ່ງກຳລັງປະວາຣະນາ ຣະນຶກອາບັດໄດ້ ພິກຂຸນັ້ນໄດ້ມີຄວາມຄິດດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ວ່າ ພິກຂຸມີອາບັດຕິດໂຕບໍ່ເພິ່ງປະວາຣະນາ ດັ່ງນີ້ ກໍເຮົາຕ້ອງອາບັດແລ້ວ ຈະເພິ່ງປະຕິບັດແນວໃດນໍ"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ ພິກຂຸທັງຫຼາຍ ໃນກໍລະນີນີ້ ເມື່ອພິກຂຸກຳລັງປະວາຣະນາ ຣະນຶກອາບັດໄດ້ ພິກຂຸນັ້ນເພິ່ງບອກພິກຂຸໃກ້ຄຽງແນວນີ້ວ່າ ຂ້ານ້ອຍຕ້ອງອາບັດຊື່ນີ້ ເມື່ອຂ້ານ້ອຍລຸກຈາກບ່ອນນີ້ແລ້ວຈັກເຮັດຄືນອາບັດນັ້ນ" ແລ້ວປະວາຣະນາ ແຕ່ບໍ່ຄວນເຮັດອັນຕະລາຍຕໍ່ປະວາຣະນາ ຍ້ອນຂໍ້ນັ້ນເປັນປັດໄຈ

### ກຳລັງປະວາຣະນາບໍ່ແນ່ໃຈໃນອາບັດ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ເມື່ອພິກຂຸກຳລັງປະວາຣະນາ ມີຄວາມບໍ່ແນ່ໃຈໃນອາບັດ ພິກຂຸນັ້ນ ເພິ່ງບອກພິກຂຸໃກ້ຄຽງແນວນີ້ວ່າ "ຂ້ານ້ອຍມີຄວາມບໍ່ແນ່ໃຈໃນອາບັດຊື່ນີ້ ຂ້ານ້ອຍເມື່ອໝົດຄວາມບໍ່ແນ່ໃຈຈັກເຮັດຄືນອາບັດນັ້ນ" ແລ້ວປະວາຣະນາ ແຕ່ຕ້ອງບໍ່ເຮັດອັນຕະຣາຍຕໍ່ປະວາຣະນາ ຍ້ອນຂໍ້ນັ້ນເປັນປັດໄຈ

# ໑໔ກ. ສະພາຄາປັດຕິປະຕິກຳມະວິທີ

## ວ່າດ້ວຍວິທີແກ້ໄຂສະພາຄາບັດ

### ເລື້ອງສົງທັງໝົດຕ້ອງສະພາຄາບັດ

[໔໔໑] ສະໄໝນັ້ນ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ສົງທັງໝົດຕ້ອງສະພາຄາບັດ ພິກຂຸເຫຼົ່ານັ້ນ ໄດ້ປຶກສາກັນດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ວ່າ ພິກຂຸບໍ່ເພິ່ງສະແດງສະພາຄາບັດ ບໍ່ເພິ່ງຮັບການສະແດງສະພາຄາບັດ ກໍສົງທັງໝົດນີ້ຕ້ອງສະພາຄາບັດແລ້ວ ພວກເຮົາຈະເພິ່ງປະຕິບັດແນວໃດນໍ" ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ສົງທັງໝົດຕ້ອງສະພາຄາບັດ ພິກຂຸເຫຼົ່ານັ້ນ ເພິ່ງສົ່ງພິກຂຸອົງໜຶ່ງໄປສູ່ອາວາດ ໃກ້ຄຽງພໍຈະກັບມາທັນໃນວັນນັ້ນດ້ວຍສັ່ງວ່າ ທ່ານ ທ່ານຈົ່ງໄປເຮັດຄືນອາບັດນັ້ນມາເທີ້ນ ພວກເຮົາຈັກເຮັດຄືນອາບັດນັ້ນໃນສຳນັກຂອງທ່ານ ຖ້າໄດ້ແນວນີ້ ນັ້ນເປັນການດີ ຖ້າບໍ່ໄດ້ພິກຂຸຜູ້ສະຫຼາດ ຜູ້ສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິກຳມະວາຈາວ່າ

### ຍັດຕິກຳມະວາຈາ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງທັງໝົດນີ້ຕ້ອງສະພາຄາບັດແລ້ວ ເມື່ອພົບພິກຂຸອົງອື່ນຜູ້ບໍລິສຸດບໍ່ມີອາບັດ ກໍຈັກເຮັດຄືນອາບັດນັ້ນໃນສຳນັກຂອງພິກຂຸອົງນັ້ນ ດັ່ງນີ້ ແລ້ວປະວາຣະນາ ແຕ່ບໍ່ເພິ່ງເຮັດອັນຕະລາຍຕໍ່ປະວາຣະນາ ຍ້ອນຂໍ້ນັ້ນເປັນປັດໄຈ

## ສົງທັງໝົດບໍ່ແນ່ໃຈໃນສະພາຄາບັດ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ສົງທັງໝົດມີຄວາມບໍ່ແນ່ໃຈໃນສະພາຄາບັດ ພິກຂຸຜູ້ສະຫຼາດ ຜູ້ສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິກຳມະວາຈາວ່າ

### ຍັດຕິກຳມະວາຈາ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງທັງໝົດນີ້ມີຄວາມບໍ່ແນ່ໃຈໃນສະພາຄາບັດ ເມື່ອໝົດຄວາມບໍ່ແນ່ໃຈ ກໍຈັກເຮັດຄືນອາບັດນັ້ນ ດັ່ງນີ້ ແລ້ວປະວາຣະນາ ແຕ່ບໍ່ເພິ່ງເຮັດອັນຕະລາຍຕໍ່ປະວາຣະນາຍ້ອນຂໍ້ນັ້ນເປັນປັດໄຈ

**ປະຖະມະພານະວານທີ ໑ ຈົບ**

# ໑໔໗. ອະນາປັດຕິປັນນະຣະສະກະ

## ວ່າດ້ວຍການປະວາຣະນາໂດຍບໍ່ຕ້ອງອາບັດ ໑໕ ກໍລະນີ

[໔໔໔] ສະໄໝນັ້ນ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໕ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນບໍ່ຮູ້ວ່າ "ຍັງມີພິກຂຸທີ່ຢູ່ ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່

ພິກຂຸເຫຼົ່ານັ້ນ ມີຄວາມສຳຄັນວ່າເປັນທຳ ເປັນວິໄນ ຍັງແບ່ງພວກກັນຢູ່ ແຕ່ສຳຄັນ ວ່າເປັນຜູ້ພ້ອມພຽງ ປະວາຣະນາ ເມື່ອພິກຂຸເຫຼົ່ານັ້ນກຳລັງປະວາຣະນາ ຂະນະນັ້ນ ພິກຂຸທີ່ຢູ່ໃນ

ອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໕ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນບໍ່ຮູ້ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່

ພິກຂຸເຫຼົ່ານັ້ນ ມີຄວາມສຳຄັນວ່າເປັນທຳ ເປັນວິໄນ ຍັງແບ່ງພວກກັນຢູ່ ແຕ່ສຳຄັນ ວ່າເປັນຜູ້ພ້ອມພຽງ ປະວາຣະນາ ເມື່ອພິກຂຸເຫຼົ່ານັ້ນກຳລັງປະວາຣະນາ ຂະນະນັ້ນ ພິກຂຸທີ່ຢູ່ ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນ ເພິ່ງປະວາຣະນາໃໝ່ ພວກພິກຂຸທີ່ປະວາຣະນາແລ້ວບໍ່ຕ້ອງອາບັດ (໑)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໕ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນ ບໍ່ຮູ້ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່

ພິກຂຸເຫຼົ່ານັ້ນ ມີຄວາມສຳຄັນວ່າເປັນທຳ ເປັນວິໄນ ຍັງແບ່ງພວກກັນຢູ່ ແຕ່ສຳຄັນ ວ່າເປັນຜູ້ພ້ອມພຽງ ປະວາຣະນາ ເມື່ອພິກຂຸເຫຼົ່ານັ້ນ ກຳລັງປະວາຣະນາ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ພວກພິກຂຸທີ່ປະວາຣະນາແລ້ວ ເປັນອັນປະວາຣະນາດີແລ້ວ ພິກຂຸທີ່ເຫຼືອເພິ່ງປະວາຣະນາ ພວກພິກຂຸທີ່ປະວາຣະນາແລ້ວບໍ່ຕ້ອງອາບັດ (໔)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໕ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນ ບໍ່ຮູ້ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່

ພິກຂຸເຫຼົ່ານັ້ນ ມີຄວາມສຳຄັນວ່າເປັນທຳ ເປັນວິໄນ ຍັງແບ່ງພວກກັນຢູ່ ແຕ່ສຳຄັນວ່າເປັນຜູ້ພ້ອມພຽງປະວາຣະນາ ເມື່ອພິກຂຸເຫຼົ່ານັ້ນ ກຳລັງປະວາຣະນາ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ພວກພິກຂຸທີ່ປະວາຣະນາແລ້ວ ເປັນອັນປະວາຣະນາດີແລ້ວ ພິກຂຸທີ່ເຫຼືອເພິ່ງປະວາຣະນາ ພວກພິກຂຸທີ່ປະວາຣະນາແລ້ວບໍ່ຕ້ອງອາບັດ (໓)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໕ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນ ບໍ່ຮູ້ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່

ພິກຂຸເຫຼົ່ານັ້ນ ມີຄວາມສຳຄັນວ່າເປັນທຳ ເປັນວິໄນ ຍັງແບ່ງພວກກັນຢູ່ ແຕ່ສຳຄັນ ວ່າ

ເປັນຜູ້ພ້ອມພຽງ ປະວາຣະນາ ພໍພິກຂຸເຫຼົ່ານັ້ນ ປະວາຣະນາສຳເລັດ ຂະນະນັ້ນ ພິກຂຸທີ່ຢູ່ ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນ ເພິ່ງປະວາຣະນາໃໝ່ ພວກພິກຂຸທີ່ປະວາຣະນາແລ້ວບໍ່ຕ້ອງອາບັດ (໔)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ຯລຯ ພໍພິກຂຸເຫຼົ່ານັ້ນປະວາຣະນາສຳເລັດ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ພວກພິກຂຸທີ່ປະວາຣະນາແລ້ວ ເປັນອັນປະວາຣະນາດີແລ້ວ ພວກພິກຂຸຜູ້ມາພາຍຫຼັງເພິ່ງປະວາຣະນາໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸທີ່ປະວາຣະນາແລ້ວບໍ່ຕ້ອງອາບັດ (໕)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ຯລຯ ພໍພິກຂຸເຫຼົ່ານັ້ນປະວາຣະນາສຳເລັດ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ພວກພິກຂຸທີ່ປະວາຣະນາແລ້ວ ເປັນອັນປະວາຣະນາດີແລ້ວ ພວກພິກຂຸຜູ້ມາພາຍຫຼັງເພິ່ງປະວາຣະນາໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸທີ່ປະວາຣະນາແລ້ວບໍ່ຕ້ອງອາບັດ (໖)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໕ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນ ບໍ່ຮູ້ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່ ພິກຂຸເຫຼົ່ານັ້ນມີຄວາມສຳຄັນວ່າເປັນທຳ ເປັນວິໄນຍັງແບ່ງພວກກັນຢູ່ ແຕ່ສຳຄັນ ວ່າເປັນຜູ້ພ້ອມພຽງ ປະວາຣະນາ ພໍພິກຂຸເຫຼົ່ານັ້ນປະວາຣະນາສຳເລັດ ບໍລິສັດຍັງບໍ່ທັນລຸກຂຶ້ນ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າພິກຂຸເຫຼົ່ານັ້ນ ເພິ່ງປະວາຣະນາໃໝ່ ພວກພິກຂຸທີ່ປະວາຣະນາແລ້ວບໍ່ຕ້ອງອາບັດ (໗)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ຯລຯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ພວກພິກຂຸທີ່ປະວາຣະນາແລ້ວ ເປັນອັນປະວາຣະນາດີແລ້ວ ທີ່ມາພາຍຫຼັງເພິ່ງປະວາຣະນາໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸທີ່ປະວາຣະນາແລ້ວບໍ່ຕ້ອງອາບັດ (໘)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ຯລຯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ພວກພິກຂຸທີ່ປະວາຣະນາແລ້ວ ເປັນອັນປະວາຣະນາດີແລ້ວ ທີ່ມາພາຍຫຼັງເພິ່ງປະວາຣະນາໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸທີ່ປະວາຣະນາແລ້ວບໍ່ຕ້ອງອາບັດ (໙)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸ

ຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໕ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນ ບໍ່ຮູ້ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່ ພິກຂຸເຫຼົ່ານັ້ນມີຄວາມສຳຄັນວ່າເປັນທຳ ເປັນວິໄນຍັງແບ່ງພວກກັນຢູ່ ແຕ່ສຳຄັນ ວ່າເປັນຜູ້ພ້ອມພຽງ ປະວາຣະນາ ພໍພິກຂຸເຫຼົ່ານັ້ນປະວາຣະນາສຳເລັດ ບໍລິສັດລຸກຂຶ້ນບາງສ່ວນ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນເພິ່ງປະວາຣະນາໃໝ່ ພວກພິກຂຸທີ່ປະວາຣະນາແລ້ວບໍ່ຕ້ອງອາບັດ (໑໐)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ຯລຯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ພວກພິກຂຸທີ່ປະວາຣະນາແລ້ວ ເປັນອັນປະວາຣະນາດີແລ້ວ ທີ່ມາພາຍຫຼັງເພິ່ງປະວາຣະນາໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸທີ່ປະວາຣະນາແລ້ວບໍ່ຕ້ອງອາບັດ (໑໑)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ຯລຯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ພວກພິກຂຸທີ່ປະວາຣະນາແລ້ວ ເປັນອັນປະວາຣະນາດີແລ້ວ ທີ່ມາພາຍຫຼັງເພິ່ງປະວາຣະນາໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸທີ່ປະວາຣະນາແລ້ວບໍ່ຕ້ອງອາບັດ (໑໒)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໕ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນ ບໍ່ຮູ້ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່ ພິກຂຸເຫຼົ່ານັ້ນ ມີຄວາມສຳຄັນວ່າເປັນທຳ ເປັນວິໄນຍັງແບ່ງພວກກັນຢູ່ ແຕ່ສຳຄັນວ່າເປັນຜູ້ພ້ອມພຽງ ປະວາຣະນາ ພໍພິກຂຸເຫຼົ່ານັ້ນປະວາຣະນາສຳເລັດ ບໍລິສັດລຸກຂຶ້ນທັງໝົດ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນເພິ່ງປະວາຣະນາໃໝ່ ພວກພິກຂຸທີ່ປະວາຣະນາແລ້ວບໍ່ຕ້ອງອາບັດ (໑໓)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ຯລຯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ພິກຂຸທີ່ປະວາຣະນາແລ້ວ ເປັນອັນປະວາຣະນາດີແລ້ວ ທີ່ມາພາຍຫຼັງເພິ່ງປະວາຣະນາໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸທີ່ປະວາຣະນາແລ້ວບໍ່ຕ້ອງອາບັດ (໑໔)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ຯລຯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ພິກຂຸທີ່ປະວາຣະນາແລ້ວ ເປັນອັນປະວາຣະນາດີແລ້ວ ທີ່ມາພາຍຫຼັງເພິ່ງປະວາຣະນາໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸທີ່ປະວາຣະນາແລ້ວບໍ່ຕ້ອງອາບັດ (໑໕)

**ອະນາປັດຕິປັນນະຣະສະກະ ຈົບ**

# ໑໔໗. ວັກຄາວັກຄະສັນຍີປັນນະຣະສະກະ

## ວ່າດ້ວຍແບ່ງພວກກັນຢູ່ສຳຄັນວ່າພ້ອມພຽງ ໑໕ ກໍລະນີ

[໔໔໓] ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໕ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນ ຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່

ພິກຂຸເຫຼົ່ານັ້ນ ມີຄວາມສຳຄັນວ່າເປັນທຳ ເປັນວິໄນ ຍັງແບ່ງພວກກັນຢູ່ ແຕ່ສຳຄັນວ່າເປັນຜູ້ພ້ອມພຽງ ປະວາຣະນາ ເມື່ອພິກຂຸເຫຼົ່ານັ້ນ ກຳລັງປະວາຣະນາ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນເພິ່ງປະວາຣະນາໃໝ່ ພວກພິກຂຸທີ່ປະວາຣະນາແລ້ວຕ້ອງອາບັດທຸກກົດ (໑)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ฯລฯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ພິກຂຸທີ່ປະວາຣະນາແລ້ວ ເປັນອັນປະວາຣະນາດີແລ້ວ ພິກຂຸທີ່ເຫຼືອເພິ່ງປະວາຣະນາ ພວກພິກຂຸທີ່ປະວາຣະນາແລ້ວຕ້ອງອາບັດທຸກກົດ (໒)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ฯລฯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ພວກພິກຂຸທີ່ປະວາຣະນາແລ້ວ ເປັນອັນປະວາຣະນາດີແລ້ວ ພິກຂຸທີ່ເຫຼືອເພິ່ງປະວາຣະນາ ພວກພິກຂຸທີ່ປະວາຣະນາແລ້ວຕ້ອງອາບັດທຸກກົດ (໓)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໕ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນ ຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່

ພິກຂຸເຫຼົ່ານັ້ນ ມີຄວາມສຳຄັນວ່າເປັນທຳ ເປັນວິໄນ ຍັງແບ່ງພວກກັນຢູ່ ແຕ່ສຳຄັນວ່າເປັນຜູ້ພ້ອມພຽງ ປະວາຣະນາ ພໍພິກຂຸເຫຼົ່ານັ້ນປະວາຣະນາສຳເລັດ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນ ເພິ່ງປະວາຣະນາໃໝ່ ພວກພິກຂຸທີ່ປະວາຣະນາແລ້ວຕ້ອງອາບັດທຸກກົດ (໔)

ฯລฯ ພໍພິກຂຸເຫຼົ່ານັ້ນ ປະວາຣະນາສຳເລັດ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ພວກພິກຂຸທີ່ປະວາຣະນາແລ້ວ ເປັນອັນປະວາຣະນາດີແລ້ວ ພວກພິກຂຸ

ຜູ້ມາພາຍຫຼັງເພິ່ງປະວາຣະນາໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸທີ່ປະວາຣະນາແລ້ວຕ້ອງອາບັດທຸກກົດ (໕)

ຯລຯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ຯລຯ (໖)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໕ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນ ຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່ ພິກຂຸເຫຼົ່ານັ້ນ ມີຄວາມສຳຄັນວ່າເປັນທຳ ເປັນວິໄນ ຍັງແບ່ງພວກກັນຢູ່ ແຕ່ສຳຄັນວ່າ ເປັນຜູ້ພ້ອມພຽງ ປະວາຣະນາ ພໍພິກຂຸເຫຼົ່ານັ້ນປະວາຣະນາສຳເລັດ ບໍລິສັດຍັງບໍ່ທັນລຸກຂຶ້ນ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນເພິ່ງປະວາຣະນາໃໝ່ ພວກພິກຂຸທີ່ປະວາຣະນາແລ້ວຕ້ອງອາບັດທຸກກົດ (໗)

ຯລຯ ພໍພິກຂຸເຫຼົ່ານັ້ນ ປະວາຣະນາສຳເລັດ ບໍລິສັດຍັງບໍ່ທັນລຸກຂຶ້ນ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ພວກພິກຂຸທີ່ປະວາຣະນາແລ້ວ ເປັນອັນປະວາຣະນາດີແລ້ວ ທີ່ມາພາຍຫຼັງ ເພິ່ງປະວາຣະນາໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸທີ່ປະວາຣະນາແລ້ວຕ້ອງອາບັດທຸກກົດ (໘)

ຯລຯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ຯລຯ (໙)

ຯລຯ ພໍພິກຂຸເຫຼົ່ານັ້ນ ປະວາຣະນາສຳເລັດ ບໍລິສັດລຸກຂຶ້ນບາງສ່ວນ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ຯລຯ (໑໐)

ຯລຯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ຯລຯ (໑໑)

ຯລຯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ຯລຯ (໑໒)

ຯລຯ ພໍພິກຂຸເຫຼົ່ານັ້ນ ປະວາຣະນາສຳເລັດ ບໍລິສັດລຸກຂຶ້ນທັງໝົດ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ຯລຯ (໑໓)

ຯລຯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ຯລຯ (໑໔)

ຯລຯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ຯລຯ (໑໕)

**ວັກຄາວັກຄະສັນຍີປັນນະຣະສະກະ ຈົບ**

# ໑໓໐. ເວມະຕິກະປັນນະຣະສະກະ

## ວ່າດ້ວຍພິກຂຸບໍ່ແນ່ໃຈປະວາຣະນາ ໑໕ ກໍລະນີ

[໘໘໔] ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໕ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນ ຮູ້ຢູ່ວ່າ "ຍັງມີ

ພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ບໍ່ແນ່ໃຈວ່າ "ພວກເຮົາຄວນປະວາຣະນາຫຼືບໍ່ຄວນ" ປະວາຣະນາ ເມື່ອພິກຂຸເຫຼົ່ານັ້ນ ກຳລັງປະວາຣະນາ ຂະນະນັ້ນພິກຂຸ ທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນ ເພິ່ງປະວາຣະນາໃໝ່ ພວກພິກຂຸທີ່ປະວາຣະນາແລ້ວຕ້ອງອາບັດທຸກກົດ (໑)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ຯລຯ ເມື່ອພິກຂຸເຫຼົ່ານັ້ນ ກຳລັງປະວາຣະນາ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ພວກພິກຂຸທີ່ປະວາຣະນາແລ້ວ ເປັນອັນປະວາຣະນາດີແລ້ວ ພິກຂຸທີ່ເຫຼືອເພິ່ງປະວາຣະນາ ພວກພິກຂຸທີ່ປະວາຣະນາແລ້ວຕ້ອງອາບັດທຸກກົດ (໒)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ຯລຯ ເມື່ອພິກຂຸເຫຼົ່ານັ້ນ ກຳລັງປະວາຣະນາ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ພິກຂຸທີ່ປະວາຣະນາແລ້ວ ເປັນອັນປະວາຣະນາດີແລ້ວ ພິກຂຸທີ່ເຫຼືອເພິ່ງປະວາຣະນາ ພວກພິກຂຸທີ່ປະວາຣະນາແລ້ວຕ້ອງອາບັດທຸກກົດ (໓)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໕ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນ ຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ບໍ່ແນ່ໃຈວ່າ "ພວກເຮົາຄວນປະວາຣະນາ ຫຼື ບໍ່ຄວນ" ປະວາຣະນາ ພໍພິກຂຸເຫຼົ່ານັ້ນປະວາຣະນາສຳເລັດ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນເພິ່ງປະວາຣະນາໃໝ່ ພວກພິກຂຸທີ່ປະວາຣະນາແລ້ວຕ້ອງອາບັດທຸກກົດ (໔)

ຯລຯ ພໍພິກຂຸເຫຼົ່ານັ້ນ ປະວາຣະນາສຳເລັດ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງມີຈຳນວນເທົ່າກັນ ພວກພິກຂຸທີ່ປະວາຣະນາແລ້ວ ເປັນອັນປະວາຣະນາດີແລ້ວ ທີ່ມາພາຍຫຼັງເພິ່ງປະວາຣະນາໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸທີ່ປະວາຣະນາແລ້ວຕ້ອງອາບັດທຸກກົດ (໕)

ຯລຯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ຯລຯ (໖)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໕ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ບໍ່ແນ່ໃຈວ່າ "ພວກເຮົາຄວນປະວາຣະນາ ຫຼື ບໍ່ຄວນ" ປະວາຣະນາ ພໍພິກຂຸເຫຼົ່ານັ້ນປະວາຣະນາສຳເລັດ ບໍລິສັດຍັງບໍ່ທັນລຸກຂຶ້ນ ຂະນະນັ້ນພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນ ເພິ່ງປະວາຣະນາໃໝ່ ພວກພິກຂຸທີ່ປະວາຣະນາແລ້ວຕ້ອງອາບັດທຸກກົດ (໗)

ฯລฯ ພໍພິກຂຸເຫຼົ່ານັ້ນປະວາຣະນາສຳເລັດ ບໍລິສັດຍັງບໍ່ທັນລຸກຂຶ້ນ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ພວກພິກຂຸທີ່ປະວາຣະນາແລ້ວເປັນອັນປະວາຣະນາດີແລ້ວ ທີ່ມາພາຍຫຼັງເພິ່ງປະວາຣະນາໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸທີ່ປະວາຣະນາແລ້ວຕ້ອງອາບັດທຸກກົດ (໘)

ฯລฯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ฯລฯ (໙)

ฯລฯ ພໍພິກຂຸເຫຼົ່ານັ້ນ ປະວາຣະນາສຳເລັດ ບໍລິສັດລຸກຂຶ້ນບາງສ່ວນ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ฯລฯ (໑໐)

ฯລฯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ฯລฯ (໑໑)

ฯລฯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ฯລฯ (໑໒)

ฯລฯ ພໍພິກຂຸເຫຼົ່ານັ້ນ ປະວາຣະນາສຳເລັດ ບໍລິສັດລຸກຂຶ້ນທັງໝົດ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ฯລฯ (໑໓)

ฯລฯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ฯລฯ (໑໔)

ฯລฯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ฯລฯ (໑໕)

**ເວມະຕິກະປັນນະຣະສະກະ ຈົບ**

# ໑໓໑. ກຸກກຸດຈະປະກະຕະປັນນະຣະສະກະ

## ວ່າດ້ວຍພິກຂຸກັງວົນໃຈເຮັດປະວາຣະນາ ໑໕ ກໍລະນີ

[໔໔໕] ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໕ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນ ຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ກັງວົນໃຈປະວາຣະນາດ້ວຍຄິດວ່າ "ພວກເຮົາຄວນປະວາຣະນາແທ້ ບໍ່ແມ່ນບໍ່ຄວນ" ເມື່ອພິກຂຸເຫຼົ່ານັ້ນ ກຳລັງປະວາຣະນາ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນ ເພິ່ງປະວາຣະນາໃໝ່ ພວກພິກຂຸທີ່ປະວາຣະນາແລ້ວ ຕ້ອງອາບັດທຸກກົດ (໑)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ฯລฯ ເມື່ອພິກຂຸເຫຼົ່ານັ້ນ ກຳລັງປະວາຣະນາ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ພວກພິກຂຸທີ່ປະວາຣະນາແລ້ວ ເປັນອັນປະວາຣະນາດີແລ້ວ ພິກຂຸທີ່ເຫຼືອເພິ່ງປະວາຣະນາ ພວກພິກຂຸທີ່ປະວາຣະນາແລ້ວຕ້ອງອາບັດທຸກກົດ (໒)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກ

ຂຸທີ່ຢູ່ໃນອາວາດຫຼາຍອົງ ຯລຯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ພວກພິກຂຸທີ່ປະວາຣະນາແລ້ວ ເປັນອັນປະວາຣະນາດີແລ້ວ ພິກຂຸທີ່ເຫຼືອເພິ່ງປະວາຣະນາ ພວກພິກຂຸທີ່ປະວາຣະນາແລ້ວຕ້ອງອາບັດທຸກກົດ (๓)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ๕ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ກັງວົນໃຈປະວາຣະນາດ້ວຍຄິດວ່າ "ພວກເຮົາຄວນປະວາຣະນາແທ້ ບໍ່ແມ່ນບໍ່ຄວນ" ພໍພິກຂຸເຫຼົ່ານັ້ນ ປະວາຣະນາສຳເລັດ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນເພິ່ງປະວາຣະນາໃໝ່ ພວກພິກຂຸທີ່ປະວາຣະນາແລ້ວຕ້ອງອາບັດທຸກກົດ (๔)

ຯລຯ ພໍພິກຂຸເຫຼົ່ານັ້ນປະວາຣະນາສຳເລັດ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ພວກພິກຂຸທີ່ປະວາຣະນາແລ້ວ ເປັນອັນປະວາຣະນາດີແລ້ວ ທີ່ມາພາຍຫຼັງເພິ່ງປະວາຣະນາໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸທີ່ປະວາຣະນາແລ້ວຕ້ອງອາບັດທຸກກົດ (๕)

ຯລຯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ຯລຯ (๖)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ๕ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນ ຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ກັງວົນໃຈປະວາຣະນາດ້ວຍຄິດວ່າ "ພວກເຮົາຄວນປະວາຣະນາແທ້ ບໍ່ແມ່ນບໍ່ຄວນ" ພໍພິກຂຸເຫຼົ່ານັ້ນ ປະວາຣະນາສຳເລັດ ບໍລິສັດຍັງບໍ່ທັນລຸກຂຶ້ນ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນເພິ່ງປະວາຣະນາໃໝ່ ພວກພິກຂຸທີ່ປະວາຣະນາແລ້ວ ຕ້ອງອາບັດທຸກກົດ (໗)

ຯລຯ ພໍພິກຂຸເຫຼົ່ານັ້ນປະວາຣະນາສຳເລັດ ບໍລິສັດຍັງບໍ່ທັນລຸກຂຶ້ນ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ພວກພິກຂຸທີ່ປະວາຣະນາແລ້ວ ເປັນອັນປະວາຣະນາດີແລ້ວ ທີ່ມາພາຍຫຼັງເພິ່ງປະວາຣະນາໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸທີ່ປະວາຣະນາແລ້ວ ຕ້ອງອາບັດທຸກກົດ (໘)

ຯລຯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ຯລຯ (໙)

ຯລຯ ພໍພິກຂຸເຫຼົ່ານັ້ນ ປະວາຣະນາສຳເລັດ ບໍລິສັດລຸກຂຶ້ນບາງສ່ວນ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ຯລຯ (໑໐)

ຯລຯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ຯລຯ (໑໑)

ຯລຯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ຯລຯ (໑໒)

ฯลฯ พํพิກຂຸເຫຼົ່ານັ້ນ ປະວາຣະນາສຳເລັດ ບໍລິສັດລຸກຂຶ້ນທັງໝົດ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ฯลฯ (໑๓)

ฯลฯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ฯลฯ (໑໔)

ฯลฯ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ฯลฯ (໑໕)

**ກຸກກຸດຈະປະກະຕະປັນນະຣະສະກະ ຈົບ**

# ໑๓໔. ເພທະປຸເຣກຂາຣະປັນນະສະຣະກະ

## ວ່າດ້ວຍມຸ້ງທຳຄວາມແຕກແຍກເຮັດປະວາຣະນາ ໑໕ ກໍລະນີ

[໔໘໓] ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໕ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນ ຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ມຸ້ງຄວາມແຕກແຍກວ່າ ຂໍພິກຂຸເຫຼົ່ານັ້ນ ຈົ່ງເສື່ອມສູນ ຈົ່ງພິນາດ ພິກຂຸເຫຼົ່ານັ້ນ ຈະມີປະໂຫຍດອັນໃດ" ປະວາຣະນາ ເມື່ອພິກຂຸເຫຼົ່ານັ້ນກຳລັງປະວາຣະນາ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນເພິ່ງປະວາຣະນາໃໝ່ ພວກພິກຂຸທີ່ປະວາຣະນາແລ້ວ ຕ້ອງອາບັດຖຸນລັດໄຈ (໑)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໕ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນ ຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ມຸ້ງຄວາມແຕກແຍກວ່າ "ພິກຂຸເຫຼົ່ານັ້ນຈົ່ງເສື່ອມສູນ ຈົ່ງພິນາດ ພິກຂຸເຫຼົ່ານັ້ນ ຈະມີປະໂຫຍດອັນໃດ" ປະວາຣະນາ ເມື່ອພິກຂຸເຫຼົ່ານັ້ນກຳລັງປະວາຣະນາ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ພວກພິກຂຸທີ່ປະວາຣະນາແລ້ວ ເປັນອັນປະວາຣະນາດີແລ້ວ ພິກຂຸທີ່ເຫຼືອເພິ່ງປະວາຣະນາ ພວກພິກຂຸທີ່ປະວາຣະນາແລ້ວຕ້ອງອາບັດຖຸນລັດໄຈ (໒)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໕ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນ ຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ມຸ້ງຄວາມແຕກແຍກວ່າ ຂໍພິກຂຸເຫຼົ່ານັ້ນຈົ່ງເສື່ອມສູນ ຈົ່ງພິນາດ ພິກຂຸເຫຼົ່ານັ້ນຈະມີປະໂຫຍດອັນໃດ" ປະວາຣະນາ ເມື່ອພິກຂຸເຫຼົ່ານັ້ນກຳລັງປະວາຣະນາ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ພວກພິກຂຸທີ່ປະວາຣະນາແລ້ວ ເປັນອັນປະວາຣະນາດີແລ້ວ ພິກຂຸທີ່ເຫຼືອເພິ່ງປະວາຣະນາ ພວກພິກຂຸທີ່ປະວາຣະນາແລ້ວຕ້ອງອາບັດຖຸນລັດໄຈ (๓)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໕ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນ ຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ມຸ້ງຄວາມແຕກແຍກວ່າ ຂໍພິກຂຸເຫຼົ່ານັ້ນຈົ່ງເສື່ອມສູນ ຈົ່ງພິນາດ ພິກຂຸເຫຼົ່ານັ້ນຈະມີປະໂຫຍດອັນໃດ" ປະວາຣະນາ ພໍພິກຂຸເຫຼົ່ານັ້ນປະວາຣະນາສຳເລັດ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນເພິ່ງປະວາຣະນາໃໝ່ ພວກພິກຂຸທີ່ປະວາຣະນາແລ້ວຕ້ອງອາບັດຖຸນລັດໄຈ (໔)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໕ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນ ຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ມຸ້ງຄວາມແຕກແຍກວ່າ ຂໍພິກຂຸເຫຼົ່ານັ້ນຈົ່ງເສື່ອມສູນ ຈົ່ງພິນາດ ພິກຂຸເຫຼົ່ານັ້ນຈະມີປະໂຫຍດອັນໃດ" ປະວາຣະນາ ພໍພິກຂຸເຫຼົ່ານັ້ນປະວາຣະນາສຳເລັດ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ພິກຂຸທີ່ປະວາຣະນາແລ້ວ ເປັນອັນປະວາຣະນາດີແລ້ວ ທີ່ມາພາຍຫຼັງເພິ່ງປະວາຣະນາໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸທີ່ປະວາຣະນາແລ້ວຕ້ອງອາບັດຖຸນລັດໄຈ (໕)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໕ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນ ຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ມຸ້ງຄວາມແຕກແຍກວ່າ ຂໍພິກຂຸເຫຼົ່ານັ້ນຈົ່ງເສື່ອມສູນ ຈົ່ງພິນາດ ພິກຂຸເຫຼົ່ານັ້ນຈະມີປະໂຫຍດອັນໃດ" ປະວາຣະນາ ພໍພິກຂຸເຫຼົ່ານັ້ນປະວາຣະນາສຳເລັດ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ພວກພິກຂຸທີ່ປະວາຣະນາແລ້ວ ເປັນອັນປະວາຣະນາດີແລ້ວ ທີ່ມາພາຍຫຼັງເພິ່ງປະວາຣະນາໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸທີ່ປະວາຣະນາແລ້ວຕ້ອງອາບັດຖຸນລັດໄຈ (໖)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໕ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນ ຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ມຸ້ງຄວາມແຕກແຍກວ່າ ຂໍພິກຂຸເຫຼົ່ານັ້ນຈົ່ງເສື່ອມສູນ ຈົ່ງພິນາດ ພິກຂຸເຫຼົ່ານັ້ນ ຈະມີປະໂຫຍດອັນໃດ" ປະວາຣະນາ ພໍພິກຂຸເຫຼົ່ານັ້ນ ປະວາຣະນາສຳເລັດ ບໍລິສັດຍັງບໍ່ທັນລຸກຂຶ້ນ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນເພິ່ງປະວາຣະນາໃໝ່ ພວກພິກຂຸທີ່ປະວາຣະນາແລ້ວ ຕ້ອງອາບັດຖຸນລັດໄຈ (໗)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໕ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນ ຮູ້ຢູ່ວ່າ "ຍັງມີພິກຂຸ

ທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ມຸ້ງຄວາມແຕກແຍກວ່າ "ຂໍ ພິກຂຸເຫຼົ່ານັ້ນຈົ່ງເສື່ອມສູນ ຈົ່ງພິນາດ ພິກຂຸເຫຼົ່ານັ້ນຈະມີປະໂຫຍດອັນໃດ" ປະວາຣະນາ ພໍພິກຂຸເຫຼົ່ານັ້ນປະວາຣະນາສຳເລັດ ບໍລິສັດຍັງບໍ່ທັນລຸກຂຶ້ນ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ພວກພິກຂຸທີ່ປະວາຣະນາແລ້ວ ເປັນອັນປະວາຣະນາດີແລ້ວ ທີ່ມາພາຍຫຼັງເພິ່ງປະວາຣະນາໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸທີ່ປະວາຣະນາແລ້ວຕ້ອງອາບັດຖຸນລັດໄຈ (໗)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໕ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນ ຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ມຸ້ງຄວາມແຕກແຍກວ່າ ຂໍພິກຂຸເຫຼົ່ານັ້ນ ຈົ່ງເສື່ອມສູນ ຈົ່ງພິນາດ ພິກຂຸເຫຼົ່ານັ້ນຈະມີປະໂຫຍດອັນໃດ" ປະວາຣະນາ ພໍພິກຂຸເຫຼົ່ານັ້ນປະວາຣະນາສຳເລັດ ບໍລິສັດຍັງບໍ່ທັນລຸກຂຶ້ນ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ພວກພິກຂຸທີ່ປະວາຣະນາແລ້ວ ເປັນອັນປະວາຣະນາດີແລ້ວ ທີ່ມາພາຍຫຼັງເພິ່ງປະວາຣະນາໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸທີ່ປະວາຣະນາແລ້ວຕ້ອງອາບັດຖຸນລັດໄຈ (໙)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໕ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນ ຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ມຸ້ງຄວາມແຕກແຍກວ່າ ຂໍພິກຂຸເຫຼົ່ານັ້ນຈົ່ງເສື່ອມສູນ ຈົ່ງພິນາດ ພິກຂຸເຫຼົ່ານັ້ນຈະມີປະໂຫຍດອັນໃດ" ປະວາຣະນາ ພໍພິກຂຸເຫຼົ່ານັ້ນ ປະວາຣະນາສຳເລັດ ບໍລິສັດລຸກຂຶ້ນບາງສ່ວນ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດ ພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນເພິ່ງປະວາຣະນາໃໝ່ ພວກພິກຂຸທີ່ປະວາຣະນາ ແລ້ວຕ້ອງອາບັດຖຸນລັດໄຈ (໑໐)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໕ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນ ຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ມຸ້ງຄວາມແຕກແຍກວ່າ ຂໍພິກຂຸເຫຼົ່ານັ້ນຈົ່ງເສື່ອມສູນ ຈົ່ງພິນາດ ພິກຂຸເຫຼົ່ານັ້ນຈະມີປະໂຫຍດອັນໃດ" ປະວາຣະນາ ພໍພິກຂຸເຫຼົ່ານັ້ນ ປະວາຣະນາສຳເລັດ ບໍລິສັດລຸກຂຶ້ນບາງສ່ວນ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ພວກພິກຂຸທີ່ປະວາຣະນາແລ້ວ ເປັນອັນປະວາຣະນາດີແລ້ວ ທີ່ມາພາຍຫຼັງເພິ່ງປະວາຣະນາໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸທີ່ປະວາຣະນາແລ້ວ ຕ້ອງອາບັດຖຸນລັດໄຈ (໑໑)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໕ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນ ຮູ້ຢູ່ວ່າ "ຍັງມີພິກຂຸ

ທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ມຸ້ງຄວາມແຕກແຍກວ່າ ຂໍພິກຂຸເຫຼົ່ານັ້ນຈົ່ງເສື່ອມສູນ ຈົ່ງພິນາດ ພິກຂຸເຫຼົ່ານັ້ນຈະມີປະໂຫຍດອັນໃດ" ປະວາຣະນາ ພໍພິກຂຸເຫຼົ່ານັ້ນ ປະວາຣະນາສຳເລັດ ບໍລິສັດລຸກຂຶ້ນບາງສ່ວນ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ພວກພິກຂຸທີ່ປະວາຣະນາແລ້ວ ເປັນອັນປະວາຣະນາດີແລ້ວ ທີ່ມາພາຍຫຼັງເພິ່ງປະວາຣະນາໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸທີ່ປະວາຣະນາແລ້ວ ຕ້ອງອາບັດຖຸນລັດໄຈ (໑໘)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໕ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນ ຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ມຸ້ງຄວາມແຕກແຍກວ່າ ຂໍພິກຂຸເຫຼົ່ານັ້ນຈົ່ງເສື່ອມສູນ ຈົ່ງພິນາດ ພິກຂຸເຫຼົ່ານັ້ນຈະມີປະໂຫຍດອັນໃດ" ປະວາຣະນາ ພໍພິກຂຸເຫຼົ່ານັ້ນ ປະວາຣະນາສຳເລັດ ບໍລິສັດລຸກຂຶ້ນທັງໝົດ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນຫຼາຍກວ່າ ພິກຂຸເຫຼົ່ານັ້ນເພິ່ງປະວາຣະນາໃໝ່ ພວກພິກຂຸທີ່ປະວາຣະນາແລ້ວ ຕ້ອງອາບັດຖຸນລັດໄຈ (໑໙)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໕ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນ ຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ມຸ້ງຄວາມແຕກແຍກວ່າ ຂໍພິກຂຸເຫຼົ່ານັ້ນຈົ່ງເສື່ອມສູນ ຈົ່ງພິນາດ ພິກຂຸເຫຼົ່ານັ້ນຈະມີປະໂຫຍດອັນໃດ" ປະວາຣະນາ ພໍພິກຂຸເຫຼົ່ານັ້ນ ປະວາຣະນາສຳເລັດ ບໍລິສັດລຸກຂຶ້ນທັງໝົດ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດພວກອື່ນມາເຖິງ ມີຈຳນວນເທົ່າກັນ ພວກພິກຂຸທີ່ປະວາຣະນາແລ້ວ ເປັນອັນປະວາຣະນາດີແລ້ວ ທີ່ມາພາຍຫຼັງ ເພິ່ງປະວາຣະນາໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸທີ່ປະວາຣະນາແລ້ວຕ້ອງອາບັດຖຸນລັດໄຈ (໑໔)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ ແຕ່ປະຊຸມກັນ ໕ ອົງແດ່ ເກີນກວ່າແດ່ ພິກຂຸເຫຼົ່ານັ້ນ ຮູ້ຢູ່ວ່າ "ຍັງມີພິກຂຸທີ່ຢູ່ໃນອາວາດພວກອື່ນທີ່ບໍ່ໄດ້ມາມີຢູ່" ແຕ່ມຸ້ງຄວາມແຕກແຍກວ່າ "ຂໍ ພິກຂຸເຫຼົ່ານັ້ນຈົ່ງເສື່ອມສູນ ຈົ່ງພິນາດ ພິກຂຸເຫຼົ່ານັ້ນຈະມີປະໂຫຍດອັນໃດ" ປະວາຣະນາ ພໍພິກຂຸເຫຼົ່ານັ້ນປະວາຣະນາສຳເລັດ ບໍລິສັດລຸກຂຶ້ນທັງໝົດ ຂະນະນັ້ນ ພິກຂຸທີ່ຢູ່ໃນອາວາດ ພວກອື່ນມາເຖິງ ມີຈຳນວນໜ້ອຍກວ່າ ພວກພິກຂຸທີ່ປະວາຣະນາແລ້ວເປັນອັນປະວາຣະນາດີແລ້ວ ທີ່ມາພາຍຫຼັງເພິ່ງປະວາຣະນາໃນສຳນັກຂອງພິກຂຸເຫຼົ່ານັ້ນ ພວກພິກຂຸທີ່ປະວາຣະນາແລ້ວຕ້ອງອາບັດຖຸນລັດໄຈ (໑໕)

**ເພທະປຸເຣາຂາຣະປັນນະຣະສະກະ ຈົບ**

**ປັນຈະວີສະຕິຕິກະ ຈົບ**

# ໑໓໓. ສີໂມກກັນຕິກະເປີຍຍາລະ

## ວ່າດ້ວຍການລະຂໍ້ຄວາມກ່ຽວກັບພິກຂຸເຂົ້າສູ່ສີມາ

### ເປີຍຍາລະມຸກ ໗໐໐ ຕິກະ

[໔໘໗] ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ມີພິກຂຸທີ່ຢູ່ໃນອາວາດຫຼາຍອົງ

໑. ປະຊຸມກັນ ໕ ອົງແດ່ ເກີນກວ່າແດ່
໒. ພິກຂຸເຫຼົ່ານັ້ນ ບໍ່ຮູ້ວ່າ "ມີພິກຂຸທີ່ຢູ່ໃນອາວາດພວກອື່ນກຳລັງເຂົ້າມາໃນສີມາ ฯລฯ
໓. ฯລฯ ພິກຂຸເຫຼົ່ານັ້ນບໍ່ຮູ້ວ່າ "ພິກຂຸທີ່ຢູ່ໃນອາວາດພວກອື່ນເຂົ້າມາພາຍໃນສີມາແລ້ວ ฯລฯ
໔. ฯລฯ ພິກຂຸເຫຼົ່ານັ້ນບໍ່ເຫັນພິກຂຸທີ່ຢູ່ໃນອາວາດພວກອື່ນກຳລັງເຂົ້າມາພາຍໃນສີມາ ฯລฯ
໕. ฯລฯ ພິກຂຸເຫຼົ່ານັ້ນບໍ່ເຫັນພິກຂຸທີ່ຢູ່ໃນອາວາດພວກອື່ນເຂົ້າມາພາຍໃນສີມາແລ້ວ ฯລฯ
໖. ฯລฯ ພິກຂຸເຫຼົ່ານັ້ນບໍ່ໄດ້ຍິນວ່າ "ພິກຂຸທີ່ຢູ່ໃນອາວາດພວກອື່ນກຳລັງເຂົ້າມາພາຍໃນສີມາ ฯລฯ
໗. ฯລฯ ພິກຂຸເຫຼົ່ານັ້ນບໍ່ໄດ້ຍິນວ່າ "ພິກຂຸທີ່ຢູ່ໃນອາວາດພວກອື່ນເຂົ້າມາພາຍໃນສີມາແລ້ວ ฯລฯ

ໂດຍໄນ ໑໗໕ ຕິກະ

໑. ພິກຂຸທີ່ຢູ່ໃນອາວາດກັບພິກຂຸທີ່ຢູ່ໃນອາວາດ
໒. ພິກຂຸອາຄັນຕຸກະກັບພິກຂຸທີ່ຢູ່ໃນອາວາດ
໓. ພິກຂຸທີ່ຢູ່ໃນອາວາດກັບພິກຂຸອາຄັນຕຸກະ
໔. ພິກຂຸອາຄັນຕຸກະກັບພິກຂຸອາຄັນຕຸກະ

ລວມເປັນ ໗໐໐ ຕິກະ ໂດຍເປີຍຍາລະມຸກ

# ໑໓໔. ທິວະສະນາປັດຕະ

## ວ່າດ້ວຍການນັບວັນປະວາຣະນາຕ່າງກັນ

[໔໔໗] ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ວັນປະວາຣະນາຂອງພິກຂຸທີ່ຢູ່ໃນອາວາດ ເປັນວັນ ໑໔ ຄ່ຳ ຂອງພິກຂຸອາຄັນຕຸກະເປັນວັນ ໑໕ ຄ່ຳ ຖ້າພວກພິກຂຸທີ່ຢູ່ໃນອາວາດມີຈຳນວນຫຼາຍກວ່າ ພວກພິກຂຸອາຄັນຕຸກະເພິ່ງອະນຸວັດຕາມພວກພິກຂຸທີ່ຢູ່ໃນອາວາດ ຖ້າມີຈຳນວນເທົ່າກັນ ພວກພິກຂຸອາຄັນຕຸກະເພິ່ງອະນຸວັດຕາມພວກພິກຂຸທີ່ຢູ່ໃນອາວາດ ຖ້າພວກພິກຂຸອາຄັນຕຸກະມີຈຳນວນຫຼາຍກວ່າ ພວກພິກຂຸທີ່ຢູ່ໃນອາວາດເພິ່ງອະນຸວັດຕາມພວກພິກຂຸອາຄັນຕຸກະ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ວັນປະວາຣະນາຂອງພິກຂຸທີ່ຢູ່ໃນອາວາດ ເປັນວັນ ໑໕ ຄ່ຳ ຂອງພວກພິກຂຸອາຄັນຕຸກະເປັນວັນ ໑໔ ຄ່ຳ ຖ້າພວກພິກຂຸທີ່ຢູ່ໃນອາວາດມີຈຳນວນຫຼາຍກວ່າ ພວກພິກຂຸອາຄັນຕຸກະ ເພິ່ງອະນຸວັດຕາມພວກພິກຂຸທີ່ຢູ່ໃນອາວາດ ຖ້າມີຈຳນວນເທົ່າກັນ ພວກພິກຂຸອາຄັນຕຸກະ ເພິ່ງອະນຸວັດຕາມພິກຂຸທີ່ຢູ່ໃນອາວາດ ຖ້າພວກ ພິກຂຸອາຄັນຕຸກະມີຈຳນວນຫຼາຍກວ່າ ພວກພິກຂຸທີ່ຢູ່ໃນອາວາດ ເພິ່ງອະນຸວັດຕາມພວກພິກຂຸ ອາຄັນຕຸກະ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ວັນປະວາຣະນາຂອງພິກຂຸທີ່ຢູ່ໃນອາວາດ ເປັນວັນແຮມ ໑ ຄ່ຳ ຂອງພິກຂຸອາຄັນຕຸກະເປັນວັນ ໑໕ ຄ່ຳ ຖ້າພວກພິກຂຸທີ່ຢູ່ໃນອາວາດ ມີຈຳນວນຫຼາຍກວ່າ ພວກພິກຂຸທີ່ຢູ່ໃນອາວາດບໍ່ປາຖະໜາ ກໍບໍ່ເພິ່ງໃຫ້ຄວາມພ້ອມພຽງແກ່ພວກພິກຂຸອາຄັນຕຸກະ ພວກພິກຂຸອາຄັນຕຸກະ ເພິ່ງໄປນອກສີມາປະວາຣະນາເທີ້ນ ຖ້າມີຈຳນວນເທົ່າກັນ ພວກພິກຂຸທີ່ຢູ່ໃນອາວາດບໍ່ປາຖະໜາ ກໍບໍ່ເພິ່ງໃຫ້ຄວາມພ້ອມພຽງແກ່ພວກພິກຂຸອາຄັນຕຸກະ ພວກພິກຂຸອາຄັນຕຸກະ ເພິ່ງໄປນອກສີມາປະວາຣະນາເທີ້ນ ຖ້າພວກພິກຂຸອາຄັນຕຸກະ ມີຈຳນວນຫຼາຍກວ່າ ພວກພິກຂຸທີ່ຢູ່ໃນອາວາດເພິ່ງໃຫ້ຄວາມພ້ອມພຽງແກ່ພວກພິກຂຸອາຄັນຕຸກະ ຫຼື ໄປນອກສີມາ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ວັນປະວາຣະນາຂອງພວກພິກຂຸທີ່ຢູ່ໃນອາວາດ ເປັນວັນ ໑໕ ຄ່ຳ ຂອງພວກພິກຂຸອາຄັນຕຸກະເປັນວັນແຮມ ໑ ຄ່ຳ ຖ້າພວກພິກຂຸທີ່ຢູ່ໃນອາວາດມີຈຳນວນຫຼາຍກວ່າ ພວກພິກຂຸອາຄັນຕຸກະເພິ່ງໃຫ້ຄວາມພ້ອມພຽງແກ່ພວກພິກຂຸທີ່ຢູ່ໃນອາວາດ ຫຼື ໄປນອກສີມາ ຖ້າມີຈຳນວນເທົ່າກັນ ພວກພິກຂຸອາຄັນຕຸກະເພິ່ງໃຫ້ຄວາມພ້ອມພຽງ ແກ່ພວກພິກພິກຂຸທີ່ຢູ່ໃນອາວາດ ຫຼື ໄປນອກສີມາ ຖ້າພວກພິກຂຸອາຄັນຕຸກະ ມີຈຳນວນຫຼາຍກວ່າ ພວກພິກຂຸອາຄັນຕຸກະບໍ່ປາຖະໜາ ກໍບໍ່ເພິ່ງໃຫ້ຄວາມພ້ອມພຽງແກ່ພວກພິກຂຸ ທີ່ຢູ່ໃນອາວາດ ພວກພິກຂຸທີ່ຢູ່ໃນອາວາດເພິ່ງໄປນອກສີມາປະວາຣະນາເທີ້ນ

# ໑໓໕. ລິງຄາທິທັດສະນະ

## ວ່າດ້ວຍການເບິ່ງລັກສະນະເປັນຕົ້ນ

## ເລື້ອງລັກສະນະຂອງພິກຂຸທີ່ຢູ່ໃນອາວາດ

[໔໔໙] ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ພວກພິກຂຸອາຄັນຕຸກະໄດ້ເຫັນອາການຂອງພິກຂຸທີ່ຢູ່ໃນອາວາດ ລັກສະນະຂອງພິກຂຸທີ່ຢູ່ໃນອາວາດ ເຄື່ອງໝາຍຂອງພິກຂຸທີ່ຢູ່ໃນອາວາດ ສິ່ງສໍ່ສະແດງພິກຂຸທີ່ຢູ່ໃນອາວາດຂອງພວກພິກຂຸທີ່ຢູ່ໃນອາວາດ ຕຽງ ຕັ່ງ ຟູກ ໝອນ ນໍ້າສັນ ນໍ້າໃຊ້ ຈັດໄວ້ດີ ບໍລິເວນປັດກວາດສະອາດ ເມື່ອແລ້ວ ບໍ່ແນ່ໃຈວ່າ "ມີພວກພິກຂຸທີ່ຢູ່ໃນອາວາດຢູ່ ຫຼື ບໍ່ມີນໍ?"

| | |
|---|---|
| ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈແຕ່ບໍ່ຄົ້ນຫາ | ປະວາຣະນາ ຕ້ອງອາບັດທຸກກົດ |
| ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈຈຶ່ງຄົ້ນຫາ ແຕ່ບໍ່ພົບ | ປະວາຣະນາ ບໍ່ຕ້ອງອາບັດ |
| ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈຈຶ່ງຄົ້ນຫາຈົນພົບ | ປະວາຣະນາຮ່ວມກັນ ບໍ່ຕ້ອງອາບັດ |
| ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈຈຶ່ງຄົ້ນຫາຈົນພົບ | ແຍກກັນປະວາຣະນາ ຕ້ອງອາບັດທຸກກົດ |

ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈຈຶ່ງຄົ້ນຫາຈົນພົບ ມຸ້ງຄວາມແຕກແຍກວ່າ "ຂໍພິກຂຸເຫຼົ່ານັ້ນຈົ່ງເສື່ອມສູນ ຈົ່ງພິນາດ ພິກຂຸເຫຼົ່ານັ້ນຈະມີປະໂຫຍດອັນໃດ" ປະວາຣະນາ ຕ້ອງອາບັດຖຸນລັດໄຈ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພວກພິກຂຸອາຄັນຕຸກະໄດ້ຍິນອາການຂອງພິກຂຸທີ່ຢູ່ໃນອາວາດ ລັກສະນະຂອງພິກຂຸທີ່ຢູ່ໃນອາວາດ ເຄື່ອງໝາຍຂອງພິກຂຸທີ່ຢູ່ໃນອາວາດ ສິ່ງສະແດງໃຫ້ພິກຂຸທີ່ຢູ່ໃນອາວາດຂອງພວກພິກຂຸທີ່ຢູ່ໃນອາວາດ ໄດ້ຍິນສຽງຍ່າງຂອງພວກພິກຂຸທີ່ຢູ່ໃນອາວາດກໍາລັງຈົງກົມ ສຽງສາທະຍາຍ ສຽງໄອ ສຽງຈາມ ເມື່ອແລ້ວ ບໍ່ແນ່ໃຈວ່າ "ມີພວກພິກຂຸທີ່ຢູ່ໃນອາວາດຢູ່ຫຼືບໍ່ມີນໍ"

| | |
|---|---|
| ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈ ແຕ່ບໍ່ຄົ້ນຫາ | ປະວາຣະນາ ຕ້ອງອາບັດທຸກກົດ |
| ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈຈຶ່ງຄົ້ນຫາ ແຕ່ບໍ່ພົບ | ປະວາຣະນາ ບໍ່ຕ້ອງອາບັດ |
| ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈຈຶ່ງຄົ້ນຫາຈົນພົບ | ປະວາຣະນາຮ່ວມກັນ ບໍ່ຕ້ອງອາບັດ |
| ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈຈຶ່ງຄົ້ນຫາຈົນພົບ | ແຍກກັນປະວາຣະນາ ຕ້ອງອາບັດທຸກກົດ |

ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈຈຶ່ງຄົ້ນຫາຈົນພົບ ມຸ້ງຄວາມແຕກແຍກວ່າ "ຂໍພິກຂຸເຫຼົ່ານັ້ນຈົ່ງເສື່ອມສູນ ຈົ່ງພິນາດ ພິກຂຸເຫຼົ່ານັ້ນຈະມີປະໂຫຍດອັນໃດ" ປະວາຣະນາ ຕ້ອງອາບັດຖຸນລັດໄຈ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພວກພິກຂຸທີ່ຢູ່ໃນອາວາດໄດ້ເຫັນອາການຂອງພວກ

ພິກຂຸອາຄັນຕຸກະ ລັກສະນະຂອງພວກພິກຂຸອາຄັນຕຸກະ ເຄື່ອງໝາຍຂອງພວກພິກຂຸອາຄັນຕຸກະ ສິ່ງສໍ່ສະແດງພວກພິກຂຸອາຄັນຕຸກະຂອງພວກພິກຂຸອາຄັນຕຸກະ ໄດ້ເຫັນບາດ ຈີວອນ ຜ້ານິສີທະນະ ຮອຍນໍ້າລ້າງຕີນ ອັນເປັນຂອງພວກພິກຂຸພວກອື່ນ ເມື່ອແລ້ວ ບໍ່ແນ່ໃຈວ່າ "ມີພວກພິກຂຸອາຄັນຕຸກະຢູ່ຫຼືບໍ່ນໍ"

| | |
|---|---|
| ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈ ແຕ່ບໍ່ຄົ້ນຫາ | ປະວາຣະນາ ຕ້ອງອາບັດທຸກກົດ |
| ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈຈຶ່ງຄົ້ນຫາ ແຕ່ບໍ່ພົບ | ປະວາຣະນາ ບໍ່ຕ້ອງອາບັດ |
| ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈຈຶ່ງຄົ້ນຫາຈົນພົບ | ປະວາຣະນາຮ່ວມກັນ ບໍ່ຕ້ອງອາບັດ |
| ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈຈຶ່ງຄົ້ນຫາຈົນພົບ | ແຍກກັນປະວາຣະນາ ຕ້ອງອາບັດທຸກກົດ |

ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈຈຶ່ງຄົ້ນຫາຈົນພົບ ມຸ້ງຄວາມແຕກແຍກວ່າ "ຂໍພິກຂຸເຫຼົ່ານັ້ນຈົ່ງເສື່ອມສູນ ຈົ່ງພິນາດ ພິກຂຸເຫຼົ່ານັ້ນຈະມີປະໂຫຍດອັນໃດ" ປະວາຣະນາ ຕ້ອງອາບັດຖຸນລັດໄຈ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພວກພິກຂຸທີ່ຢູ່ໃນອາວາດໄດ້ຍິນອາການຂອງອາຄັນຕຸກະ ລັກສະນະຂອງພວກພິກຂຸອາຄັນຕຸກະ ເຄື່ອງໝາຍຂອງພວກພິກຂຸອາຄັນຕຸກະ ສິ່ງສະແດງໃຫ້ພວກພິກຂຸອາຄັນຕຸກະຂອງພວກພິກຂຸອາຄັນຕຸກະ ໄດ້ຍິນສຽງຍ່າງຂອງພວກພິກຂຸອາຄັນຕຸກະກຳລັງຍ່າງມາ ສຽງເກີບກະທົບພື້ນ ສຽງໄອ ສຽງຈາມ ເມື່ອແລ້ວ ບໍ່ແນ່ໃຈວ່າ "ມີພວກພິກຂຸອາຄັນຕຸກະຢູ່ຫຼືບໍ່ມີນໍ"

| | |
|---|---|
| ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈ ແຕ່ບໍ່ຄົ້ນຫາ | ປະວາຣະນາ ຕ້ອງອາບັດທຸກກົດ |
| ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈຈຶ່ງຄົ້ນຫາ ແຕ່ບໍ່ພົບ | ປະວາຣະນາ ບໍ່ຕ້ອງອາບັດ |
| ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈຈຶ່ງຄົ້ນຫາຈົນພົບ | ປະວາຣະນາຮ່ວມກັນ ບໍ່ຕ້ອງອາບັດ |
| ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈຈຶ່ງຄົ້ນຫາຈົນພົບ | ແຍກກັນປະວາຣະນາ ຕ້ອງອາບັດທຸກກົດ |

ພິກຂຸເຫຼົ່ານັ້ນ ບໍ່ແນ່ໃຈຈຶ່ງຄົ້ນຫາຈົນພົບ ມຸ້ງຄວາມແຕກແຍກວ່າ "ຂໍພິກຂຸເຫຼົ່ານັ້ນຈົ່ງເສື່ອມສູນ ຈົ່ງພິນາດ ພິກຂຸເຫຼົ່ານັ້ນ ຈະມີປະໂຫຍດອັນໃດ" ປະວາຣະນາ ຕ້ອງອາບັດຖຸນລັດໄຈ

## ໑໓໖. ນານາສັງວາສະກາທິປະວາຣະນາ

## ວ່າດ້ວຍພິກຂຸຜູ້ເປັນນານາສັງວາດເປັນຕົ້ນປະວາຣະນາ

### ເລື້ອງພິກຂຸ ໔ ສັງວາດປະວາຣະນາ

[໔໓໐] ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ພວກພິກຂຸອາຄັນຕຸກະເຫັນພວກພິກຂຸທີ່ຢູ່ໃນອາວາດຜູ້ເປັນນານາສັງວາດ[໑]ເຂົ້າໃຈວ່າເປັນສະມານະສັງວາດ ບໍ່ໄຕ່ຖາມ ປະວາຣະນາຮ່ວມກັນ ບໍ່ຕ້ອງອາບັດ

ພິກຂຸອາຄັນຕຸກະເຫຼົ່ານັ້ນ ໄຕ່ຖາມແລ້ວບໍ່ລັງກຽດປະວາຣະນາຮ່ວມກັນ ຕ້ອງອາບັດທຸກກົດ

ພິກຂຸອາຄັນຕຸກະເຫຼົ່ານັ້ນ ໄຕ່ຖາມແລ້ວບໍ່ລັງກຽດ ແຍກກັນປະວາຣະນາ ບໍ່ຕ້ອງອາບັດ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພວກພິກຂຸອາຄັນຕຸກະເຫັນພວກພິກຂຸທີ່ຢູ່ໃນອາວາດຜູ້ເປັນສະມານະສັງວາດ ເຂົ້າໃຈວ່າເປັນນານາສັງວາດ ບໍ່ໄຕ່ຖາມ ປະວາຣະນາຮ່ວມກັນ ຕ້ອງອາບັດທຸກກົດ

ພິກຂຸອາຄັນຕຸກະເຫຼົ່ານັ້ນ ໄຕ່ຖາມແລ້ວລັງກຽດແຍກກັນປະວາຣະນາ ຕ້ອງອາບັດທຸກກົດ

ພິກຂຸອາຄັນຕຸກະເຫຼົ່ານັ້ນ ໄຕ່ຖາມແລ້ວລັງກຽດ ປະວາຣະນາຮ່ວມກັນ ບໍ່ຕ້ອງອາບັດ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພວກພິກຂຸທີ່ຢູ່ໃນອາວາດເຫັນພວກພິກຂຸອາຄັນຕຸກະຜູ້ເປັນນານາສັງວາດ ເຂົ້າໃຈວ່າເປັນສະມານະສັງວາດ ບໍ່ໄຕ່ຖາມ ປະວາຣະນາຮ່ວມກັນ ບໍ່ຕ້ອງອາບັດ

ພິກຂຸອາຄັນຕຸກະເຫຼົ່ານັ້ນ ໄຕ່ຖາມແລ້ວບໍ່ລັງກຽດປະວາຣະນາຮ່ວມກັນ ຕ້ອງອາບັດທຸກກົດ

ພິກຂຸອາຄັນຕຸກະເຫຼົ່ານັ້ນ ໄຕ່ຖາມແລ້ວບໍ່ລັງກຽດ ແຍກກັນປະວາຣະນາ ບໍ່ຕ້ອງອາບັດ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພວກພິກຂຸທີ່ຢູ່ໃນອາວາດເຫັນພວກພິກຂຸອາຄັນຕຸກະຜູ້ເປັນສະມານະສັງວາດ ເຂົ້າໃຈວ່າເປັນນານາສັງວາດ ບໍ່ໄຕ່ຖາມ ປະວາຣະນາຮ່ວມກັນ ຕ້ອງອາບັດທຸກກົດ

ພິກຂຸທີ່ຢູ່ໃນອາວາດເຫຼົ່ານັ້ນ ໄຕ່ຖາມແລ້ວລັງກຽດ ແຍກກັນປະວາຣະນາ ຕ້ອງອາບັດທຸກກົດ

ພິກຂຸທີ່ຢູ່ໃນອາວາດເຫຼົ່ານັ້ນໄຕ່ຖາມແລ້ວລັງກຽດ ປະວາຣະນາຮ່ວມກັນ ບໍ່ຕ້ອງອາບັດ

## ໑໓໗. ນະຄັນຕັບພະວານ

## ວ່າດ້ວຍບໍ່ຄວນໄປໄສໃນວັນປະວາຣະນາ

[໔໓໑] ພິກຂຸທັງຫຼາຍ ໃນວັນປະວາຣະນານັ້ນ ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ອາວາດທີ່ບໍ່ມີພິກຂຸ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

ພິກຂຸທັງຫຼາຍ ໃນວັນປະວາຣະນານັ້ນ ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ສະຖານທີ່ບໍ່ແມ່ນອາວາດເຊິ່ງບໍ່ມີພິກຂຸ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

ພິກຂຸທັງຫຼາຍ ໃນວັນປະວາຣະນານັ້ນ ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ອາວາດ ຫຼືສະຖານທີ່ບໍ່ແມ່ນອາວາດເຊິ່ງບໍ່ມີພິກຂຸ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

ພິກຂຸທັງຫຼາຍ ໃນວັນປະວາຣະນານັ້ນ ບໍ່ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸໄປສູ່ອາວາດທີ່ບໍ່ມີພິກຂຸ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

ພິກຂຸທັງຫຼາຍ ໃນວັນປະວາຣະນານັ້ນ ບໍ່ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸໄປສູ່ສະຖານທີ່ບໍ່ແມ່ນອາວາດເຊິ່ງບໍ່ມີພິກຂຸ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

ພິກຂຸທັງຫຼາຍ ໃນວັນປະວາຣະນານັ້ນ ບໍ່ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸໄປສູ່ອາວາດ ຫຼື ສະຖານທີ່ບໍ່ແມ່ນອາວາດເຊິ່ງບໍ່ມີພິກຂຸ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

ພິກຂຸທັງຫຼາຍ ໃນວັນປະວາຣະນານັ້ນ ບໍ່ເພິ່ງອອກຈາກອາວາດ ຫຼື ສະຖານທີ່ບໍ່ແມ່ນອາວາດ ເຊິ່ງມີພິກຂຸໄປສູ່ອາວາດທີ່ບໍ່ມີພິກຂຸ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

ພິກຂຸທັງຫຼາຍ ໃນວັນປະວາຣະນານັ້ນ ບໍ່ເພິ່ງອອກຈາກອາວາດ ຫຼື ສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸໄປສູ່ສະຖານທີ່ບໍ່ແມ່ນອາວາດເຊິ່ງບໍ່ມີພິກຂຸ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

ພິກຂຸທັງຫຼາຍ ໃນວັນປະວາຣະນານັ້ນ ບໍ່ເພິ່ງອອກຈາກອາວາດ ຫຼື ສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ໄປສູ່ອາວາດ ຫຼື ສະຖານທີ່ບໍ່ແມ່ນອາວາດເຊິ່ງບໍ່ມີພິກຂຸ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

ພິກຂຸທັງຫຼາຍ ໃນວັນປະວາຣະນານັ້ນ ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ອາວາດທີ່ມີ ພິກຂຸແຕ່ເປັນທີ່ຢູ່ຂອງພວກພິກຂຸຜູ້ເປັນນານາສັງວາດ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

ພິກຂຸທັງຫຼາຍ ໃນວັນປະວາຣະນານັ້ນ ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸແຕ່ເປັນທີ່ຢູ່ຂອງພວກພິກຂຸຜູ້ເປັນນານາສັງວາດ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

ພິກຂຸທັງຫຼາຍ ໃນວັນປະວາຣະນານັ້ນ ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ອາວາດ ຫຼື ສະຖານທີ່ບໍ່ແມ່ນອາວາດ ເຊິ່ງມີພິກຂຸແຕ່ເປັນທີ່ຢູ່ຂອງພວກພິກຂຸຜູ້ເປັນນານາສັງວາດ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

ພິກຂຸທັງຫຼາຍ ໃນວັນປະວາຣະນານັ້ນ ບໍ່ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸໄປສູ່ອາວາດທີ່ມີພິກຂຸແຕ່ເປັນທີ່ຢູ່ຂອງພວກພິກຂຸຜູ້ເປັນນານາສັງວາດ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

ພິກຂຸທັງຫຼາຍ ໃນວັນປະວາຣະນານັ້ນ ບໍ່ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸໄປສູ່ສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸແຕ່ເປັນທີ່ຢູ່ຂອງພວກພິກຂຸຜູ້ເປັນນານາສັງວາດ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

ພິກຂຸທັງຫຼາຍ ໃນວັນປະວາຣະນານັ້ນ ບໍ່ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸໄປສູ່ອາວາດ ຫຼື ສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸແຕ່ເປັນທີ່ຢູ່ຂອງພວກພິກຂຸຜູ້ເປັນນານາສັງວາດ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

ພິກຂຸທັງຫຼາຍ ໃນວັນປະວາຣະນານັ້ນ ບໍ່ເພິ່ງອອກຈາກອາວາດ ຫຼື ສະຖານທີ່ບໍ່ແມ່ນອາວາດ ເຊິ່ງມີພິກຂຸໄປສູ່ອາວາດທີ່ມີພິກຂຸແຕ່ເປັນທີ່ຢູ່ຂອງພວກພິກຂຸຜູ້ເປັນນານາສັງວາດ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

ພິກຂຸທັງຫຼາຍ ໃນວັນປະວາຣະນານັ້ນ ບໍ່ເພິ່ງອອກຈາກອາວາດ ຫຼື ສະຖານທີ່ບໍ່ແມ່ນອາວາດ ເຊິ່ງມີພິກຂຸໄປສູ່ສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸແຕ່ເປັນທີ່ຢູ່ຂອງພວກພິກຂຸຜູ້ເປັນນານາສັງວາດ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

ພິກຂຸທັງຫຼາຍ ໃນວັນປະວາຣະນານັ້ນ ບໍ່ເພິ່ງອອກຈາກອາວາດ ຫຼື ສະຖານທີ່ບໍ່ແມ່ນອາວາດ ເຊິ່ງມີພິກຂຸໄປສູ່ອາວາດ ຫຼື ສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ແຕ່ເປັນທີ່ຢູ່ຂອງພວກພິກຂຸຜູ້ເປັນນານາສັງວາດ ເວັ້ນໄວ້ແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

## ໑໓໗. ຄັນຕັບພະວານ

## ວ່າດ້ວຍສະຖານທີ່ຄວນໄປໃນວັນປະວາຣະນາ

[໔໓໔] ພິກຂຸທັງຫຼາຍ ໃນວັນປະວາຣະນານັ້ນ ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ອາວາດທີ່ມີພິກຂຸເຊິ່ງເປັນທີ່ຢູ່ຂອງພວກພິກຂຸຜູ້ເປັນສະມານະສັງວາດ ເຊິ່ງຮູ້ວ່າ "ເຮົາສາມາດໄປເຖິງໃນວັນນີ້"

ພິກຂຸທັງຫຼາຍ ໃນວັນປະວາຣະນານັ້ນ ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ຯລຯ ໄປສູ່ອາວາດ ຫຼື ສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸເຊິ່ງເປັນທີ່ຢູ່ຂອງພວກພິກຂຸຜູ້ເປັນສະມານະສັງວາດ ເຊິ່ງຮູ້ວ່າ "ເຮົາສາມາດໄປເຖິງໃນວັນນີ້"

ພິກຂຸທັງຫຼາຍ ໃນວັນປະວາຣະນານັ້ນ ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸໄປສູ່ອາວາດທີ່ມີພິກຂຸ ຯລຯ

ຯລຯ ໄປສູ່ສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ຯລຯ

ฯลฯ ໄປສູ່ອາວາດ ຫຼື ສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ເຊິ່ງເປັນທີ່ຢູ່ຂອງພວກພິກຂຸຜູ້ເປັນສະມານະສັງວາດ ເຊິ່ງຮູ້ວ່າ "ເຮົາສາມາດໄປເຖິງໃນວັນນີ້"

ພິກຂຸທັງຫຼາຍ ໃນວັນປະວາຣະນານັ້ນ ເພິ່ງອອກຈາກອາວາດ ຫຼື ສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸໄປສູ່ອາວາດທີ່ມີພິກຂຸ ฯลฯ

ฯลฯ ໄປສູ່ສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ฯลฯ

ฯลฯ ໄປສູ່ອາວາດ ຫຼື ສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ເຊິ່ງເປັນທີ່ຢູ່ຂອງພວກພິກຂຸຜູ້ເປັນສະມານະສັງວາດ ເຊິ່ງຮູ້ວ່າ "ເຮົາສາມາດໄປເຖິງໃນວັນນີ້"

# ໑໓໙. ວັດຊະນີຍະປຸກຄະລະສັນທັດສະນາ

## ວ່າດ້ວຍການສະແດງບຸກຄົນຄວນເວັ້ນໃນປະວາຣະນາກຳ

[໔໑໑] ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງປະວາຣະນາໃນບໍລິສັດທີ່ມີພິກຂຸນີນັ່ງຢູ່ດ້ວຍ ອົງໃດປະວາຣະນາ ຕ້ອງອາບັດທຸກກົດ

ฯลฯ ໃນບໍລິສັດທີ່ມີສິກຂະມານານັ່ງຢູ່ດ້ວຍ ฯลฯ

ฯลฯ ໃນບໍລິສັດທີ່ມີສາມະເນນນັ່ງຢູ່ດ້ວຍ ฯลฯ

ฯลฯ ໃນບໍລິສັດທີ່ມີສາມະເນຣີນັ່ງຢູ່ດ້ວຍ ฯลฯ

ฯลฯ ໃນບໍລິສັດທີ່ມີພິກຂຸຜູ້ບອກຄືນສິກຂານັ່ງຢູ່ດ້ວຍ ฯลฯ

ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງປະວາຣະນາໃນບໍລິສັດທີ່ມີພິກຂຸຕ້ອງອັນຕິມະວັດຖຸນັ່ງຢູ່ດ້ວຍ ອົງໃດປະວາຣະນາ ຕ້ອງອາບັດທຸກກົດ

ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງປະວາຣະນາໃນບໍລິສັດທີ່ມີພິກຂຸຖືກສົງລົງອຸກເຂປະນີຍະກຳ ຍ້ອນບໍ່ເຫັນອາບັດນັ່ງຢູ່ດ້ວຍ ອົງໃດປະວາຣະນາ ເພິ່ງປັບອາບັດຕາມທຳ

ฯลฯ ໃນບໍລິສັດທີ່ມີພິກຂຸຖືກສົງລົງອຸກເຂປະນີຍະກຳ ຍ້ອນບໍ່ເຮັດຄືນອາບັດນັ່ງຢູ່ດ້ວຍ ฯลฯ

ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງປະວາຣະນາໃນບໍລິສັດທີ່ມີພິກຂຸຖືກສົງລົງອຸກເຂປະນີຍະກຳ ຍ້ອນບໍ່ສະລະທິດຖິບາບນັ່ງຢູ່ດ້ວຍ ອົງໃດປະວາຣະນາ ເພິ່ງປັບອາບັດຕາມທຳ

ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງປະວາຣະນາໃນບໍລິສັດທີ່ມີບັນເດາະນັ່ງຢູ່ດ້ວຍ ອົງໃດປະວາຣະນາ ຕ້ອງອາບັດທຸກກົດ

ฯลฯ ໃນບໍລິສັດທີ່ມີ ຄົນລັກເພດນັ່ງຢູ່ດ້ວຍ ฯลฯ

ฯลฯ ໃນບໍລິສັດທີ່ມີ ພິກຂຸເຂົ້າຮີດເດຍຣະຖີນັ່ງຢູ່ດ້ວຍ ฯลฯ

ฯลฯ ໃນບໍລິສັດທີ່ມີ ສັດເດຍຣັດສານຢູ່ດ້ວຍ ฯลฯ

ฯลฯ ໃນບໍລິສັດທີ່ມີ ຄົນຂ້າມານດານັ່ງຢູ່ດ້ວຍ ฯลฯ

ฯลฯ ໃນບໍລິສັດທີ່ມີ ຄົນຂ້າບິດານັ່ງຢູ່ດ້ວຍ ฯลฯ
ฯลฯ ໃນບໍລິສັດທີ່ມີ ຄົນຂ້າພຣະອະຣະຫັນນັ່ງຢູ່ດ້ວຍ ฯลฯ
ฯลฯ ໃນບໍລິສັດທີ່ມີ ຄົນປະທຸດສະຮ້າຍພິກຂຸນີນັ່ງຢູ່ດ້ວຍ ฯลฯ
ฯลฯ ໃນບໍລິສັດທີ່ມີ ພິກຂຸຜູ້ທຳລາຍສົງນັ່ງຢູ່ດ້ວຍ ฯลฯ
ฯลฯ ໃນບໍລິສັດທີ່ມີຄົນທຳຮ້າຍພຣະສາດສະດາຈົນຫໍ້ພຣະໂລຫິດນັ່ງຢູ່ດ້ວຍ ฯลฯ

ພິກຂຸທັງຫຼາຍ ບໍ່ເພິ່ງປະວາຣະນາໃນບໍລິສັດທີ່ມີອຸພະໂຕພະຍັນຊະນະກະນັ່ງຢູ່ດ້ວຍອົງໃດປະວາຣະນາ ຕ້ອງອາບັດທຸກກົດ

## ເລື້ອງຫ້າມປະວາຣະນາໃນວັນບໍ່ແມ່ນວັນປະວາຣະນາ

ພິກຂຸທັງຫຼາຍ ບໍ່ເພິ່ງປະວາຣະນາດ້ວຍການໃຫ້ປາຣິວາສິກະປະວາຣະນາ ເວັ້ນແຕ່ບໍລິສັດຍັງບໍ່ລຸກຂື້ນ ພິກຂຸທັງຫຼາຍ ອັນໜຶ່ງ ບໍ່ເພິ່ງປະວາຣະນາໃນວັນບໍ່ແມ່ນວັນປະວາຣະນາ ເວັ້ນແຕ່ວັນທີ່ສົງສາມັກຄີກັນ

**ພານະວານທີ ๘ ຈົບ**

# ໑๘໐. ທະເວວາຈິກາທິປະວາຣະນາ

## ວ່າດ້ວຍສົງປະວາຣະນາ ๘ ເທື່ອເປັນຕົ້ນ

## ເລື້ອງຊາວດົງ

[๘๑๘] ສະໄໝນັ້ນໃນອາວາດແຫ່ງໜຶ່ງ ໃນແຄວ້ນໂກສົນ ໃນວັນປະວາຣະນານັ້ນ ມີຊາວດົງມາສາລະວົນ ພິກຂຸທັງຫຼາຍ ບໍ່ອາດຈະປະວາຣະນາ ๓ ເທື່ອ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ປະວາຣະນາ ๘ ເທື່ອ"

ຊາວດົງໄດ້ມາສາລະວົນຫຼາຍຂື້ນ ພິກຂຸທັງຫຼາຍ ບໍ່ອາດຈະປະວາຣະນາ ๘ ເທື່ອ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍເຮົາອະນຸຍາດໃຫ້ປະວາຣະນາເທື່ອດຽວ"

ຊາວດົງໄດ້ມາສາລະວົນຫຼາຍຍິ່ງຂື້ນ ພິກຂຸທັງຫຼາຍ ບໍ່ອາດຈະປະວາຣະນາເທື່ອດຽວ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ປະວາຣະນາມີພັນສາເທົ່າກັນ

## ເລື້ອງປະວາຣະນາເມື່ອຣາຕີໃກ້ສະຫວ່າງ

ສະໄໝນັ້ນໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ຊາວບ້ານມົວໃຫ້ທານຈົນຣາຕີໃກ້ສະຫວ່າງ ເມື່ອແລ້ວ ພິກຂຸເຫຼົ່ານັ້ນໄດ້ປຶກສາກັນດັ່ງນີ້ວ່າ "ຊາວບ້ານມົວໃຫ້ທານຈົນຣາຕີໃກ້ສະຫວ່າງ ຖ້າສົງຈັກປະວາຣະນາ ๓ ເທື່ອແລ້ວ ສົງຈັກປະວາຣະນາບໍ່ທັນ ເມື່ອເປັນແນວນີ້ ຣາຕີກໍຈັກສະຫວ່າງ ພວກເຮົາຈະເພິ່ງປະຕິບັດແນວໃດນໍ" ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ "ຊາວບ້ານໃຫ້ທານຈົນຣາຕີໃກ້ສະຫວ່າງ ຖ້າພິກຂຸທັງຫຼາຍໃນອາວາດນັ້ນໄດ້ປຶກສາກັນດັ່ງນີ້ວ່າ ຊາວບ້ານມົວໃຫ້ທານຈົນຣາຕີໃກ້ສະຫວ່າງ ຖ້າສົງຈັກປະວາຣະນາ ๓ ເທື່ອແລ້ວ ສົງຈັກປະວາຣະນາບໍ່ທັນ ເມື່ອເປັນແນວນີ້ ຣາຕີກໍຈັກສະຫວ່າງ"

ພິກຂຸຜູ້ສະຫຼາດ ຜູ້ສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິກຳມະວາຈາ ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຊາວບ້ານໃຫ້ທານຢູ່ຈົນຣາຕີໃກ້ສະຫວ່າງ ຖ້າສົງຈັກປະວາຣະນາ ๓ ເທື່ອແລ້ວ ສົງຈັກປະວາຣະນາບໍ່ທັນ ເມື່ອເປັນແນວນີ້ ຣາຕີກໍຈັກສະຫວ່າງ ຖ້າສົງພ້ອມກັນແລ້ວ ສົງເພິ່ງປະວາຣະນາ ໒ ເທື່ອ ປະວາຣະນາເທື່ອດຽວ ປະວາຣະນາມີພັນສາເທົ່າກັນ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ ພິກຂຸທັງຫຼາຍກ່າວທຳກັນ ฯລฯ

ฯລฯ ພິກຂຸຜູ້ຊຳນານພຣະສູດກໍສາທະຍາຍພຣະສູດກັນ ฯລฯ

ฯລฯ ພຣະວິໄນທອນກໍວິນິດໄສພຣະວິໄນກັນ ฯລฯ

ฯລฯ ພຣະທຳມະກະຖຶກກໍສົນທະນາທຳກັນ ฯລฯ

ฯລฯ ພິກຂຸທັງຫຼາຍ ຜິດຖຽງກັນຈົນຣາຕີໃກ້ສະຫວ່າງ ຖ້າພິກຂຸທັງຫຼາຍໄດ້ປຶກສາກັນດັ່ງນີ້ວ່າ ພິກຂຸທັງຫຼາຍຜິດຖຽງກັນຈົນຣາຕີໃກ້ສະຫວ່າງ ຖ້າສົງຈັກປະວາຣະນາ ๓ ເທື່ອແລ້ວ ສົງຈັກປະວາຣະນາບໍ່ທັນ ເມື່ອເປັນແນວນີ້ ຣາຕີກໍຈັກສະຫວ່າງກ່ອນ

ພິກຂຸຜູ້ສະຫຼາດ ຜູ້ສາມາດເພິ່ງປະກາດໃຫ້ສົງຮູ້ວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸທັງຫຼາຍ ຜິດຖຽງກັນຈົນຣາຕີໃກ້ສະຫວ່າງ ຖ້າສົງຈັກປະວາຣະນາ ๓ ເທື່ອແລ້ວ ສົງຈັກປະວາຣະນາບໍ່ທັນ ເມື່ອເປັນແນວນີ້ ຣາຕີກໍຈັກສະຫວ່າງ ຖ້າສົງພ້ອມກັນແລ້ວ ສົງເພິ່ງປະວາຣະນາ ໒ ເທື່ອ ປະວາຣະນາເທື່ອດຽວ ປະວາຣະນາມີພັນສາເທົ່າກັນ

## ເລື້ອງປະວາຣະນາຂະນະທີ່ຝົນຕັ້ງເຄົ້າ

ສະໄໝນັ້ນ ໃນອາວາດແຫ່ງໜຶ່ງໃນແຄວ້ນໂກສົນ ໃນວັນປະວາຣະນານັ້ນ ພິກຂຸສົງມາປະຊຸມກັນຫຼາຍ ບ່ອນປະຊຸມຈຶ່ງຄັບແຄບ ຄຸ້ມຝົນບໍ່ໄດ້ ແລະຝົນກໍຕັ້ງເຄົ້າໃຫຍ່ ພິກຂຸເຫຼົ່ານັ້ນໄດ້ປຶກສາກັນດັ່ງນີ້ວ່າ "ພິກຂຸສົງມາປະຊຸມກັນຫຼາຍ ສະຖານທີ່ຈຶ່ງຄັບແຄບ ຄຸ້ມຝົນບໍ່ໄດ້ ແລະຝົນກໍຕັ້ງເຄົ້າໃຫຍ່ ຖ້າສົງຈັກປະວາຣະນາ ໓ ເທື່ອແລ້ວ ສົງຈັກປະວາຣະນາບໍ່ທັນ ເມື່ອເປັນແບບນີ້ ຝົນກໍຈັກຕົກໃສ່ກ່ອນ ພວກເຮົາຈະເພິ່ງປະຕິບັດແນວໃດນໍ" ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງໃນວັນປະວາຣະນານັ້ນ ພິກຂຸສົງມາປະຊຸມກັນຫຼາຍ ສະຖານທີ່ຈຶ່ງຄັບແຄບ ຄຸ້ມຝົນບໍ່ໄດ້ ແລະຝົນກໍຕັ້ງເຄົ້າໃຫຍ່ ຖ້າພິກຂຸທັງຫຼາຍໄດ້ປຶກສາກັນດັ່ງນີ້ວ່າ ພິກຂຸສົງມາປະຊຸມກັນຫຼາຍສະຖານທີ່ຈຶ່ງຄັບແຄບ ຄຸ້ມຝົນບໍ່ໄດ້ ແລະຝົນກໍຕັ້ງເຄົ້າໃຫຍ່ ຖ້າສົງຈັກປະວາຣະນາ ໓ ເທື່ອແລ້ວ ສົງຈັກປະວາຣະນາບໍ່ທັນ ເມື່ອເປັນແບບນີ້ ຝົນກໍຈັກຕົກໃສ່ກ່ອນ

ພິກຂຸຜູ້ສະຫຼາດ ຜູ້ສາມາດເພິ່ງປະກາດໃຫ້ສົງຮູ້ວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸສົງມາປະຊຸມກັນຫຼາຍ ສະຖານທີ່ກໍຄັບແຄບຄຸ້ມຝົນບໍ່ໄດ້ ທັງຝົນກໍຕັ້ງເຄົ້າໃຫຍ່ ຖ້າສົງຈັກປະວາຣະນາ ໓ ເທື່ອແລ້ວ ສົງຈັກປະວາຣະນາບໍ່ທັນ ເມື່ອເປັນແບບນີ້ ຣາຕີກໍຈັກສະຫວ່າງ ຖ້າສົງພ້ອມກັນແລ້ວ ສົງເພິ່ງປະວາຣະນາ ໒ ເທື່ອປະວາຣະນາເທື່ອດຽວ ປະວາຣະນາມີພັນສາເທົ່າກັນ

## ເລື້ອງປະວາຣະນາເມື່ອມີອັນຕະລາຍ ໑໐ ຢ່າງ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນອາວາດແຫ່ງໜຶ່ງ ໃນວັນປະວາຣະນານັ້ນ

| | |
|---|---|
| ໑. ພຣະຣາຊາສະເດັດມາ | ໒. ໂຈນມາປຸ້ນ |
| ໓. ໄຟໄໝ້ | ໔. ນໍ້າໄຫຼມາ |
| ໕. ຄົນມາຫຼາຍ | ໖. ຜີເຂົ້າສິງພິກຂຸ |
| ໗. ສັດຮ້າຍເຂົ້າມາ | ໘. ງູຮ້າຍເລືອເຂົ້າມາ |
| ໙. ພິກຂຸຈະເຖິງແກ່ຊີວິດ | ໑໐. ມີອັນຕະລາຍຕໍ່ພົມມະຈັນ |

ໃນອັນຕະລາຍນັ້ນ ຖ້າພິກຂຸທັງຫຼາຍໄດ້ປຶກສາກັນດັ່ງນີ້ວ່າ ເຫດນີ້ ຄື ອັນຕະລາຍຕໍ່ພົມມະຈັນ ຖ້າສົງຈັກປະວາຣະນາ ໓ ເທື່ອແລ້ວ ສົງຈັກປະວາຣະນາບໍ່ທັນ ເມື່ອເປັນແບບນີ້ ອັນຕະລາຍຕໍ່ພົມມະຈັນກໍຈັກເກີດຂຶ້ນກ່ອນ

ພິກຂຸຜູ້ສະຫຼາດ ຜູ້ສາມາດເພິ່ງປະກາດໃຫ້ສົງຮູ້ ວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ເຫດນີ້ ຄືອັນຕະລາຍຕໍ່ພົມມະຈັນ ຖ້າສົງຈັກປະວາຣະນາ ๓ ເທື່ອແລ້ວສົງຈັກປະວາຣະນາບໍ່ທັນ ເມື່ອເປັນແນວນີ້ ອັນຕະລາຍຕໍ່ພົມມະຈັນກໍຈັກເກີດຂຶ້ນກ່ອນຖ້າສົງພ້ອມກັນແລ້ວ ສົງເພິ່ງປະວາຣະນາ ๔ ເທື່ອ ປະວາຣະນາ ເທື່ອດຽວ ປະວາຣະນາມີພັນສາເທົ່າກັນ

# ໑໔໑. ປະວາຣະນາຖະປະນະ

## ວ່າດ້ວຍການງົດປະວາຣະນາ

## ເລື້ອງພຣະສັບພັກຄີມີອາບັດຕິດໂຕປະວາຣະນາ

[๔๓๕] ສະໄໝນັ້ນ ພວກພິກຂຸສັບພັກຄີມີອາບັດຕິດໂຕປະວາຣະນາ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸມີອາບັດຕິດໂຕ ບໍ່ເພິ່ງປະວາຣະນາ ອົງໃດປະວາຣະນາ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ພິກຂຸໃດມີອາບັດຕິດໂຕປະວາຣະນາ ເຮົາອະນຸຍາດໃຫ້ຂໍໂອກາດແລ້ວໂຈດພິກຂຸນັ້ນດ້ວຍອາບັດ

## ເລື້ອງບໍ່ຍອມໃຫ້ໂອກາດ

ສະໄໝນັ້ນ ພວກພິກຂຸສັບພັກຄີຖືກສົງຂໍໂອກາດກໍບໍ່ປາຖະໜາຈະໃຫ້ໂອກາດ ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ງົດປະວາຣະນາແກ່ພິກຂຸຜູ້ບໍ່ຍອມໃຫ້ໂອກາດ"

## ວິທີງົດປະວາຣະນາ

ພິກຂຸທັງຫຼາຍ ກໍແລ ສົງເພິ່ງງົດປະວາຣະນາແນວນີ້

ໃນວັນປະວາຣະນານັ້ນ ໑໔ ຄ່ຳ ຫຼື ໑໕ ຄ່ຳນັ້ນ ເມື່ອພິກຂຸນັ້ນຢູ່ພ້ອມໜ້າ ພິກຂຸຜູ້ສະຫຼາດ ຜູ້ສາມາດເພິ່ງປະກາດໃນທ່າມກາງສົງວ່າ

ທ່ານຜູ້ຈະເລີນ ພິກຂຸຊື່ນີ້ມີອາບັດຕິດໂຕ ຂ້າພະເຈົ້າຂໍງົດປະວາຣະນາຂອງພິກຂຸນັ້ນ ເມື່ອພິກຂຸນັ້ນ ຍັງຢູ່ພ້ອມໜ້າ ສົງບໍ່ເພິ່ງປະວາຣະນາ ເທົ່ານີ້ ເປັນອັນໄດ້ງົດປະວາຣະນາແລ້ວ

## ເລື້ອງພຣະສັບພັກຄີງົດປະວາຣະນາຂອງພິກຂຸບໍລິສຸດ

ສະໄໝນັ້ນ ພວກພິກຂຸສັບພັກຄີປຶກສາກັນວ່າ "ພິກຂຸທັງຫຼາຍຜູ້ມີສີນດີງາມຈະງົດປະວາຣະນາແກ່ພວກເຮົາກ່ອນ" ຈຶ່ງຊິງງົດປະວາຣະນາແກ່ພິກຂຸທັງຫຼາຍ ຜູ້ບໍລິສຸດບໍ່ມີອາບັດຍ້ອນເລື້ອງອັນບໍ່ຄວນ ຍ້ອນເຫດອັນບໍ່ຄວນກ່ອນ ທັງງົດປະວາຣະນາແກ່ພິກຂຸທັງຫຼາຍທີ່ປະວາຣະນາສຳເລັດແລ້ວດ້ວຍ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຣັບສັ່ງວ່າ "ພິກຂຸທັງຫຼາຍ ບໍ່ເພິ່ງງົດປະວາຣະນາແກ່ພິກຂຸທັງຫຼາຍຜູ້ບໍລິສຸດບໍ່ມີອາບັດຍ້ອນເລື້ອງອັນບໍ່ຄວນ ຍ້ອນເຫດອັນບໍ່ຄວນ ອົງໃດງົດ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ບໍ່ເພິ່ງງົດປະວາຣະນາແກ່ພິກຂຸທັງຫຼາຍ ທີ່ປະວາຣະນາສຳເລັດແລ້ວ ອົງໃດງົດ ຕ້ອງອາບັດທຸກກົດ"

## ເລື້ອງລັກສະນະປະວາຣະນາທີ່ບໍ່ເປັນອັນງົດ

[໔໓໖] ພິກຂຸທັງຫຼາຍ ປະວາຣະນາເປັນອັນງົດແນວນີ້ ບໍ່ເປັນອັນງົດແນວນີ້

ພິກຂຸທັງຫຼາຍ ປະວາຣະນາບໍ່ເປັນອັນງົດເປັນແນວໃດ?

ພິກຂຸທັງຫຼາຍ ໃນການປະວາຣະນາ ໓ ເທື່ອ ຖ້າພິກຂຸກ່າວເປ່ງຄຳປະວາຣະນາອອກມາຈົບຈົບສຳເລັດສິ້ນແລ້ວ ຈຶ່ງງົດປະວາຣະນາ ປະວາຣະນາບໍ່ເປັນອັນງົດ

ພິກຂຸທັງຫຼາຍ ໃນການປະວາຣະນາ ໔ ເທື່ອ ຖ້າພິກຂຸກ່າວເປ່ງຄຳປະວາຣະນາອອກມາຈົບຈົບສຳເລັດສິ້ນແລ້ວ ຈຶ່ງງົດປະວາຣະນາ ປະວາຣະນາບໍ່ເປັນອັນງົດ

ພິກຂຸທັງຫຼາຍ ໃນການປະວາຣະນາເທື່ອດຽວ ຖ້າພິກຂຸກ່າວເປ່ງຄຳປະວາຣະນາອອກມາຈົບຈົບສຳເລັດສິ້ນແລ້ວ ຈຶ່ງງົດປະວາຣະນາ ປະວາຣະນາບໍ່ເປັນອັນງົດ

ພິກຂຸທັງຫຼາຍ ໃນການປະວາຣະນາມີພັນສາເທົ່າກັນ ຖ້າພິກຂຸກ່າວເປ່ງຄຳປະວາຣະນາອອກມາ ຈົບຈົບສຳເລັດສິ້ນແລ້ວ ຈຶ່ງງົດປະວາຣະນາ ປະວາຣະນາບໍ່ເປັນອັນງົດ

ພິກຂຸທັງຫຼາຍ ປະວາຣະນາບໍ່ເປັນອັນງົດເປັນແນວນີ້ແລ

ພິກຂຸທັງຫຼາຍ ປະວາຣະນາເປັນອັນງົດເປັນແນວໃດ?

ພິກຂຸທັງຫຼາຍ ໃນການປະວາຣະນາ ໓ ເທື່ອ ຖ້າພິກຂຸກ່າວເປ່ງຄຳປະວາຣະນາອອກມາແຕ່ຍັງບໍ່ຈົບສຳເລັດສິ້ນ ງົດປະວາຣະນາ ປະວາຣະນາເປັນອັນງົດ

ພິກຂຸທັງຫຼາຍ ໃນການປະວາຣະນາ ໔ ເທື່ອ ຖ້າພິກຂຸກ່າວເປ່ງຄຳປະວາຣະນາອອກມາແຕ່ຍັງບໍ່ຈົບສຳເລັດສິ້ນ ງົດປະວາຣະນາ ປະວາຣະນາເປັນອັນງົດ

ພິກຂຸທັງຫຼາຍ ໃນການປະວາຣະນາເທື່ອດຽວ ຖ້າພິກຂຸກ່າວເປ່ງຄຳປະວາຣະນາອອກມາແຕ່ຍັງບໍ່ຈົບສຳເລັດສິ້ນ ງົດປະວາຣະນາ ປະວາຣະນາບໍ່ເປັນອັນງົດ

ພິກຂຸທັງຫຼາຍ ໃນການປະວາຣະນາມີພັນສາເທົ່າກັນ ຖ້າພິກຂຸກ່າວເປ່ງຄໍາປະວາຣະນາອອກມາ ແຕ່ຍັງບໍ່ຈົບ ງົດປະວາຣະນາ ປະວາຣະນາເປັນອັນງົດ

ພິກຂຸທັງຫຼາຍ ປະວາຣະນາເປັນອັນງົດເປັນແນວນີ້ແລ

## ເລື້ອງງົດປະວາຣະນາຂອງພິກຂຸ

[໔໓໗] ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ໃນວັນປະວາຣະນານັ້ນ ພິກຂຸງົດປະວາຣະນາຂອງພິກຂຸສາ ຖ້າພິກຂຸເຫຼົ່າອື່ນຮູ້ຈັກພິກຂຸນັ້ນວ່າ "ທ່ານອົງນີ້ມີຄວາມປະພຶດທາງກາຍບໍ່ບໍລິສຸດ ມີຄວາມປະພຶດທາງວາຈາບໍ່ບໍລິສຸດ ມີອາຊີວະບໍ່ບໍລິສຸດ ເປັນຜູ້ຈ້ຳ ບໍ່ສະຫຼາດ ເມື່ອຖືກຊັກຖາມ ບໍ່ອາດຈະຕອບຂໍ້ຊັກຖາມ" ສົງເພິ່ງກ່າວຫ້າມວ່າ "ພໍເທີ້ນ ພິກຂຸ ຢ່າຜິດໃຈກັນ ຢ່າຜິດຖຽງກັນ ຢ່າແກ່ງແຍ່ງກັນ ຢ່າວິວາດກັນເລີຍ" ແລ້ວຈຶ່ງປະວາຣະນາ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນວັນປະວາຣະນານັ້ນ ພິກຂຸງົດປະວາຣະນາຂອງພິກຂຸສາ ຖ້າພິກຂຸເຫຼົ່າອື່ນຮູ້ຈັກພິກຂຸນັ້ນວ່າ "ທ່ານອົງນີ້ມີຄວາມປະພຶດທາງກາຍບໍລິສຸດ ມີຄວາມປະພຶດທາງວາຈາບໍ່ບໍລິສຸດ ມີອາຊີວະບໍ່ບໍລິສຸດ ເປັນຜູ້ຈ້ຳ ບໍ່ສະຫຼາດ ເມື່ອຖືກຊັກຖາມ ບໍ່ອາດຈະຕອບຂໍ້ຊັກຖາມ" ສົງເພິ່ງກ່າວຫ້າມວ່າ"ພໍເທີ້ນ ພິກຂຸ ຢ່າຜິດໃຈກັນ ຢ່າຜິດຖຽງກັນ ຢ່າແກ່ງແຍ່ງກັນ ຢ່າວິວາດກັນເລີຍ" ແລ້ວຈຶ່ງປະວາຣະນາ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນວັນປະວາຣະນານັ້ນ ພິກຂຸງົດປະວາຣະນາຂອງພິກຂຸສາ ຖ້າພິກຂຸເຫຼົ່າອື່ນຮູ້ຈັກພິກຂຸນັ້ນວ່າ "ທ່ານອົງນີ້ມີຄວາມປະພຶດທາງກາຍບໍລິສຸດ ມີຄວາມປະພຶດທາງວາຈາບໍລິສຸດ ແຕ່ມີອາຊີວະບໍ່ບໍລິສຸດ ເປັນຜູ້ຈ້ຳ ບໍ່ສະຫຼາດ ເມື່ອຖືກຊັກຖາມ ບໍ່ອາດຈະຕອບຂໍ້ຊັກຖາມ" ສົງເພິ່ງກ່າວຫ້າມວ່າ "ພໍເທີ້ນ ພິກຂຸ ຢ່າຜິດໃຈກັນ ຢ່າຜິດຖຽງກັນ ຢ່າແກ່ງແຍ່ງກັນ ຢ່າວິວາດກັນເລີຍ" ແລ້ວຈຶ່ງປະວາຣະນາ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນວັນປະວາຣະນານັ້ນ ພິກຂຸງົດປະວາຣະນາຂອງພິກຂຸສາ ຖ້າພິກຂຸເຫຼົ່າອື່ນຮູ້ຈັກພິກຂຸນັ້ນວ່າ "ທ່ານອົງນີ້ມີຄວາມປະພຶດທາງກາຍບໍລິສຸດ ມີຄວາມປະພຶດທາງວາຈາບໍລິສຸດ ມີອາຊີວະບໍລິສຸດ ແຕ່ເປັນຜູ້ຈ້ຳ ບໍ່ສະຫຼາດ ເມື່ອຖືກຊັກຖາມ ບໍ່ອາດຈະຕອບຂໍ້ຊັກຖາມ" ສົງເພິ່ງກ່າວຫ້າມວ່າ "ພໍເທີ້ນ ພິກຂຸ ຢ່າຜິດໃຈກັນ ຢ່າຜິດຖຽງກັນ ຢ່າແກ່ງແຍ່ງກັນ ຢ່າວິວາດກັນເລີຍ" ແລ້ວຈຶ່ງປະວາຣະນາ

## ເລື້ອງເຫດຜົນໃນການງົດປະວາຣະນາ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນວັນປະວາຣະນານັ້ນ ພິກຂຸງົດປະວາຣະນາຂອງພິກຂຸສາ ຖ້າພິກຂຸເຫຼົ່າອື່ນຮູ້ຈັກພິກຂຸນັ້ນວ່າ "ທ່ານອົງນີ້ມີຄວາມປະພຶດທາງກາຍບໍລິສຸດ ມີ

ຄວາມປະພຶດທາງວາຈາບໍລິສຸດ ມີອາຊີວະບໍລິສຸດ ເປັນບັນດິດ ເປັນຜູ້ສະຫຼາດ ເມື່ອຖືກຊັກຖາມ ສາມາດຕອບຂໍ້ຊັກຖາມໄດ້" ສົງເພິ່ງຖາມພິກຂຸນັ້ນວ່າ "ທ່ານ ທ່ານງົດປະວາຣະນາຂອງພິກຂຸນີ້ ເຮັດຫຍັງ ງົດຍ້ອນເລື້ອງອັນໃດ ງົດຍ້ອນສີນວິບັດ ຫຼື ງົດຍ້ອນອາຈາຣະວິບັດ ຫຼື ງົດຍ້ອນທິດຖິວິບັດ"

ຖ້າພິກຂຸນັ້ນກ່າວແນວນີ້ວ່າ "ເຮົາງົດຍ້ອນສີນວິບັດແດ່ ງົດຍ້ອນອາຈາຣະວິບັດແດ່ ງົດຍ້ອນທິດຖິວິບັດແດ່"

ສົງເພິ່ງຖາມພິກຂຸນັ້ນແນວນີ້ວ່າ "ທ່ານຮູ້ສີນວິບັດ ຫຼື ຮູ້ອາຈາຣະວິບັດ ຫຼື ຮູ້ທິດຖິວິບັດແມ່ນບໍ?"

ຖ້າພິກຂຸນັ້ນກ່າວແນວນີ້ວ່າ "ທ່ານທັງຫຼາຍ ເຮົາຮູ້ສີນວິບັດ ຮູ້ອາຈາຣະວິບັດ ຮູ້ທິດຖິວິບັດ"

ສົງເພິ່ງຖາມພິກຂຸນັ້ນແນວນີ້ວ່າ "ທ່ານ ກໍສີນວິບັດເປັນຢ່າງໃດ? ອາຈາຣະວິບັດເປັນຢ່າງໃດ? ທິດຖິວິບັດເປັນຢ່າງໃດ?"

ຖ້າພິກຂຸນັ້ນ ກ່າວແນວນີ້ວ່າ "ປາຣາຊິກ ໔ ສັງຄາທິເສດ ໑໓ ນີ້ຊື່ວ່າ ສີນວິບັດ ຖຸນລັດໄຈ ປາຈິດຕີ ປະຕິເທສະນີຍະ ທຸກກົດ ທຸບພາສິດ ນີ້ຊື່ວ່າ ອາຈາຣະວິບັດ ມິດສາທິດຖິ ອັນຕະຄາຫິກະທິດຖິ ນີ້ຊື່ວ່າ ທິດຖິວິບັດ" ສົງເພິ່ງຖາມພິກຂຸນັ້ນແນວນີ້ວ່າ "ທ່ານ ທ່ານງົດປະວາຣະນາຂອງພິກຂຸນີ້ ເຮັດຫຍັງ ງົດດ້ວຍໄດ້ເຫັນ ຫຼື ງົດດ້ວຍໄດ້ຍິນ ຫຼື ງົດດ້ວຍນຶກສົງໄສແມ່ນບໍ?"

ຖ້າພິກຂຸນັ້ນ ກ່າວແນວນີ້ວ່າ "ງົດດ້ວຍໄດ້ເຫັນແດ່ ງົດດ້ວຍໄດ້ຍິນແດ່ ງົດດ້ວຍນຶກສົງໄສແດ່"

ສົງເພິ່ງຖາມພິກຂຸນັ້ນແນວນີ້ວ່າ "ທ່ານ ທ່ານງົດປະວາຣະນາຂອງພິກຂຸນີ້ດ້ວຍໄດ້ເຫັນຢ່າງໃດ ທ່ານເຫັນອັນໃດ ທ່ານເຫັນວ່າແນວໃດ ທ່ານເຫັນເມື່ອໃດ ທ່ານເຫັນຢູ່ໄສ ພິກຂຸນີ້ຕ້ອງອາບັດປາຣາຊິກ ທ່ານເຫັນບໍທີ່ພິກຂຸນີ້ຕ້ອງອາບັດສັງຄາທິເສດ ທ່ານເຫັນບໍທີ່ພິກຂຸນີ້ຕ້ອງອາບັດຖຸນລັດໄຈ ຯລຯ ອາບັດປາຈິດຕີ ຯລຯ ອາບັດປະຕິເທສະນີຍະ ຯລຯ ອາບັດທຸກກົດ ຯລຯ ອາບັດທຸບພາສິດ ທ່ານເຫັນບໍ? ທ່ານຢູ່ທີ່ໃດ ພິກຂຸນີ້ຢູ່ທີ່ໃດ ທ່ານເຮັດຫຍັງ ພິກຂຸນີ້ເຮັດຫຍັງ"

ຖ້າພິກຂຸນັ້ນ ກ່າວແນວນີ້ວ່າ "ທ່ານທັງຫຼາຍ ເຮົາບໍ່ໄດ້ງົດປະວາຣະນາຂອງພິກຂຸນີ້ດ້ວຍໄດ້ເຫັນດອກ ແຕ່ເຮົາງົດປະວາຣະນາດ້ວຍໄດ້ຍິນຕ່າງຫາກ"

ສົງເພິ່ງຖາມພິກຂຸນັ້ນແນວນີ້ວ່າ "ທ່ານ ທ່ານງົດປະວາຣະນາຂອງພິກຂຸນີ້ດ້ວຍໄດ້ຍິນຢ່າງໃດ ທ່ານໄດ້ຍິນອັນໃດ ທ່ານໄດ້ຍິນວ່າແນວໃດ ທ່ານໄດ້ຍິນເມື່ອໃດ ທ່ານໄດ້ຍິນຢູ່ໄສ ທ່ານໄດ້ຍິນວ່າ ພິກຂຸນີ້ຕ້ອງອາບັດປາຣາຊິກ ຫຼື ໄດ້ຍິນວ່າ ພິກຂຸນີ້ຕ້ອງອາບັດສັງຄາທິເສດ ຫຼື ໄດ້ຍິນວ່າ ພິກຂຸນີ້ຕ້ອງອາບັດຖຸນລັດໄຈ ຯລຯ ອາບັດປາຈິດຕີຯລຯ ອາບັດປະຕິເທສະນີຍະ ຯລຯ ອາບັດທຸກກົດ ຯລຯ ອາບັດທຸບພາສິດ ຫຼື ໄດ້ຍິນຈາກພິກຂຸ ຫຼື ໄດ້ຍິນຈາກພິກຂຸນີ ຫຼື

ໄດ້ຍິນຈາກສິກຂະມານາ ຫຼື ໄດ້ຍິນຈາກສາມະເນນ ຫຼື ໄດ້ຍິນຈາກສາມະເນຣີ ຫຼື ໄດ້ຍິນຈາກອຸປາສົກ ຫຼື ໄດ້ຍິນຈາກອຸປາສິກາ ຫຼື ໄດ້ຍິນຈາກພຣະຣາຊາທັງຫຼາຍ ຫຼື ໄດ້ຍິນຈາກຣາດຊະມະຫາອຳໝາດທັງຫຼາຍ ຫຼື ໄດ້ຍິນຈາກພວກເດຍຣະຖີ ຫຼື ໄດ້ຍິນຈາກພວກສາວົກ ເດຍຣະຖີແມ່ນບໍ?"

ຖ້າພິກຂຸນັ້ນ ກ່າວແນວນີ້ວ່າ "ທ່ານທັງຫຼາຍ ເຮົາບໍ່ໄດ້ງົດປະວາຣະນາຂອງພິກຂຸນີ້ດ້ວຍໄດ້ຍິນດອກ ແຕ່ເຮົາງົດປະວາຣະນາດ້ວຍນຶກສົງໄສຕ່າງຫາກ"

ສົງເພິ່ງຖາມພິກຂຸນັ້ນແນວນີ້ວ່າ "ທ່ານ ທ່ານງົດປະວາຣະນາຂອງພິກຂຸນີ້ດ້ວຍນຶກສົງໄສຢ່າງໃດ ທ່ານນຶກສົງໄສອັນໃດ ທ່ານນຶກສົງໄສວ່າແນວໃດ ທ່ານນຶກສົງໄສເມື່ອໃດ ທ່ານນຶກສົງໄສຢູ່ໃສ ທ່ານນຶກສົງໄສວ່າ ພິກຂຸນີ້ຕ້ອງອາບັດປາຣາຊິກ ຫຼື ນຶກສົງໄສວ່າ ພິກຂຸນີ້ຕ້ອງອາບັດສັງຄາທິເສດ ຫຼື ນຶກສົງໄສວ່າ ພິກຂຸນີ້ຕ້ອງອາບັດຖຸນລັດໄຈ ฯลฯ ອາບັດປາຈິດຕີ ฯลฯ ອາບັດປະຕິເທສະນີຍະ ฯลฯ ອາບັດທຸກກົດ ฯลฯ ອາບັດທຸບພາສິດ ຫຼື ທ່ານໄດ້ຍິນຈາກພິກຂຸແລ້ວນຶກສົງໄສ ຫຼື ໄດ້ຍິນຈາກພິກຂຸນີແລ້ວນຶກສົງໄສ ຫຼື ໄດ້ຍິນຈາກສິກຂະມານາ ແລ້ວນຶກສົງໄສ ຫຼື ໄດ້ຍິນຈາກສາມະເນນແລ້ວນຶກສົງໄສ ຫຼື ໄດ້ຍິນຈາກສາມະເນຣີແລ້ວນຶກສົງໄສ ຫຼື ໄດ້ຍິນຈາກອຸປາສົກແລ້ວນຶກສົງໄສ ຫຼື ໄດ້ຍິນຈາກອຸປາສິກາແລ້ວນຶກສົງໄສ ຫຼື ໄດ້ຍິນຈາກພຣະຣາຊາທັງຫຼາຍແລ້ວນຶກສົງໄສ ຫຼື ໄດ້ຍິນຈາກຣາດຊະມະຫາອຳໝາດທັງຫຼາຍແລ້ວນຶກສົງໄສ ຫຼື ໄດ້ຍິນຈາກພວກເດຍຣະຖີແລ້ວນຶກສົງໄສ ຫຼື ໄດ້ຍິນຈາກພວກສາວົກເດຍຣະຖີແລ້ວນຶກສົງໄສແມ່ນບໍ?"

ຖ້າພິກຂຸນັ້ນ ກ່າວແນວນີ້ວ່າ "ທ່ານທັງຫຼາຍ ເຮົາບໍ່ໄດ້ງົດປະວາຣະນາຂອງພິກຂຸນີ້ດ້ວຍນຶກສົງໄສ ແລະເຮົາກໍບໍ່ຮູ້ວ່າ ເຮົາງົດປະວາຣະນາຂອງພິກຂຸນີ້ດ້ວຍເຫດອັນໃດ"

## ຟັງຄຳປະຕິນຍາຂອງໂຈດແລະຈຳເລີຍ

ພິກຂຸທັງຫຼາຍ ຖ້າພິກຂຸຜູ້ເປັນໂຈດນັ້ນຕອບຂໍ້ຊັກຖາມບໍ່ເປັນທີ່ພໍໃຈຂອງເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍ ສົງເພິ່ງບອກວ່າ ທ່ານບໍ່ຄວນຟ້ອງພິກຂຸຈຳເລີຍ

ພິກຂຸທັງຫຼາຍ ຖ້າພິກຂຸຜູ້ເປັນໂຈດນັ້ນຕອບຂໍ້ຊັກຖາມເປັນທີ່ພໍໃຈຂອງເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍ ສົງເພິ່ງບອກວ່າ ທ່ານຄວນຟ້ອງພິກຂຸຈຳເລີຍ

ພິກຂຸທັງຫຼາຍ ຖ້າພິກຂຸຜູ້ເປັນໂຈດນັ້ນປະຕິນຍາວ່າ ພິກຂຸນັ້ນຖືກຕົນໃສ່ຄວາມດ້ວຍອາບັດປາຣາຊິກອັນບໍ່ມີມູນ ສົງເພິ່ງປັບອາບັດສັງຄາທິເສດແລ້ວຈຶ່ງປະວາຣະນາ

ພິກຂຸທັງຫຼາຍ ຖ້າພິກຂຸຜູ້ເປັນໂຈດນັ້ນປະຕິນຍາວ່າ ພິກຂຸນັ້ນ ຖືກຕົນໃສ່ຄວາມດ້ວຍອາບັດສັງຄາທິເສດອັນບໍ່ມີມູນ ສົງເພິ່ງປັບອາບັດຕາມທຳແລ້ວຈຶ່ງປະວາຣະນາ

ພິກຂຸທັງຫຼາຍ ຖ້າພິກຂຸຜູ້ເປັນໂຈດນັ້ນປະຕິນຍາວ່າ ພິກຂຸນັ້ນ ຖືກຕົນໃສ່ຄວາມດ້ວຍອາບັດຖຸນລັດໄຈອັນບໍ່ມີມູນ ຯລຯ ດ້ວຍອາບັດປາຈິດຕີ ຯລຯ ດ້ວຍອາບັດປະຕິເທສະນິຍະ ຯລຯ ດ້ວຍອາບັດທຸກກົດ ຯລຯ ດ້ວຍອາບັດທຸບພາສິດອັນບໍ່ມີມູນ ສົງເພິ່ງປັບອາບັດຕາມທຳແລ້ວຈຶ່ງປະວາຣະນາ

ພິກຂຸທັງຫຼາຍ ຖ້າພິກຂຸຈຳເລີຍນັ້ນປະຕິນຍາວ່າ ຂ້າພະເຈົ້າຕ້ອງອາບັດປາຣາຊິກ ສົງເພິ່ງນາສະນະສາ[๑] ແລ້ວຈຶ່ງປະວາຣະນາ

ພິກຂຸທັງຫຼາຍ ຖ້າພິກຂຸຈຳເລີຍນັ້ນປະຕິນຍາວ່າ ຂ້າພະເຈົ້າຕ້ອງອາບັດສັງຄາທິເສດ ສົງເພິ່ງປັບອາບັດສັງຄາທິເສດ ແລ້ວຈຶ່ງປະວາຣະນາ

ພິກຂຸທັງຫຼາຍ ຖ້າພິກຂຸຈຳເລີຍນັ້ນປະຕິນຍາວ່າ ຂ້າພະເຈົ້າຕ້ອງອາບັດຖຸນລັດໄຈ ຯລຯ ອາບັດປາຈິດຕີ ຯລຯ ອາບັດປະຕິເທສະນິຍະ ຯລຯ ອາບັດທຸກກົດ ຯລຯ ອາບັດທຸບພາສິດ ສົງເພິ່ງປັບອາບັດຕາມທຳ ແລ້ວຈຶ່ງປະວາຣະນາ

## ໑໔໘. ຖຸນລັດຈະຍະວັດຖຸກາທິ

### ວ່າດ້ວຍການຕ້ອງອາບັດຖຸນລັດໄຈເປັນຕົ້ນ

### ເລື້ອງຕ້ອງອາບັດຖຸນລັດໄຈເປັນຕົ້ນ

[໔໓໗] ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ໃນວັນປະວາຣະນານັ້ນ ພິກຂຸຕ້ອງອາບັດຖຸນລັດໄຈ ພິກຂຸບາງພວກມີຄວາມເຫັນວ່າຕ້ອງອາບັດຖຸນລັດໄຈ ບາງພວກມີຄວາມເຫັນວ່າຕ້ອງອາບັດສັງຄາທິເສດ

ພິກຂຸທັງຫຼາຍ ພວກພິກຂຸທີ່ມີຄວາມເຫັນວ່າ ຕ້ອງອາບັດຖຸນລັດໄຈ ເພິ່ງນຳພິກຂຸນັ້ນໄປໃນທີ່ອັນຄວນ ປັບອາບັດຕາມທຳ ແລ້ວເຂົ້າໄປຫາສົງກ່າວແບບນີ້ວ່າ ທ່ານທັງຫຼາຍ ອາບັດທີ່ພິກຂຸນັ້ນຕ້ອງ ພິກຂຸນັ້ນໄດ້ເຮັດຄືນຕາມທຳແລ້ວ ຖ້າສົງພ້ອມກັນແລ້ວ ສົງເພິ່ງປະວາຣະນາ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນວັນປະວາຣະນານັ້ນ ພິກຂຸຕ້ອງອາບັດຖຸນລັດໄຈ ພິກຂຸບາງພວກມີຄວາມເຫັນວ່າ ຕ້ອງອາບັດຖຸນລັດໄຈ ບາງພວກມີຄວາມເຫັນວ່າ ຕ້ອງອາບັດປາຈິດຕີ ຯລຯ

ບາງພວກມີຄວາມເຫັນວ່າຕ້ອງອາບັດຖຸນລັດໄຈ ບາງພວກມີຄວາມເຫັນວ່າຕ້ອງອາບັດປະຕິເທສະນິຍະ ຯລຯ ບາງພວກມີຄວາມເຫັນວ່າຕ້ອງອາບັດຖຸນລັດໄຈ ບາງພວກມີຄວາມເຫັນວ່າ ຕ້ອງອາບັດທຸກກົດ ຯລຯ

ບາງພວກມີຄວາມເຫັນວ່າ ຕ້ອງອາບັດຖຸນລັດໄຈ ບາງພວກມີຄວາມເຫັນວ່າຕ້ອງອາບັດທຸບພາສິດ

ພິກຂຸທັງຫຼາຍ ພວກພິກຂຸທີ່ມີຄວາມເຫັນວ່າ ຕ້ອງອາບັດຖຸນລັດໄຈ ເພິ່ງນຳພິກຂຸນັ້ນໄປໃນທີ່ອັນຄວນ ປັບອາບັດຕາມທຳ ແລ້ວເຂົ້າໄປຫາສົງກ່າວແນວນີ້ວ່າ ທ່ານທັງຫຼາຍ ອາບັດທີ່ພິກຂຸນັ້ນຕ້ອງ ພິກຂຸນັ້ນໄດ້ເຮັດຄືນຕາມທຳແລ້ວ ຖ້າສົງພ້ອມກັນແລ້ວ ສົງເພິ່ງປະວາຣະນາ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນປະວາຣະນານັ້ນ ພິກຂຸຕ້ອງອາບັດປາຈິດຕີ ฯลฯ ຕ້ອງອາບັດປະຕິເທສະນີຍະ ฯลฯ ຕ້ອງອາບັດທຸກກົດ ฯลฯ ຕ້ອງອາບັດທຸບພາສິດ ພິກຂຸບາງພວກມີຄວາມເຫັນວ່າ ຕ້ອງອາບັດທຸບພາສິດ ບາງພວກມີຄວາມເຫັນວ່າຕ້ອງອາບັດສັງຄາທິເສດ

ພິກຂຸທັງຫຼາຍ ພວກພິກຂຸທີ່ມີຄວາມເຫັນວ່າ ຕ້ອງອາບັດທຸບພາສິດ ເພິ່ງນຳພິກຂຸນັ້ນໄປໃນທີ່ອັນຄວນ ປັບອາບັດຕາມທຳ ແລ້ວເຂົ້າໄປຫາສົງກ່າວແນວນີ້ວ່າ ທ່ານທັງຫຼາຍ ອາບັດທີ່ພິກຂຸນັ້ນຕ້ອງ ພິກຂຸນັ້ນໄດ້ເຮັດຄືນຕາມທຳແລ້ວ ຖ້າສົງພ້ອມກັນແລ້ວ ສົງເພິ່ງປະວາຣະນາ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນວັນປະວາຣະນານັ້ນ ພິກຂຸຕ້ອງອາບັດທຸບພາສິດ ພິກຂຸບາງພວກມີຄວາມເຫັນວ່າຕ້ອງອາບັດທຸບພາສິດ ບາງພວກມີຄວາມເຫັນວ່າຕ້ອງອາບັດຖຸນລັດໄຈ ฯลฯ

ບາງພວກມີຄວາມເຫັນວ່າ ຕ້ອງອາບັດທຸບພາສິດ ບາງພວກມີຄວາມເຫັນວ່າ ຕ້ອງອາບັດປາຈິດຕີ ฯลฯ

ບາງພວກມີຄວາມເຫັນວ່າ ຕ້ອງອາບັດທຸບພາສິດ ບາງພວກມີຄວາມເຫັນວ່າຕ້ອງອາບັດປະຕິເທສະນີຍະ ฯลฯ

ບາງພວກມີຄວາມເຫັນວ່າຕ້ອງອາບັດທຸບພາສິດ ບາງພວກມີຄວາມເຫັນວ່າຕ້ອງອາບັດທຸກກົດ

ພິກຂຸທັງຫຼາຍ ພວກພິກຂຸທີ່ມີຄວາມເຫັນວ່າ ຕ້ອງອາບັດທຸບພາສິດ ເພິ່ງນຳພິກຂຸນັ້ນໄປໃນທີ່ອັນຄວນ ປັບອາບັດຕາມທຳ ແລ້ວເຂົ້າໄປຫາສົງກ່າວແນວນີ້ວ່າ ທ່ານທັງຫຼາຍ ອາບັດທີ່ພິກຂຸນັ້ນຕ້ອງ ພິກຂຸນັ້ນໄດ້ເຮັດຄືນຕາມທຳແລ້ວ ຖ້າສົງພ້ອມກັນແລ້ວ ສົງເພິ່ງປະວາຣະນາ

## ໑໔໓. ວັດຖຸປະຖຸນາທິ

## ວ່າດ້ວຍການງົດວັດຖຸເປັນຕົ້ນ

## ເລື້ອງວັດຖຸແລະບຸກຄົນຜາກົດ

[໔໓໙] ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ໃນວັນປະວາຣະນານັ້ນ ພິກຂຸຈະເພິ່ງປະກາດໃນທ່າມກາງສົງວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ວັດຖຸນີ້ຜາກົດ ບຸກຄົນບໍ່ຜາກົດ ຖ້າສົງພ້ອມກັນແລ້ວສົງເພິ່ງງົດວັດຖຸ ແລ້ວປະວາຣະນາເທີ້ນ

ສົງເພິ່ງກ່າວກັບພິກຂຸນັ້ນວ່າ ທ່ານ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດປະວາຣະນາໄວ້ສຳລັບພິກຂຸທັງຫຼາຍຜູ້ບໍລິສຸດ ຖ້າວັດຖຸຜາກົດ ບຸກຄົນບໍ່ຜາກົດ ທ່ານ ຈົ່ງຣະບຸບຸກຄົນນັ້ນດຽວນີ້ເທີ້ນ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ໃນວັນປະວາຣະນານັ້ນ ພິກຂຸຈະເພິ່ງປະກາດໃນທ່າມກາງສົງ ວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ບຸກຄົນນີ້ຜາກົດ ວັດຖຸບໍ່ຜາກົດ ຖ້າສົງພ້ອມກັນແລ້ວ ສົງເພິ່ງງົດບຸກຄົນ ແລ້ວປະວາຣະນາເທີ້ນ

ສົງເພິ່ງກ່າວກັບພິກຂຸນັ້ນວ່າ ທ່ານ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດປະວາຣະນາໄວ້ສຳລັບພິກຂຸທັງຫຼາຍຜູ້ພ້ອມພຽງກັນ ຖ້າບຸກຄົນຜາກົດ ວັດຖຸບໍ່ຜາກົດ ທ່ານຈົ່ງຣະບຸວັດຖຸນັ້ນດຽວນີ້ເທີ້ນ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ໃນວັນປະວາຣະນານັ້ນ ພິກຂຸຈະເພິ່ງປະກາດໃນທ່າມກາງສົງ ວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ທັງວັດຖຸ ແລະບຸກຄົນນີ້ຜາກົດ ຖ້າສົງພ້ອມກັນແລ້ວ ສົງເພິ່ງງົດທັງວັດຖຸແລະບຸກຄົນ ແລ້ວປະວາຣະນາເທີ້ນ

ສົງເພິ່ງກ່າວກັບພິກຂຸນັ້ນວ່າ ທ່ານ ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດປະວາຣະນາໄວ້ສຳລັບພິກຂຸທັງຫຼາຍຜູ້ບໍລິສຸດ ແລະພ້ອມພຽງກັນ ຖ້າວັດຖຸແລະບຸກຄົນຜາກົດ ທ່ານຈົ່ງຣະບຸວັດຖຸ ແລະບຸກຄົນນັ້ນດຽວນີ້ເທີ້ນ

ພິກຂຸທັງຫຼາຍ ຖ້າວັດຖຸຜາກົດກ່ອນປະວາຣະນາ ບຸກຄົນຜາກົດພາຍຫຼັງ ຄວນກ່າວຂຶ້ນຖ້າບຸກຄົນຜາກົດກ່ອນປະວາຣະນາ ວັດຖຸຜາກົດພາຍຫຼັງ ກໍຄວນກ່າວຂຶ້ນ

ຖ້າທັງວັດຖຸແລະບຸກຄົນຜາກົດກ່ອນປະວາຣະນາ ຖ້າເຮັດປະວາຣະນາສຳເລັດແລ້ວ ຮື້ຟື້ນເລື້ອງຂຶ້ນ ຕ້ອງອາບັດປາຈິດຕິຍ້ອນຮື້ຟື້ນເລື້ອງນັ້ນ

# ໑໘໔. ພັນທະນະກາຣະກະວັດຖຸ

## ວ່າດ້ວຍການກໍ່ຄວາມບາດໝາງ

[໔໘໐] ສະໄໝນັ້ນ ພິກຂຸຫຼາຍອົງເຄີຍເຫັນເຄີຍຄົບກັນມາ ເຂົ້າຈຳພັນສາໃນອາວາດແຫ່ງໜຶ່ງໃນແຄວ້ນໂກສົນ ພິກຂຸເຫຼົ່າອື່ນຜູ້ກໍ່ຄວາມບາດໝາງ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກະທຳຄວາມອື້ສາວ ກໍ່ອະທິກອນໃນສົງ ກໍເຂົ້າຈຳພັນສານາໃນທີ່ໃກ້ຽງກັບພິກຂຸເຫຼົ່ານັ້ນດ້ວຍປະສົງວ່າ "ໃນວັນປະວາຣະນາພວກເຮົາຈັກງົດປະວາຣະນາຂອງພວກພິກຂຸທີ່ເຂົ້າຈຳພັນສາເຫຼົ່ານັ້ນສາ"

ພິກຂຸເຫຼົ່ານັ້ນໄດ້ຮູ້ຂ່າວວ່າ "ພິກຂຸເຫຼົ່າອື່ນຜູ້ກໍ່ຄວາມບາດໝາງ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ຄວາມອື້ສາວ ກໍ່ອະທິກອນໃນສົງ ກໍເຂົ້າຈຳພັນສານາໃນທີ່ໃກ້ຄຽງກັບພິກຂຸເຫຼົ່ານັ້ນດ້ວຍປະສົງວ່າ ໃນວັນປະວາຣະນາພວກເຮົາຈັກງົດປະວາຣະນາຂອງພວກພິກຂຸທີ່ເຂົ້າຈຳພັນສາເຫຼົ່ານັ້ນສາ ດັ່ງນີ້ ພວກເຮົາຈະເພິ່ງປະຕິບັດແນວໃດນໍ" ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ພິກຂຸຫຼາຍອົງເຄີຍເຫັນເຄີຍຄົບກັນມາ ເຂົ້າຈຳພັນສາໃນອາວາດແຫ່ງໜຶ່ງ ພິກຂຸເຫຼົ່າອື່ນຜູ້ກໍ່ຄວາມບາດໝາງ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ຄວາມອື້ສາວ ກໍ່ອະທິກອນໃນສົງ ກໍເຂົ້າຈຳພັນສາໃນທີ່ໃກ້ຄຽງກັບພິກຂຸເຫຼົ່ານັ້ນດ້ວຍປະສົງວ່າ ໃນວັນປະວາຣະນາພວກເຮົາຈັກງົດປະວາຣະນາຂອງພວກພິກຂຸທີ່ເຂົ້າຈຳພັນສາເຫຼົ່ານັ້ນສາ ດັ່ງນີ້ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸເຫຼົ່ານັ້ນເຮັດ ໔ (ແລະ) ๓ ອຸໂປສົດ ໃຫ້ເປັນອຸໂປສົດວັນ ໑໔ ຄ່ຳ ດ້ວຍປະສົງວ່າ ເປັນຫຍັງ ພວກເຮົາເພິ່ງປະວາຣະນາກ່ອນພິກຂຸພວກນັ້ນ

ພິກຂຸທັງຫຼາຍ ຖ້າພິກຂຸຜູ້ກໍ່ຄວາມບາດໝາງ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ຄວາມອື້ສາວ ກໍ່ອະທິກອນໃນສົງພວກນັ້ນພາກັນມາສູ່ອາວາດນັ້ນ ພິກຂຸທີ່ຢູ່ໃນອາວາດ ເຫຼົ່ານັ້ນເພິ່ງຟ້າວປະຊຸມປະວາຣະນາກັນໂດຍໄວ ເມື່ອແລ້ວເພິ່ງບອກວ່າ ທ່ານທັງຫຼາຍ ພວກເຮົາປະວາຣະນາສຳເລັດແລ້ວ ທ່ານທັງຫຼາຍສຳຄັນແນວໃດ ຈົ່ງເຮັດແນວນັ້ນເທີ້ນ

ພິກຂຸທັງຫຼາຍ ຖ້າພິກຂຸຜູ້ກໍ່ຄວາມບາດໝາງ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ຄວາມອື້ສາວ ກໍ່ອະທິກອນໃນສົງ ພວກນັ້ນບໍ່ແຈ້ງໃຫ້ຮູ້ກ່ອນ ມາສູ່ອາວາດນັ້ນ ພິກຂຸທີ່ຢູ່ໃນອາວາດເຫຼົ່ານັ້ນເພິ່ງປູອາສະນະ ຈັດຫານ້ຳລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນໄວ້ ເພິ່ງລຸກຂຶ້ນຮັບບາດແລະຈີວອນ ຕ້ອນຮັບດ້ວຍນ້ຳດື່ມ ເຮັດພິກຂຸພວກນັ້ນໃຫ້ຕາຍໃຈແລ້ວໄປປະວາຣະນານອກສີມາ ເມື່ອແລ້ວເພິ່ງບອກວ່າ ທ່ານທັງຫຼາຍ ພວກເຮົາປະວາຣະນາສຳເລັດແລ້ວ ທ່ານທັງຫຼາຍສຳຄັນແນວໃດ ຈົ່ງເຮັດແນວນັ້ນເທີ້ນ ຖ້າໄດ້ແນວນັ້ນ ນັ້ນເປັນການດີ ຖ້າບໍ່ໄດ້ ພິກຂຸທີ່ຢູ່ໃນອາວາດຜູ້ສະຫຼາດສາມາດ ເພິ່ງປະກາດໃຫ້ພິກຂຸທີ່ຢູ່ໃນອາວາດທັງຫຼາຍຮູ້ ວ່າ

ຂໍພິກຂຸທີ່ຢູ່ໃນອາວາດທັງຫຼາຍ ຈົ່ງຟັງຂ້າພະເຈົ້າ ຖ້າທ່ານທັງຫຼາຍພ້ອມກັນແລ້ວ ບັດນີ້ພວກເຮົາເພິ່ງລົງອຸໂປສົດ ເພິ່ງຍົກປາຕິໂມກຂຶ້ນສະແດງ ເພິ່ງປະວາຣະນາໃນຄ່ຳທີ່ຈະມາເຖິງເທີ້ນ

ພິກຂຸທັງຫຼາຍ ຖ້າພິກຂຸຜູ້ກໍ່ຄວາມບາດໝາງ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ຄວາມອື້ສາວ ກໍ່ອະທິກອນໃນສົງນັ້ນ ຈະເພິ່ງກ່າວກັບພິກຂຸເຫຼົ່ານັ້ນວ່າ ດີແລ້ວ ທ່ານທັງຫຼາຍ ຂໍຈົ່ງປະວາຣະນາຕໍ່ພວກເຮົາໃນບັດນີ້ເທີ້ນ

ພິກຂຸເຫຼົ່ານັ້ນ ເພິ່ງຖືກວ່າກ່າວ ວ່າ ທ່ານທັງຫຼາຍ ພວກທ່ານບໍ່ເປັນໃຫຍ່ ໃນປະວາຣະນາຂອງພວກເຮົາ ພວກເຮົາຈະຍັງບໍ່ປະວາຣະນາ

ພິກຂຸທັງຫຼາຍ ຖ້າພິກຂຸຜູ້ກໍ່ຄວາມບາດໝາງ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ຄວາມອື້ສາວ ກໍ່ອະທິກອນໃນສົງພວກນັ້ນ ຈະເພິ່ງຢູ່ຈົນເຖິງຮອດຄໍ່າມື້ນັ້ນແລ້ວ ພິກຂຸທີ່ຢູ່ໃນອາວາດຜູ້ສະຫຼາດ ສາມາດເພິ່ງປະກາດໃຫ້ພິກຂຸທີ່ຢູ່ໃນອາວາດທັງຫຼາຍຮູ້ ວ່າ

ຂໍພິກຂຸທີ່ຢູ່ໃນອາວາດທັງຫຼາຍຈົ່ງຟັງຂ້າພະເຈົ້າ ຖ້າທ່ານທັງຫຼາຍພ້ອມກັນແລ້ວ ບັດນີ້ພວກເຮົາເພິ່ງລົງອຸໂປສົດ ເພິ່ງຍົກປາຕິໂມກຂຶ້ນສະແດງ ເພິ່ງປະວາຣະນາໃນຊຸນຫະປັກທີ່ຈະມາເຖິງເທີ້ນ

ພິກຂຸທັງຫຼາຍ ຖ້າພິກຂຸຜູ້ກໍ່ຄວາມບາດໝາງ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ຄວາມອື້ສາວ ກໍ່ອະທິກອນໃນສົງນັ້ນ ຈະເພິ່ງກ່າວກັບພິກຂຸເຫຼົ່ານັ້ນວ່າ ດີແລ້ວ ທ່ານທັງຫຼາຍ ຂໍຈົ່ງປະວາຣະນາຕໍ່ພວກເຮົາໃນບັດນີ້ເທີ້ນ

ພິກຂຸເຫຼົ່ານັ້ນ ເພິ່ງຖືກວ່າກ່າວວ່າ ທ່ານທັງຫຼາຍ ພວກທ່ານບໍ່ເປັນໃຫຍ່ໃນປະວາຣະນາຂອງພວກເຮົາ ພວກເຮົາຍັງບໍ່ປະວາຣະນາກ່ອນ

ພິກຂຸທັງຫຼາຍ ຖ້າພິກຂຸຜູ້ກໍ່ຄວາມບາດໝາງ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ຄວາມອື້ສາວ ກໍ່ອະທິກອນໃນສົງນັ້ນ ຈະເພິ່ງຢູ່ຈົນເຖິງຊຸນຫະປັກແມ່ນນັ້ນແລ້ວ ພິກຂຸເຫຼົ່ານັ້ນ ທັງໝົດບໍ່ປະສົງຈະປະວາຣະນາ ກໍຕ້ອງປະວາຣະນາໃນວັນເພັງເດືອນ ໑໘ ອັນເປັນວັນທີຄົບ ໔ ເດືອນທີ່ຈະມາເຖິງເທົ່ານັ້ນ

ພິກຂຸທັງຫຼາຍ ຖ້າພິກຂຸເຫຼົ່ານັ້ນ ກຳລັງປະວາຣະນາຢູ່ ພິກຂຸຜູ້ເປັນໄຂ້ງົດປະວາຣະນາຂອງພິກຂຸຜູ້ບໍ່ເປັນໄຂ້ ພິກຂຸນັ້ນເພິ່ງຖືກວ່າກ່າວວ່າ ທ່ານກຳລັງເປັນໄຂ້ ຜູ້ເປັນໄຂ້ພຣະຜູ້ມີພຣະພາກເຈົ້າຕັດວ່າບໍ່ອົດທົນໃນການຊັກຖາມ ທ່ານ ຂໍທ່ານຈົ່ງຖ້າຈົນກວ່າຈະຫາຍເປັນໄຂ້ ທ່ານຫາຍໄຂ້ແລ້ວ ເມື່ອຕ້ອງການຈຶ່ງຄ່ອຍໂຈດ ດັ່ງນີ້ ຖ້າພິກຂຸນັ້ນຖືກວ່າກ່າວແນວນີ້ ຍັງຂືນໂຈດຕ້ອງອາບັດປາຈິດຕີ ຍ້ອນບໍ່ເອື້ອເຟື້ອ

ພິກຂຸທັງຫຼາຍ ຖ້າພິກຂຸເຫຼົ່ານັ້ນ ກຳລັງປະວາຣະນາຢູ່ ພິກຂຸຜູ້ບໍ່ເປັນໄຂ້ງົດປະວາຣະນາຂອງພິກຂຸຜູ້ເປັນໄຂ້ ພິກຂຸນັ້ນ ເພິ່ງຖືກວ່າກ່າວວ່າ ທ່ານ ພິກຂຸນີ້ກຳລັງເປັນໄຂ້ ອັນຜູ້ເປັນໄຂ້ພຣະຜູ້ມີພຣະພາກເຈົ້າຕັດວ່າ ບໍ່ອົດທົນໃນການຊັກຖາມ ທ່ານ ຂໍທ່ານຈົ່ງຖ້າຈົນກວ່າພິກຂຸນີ້ຈະຫາຍເປັນໄຂ້ ທ່ານຕ້ອງການຈຶ່ງຄ່ອຍໂຈດພິກຂຸຜູ້ຫາຍໄຂ້ແລ້ວນັ້ນ ດັ່ງນີ້ ຖ້າພິກຂຸນັ້ນຖືກວ່າກ່າວແນວນີ້ ຍັງຂືນໂຈດ ຕ້ອງອາບັດປາຈິດຕີ ຍ້ອນບໍ່ເອື້ອເຟື້ອ

ພິກຂຸທັງຫຼາຍ ຖ້າພິກຂຸເຫຼົ່ານັ້ນ ກຳລັງປະວາຣະນາຢູ່ ພິກຂຸຜູ້ເປັນໄຂ້ງົດປະວາຣະນາຂອງພິກຂຸຜູ້ເປັນໄຂ້ ພິກຂຸຜູ້ເປັນໄຂ້ນັ້ນຖືກວ່າກ່າວວ່າ ພວກທ່ານກຳລັງເປັນໄຂ້ ພິກຂຸຜູ້ເປັນໄຂ້ພຣະຜູ້ມີພຣະພາກເຈົ້າຕັດວ່າ ບໍ່ອົດທົນໃນການຊັກຖາມ ທ່ານ ຂໍທ່ານຈົ່ງຖ້າຈົນກວ່າພວກທ່ານຈະຫາຍເປັນໄຂ້ ທ່ານຫາຍໄຂ້ແລ້ວ ເມື່ອຕ້ອງການຈຶ່ງຄ່ອຍໂຈດພິກຂຸນັ້ນຜູ້ຫາຍໄຂ້ແລ້ວ ດັ່ງນີ້ ຖ້າພິກຂຸຜູ້ເປັນໄຂ້ນັ້ນຖືກວ່າກ່າວແບບນີ້ ຍັງຂືນໂຈດ ຕ້ອງອາບັດປາຈິດຕິ ຍ້ອນບໍ່ເອື້ອເຟື້ອ

ພິກຂຸທັງຫຼາຍ ຖ້າພິກຂຸເຫຼົ່ານັ້ນ ກຳລັງປະວາຣະນາຢູ່ ພິກຂຸຜູ້ບໍ່ເປັນໄຂ້ງົດປະວາຣະນາຂອງພິກຂຸຜູ້ບໍ່ເປັນໄຂ້ ສົງເພິ່ງສອບສວນສືບສວນທັງ ໔ ຝ່າຍແລ້ວປັບອາບັດ ຕາມທຳປະວາຣະນາເທີ້ນ

## ໑໔໕. ປະວາຣະນາສັງຄະຫະ

### ວ່າດ້ວຍການສົງເຄາະກັນດ້ວຍປະວາຣະນາ

[໔໔໑] ສະໄໝນັ້ນ ພິກຂຸຫຼາຍອົງຜູ້ເຄີຍເຫັນເຄີຍຄົບກັນມາ ເຂົ້າຈຳພັນສາໃນອາວາດແຫ່ງໜຶ່ງໃນແຄວັ້ນໂກສົນ ເມື່ອພິກຂຸເຫຼົ່ານັ້ນພ້ອມພຽງຮ່ວມໃຈກັນບໍ່ຜິດຖຽງກັນຢູ່ ຍ່ອມບັນລຸຜາສຸວິຫາຣະທຳແນວໃດແນວໜຶ່ງ ຕໍ່ມາ ໄດ້ມີການສົນທະນາດັ່ງນີ້ວ່າ ເມື່ອພວກເຮົາພ້ອມພຽງຮ່ວມໃຈກັນ ບໍ່ຜິດຖຽງກັນຢູ່ ໄດ້ບັນລຸຜາສຸວິຫາຣະທຳແນວໃດແນວໜຶ່ງແລ້ວ ຖ້າພວກເຮົາຈັກປະວາຣະນາໃນບັດນີ້ ບາງເທື່ອພິກຂຸທັງຫຼາຍປະວາຣະນາແລ້ວ ຈະເພິ່ງຫຼີກໄປສູ່ທີ່ຈາຣິກ ເມື່ອເປັນແນວນີ້ ພວກເຮົາກໍຈັກເປັນຜູ້ເຫີນຫ່າງຜາສຸວິຫາຣະທຳນີ້ ພວກເຮົາຈະເພິ່ງປະຕິບັດແນວໃດນໍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

### ຊົງອະນຸຍາດໃຫ້ສົງເຄາະກັນດ້ວຍປະວາຣະນາ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ພິກຂຸຫຼາຍອົງເຄີຍເຫັນເຄີຍຄົບກັນມາ ເຂົ້າຈຳພັນສາໃນອາວາດແຫ່ງໜຶ່ງ ເມື່ອພິກຂຸເຫຼົ່ານັ້ນພ້ອມພຽງຮ່ວມໃຈກັນບໍ່ຜິດຖຽງກັນຢູ່ ຍ່ອມບັນລຸຜາສຸວິຫາຣະທຳແນວໃດແນວໜຶ່ງ ຖ້າພິກຂຸທັງຫຼາຍໃນທີ່ນັ້ນ ສົນທະນາກັນວ່າ ເມື່ອພວກເຮົາພ້ອມພຽງຮ່ວມໃຈກັນບໍ່ຜິດຖຽງກັນຢູ່ ໄດ້ບັນລຸຜາສຸວິຫາຣະທຳແນວໃດແນວໜຶ່ງແລ້ວ ຖ້າພວກເຮົາຈັກປະວາຣະນາໃນບັດນີ້ ບາງເທື່ອພິກຂຸທັງຫຼາຍປະວາຣະນາແລ້ວ ຈະເພິ່ງຫຼີກໄປສູ່ທີ່ຈາຣິກ ຈະມີແດ່ ເມື່ອເປັນແນວນີ້ ພວກເຮົາກໍຈັກເປັນຜູ້ເຫີນຫ່າງຜາສຸວິຫາຣະທຳນີ້ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸເຫຼົ່ານັ້ນ ທຳການສົງເຄາະກັນດ້ວຍປະວາຣະນາ

### ວິທີສົງເຄາະກັນດ້ວຍປະວາຣະນາແລະກຳມະວາຈາສົງເຄາະກັນດ້ວຍປະວາຣະນາ

ພິກຂຸທັງຫຼາຍ ກໍແລ ເພິ່ງທຳການສົງເຄາະກັນປະວາຣະນາແບບນີ້

ພິກຂຸທຸກອົງຕ້ອງປະຊຸມໃນທີ່ດຽວກັນ ເມື່ອແລ້ວພິກຂຸຜູ້ສະຫຼາດ ຜູ້ສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາ ວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ເມື່ອພິກຂຸເຫຼົ່ານັ້ນ ພ້ອມພຽງຮ່ວມໃຈກັນບໍ່ຜິດຖຽງກັນຢູ່ ໄດ້ບັນລຸຜາສຸວິຫາຣະທຳແນວໃດແນວໜຶ່ງແລ້ວ ຖ້າພວກເຮົາຈັກປະວາຣະນາໃນບັດນີ້ ບາງເທື່ອພິກຂຸທັງຫຼາຍປະວາຣະນາແລ້ວ ຈະເພິ່ງຫຼີກໄປສູ່ທີ່ຈາຣິກ ຈະມີແດ່ ເມື່ອເປັນແນວນີ້ ພວກເຮົາກໍຈັກເປັນຜູ້ເຫີນຫ່າງຜາສຸວິຫາຣະທຳນີ້ ຖ້າສົງພ້ອມກັນແລ້ວ ສົງເພິ່ງກະທຳການສົງເຄາະກັນດ້ວຍປະວາຣະນາ ບັດນີ້ສົງເພິ່ງລົງອຸໂປສົດ ເພິ່ງຍົກປາຕິໂມກຂຶ້ນສະແດງ ເພິ່ງປະວາຣະນາໃນວັນເພັງເດືອນ ໑໔ ອັນເປັນວັນທີ່ຄົບ ໔ ເດືອນ ທີ່ຈະມາເຖິງເທີ້ນ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ເມື່ອພິກຂຸເຫຼົ່ານັ້ນພ້ອມພຽງຮ່ວມໃຈກັນບໍ່ຜິດຖຽງກັນຢູ່ ຍ່ອມບັນລຸຜາສຸວິຫາຣະທຳແນວໃດແນວໜຶ່ງແລ້ວ ຖ້າພວກເຮົາຈັກປະວາຣະນາໃນບັດນີ້ ບາງເທື່ອພິກຂຸທັງຫຼາຍປະວາຣະນາແລ້ວ ຈະເພິ່ງຫຼີກໄປສູ່ທີ່ຈາຣິກ ຈະມີແດ່ ເມື່ອເປັນແນວນີ້ ພວກເຮົາກໍຈັກເປັນຜູ້ເຫີນຫ່າງຜາສຸວິຫາຣະທຳນີ້ ຖ້າສົງພ້ອມກັນແລ້ວ ສົງເພິ່ງກະທຳການສົງເຄາະກັນດ້ວຍປະວາຣະນາ ບັດນີ້ສົງຈັກລົງອຸໂປສົດ ຈັກຍົກປາຕິໂມກຂຶ້ນສະແດງ ຈັກປະວາຣະນາໃນວັນເພັງເດືອນ ໑໔ ອັນເປັນວັນທີ່ຄົບ ໔ ເດືອນ ທີ່ຈະມາເຖິງ ທ່ານອົງໃດເຫັນດ້ວຍກັບການສົງເຄາະກັນດ້ວຍປະວາຣະນາ ບັດນີ້ສົງຈັກລົງອຸໂປສົດ ຈັກຍົກຂຶ້ນສະແດງປາຕິໂມກ ຈັກປະວາຣະນາໃນວັນເພັງເດືອນ ໑໔ ອັນເປັນວັນທີ່ຄົບ ໔ ເດືອນ ທີ່ຈະມາເຖິງ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ການເລື່ອນປະວາຣະນາສົງໄດ້ເຮັດແລ້ວ ບັດນີ້ສົງຈັກລົງອຸໂປສົດ ຈັກຍົກປາຕິໂມກຂຶ້ນສະແດງ ຈັກປະວາຣະນາໃນວັນເພັງເດືອນ ໑໔ ອັນເປັນວັນທີ່ຄົບ ໔ ເດືອນ ທີ່ຈະມາເຖິງ ສົງເຫັນດ້ວຍ ເຫດນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

## ເລື້ອງບໍ່ມີໃຜເປັນໃຫຍ່ໃນປະວາຣະນາ

ພິກຂຸທັງຫຼາຍ ເມື່ອພິກຂຸເຫຼົ່ານັ້ນ ທຳການສົງເຄາະກັນດ້ວຍປະວາຣະນາແລ້ວ ຖ້າມີພິກຂຸຈັກອົງໜຶ່ງກ່າວວ່າ ທ່ານທັງຫຼາຍ ເຮົາປາຖະໜາຈະຫຼີກຈາຣິກໄປສູ່ຊົນນະບົດ ຍ້ອນເຮົາມີທຸລະໃນຊົນນະບົດ

ພິກຂຸທັງຫຼາຍ ເພິ່ງກ່າວກັບພິກຂຸນັ້ນວ່າ ດີແລ້ວ ທ່ານ ທ່ານຈົ່ງປາຖະໜາແລ້ວໄປເທີ້ນ

ພິກຂຸທັງຫຼາຍ ຖ້າພິກຂຸນັ້ນ ປະວາຣະນາຢູ່ ງົດປະວາຣະນາຂອງພິກຂຸອົງໜຶ່ງສາ ພິກຂຸຜູ້ຖືກງົດປະວາຣະນາເພິ່ງກ່າວກັບພິກຂຸຜູ້ງົດປະວາຣະນາວ່າ "ທ່ານ ທ່ານບໍ່ເປັນໃຫຍ່ໃນປະວາຣະນາຂອງເຮົາ ເຮົາຈະຍັງບໍ່ປະວາຣະນາກ່ອນ"

ພິກຂຸທັງຫຼາຍ ຖ້າເມື່ອພິກຂຸນັ້ນປະວາຣະນາຢູ່ ພິກຂຸອົງໜຶ່ງງົດປະວາຣະນາຂອງພິກຂຸນັ້ນສາ ສົງເພິ່ງສອບສວນສືບສວນທັງ ໔ ຝ່າຍແລ້ວ ປັບອາບັດຕາມທຳ

ພິກຂຸທັງຫຼາຍ ຖ້າພິກຂຸນັ້ນ ເຮັດທຸລະຈຳເປັນໃນຊົນນະບົດສຳເລັດແລ້ວ ກັບມາສູ່ອາວາດນັ້ນ ອີກພາຍໃນວັນເພັງເດືອນ ໑໔ ອັນເປັນວັນທີ່ຄົບ ໔ ເດືອນ ຖ້າເມື່ອພິກຂຸເຫຼົ່ານັ້ນປະວາຣະນາຢູ່ ພິກຂຸອົງໜຶ່ງງົດປະວາຣະນາຂອງພິກຂຸນັ້ນສາ ພິກຂຸຜູ້ຖືກຫ້າມປະວາຣະນາເພິ່ງກ່າວກັບພິກຂຸຜູ້ງົດປະວາຣະນາວ່າ "ທ່ານ ທ່ານບໍ່ເປັນໃຫຍ່ໃນປະວາຣະນາຂອງເຮົາ ຍ້ອນເຮົາປະວາຣະນາສຳເລັດແລ້ວ"

ພິກຂຸທັງຫຼາຍ ຖ້າເມື່ອພິກຂຸເຫຼົ່ານັ້ນປະວາຣະນາຢູ່ ພິກຂຸນັ້ນງົດປະວາຣະນາຂອງພິກຂຸອົງໜຶ່ງ ສົງເພິ່ງສອບສວນສືບສວນທັງ ໔ ຝ່າຍແລ້ວ ປັບອາບັດຕາມທຳປະວາຣະນາເທີ້ນ

**ປະວາຣະນາຂັນທະກະທີ ໔ ຈົບ**

# ໑໔໖. ລວມເລື້ອງທີ່ມີໃນປະວາຣະນາຂັນທະກະ

## ປະວາຣະນາຂັນທະກະ ມີ ໔໖ ເລື້ອງ ຄື

ເລື້ອງພິກຂຸຫຼາຍອົງ ເຂົ້າຈຳພັນສາໃນແຄວັນໂກສົນມາເຝົ້າພຣະສາດສະດາ
ເລື້ອງເຂົ້າພັນສາບໍ່ຜາສຸກດັ່ງປະສຸສັດຢູ່ຮ່ວມກັນ ເລື້ອງຊົງອະນຸຍາດ
ພິທີປະວາຣະນາເພື່ອວ່າກ່າວເຊິ່ງກັນແລະກັນ

ເລື້ອງພຣະສັບພັກຄີນັ່ງຣາບເທິງອາສະນະປະວາຣະນາ
ເລື້ອງວັນປະວາຣະນາມີ ໒ ວັນ ເລື້ອງອາການທີ່ເຮັດປະວາຣະນາມີ ໔ ຢ່າງ
ເລື້ອງພິກຂຸເປັນໄຂ້ມອບປະວາຣະນາ ເລື້ອງພິກຂຸຖືກພວກຍາດຈັບໄວ້
ເລື້ອງພິກຂຸຖືກພຣະຣາຊາ ພວກໂຈນ ພວກນັກເລງ ພວກພິກຂຸຜູ້ເປັນ
ຂ້າສຶກຈັບໄວ້

ເລື້ອງພິກຂຸ ໕ ອົງ ປະວາຣະນາເປັນການສົງ ເລື້ອງພິກຂຸ ໔ ອົງ
ປະວາຣະນາເປັນການຄະນະ ເລື້ອງພິກຂຸ ໓ ອົງ ປະວາຣະນາເປັນການຄະນະ
ເລື້ອງພິກຂຸ ໒ ອົງ ປະວາຣະນາຕໍ່ກັນ ເລື້ອງພິກຂຸອົງດຽວ
ເຮັດອະທິຖານປະວາຣະນາ ເລື້ອງພິກຂຸຕ້ອງອາບັດໃນວັນປະວາຣະນາ
ເລື້ອງພິກຂຸບໍ່ແນ່ໃຈໃນອາບັດ ເລື້ອງພິກຂຸຣະນຶກອາບັດໄດ້

ເລື້ອງສິ່ງທັງໝົດຕ້ອງສະພາຄາບັດ ເລື້ອງສິ່ງທັງໝົດບໍ່ແນ່ໃຈສະພາຄາບັດ
ເລື້ອງພິກຂຸທີ່ຢູ່ໃນອາວາດພວກອື່ນມາຫຼາຍກວ່າມາເທົ່າກັນມານ້ອຍກວ່າ

ເລື້ອງວັນປະວາຣະນາຂອງພິກຂຸທີ່ຢູ່ໃນອາວາດເປັນ ໑໔ ຄ່ຳ
ເລື້ອງລັກສະນະຂອງພິກຂຸທີ່ຢູ່ໃນອາວາດ
ເລື້ອງພິກຂຸ ໔ ສັງວາດປະວາຣະນາ ວ່າດ້ວຍບໍ່ຄວນໄປໄສໃນວັນປະວາຣະນາ
ເລື້ອງບໍ່ເພິ່ງປະວາຣະນາໃນບໍລິສັດທີ່ມີພິກຂຸນີນັ່ງຢູ່ດ້ວຍ ເລື້ອງໃຫ້ສັນທະ
ເລື້ອງຫ້າມປະວາຣະນາໃນວັນບໍ່ແມ່ນວັນປະວາຣະນາ

ເລື້ອງຊາວດົງ ເລື້ອງປະວາຣະນາເມື່ອຣາຕີໃກ້ສະຫວ່າງ
ເລື້ອງປະວາຣະນາຂະນະທີ່ຝົນຕັ້ງເຄົ້າ
ເລື້ອງປະວາຣະນາເມື່ອມີອັນຕະລາຍ ໑໐ ຢ່າງ ຢ່າງໃດຢ່າງໜຶ່ງ
ເລື້ອງພຣະສັບພັກຄີມີອາບັດຕິດໂຕປະວາຣະນາ
ເລື້ອງບໍ່ຍອມໃຫ້ໂອກາດ ເລື້ອງພຣະສັບພັກຄີງົດປະວາຣະນາຂອງພິກຂຸຜູ້ບໍລິສຸດ
ເລື້ອງປະວາຣະນາທີ່ບໍ່ເປັນອັນງົດ

ເລື້ອງເຫດຜົນໃນການງົດປະວາຣະນາ ຄື
(໑) ງົດປະວາຣະນາຍ້ອນເຫດໃດ (໔) ງົດປະວາຣະນາຍ້ອນເລື້ອງອັນໃດ
(໓) ງົດປະວາຣະນາດ້ວຍໄດ້ເຫັນ ດ້ວຍໄດ້ຍິນ ຫຼື ດ້ວຍສົງໄສ
ເລື້ອງຕ້ອງອາບັດຖຸນລັດໄຈເປັນຕົ້ນ ເລື້ອງວັດຖຸແລະບຸກຄົນຜາກົດ
ເລື້ອງການກໍ່ຄວາມບາດໝາງ ເລື້ອງການສົງເຄາະກັນດ້ວຍປະວາຣະນາ
ເລື້ອງບໍ່ມີໃຜເປັນໃຫຍ່ໃນປະວາຣະນາ

**ປະວາຣະນາຂັນທະກະ ຈົບ**